# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔໘

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໘

### ອັງຄຸດຕະຣະນິກາຍ ປັນຈະກະນິບາດ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໘ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໘ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

## ໒. ທຸຕິຍະປັນນາດ

# ພຣະໄຕຣປິດົກ

## ເຫຼັ້ມທີ ໔໔

# ພຣະສຸດຕັນຕະປິດົກ

## ເຫຼັ້ມທີ ໑໔

## ອັງຄຸດຕະຣະນິກາຍ ປັນຈະກະນິບາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ**

# ໑. ປະຖົມປັນນາດ

## ໑. ເສຂະພະລະວັກ

**ໝວດວ່າດ້ວຍເສຂະພະລະ**

### ໑. ສັງຂິດຕະສູດ

**ວ່າດ້ວຍເສຂະພະລະໂດຍຫຍໍ້**

[໑] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາ ຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ເສຂະພະລະ ໕ ປະການ

ເສຂະພະລະ ໕ ປະການ ອັນໃດແດ່ ຄື

໑. ສັດທາພະລະ (ກຳລັງຄືສັດທາ)
໒. ຫິຣິພະລະ (ກຳລັງຄືຫິຣິ)
໓. ໂອດຕັບປະພະລະ (ກຳລັງຄືໂອດຕັບປະ)
໔. ວິຣິຍະພະລະ (ກຳລັງຄືວິຣິຍະ)
໕. ປັນຍາພະລະ (ກຳລັງຄືປັນຍາ)

ພິກຂຸທັງຫຼາຍ ເສຂະພະລະ ໕ ປະການນີ້ແລ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກເປັນຜູ້ປະກອບດ້ວຍ ສັດທາພະລະ ຫິຣິພະລະ ໂອດຕັບປະພະລະ ວິຣິຍະພະລະ ແລະປັນຍາພະລະ ອັນເປັນເສຂະພະລະ ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນພາສິດຂອງພຣະຜູ້ມີພຣະພາກເຈົ້າ

**ສັງຂິດຕະສູດທີ ໑ ຈົບ**

## ໒. ວິດຖະຕະສູດ

## ວ່າດ້ວຍເສຂະພະລະໂດຍພິດສະດານ

[໒] ພິກຂຸທັງຫຼາຍ ເສຂະພະລະ ໕ ປະການນີ້

ເສຂະພະລະ ໕ ປະການ ອັນໃດແດ່ ຄື

໑. ສັດທາພະລະ ໒. ຫິຣິພະລະ
໓. ໂອດຕັບປະພະລະ ໔. ວິຣິຍະພະລະ
໕. ປັນຍາພະລະ

ສັດທາພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີສັດທາ ຄືເຊື່ອປັນຍາເຄື່ອງຕັດສະຮູ້ຂອງ ຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ນີ້ຮຽກວ່າ ສັດທາພະລະ

ຫິຣິພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີຫິຣິ ຄືລະອາຍຕໍ່ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ລະອາຍຕໍ່ການປະກອບບາບອະກຸສົນທຳທັງຫຼາຍ ນີ້ຮຽກວ່າ ຫິຣິພະລະ

ໂອດຕັບປະພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີໂອດຕັບປະ ຄືສະດຸ້ງຢ້ານຕໍ່ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ສະດຸ້ງຢ້ານຕໍ່ການປະກອບບາບອະກຸສົນທຳທັງຫຼາຍ ນີ້ຮຽກວ່າ ໂອດຕັບປະພະລະ

ວິຣິຍະພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຢູ່ຜາຣົບຄວາມພຽນ[១] ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ[២] ມີຄວາມບາກບັ່ນໝັ້ນຄົງ ບໍ່ຖິ້ມເບົາໃນກຸສົນທຳທັງຫຼາຍຢູ່ ນີ້ຮຽກວ່າ ວິຣິຍະພະລະ

ປັນຍາພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີປັນຍາ ຄືປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ[៣] ທຳລາຍກິເລດໃຫ້ເຖິງຄວາມສິ້ນທຸກ ໂດຍຖືກຕ້ອງ ນີ້ຮຽກວ່າ ປັນຍາພະລະ

ພິກຂຸທັງຫຼາຍ ເສຂະພະລະ ៥ ປະການນີ້ແລ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກເປັນຜູ້ປະກອບດ້ວຍສັດທາພະລະ ຫິຣິພະລະ ໂອດຕັບປະພະລະ ວິຣິຍະພະລະ ແລະປັນຍາພະລະ ອັນເປັນເສຂະພະລະ

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ວິດຖະຕະສູດທີ ៨ ຈົບ**

## ៣. ທຸກຂະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ຢູ່ເປັນທຸກ

[៣] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ៥ ປະການ ຍ່ອມຢູ່ເປັນທຸກ ເດືອດຮ້ອນ[១] ຄັບແຄ້ນໃຈ ຮ້ອນຮົນ[២]ໃນພົບນີ້ແລ ຫຼັງຈາກຕາຍແລ້ວເພິ່ງຫວັງໄດ້ທຸກຄະຕິ[៣]

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ບໍ່ມີໂອດຕັບປະ
໕. ເປັນຜູ້ມີປັນຍາຊາມ
໓. ເປັນຜູ້ບໍ່ມີຫິຣິ
໔. ເປັນຜູ້ຂີ້ຄ້ານ

ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມຢູ່ເປັນທຸກ ເດືອດຮ້ອນ ຄັບແຄ້ນໃຈ ຮ້ອນຮົນໃນພົບນີ້ແລ ຫຼັງຈາກຕາຍແລ້ວເພິ່ງຫວັງໄດ້ທຸກຄະຕິ

ສ່ວນພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມຢູ່ເປັນສຸກ ບໍ່ເດືອດຮ້ອນ ບໍ່ຄັບແຄ້ນໃຈ ບໍ່ຮ້ອນຮົນໃນພົບນີ້ແລ ຫຼັງຈາກຕາຍແລ້ວເພິ່ງຫວັງໄດ້ສຸກຄະຕິ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີໂອດຕັບປະ
໕. ເປັນຜູ້ມີປັນຍາ
໓. ເປັນຜູ້ມີຫິຣິ
໔. ເປັນຜູ້ຜາຣົບຄວາມພຽນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມຢູ່ເປັນສຸກ ບໍ່ເດືອດຮ້ອນ ບໍ່ຄັບແຄ້ນໃຈ ບໍ່ຮ້ອນຮົນໃນພົບນີ້ແລ ຫຼັງຈາກຕາຍແລ້ວເພິ່ງຫວັງໄດ້ສຸກຄະຕິ

**ທຸກຂະສູດທີ ໒ ຈົບ**

## ໔. ຍະຖາພະຕະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ເກີດໃນນະຮົກຄືຖືກນຳໄປຝັງໄວ້

[໔] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ບໍ່ມີໂອດຕັບປະ
໓. ເປັນຜູ້ບໍ່ມີຫິຣິ
໔. ເປັນຜູ້ຂີ້ຄ້ານ
໕. ເປັນຜູ້ມີປັນຍາຊາມ

ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກຄືຖືກນຳໄປຝັງໄວ້

ສ່ວນພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີໂອດຕັບປະ
໓. ເປັນຜູ້ມີຫິຣິ
໔. ເປັນຜູ້ພາຣົບຄວາມພຽນ
໕. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ຍະຖາພະຕະສູດທີ ໔ ຈົບ**

# ໕. ສິກຂາສູດ

## ວ່າດ້ວຍການລາສິກຂາທີ່ເປັນເຫດໃຫ້ໄດ້ຮັບຖານະທີ່ໜ້າຕິຽນ

[໕] ພິກຂຸທັງຫຼາຍ ຖານະ[1] ໕ ປະການ ພ້ອມທັງເຫດຄວນຕາມວາທະບໍ່ຊອບທຳທີ່ໜ້າຕິຽນໃນປັດຈຸບັນ ຍ່ອມມາເຖິງພິກຂຸຫຼືພິກຂຸນີ ລາງອົງຜູ້ບອກຄືນສິກຂາ ກັບມາເປັນຄະລືຫັດ

ຖານະ ໕ ປະການ ອັນໃດແດ່ ຄື

໑. ບໍ່ມີສັດທາໃນກຸສົນທຳ
໒. ບໍ່ມີໂອດຕັບປະໃນກຸສົນທຳ
໓. ບໍ່ມີຫິຣິໃນກຸສົນທຳ
໔. ບໍ່ມີວິຣິຍະໃນກຸສົນທຳ
໕. ບໍ່ມີປັນຍາໃນກຸສົນທຳ

ພິກຂຸທັງຫຼາຍ ຖານະ ໕ ປະການ ພ້ອມທັງເຫດຄວນຕາມວາທະບໍ່ຊອບທຳທີ່ໜ້າຕິຽນໃນປັດຈຸບັນ ຍ່ອມມາເຖິງພິກຂຸຫຼື ພິກຂຸນີ ລາງອົງຜູ້ບອກຄືນສິກຂາກັບມາເປັນຄະລືຫັດ

ຖານະ ໕ ປະການ ພ້ອມທັງເຫດທີ່ໜ້າສັນເສີນໃນປັດຈຸບັນ ຍ່ອມມາເຖິງພິກຂຸຫຼືພິກຂຸນີລາງອົງ ແມ່ນມີທຸກ (ຄວາມທຸກກາຍ) ແມ່ນມີໂທມະນັດ (ຄວາມທຸກໃຈ) ຮ້ອງໄຫ້ນ້ຳຕານອງໜ້າຢູ່ ກໍຍັງປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນໄດ້

ຖານະ ໕ ປະການ ອັນໃດແດ່ ຄື

໑. ມີສັດທາໃນກຸສົນທຳ
໒. ມີຫິຣິໃນກຸສົນທຳ
໓. ມີໂອດຕັບປະໃນກຸສົນທຳ
໔. ມີວິຣິຍະໃນກຸສົນທຳ
໕. ມີປັນຍາໃນກຸສົນທຳ

ພິກຂຸທັງຫຼາຍ ຖານະ ໕ ປະການ ພ້ອມທັງເຫດທີ່ໜ້າສັນເສີນໃນປັດຈຸບັນ ຍ່ອມມາເຖິງພິກຂຸຫຼືພິກຂຸນີລາງອົງ ແມ່ນມີທຸກ ແມ່ນມີໂທມະນັດ ຮ້ອງໄຫ້ນ້ຳຕານອງໜ້າຢູ່ ກໍຍັງປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນໄດ້

**ສິກຂາສູດທີ ໕ ຈົບ**

## ໓. ສະມາປັດຕິສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ອະກຸສົນທຳເຂົ້າມາໄດ້

[໓] ພິກຂຸທັງຫຼາຍ

໑. ອະກຸສົນທຳເຂົ້າມາບໍ່ໄດ້ຕະຫຼອດເວລາທີ່ສັດທາໃນກຸສົນທຳທັງຫຼາຍຍັງຕັ້ງໝັ້ນຢູ່ ແຕ່ເມື່ອໃດ ສັດທາເສື່ອມຫາຍໄປ ຄວາມບໍ່ມີສັດທາ ກຸ້ມລຸມຢູ່ ເມື່ອນັ້ນ ອະກຸສົນທຳກໍເຂົ້າມາໄດ້
໒. ອະກຸສົນທຳເຂົ້າມາບໍ່ໄດ້ຕະຫຼອດເວລາທີ່ຫິຣິໃນກຸສົນທຳທັງຫຼາຍຍັງຕັ້ງໝັ້ນຢູ່ ແຕ່ເມື່ອໃດ ຫິຣິເສື່ອມຫາຍໄປ ຄວາມບໍ່ມີຫິຣິກຸ້ມລຸມຢູ່ ເມື່ອນັ້ນ ອະກຸສົນທຳກໍເຂົ້າມາໄດ້
໓. ອະກຸສົນທຳເຂົ້າມາບໍ່ໄດ້ຕະຫຼອດເວລາທີ່ໂອດຕັບປະໃນກຸສົນທຳທັງຫຼາຍຍັງຕັ້ງໝັ້ນຢູ່ ແຕ່ເມື່ອໃດ ໂອດຕັບປະເສື່ອມຫາຍໄປ ຄວາມບໍ່ມີໂອດຕັບປະກຸ້ມລຸມຢູ່ ເມື່ອນັ້ນ ອະກຸສົນທຳກໍເຂົ້າມາໄດ້
໔. ອະກຸສົນທຳເຂົ້າມາບໍ່ໄດ້ຕະຫຼອດເວລາທີ່ວິຣິຍະໃນກຸສົນທຳທັງຫຼາຍຍັງຕັ້ງໝັ້ນຢູ່ ແຕ່ເມື່ອໃດ ວິຣິຍະເສື່ອມຫາຍໄປ ຄວາມຂີ້ຄ້ານກຸ້ມລຸມຢູ່ ເມື່ອນັ້ນ ອະກຸສົນທຳກໍເຂົ້າມາໄດ້

໕. ອະກຸສົນທຳເຂົ້າມາບໍ່ໄດ້ຕະຫຼອດເວລາທີ່ປັນຍາໃນກຸສົນທຳທັງຫຼາຍຍັງຕັ້ງໝັ້ນຢູ່ ແຕ່ເມື່ອໃດ ປັນຍາເສື່ອມຫາຍໄປ ຄວາມບໍ່ມີປັນຍາກຸ້ມລຸມຢູ່ ເມື່ອນັ້ນອະກຸສົນທຳກໍເຂົ້າມາໄດ້

**ສະມາປັດຕິສູດທີ ໖ ຈົບ**

## ໗. ກາມະສູດ

## ວ່າດ້ວຍກາມ

[໗] ພິກຂຸທັງຫຼາຍ ສ່ວນຫຼາຍ ສັດທັງຫຼາຍໝົກມຸ້ນຢູ່ໃນກາມ[໑] ກຸນລະບຸດຜູ້ລະກ່ຽວແລະໄມ້ຄານຫາບຫຍ້າອອກບວດເປັນບັນພະຊິດ ຄວນຮຽກວ່າ "ກຸນລະບຸດຜູ້ມີສັດທາ ອອກບວດ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຂົາຄວນໄດ້ກາມດ້ວຍຄວາມເປັນໜຸ່ມ ແລະກາມເຫຼົ່ານັ້ນກໍມີລະດັບ ຄືກາມຊົ່ວ ກາມປານກາງ ແລະກາມປະນີດ[໒] ແຕ່ກາມທັງໝົດກໍນັບວ່າ "ກາມ ທັ້ງຫຼາຍ

ປຽບຄື ເດັກອ່ອນນອນຫງາຍ ເອົາຕ່ອນໄມ້ຫຼືຕ່ອນກະເບື້ອງໃສ່ເຂົ້າໄປໃນປາກຍ້ອນຄວາມຜິດເຜີຂອງເອື້ອຍລ້ຽງ ເອື້ອຍລ້ຽງເພິ່ງໃສ່ໃຈໃນເດັກນັ້ນທັນທີ ຟ້າວນຳຕ່ອນໄມ້ຫຼື ຕ່ອນກະເບື້ອງອອກໂດຍໄວ ຖ້າບໍ່ສາມາດນຳອອກໂດຍໄວໄດ້ ກໍເອົາມືຊ້າຍຈັບໂດຍໄວ ງໍນິ້ວມືຂ້າງຂວາແລ້ວແຍ່ເຂົ້າໄປນຳອອກມາທັງທີ່ຍັງມີໂລຫິດ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຄວາມລຳບາກນັ້ນຈະມີແກ່ເດັກ ເຮົາບໍ່ກ່າວວ່າ "ບໍ່ມີຄວາມລຳບາກ ແລະເອື້ອຍລ້ຽງຜູ້ຫວັງປະໂຫຍດເກື້ອກູນອະນຸເຄາະ ເພິ່ງເຮັດແນວນັ້ນດ້ວຍຄວາມອະນຸເຄາະ ແຕ່ເມື່ອໃດ ເດັກນັ້ນ ຈະເລີນໄວ ມີປັນຍາສາມາດ ເມື່ອນັ້ນ ເອື້ອຍລ້ຽງກໍວາງໃຈໃນເດັກນັ້ນວ່າ "ບັດນີ້ ເດັກມີຄວາມສາມາດຮັກສາຕົນເອງໄດ້ ບໍ່ຜະໝາດ ສັນໃດ

ພິກຂຸທັງຫຼາຍ ພິກຂຸກໍຄືກັນສັນນັ້ນ ຍ່ອມເປັນຜູ້ທີ່ເຮົາຕ້ອງຮັກສາຕະຫຼອດເວລາທີ່ທ່ານຍັງ

໑. ບໍ່ເຮັດສິ່ງທີ່ຄວນເຮັດໃນກຸສົນທຳດ້ວຍສັດທາ
໒. ບໍ່ເຮັດສິ່ງທີ່ຄວນເຮັດໃນກຸສົນທຳດ້ວຍຫິຣິ
໓. ບໍ່ເຮັດສິ່ງທີ່ຄວນເຮັດໃນກຸສົນທຳດ້ວຍໂອດຕັບປະ
໔. ບໍ່ເຮັດສິ່ງທີ່ຄວນເຮັດໃນກຸສົນທຳດ້ວຍວິຣິຍະ
໕. ບໍ່ເຮັດສິ່ງທີ່ຄວນເຮັດໃນກຸສົນທຳດ້ວຍປັນຍາ

ແຕ່ເມືອໃດ ພິກຂຸ

໑. ເຮັດສິ່ງທີ່ຄວນເຮັດໃນກຸສົນທຳດ້ວຍສັດທາ

໒. ເຮັດສິ່ງທີ່ຄວນເຮັດໃນກຸສົນທຳດ້ວຍຫິຣິ
໓. ເຮັດສິ່ງທີ່ຄວນເຮັດໃນກຸສົນທຳດ້ວຍໂອຕັປປະ
໔. ເຮັດສິ່ງທີ່ຄວນເຮັດໃນກຸສົນທຳດ້ວຍວິຣິຍະ
໕. ເຮັດສິ່ງທີ່ຄວນເຮັດໃນກຸສົນທຳດ້ວຍປັນຍາ

ເມື່ອນັ້ນ ເຮົາກໍວາງໃຈໃນພິກຂຸນັ້ນໄດ້ວ່າ "ບັດນີ້ ພິກຂຸມີຄວາມສາມາດຮັກສາຕົນໄດ້ ບໍ່ຜະໝາດ

**ກາມະສູດທີ ໖ ຈົບ**

## ໗. ຈະວະນະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ເຄື່ອນຈາກພຣະສາດສະໜາ

[໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມເຄື່ອນ[1] ບໍ່ຕັ້ງໝັ້ນໃນສັດທຳ[2]
ທຳ ໕ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ພິກຂຸຜູ້ບໍ່ມີສັດທາ | ຍ່ອມເຄື່ອນ ບໍ່ຕັ້ງໝັ້ນໃນສັດທຳ |
| ໒. ພິກຂຸຜູ້ບໍ່ມີຫິຣິ | ຍ່ອມເຄື່ອນ ບໍ່ຕັ້ງໝັ້ນໃນສັດທຳ |
| ໓. ພິກຂຸຜູ້ບໍ່ມີໂອດຕັບປະ | ຍ່ອມເຄື່ອນ ບໍ່ຕັ້ງໝັ້ນໃນສັດທຳ |
| ໔. ພິກຂຸຜູ້ຂີ້ຄ້ານ | ຍ່ອມເຄື່ອນ ບໍ່ຕັ້ງໝັ້ນໃນສັດທຳ |
| ໕. ພິກຂຸຜູ້ມີປັນຍາຊາມ | ຍ່ອມເຄື່ອນ ບໍ່ຕັ້ງໝັ້ນໃນສັດທຳ |

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເຄື່ອນ ບໍ່ຕັ້ງໝັ້ນໃນສັດທຳ
ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ
ທຳ ໕ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ພິກຂຸຜູ້ມີສັດທາ | ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ |
| ໒. ພິກຂຸຜູ້ມີຫິຣິ | ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ |
| ໓. ພິກຂຸຜູ້ມີໂອດຕັບປະ | ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ |
| ໔. ພິກຂຸຜູ້ພາຣົບຄວາມພຽນ | ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ |
| ໕. ພິກຂຸຜູ້ມີປັນຍາ | ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ |

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ

**ຈະວະນະສູດທີ ໗ ຈົບ**

# ໗. ປະຖົມອະຄາຣະວະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ບໍ່ເຄົາລົບສູດທີ ໑

[໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ຍ່ອມເຄື່ອນ ບໍ່ຕັ້ງໝັ້ນໃນສັດທຳ

ທຳ ໕ ປະການ ອັນໃດແດ່ ຄື

໑. ພິກຂຸຜູ້ບໍ່ມີສັດທາ ເປັນຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ຍ່ອມເຄື່ອນ ບໍ່ຕັ້ງໝັ້ນໃນສັດທຳ
໒. ພິກຂຸຜູ້ບໍ່ມີຫີຣິ ເປັນຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ຍ່ອມເຄື່ອນ ບໍ່ຕັ້ງໝັ້ນໃນສັດທຳ
໓. ພິກຂຸຜູ້ບໍ່ມີໂອດຕັບປະ ເປັນຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ຍ່ອມເຄື່ອນບໍ່ຕັ້ງໝັ້ນໃນສັດທຳ
໔. ພິກຂຸຜູ້ຂີ້ຄ້ານ ເປັນຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ຍ່ອມເຄື່ອນບໍ່ຕັ້ງໝັ້ນໃນສັດທຳ
໕. ພິກຂຸຜູ້ມີປັນຍາຊາມ ເປັນຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ຍ່ອມເຄື່ອນບໍ່ຕັ້ງໝັ້ນໃນສັດທຳ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ຍ່ອມເຄື່ອນ ບໍ່ຕັ້ງໝັ້ນໃນສັດທຳ

ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ

ທຳ ໕ ປະການ ອັນໃດແດ່ ຄື

໑. ພິກຂຸຜູ້ມີສັດທາ ເປັນຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ
໒. ພິກຂຸຜູ້ມີຫີຣິ ເປັນຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ
໓. ພິກຂຸຜູ້ມີໂອດຕັບປະ ເປັນຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ

໔. ພິກຂຸຜູ້ພາຣົບຄວາມພຽນ ເປັນຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ຍ່ອມບໍ່ເຄື່ອນຕັ້ງໝັ້ນໃນສັດທຳ
໕. ພິກຂຸຜູ້ມີປັນຍາ ເປັນຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ຍ່ອມບໍ່ເຄື່ອນ ຕັ້ງໝັ້ນໃນສັດທຳ

**ປະຖົມອະຄາຣະວະສູດທີ ໗ ຈົບ**

## ໑໐. ທຸຕິຍະອະຄາຣະວະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ບໍ່ເຄົາລົບສູດທີ ໘

[໑໐] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ບໍ່ອາດເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້

ທຳ ໕ ປະການ ອັນໃດແດ່ ຄື

໑. ພິກຂຸຜູ້ບໍ່ມີສັດທາ ເປັນຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ບໍ່ອາດ ເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້
໒. ພິກຂຸຜູ້ບໍ່ມີຫິຣິ ຯລຯ
໓. ພິກຂຸຜູ້ບໍ່ມີໂອດຕັບປະ ຯລຯ
໔. ພິກຂຸຜູ້ຂີ້ຄ້ານ ຯລຯ
໕. ພິກຂຸຜູ້ມີປັນຍາຊາມ ເປັນຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ບໍ່ອາດເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ບໍ່ມີຄວາມ ເຄົາລົບ ບໍ່ມີຄວາມຢຳເກງ ບໍ່ອາດເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້

ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ອາດເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້

ທຳ ໕ ປະການ ອັນໃດແດ່ ຄື

໑. ພິກຂຸຜູ້ມີສັດທາ ເປັນຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ອາດເຖິງ ຄວາມຈະເລີນງອກງາມ ໄພບູນໃນທຳວິໄນນີ້
໒. ພິກຂຸຜູ້ມີຫິຣິ ໆລໆ
໓. ພິກຂຸຜູ້ມີໂອດຕັບປະ ໆລໆ
໔. ພິກຂຸຜູ້ຜາຣົບຄວາມພຽນ ໆລໆ
໕. ພິກຂຸຜູ້ມີປັນຍາ ເປັນຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ອາດເຖິງຄວາມຈະເລີນງອກງາມ ໄພບູນໃນທຳວິໄນນີ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ອາດເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້

**ທຸຕິຍະອະຄາຣະວະສູດທີ ໑໐ ຈົບ**

**ເສຂະພະລະວັກທີ ໑ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ສັງຂິດຕະສູດ | ໒. ວິດຖະຕະສູດ |
| ໓. ທຸກຂະສູດ | ໔. ຍະຖາພະຕະສູດ |
| ໕. ສິກຂາສູດ | ໖. ສະມາປັດຕິສູດ |
| ໗. ກາມະສູດ | ໘. ຈະວະນະສູດ |
| ໙. ປະຖົມອະຄາຣະວະສູດ | ໑໐. ທຸຕິຍະອະຄາຣະວະສູດ |

# ໔. ພະລະວັກ

## ໝວດວ່າດ້ວຍພະລະ

## ໑. ອະນະນຸດສຸຕະສູດ

## ວ່າດ້ວຍທຳທີ່ບໍ່ເຄີຍສະດັບມາກ່ອນ

[໑໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາໄດ້ບັນລຸເຖິງບາຣະມີອັນເປັນບ່ອນສຸດດ້ວຍປັນຍາອັນຍິ່ງໃນທຳທັງຫຼາຍທີ່ບໍ່ເຄີຍສະດັບມາກ່ອນ[໑] ຈຶ່ງປະຕິຍານໄດ້ ກຳລັງຂອງຕະຖາຄົດ ໕ ປະການນີ້ ທີ່ຕະຖາຄົດມີແລ້ວເປັນເຫດໃຫ້ປະຕິຍານຖານະທີ່ອົງອາດ[໒] ບັນລືສີຫະນາດ[໓] ປະກາດພົມມະຈັກ[໔] ໃນບໍລິສັດ[໕]

ກຳລັງຂອງຕະຖາຄົດ ໕ ປະການ ອັນໃດແດ່ ຄື

໑. ສັດທາພະລະ (ກຳລັງຄືສັດທາ)
໒. ຫິຣິພະລະ (ກຳລັງຄືຫິຣິ)
໓. ໂອດຕັບປະພະລະ (ກຳລັງຄືໂອດຕັບປະ)
໔. ວິຣິຍະພະລະ (ກຳລັງຄືວິຣິຍະ)
໕. ປັນຍາພະລະ (ກຳລັງຄືປັນຍາ)

ພິກຂຸທັງຫຼາຍ ກຳລັງຂອງຕະຖາຄົດ ໕ ປະການນີ້ແລ ທີ່ຕະຖາຄົດມີແລ້ວເປັນເຫດໃຫ້ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

**ອະນະນຸດສຸຕະສູດທີ ໑ ຈົບ**

## ໒. ກູຕະສູດ

## ວ່າດ້ວຍທຳທີ່ເປັນຍອດຄືຍອດເຮືອນ

[໑໒] ພິກຂຸທັງຫຼາຍ ເສຂະພະລະ[໑] ໕ ປະການນີ້

ເສຂະພະລະ ໕ ປະການ ອັນໃດແດ່ ຄື

໑. ສັດທາພະລະ ໒. ຫິຣິພະລະ

໓. ໂອດຕັບປະພະລະ ໔. ວິຣິຍະພະລະ

໕. ປັນຍາພະລະ

ພິກຂຸທັງຫຼາຍ ເສຂະພະລະ ໕ ປະການນີ້ແລ ພະລະທີ່ເປັນເລີດ ເປັນບ່ອນລວມ ເປັນສູນລວມແຫ່ງເສຂະພະລະ ໕ ປະການນີ້ ຄື ປັນຍາພະລະ

ພິກຂຸທັງຫຼາຍ ສິ່ງທີ່ເປັນເລີດ ເປັນບ່ອນລວມ ເປັນສູນລວມແຫ່ງເຮືອນຍອດ ຄືຍອດເຮືອນ ແມ່ນສັນໃດ ພະລະທີ່ເປັນເລີດ ເປັນບ່ອນລວມ ເປັນສູນລວມແຫ່ງເສຂະພະລະ ໕ ປະການນີ້ ຄື ປັນຍາພະລະ ຄືກັນສັນນັ້ນແລ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກເປັນ ຜູ້ປະກອບດ້ວຍ ສັດທາພະລະ ฯລฯ ຫິຣິພະລະ ฯລฯ ໂອດຕັບປະພະລະ ฯລฯ ວິຣິຍະພະລະ ฯລฯ ປັນຍາພະລະ ອັນເປັນເສຂະພະລະ ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ກູຕະສູດທີ ໒ ຈົບ**

## ໓. ສັງຂິດຕະສູດ

## ວ່າດ້ວຍພະລະໂດຍຫຍໍ້

[໑໓] ພິກຂຸທັງຫຼາຍ ພະລະ ໕ ປະການນີ້

ພະລະ ໕ ປະການ ອັນໃດແດ່ ຄື

໑. ສັດທາພະລະ
໒. ວິຣິຍະພະລະ
໓. ສະຕິພະລະ (ກຳລັງຄືສະຕິ)
໔. ສະມາທິພະລະ (ກຳລັງຄືສະມາທິ)
໕. ປັນຍາພະລະ

ພິກຂຸທັງຫຼາຍ ພະລະ ໕ ປະການນີ້ແລ

**ສັງຂິດຕະສູດທີ ໓ ຈົບ**

# ໔. ວິດຖະຕະສູດ

## ວ່າດ້ວຍພະລະໂດຍພິດສະດານ

[໑໘] ພິກຂຸທັງຫຼາຍ ພະລະ ໕ ປະການນີ້
ພະລະ ໕ ປະການ ອັນໃດແດ່ ຄື

໑. ສັດທາພະລະ
໒. ວິຣິຍະພະລະ
໓. ສະຕິພະລະ
໔. ສະມາທິພະລະ
໕. ປັນຍາພະລະ

ສັດທາພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີສັດທາ ຄືເຊື່ອປັນຍາເຄື່ອງຕັດສະຣູ້ຂອງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ຮຽກວ່າ ສັດທາພະລະ

ວິຣິຍະພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ມເບົາໃນກຸສົນທຳທັງຫຼາຍຢູ່ ນີ້ຮຽກວ່າ ວິຣິຍະພະລະ

ສະຕິພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີສະຕິ ຄືປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນຢ່າງຍິ່ງ ຣະນຶກເຖິງສິ່ງທີ່ເຮັດຄຳທີ່ເວົ້າແມ່ນດົນໄດ້ ນີ້ຮຽກວ່າ ສະຕິພະລະ

ສະມາທິພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກວິຈານ ມີປິຕິແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບ ລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິແລະສຸກເກີດຈາກສະມາທິຢູ່ ຍ້ອນປິຕິຈາງຄາຍອອກ ເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນ

ວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ສະມາທິພະລະ

ປັນຍາພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີປັນຍາ ຄືປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມສິ້ນສຸດທຸກໂດຍຖືກຕ້ອງ ນີ້ຮຽກວ່າ ປັນຍາພະລະ

ພິກຂຸທັງຫຼາຍ ພະລະ ໕ ປະການນີ້ແລ

**ວິດຖະຕະສູດທີ ໔ ຈົບ**

# ໕. ທັດຖັບພະສູດ

## ວ່າດ້ວຍທຳທີ່ເພິ່ງເຫັນ

[໑໕] ພິກຂຸທັງຫຼາຍ ພະລະ ໕ ປະການນີ້

ພະລະ ໕ ປະການ ອັນໃດແດ່ ຄື

໑. ສັດທາພະລະ
໒. ວິຣິຍະພະລະ
໓. ສະຕິພະລະ
໔. ສະມາທິພະລະ
໕. ປັນຍາພະລະ

ພິກຂຸທັງຫຼາຍ ເພິ່ງເຫັນສັດທາພະລະໄດ້ບ່ອນໃດ?
ເພິ່ງເຫັນໄດ້ໃນໂສຕາປັດຕິຍັງຄະ[໑] ເພິ່ງເຫັນສັດທາພະລະໄດ້ບ່ອນນີ້

ເພິ່ງເຫັນວິຣິຍະພະລະໄດ້ບ່ອນໃດ?
ເພິ່ງເຫັນໄດ້ໃນສຳມັບປະທານ ໔[໒] ເພິ່ງເຫັນວິຣິຍະພະລະໄດ້ບ່ອນນີ້

ເພິ່ງເຫັນສະຕິພະລະໄດ້ບ່ອນໃດ?
ເພິ່ງເຫັນໄດ້ໃນສະຕິປັດຖານ ໔[໓] ເພິ່ງເຫັນສະຕິພະລະໄດ້ບ່ອນນີ້

ເພິ່ງເຫັນສະມາທິພະລະໄດ້ບ່ອນໃດ?

ເພິ່ງເຫັນໄດ້ໃນຊານ ໔[9] ເພິ່ງເຫັນສະມາທິພະລະໄດ້ບ່ອນນີ້

ເພິ່ງເຫັນປັນຍາພະລະໄດ້ບ່ອນໃດ?
ເພິ່ງເຫັນໄດ້ໃນອະຣິຍະສັດ ໔[10] ເພິ່ງເຫັນປັນຍາພະລະໄດ້ບ່ອນນີ້

ພິກຂຸທັງຫຼາຍ ພະລະ ໕ ປະການນີ້ແລ

**ທັດທັບພະສູດທີ ໕ ຈົບ**

## ໖. ປຸນະກູຕະສູດ

## ວ່າດ້ວຍກຳລັງທີ່ເປັນຍອດ

[໑໖] ພິກຂຸທັງຫຼາຍ ພະລະ ໕ ປະການນີ້

ພະລະ ໕ ປະການ ອັນໃດແດ່ ຄື

໑. ສັດທາພະລະ
໒. ສະຕິພະລະ
໕. ປັນຍາພະລະ
໓. ວິຣິຍະພະລະ
໔. ສະມາທິພະລະ

ພິກຂຸທັງຫຼາຍ ພະລະ ໕ ປະການນີ້ແລ ພະລະທີ່ເປັນເລີດ ເປັນບ່ອນລວມ ເປັນສູນລວມແຫ່ງພະລະ ໕ ປະການນີ້ ຄືປັນຍາພະລະ

ພິກຂຸທັງຫຼາຍ ສິ່ງທີ່ເປັນເລີດ ເປັນບ່ອນລວມ ເປັນສູນລວມແຫ່ງເຮືອນຍອດ ຄືຍອດເຮືອນ ແມ່ນສັນໃດ ພະລະທີ່ເປັນເລີດ ເປັນບ່ອນລວມ ເປັນສູນລວມແຫ່ງເສຂະພະລະ ໕ ປະການນີ້ ຄືປັນຍາພະລະ ຄືກັນສັນນັ້ນແລ

**ປຸນະກູດສູດທີ ໖ ຈົບ**

## ໗. ປະຖົມຫິຕະສູດ

## ວ່າດ້ວຍພິກຂຸຜູ້ປະຕິບັດເພື່ອເກື້ອກູນສູດທີ ໑

[໑໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຊື່ວ່າປະຕິບັດເພື່ອເກື້ອກູນຕົນ ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສີນ
໒. ຕົນເອງເປັນຜູ້ເຖິງພ້ອມດ້ວຍສະມາທິ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສະມາທິ
໓. ຕົນເອງເປັນຜູ້ເຖິງພ້ອມດ້ວຍປັນຍາ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍປັນຍາ
໔. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິ
໕. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ (ຄວາມຮູ້ຄວາມເຫັນໃນວິມຸດຕິ) ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຊື່ວ່າປະຕິບັດເພື່ອ ເກື້ອກູນຕົນ ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ

**ປະຖົມຫິຕະສູດທີ ໗ ຈົບ**

## ໘. ທຸຕິຍະຫິຕະສູດ

## ວ່າດ້ວຍພິກຂຸຜູ້ປະຕິບັດເພື່ອເກື້ອກູນສູດທີ ໒

[໑໘] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຊື່ວ່າປະຕິບັດເພື່ອເກື້ອກູນຜູ້ອື່ນ ບໍ່ປະຕິບັດເພື່ອເກື້ອກູນຕົນ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຕົນເອງບໍ່ເປັນຜູ້ເຖິງພ້ອມດ້ວຍສີນ ແຕ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສີນ
໒. ຕົນເອງບໍ່ເປັນຜູ້ເຖິງພ້ອມດ້ວຍສະມາທິ ແຕ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສະມາທິ
໓. ຕົນເອງບໍ່ເປັນຜູ້ເຖິງພ້ອມດ້ວຍປັນຍາ ແຕ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍປັນຍາ
໔. ຕົນເອງບໍ່ເປັນຜູ້ເຖິງພ້ອມດ້ວຍວິມຸດຕິ ແຕ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິ
໕. ຕົນເອງບໍ່ເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ແຕ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຊື່ວ່າປະຕິບັດເພື່ອ ເກື້ອກູນຜູ້ອື່ນ ບໍ່ປະຕິບັດເພື່ອເກື້ອກູນຕົນ

**ທຸຕິຍະຫິຕະສູດທີ ໘ ຈົບ**

## ໙. ຕະຕິຍະຫິຕະສູດ

## ວ່າດ້ວຍພິກຂຸຜູ້ບໍ່ປະຕິບັດເພື່ອເກື້ອກູນສູດທີ ໓

[໑໙] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຊື່ວ່າ ບໍ່ປະຕິບັດເພື່ອເກື້ອກູນຕົນ ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຕົນເອງບໍ່ເປັນຜູ້ເຖິງພ້ອມດ້ວຍສີນ ແລະບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສີນ
໒. ຕົນເອງບໍ່ເປັນຜູ້ເຖິງພ້ອມດ້ວຍສະມາທິ ແລະບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສະມາທິ
໓. ຕົນເອງບໍ່ເປັນຜູ້ເຖິງພ້ອມດ້ວຍປັນຍາ ແລະບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍປັນຍາ
໔. ຕົນເອງບໍ່ເປັນຜູ້ເຖິງພ້ອມດ້ວຍວິມຸດຕິ ແລະບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິ
໕. ຕົນເອງບໍ່ເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ແລະບໍ່ຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຊື່ວ່າບໍ່ປະຕິບັດເພື່ອເກື້ອກູນຕົນ ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ

**ຕະຕິຍະຫິດສູດທີ ໙ ຈົບ**

## ໑໐. ຈະຕຸດຖະຫິຕະສູດ

## ວ່າດ້ວຍພິກຂຸຜູ້ປະຕິບັດເພື່ອເກື້ອກູນສູດທີ ໔

[໒໐] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຊື່ວ່າປະຕິບັດເພື່ອເກື້ອກູນຕົນ ແລະປະຕິບັດເພື່ອເກື້ອກູນຜູ້ອື່ນ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ແລະຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສີນ
໒. ຕົນເອງເປັນຜູ້ເຖິງພ້ອມດ້ວຍສະມາທິ ແລະຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍສະມາທິ

໓. ຕົນເອງເປັນຜູ້ເຖິງພ້ອມດ້ວຍປັນຍາ ແລະຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍປັນຍາ
໔. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິ ແລະຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິ
໕. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ແລະຊັກຊວນຜູ້ອື່ນໃຫ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຊື່ວ່າປະຕິບັດເພື່ອ ເກື້ອກູນຕົນ ແລະປະຕິບັດເພື່ອເກື້ອກູນຜູ້ອື່ນ

**ຈະຕຸດຖະຫິຕະສູດທີ ໑໐ ຈົບ**

**ພະລະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ອະນະນຸດສຸຕະສູດ | ໖. ກູຕະສູດ |
| ໒. ສັງຂິດຕະສູດ | ໗. ວິດຖະຕະສູດ |
| ໓. ທັດຖັບພະສູດ | ໘. ປຸນະກູຕະສູດ |
| ໔. ປະຖົມຫິຕະສູດ | ໙. ທຸຕິຍະຫິຕະສູດ |
| ໕. ຕະຕິຍະຫິຕະສູດ | ໑໐. ຈະຕຸດຖະຫິຕະສູດ |

# ໓. ປັນຈັງຄິກະວັກ

## ໝວດວ່າດ້ວຍການຈະເລີນສຳມາສະມາທິທີ່ປະກອບດ້ວຍອົງ ໕

## ໑. ປະຖົມອະຄາຣະວະສູດ

### ວ່າດ້ວຍຄວາມບໍ່ເຄົາລົບສູດທີ ໑

[໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ

໑. ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ບໍ່ມີຄວາມປະພຶດສະເໝີພາກໃນເພື່ອນພົມມະຈາຣີທັງຫຼາຍ ຈັກພໍ່າເພັງອະພິສະມາຈາຣິກະທຳໆໃຫ້ບໍລິບູນໄດ້

໒. ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ພ່ຳເພັງອະພິສະມາຈາຣິກະທຳໃຫ້ບໍລິບູນແລ້ວ ຈັກພ່ຳເພັງເສຂະທຳ[໒]ໃຫ້ບໍລິບູນໄດ້
໓. ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ພ່ຳເພັງເສຂະທຳໃຫ້ບໍລິບູນແລ້ວ ຈັກພ່ຳເພັງ ສີນທັງຫຼາຍ[໓]ໃຫ້ບໍລິບູນໄດ້
໔. ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ພ່ຳເພັງສີນທັງຫຼາຍໃຫ້ບໍລິບູນແລ້ວ ຈັກພ່ຳເພັງສຳມາທິດຖິ[໔]ໃຫ້ບໍລິບູນໄດ້
໕. ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ພ່ຳເພັງສຳມາທິດຖິໃຫ້ບໍລິບູນແລ້ວ ຈັກພ່ຳເພັງສຳມາສະມາທິ[໑]ໃຫ້ບໍລິບູນໄດ້

ພິກຂຸທັງຫຼາຍ

໑. ເປັນໄປໄດ້ທີ່ພິກຂຸມີຄວາມເຄົາລົບ ມີຄວາມຢຳເກງ ມີຄວາມປະພຶດສະເໝີພາກໃນເພື່ອນພົມມະຈາຣີທັງຫຼາຍ ຈັກພ່ຳເພັງອະພິສະມາຈາຣິກະທຳ ໃຫ້ບໍລິບູນໄດ້
໒. ເປັນໄປໄດ້ທີ່ພິກຂຸພ່ຳເພັງອະພິສະມາຈາຣິກະທຳໃຫ້ບໍລິບູນແລ້ວ ຈັກພ່ຳເພັງເສຂະທຳໃຫ້ບໍລິບູນໄດ້
໓. ເປັນໄປໄດ້ທີ່ພິກຂຸພ່ຳເພັງເສຂະທຳໃຫ້ບໍລິບູນແລ້ວ ຈັກພ່ຳເພັງສີນທັງຫຼາຍໃຫ້ບໍລິບູນໄດ້
໔. ເປັນໄປໄດ້ທີ່ພິກຂຸພ່ຳເພັງສີນທັງຫຼາຍໃຫ້ບໍລິບູນແລ້ວ ຈັກພ່ຳເພັງສຳມາທິດຖິໃຫ້ບໍລິບູໄດ້
໕. ເປັນໄປໄດ້ທີ່ພິກຂຸພ່ຳເພັງສຳມາທິດຖິໃຫ້ບໍລິບູນແລ້ວ ຈັກພ່ຳເພັງສຳມາສະມາທິ ໃຫ້ບໍລິບູນໄດ້

**ປະຖົມອະຄາຣະວະສູດທີ ໑ ຈົບ**

## ໒. ທຸຕິຍະອະຄາຣະວະສູດ

## ວ່າດ້ວຍຄວາມບໍ່ເຄົາລົບສູດທີ ໒

[໒໒] ພິກຂຸທັງຫຼາຍ

໑. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ບໍ່ມີຄວາມປະພຶດສະ ເໝີພາກໃນເພື່ອນພົມມະຈາຣີທັງຫຼາຍ ຈັກພ່ຳເພັງ ອະພິສະມາຈາຣິກະທຳໃຫ້ບໍລິບູນໄດ້

໒. ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ພໍ່າເພັງອະພິສະມາຈາຣິກະທໍາໃຫ້ບໍລິບູນແລ້ວ ຈັກພໍ່າເພັງເສຂະທໍາໃຫ້ບໍລິບູນໄດ້
໓. ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ພໍ່າເພັງເສຂະທໍາໃຫ້ບໍລິບູນແລ້ວ ຈັກພໍ່າເພັງ ສີນຂັນໃຫ້ບໍລິບູນໄດ້
໔. ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ພໍ່າເພັງສີນຂັນໃຫ້ບໍລິບູນແລ້ວ ຈັກພໍ່າເພັງສະມາທິຂັນໃຫ້ບໍລິບູນໄດ້
໕. ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ພໍ່າເພັງສະມາທິຂັນໃຫ້ບໍລິບູນແລ້ວ ຈັກພໍ່າເພັງປັນຍາຂັນໃຫ້ບໍລິບູນໄດ້

ພິກຂຸທັງຫຼາຍ

໑. ເປັນໄປໄດ້ທີ່ພິກຂຸຜູ້ມີຄວາມເຄົາລົບ ມີຄວາມຢຳເກງ ມີຄວາມປະພຶດສະເໝີພາກໃນເພື່ອນພົມມະຈາຣີທັງຫຼາຍ ຈັກພໍ່າເພັງອະພິສະມາຈາຣິກະທໍາໃຫ້ບໍລິບູນໄດ້
໒. ເປັນໄປໄດ້ທີ່ພິກຂຸພໍ່າເພັງອະພິສະມາຈາຣິກະທໍາໃຫ້ບໍລິບູນແລ້ວ ຈັກພໍ່າເພັງເສຂະທໍາໃຫ້ບໍລິບູນໄດ້
໓. ເປັນໄປໄດ້ທີ່ພິກຂຸພໍ່າເພັງເສຂະທໍາໃຫ້ບໍລິບູນແລ້ວ ຈັກພໍ່າເພັງສີນຂັນໃຫ້ບໍລິບູນໄດ້
໔. ເປັນໄປໄດ້ທີ່ພິກຂຸພໍ່າເພັງສີນຂັນໃຫ້ບໍລິບູນແລ້ວ ຈັກພໍ່າເພັງສະມາທິຂັນໃຫ້ບໍລິບູນໄດ້
໕. ເປັນໄປໄດ້ທີ່ພິກຂຸພໍ່າເພັງສະມາທິຂັນໃຫ້ບໍລິບູນແລ້ວ ຈັກພໍ່າເພັງປັນຍາຂັນໃຫ້ບໍລິບູນໄດ້

**ທຸຕິຍະອະຄາຣະວະສູດທີ ໒ ຈົບ**

## ໓. ອຸປະກິເລສະສູດ

## ວ່າດ້ວຍຄວາມເສົ້າໝອງ

[໒໓] ພິກຂຸທັງຫຼາຍ ສິ່ງເສົ້າໝອງແຫ່ງຄໍາ ໕ ປະການ ເປັນເຫດໃຫ້ຄໍາເສົ້າໝອງ ບໍ່ອ່ອນ ໃຊ້ການບໍ່ໄດ້ ບໍ່ຜຸດຜ່ອງ ແຕກງ່າຍ ໃຊ້ງານບໍ່ໄດ້ດີ

ສິ່ງເສົ້າໝອງແຫ່ງຄໍາ ໕ ປະການ ອັນໃດແດ່ ຄື

໑. ເຫຼັກ ໒. ໂລຫະ
໓. ດີບຸກ ໔. ຊືນ
໕. ເງິນ

ພິກຂຸທັງຫຼາຍ ສິ່ງເສົ້າໝອງແຫ່ງຄຳ ໕ ປະການນີ້ແລ ເປັນເຫດໃຫ້ຄຳ ເສົ້າໝອງ ບໍ່ອ່ອນ ໃຊ້ການບໍ່ໄດ້ ບໍ່ຜຸດຜ່ອງ ແຕກງ່າຍ ໃຊ້ງານບໍ່ໄດ້ດີ

ແຕ່ເມື່ອໃດ ຄຳພົ້ນຈາກສິ່ງເສົ້າໝອງ ໕ ປະການນີ້ແລ້ວ ເມື່ອນັ້ນ ຄຳນັ້ນ ຍ່ອມອ່ອນ ໃຊ້ການໄດ້ ຜຸດຜ່ອງ ບໍ່ແຕກງ່າຍ ໃຊ້ງານໄດ້ດີ ແລະຊ່າງຄຳມຸ້ງໝາຍຈະເຮັດເຄື່ອງປະດັບຊະ ນິດໃດ ໆ ຄື ແຫວນ ຕຸ້ມຫູ ສ້ອຍຄໍ ຫຼືມາໄລຄຳ ເຄື່ອງປະດັບຊະນິດນັ້ນຍ່ອມອຳນວຍປະ ໂຫຍດໃຫ້ເຂົາໄດ້ ສັນໃດ

ຄວາມເສົ້າໝອງແຫ່ງຈິດ ໕ ປະການ ເປັນເຫດໃຫ້ຈິດເສົ້າໝອງ ບໍ່ອ່ອນ ບໍ່ເໝາະແກ່ ການໃຊ້ງານ ບໍ່ຜຸດຜ່ອງ ຟຸ້ງຊ່ານ ບໍ່ຕັ້ງໝັ້ນດີເພື່ອຄວາມໝົດສິ້ນອາສະວະ ສັນນັ້ນ ຄືກັນ

ຄວາມເສົ້າໝອງແຫ່ງຈິດ ໕ ປະການ ອັນໃດແດ່ ຄື

໑. ການສັນທະ (ຄວາມພໍໃຈໃນການ)
໒. ພະຍາບາດ (ຄວາມຄິດຮ້າຍ)
໓. ຖີນະມິດທະ (ຄວາມຫົດຫູ່ແລະງ່ວມເຫງົາ)
໔. ອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ)
໕. ວິຈິກິດສາ (ຄວາມລັງເລສົງໄສ)

ຄວາມເສົ້າໝອງແຫ່ງຈິດ ໕ ປະການນີ້ແລ ເປັນເຫດໃຫ້ຈິດເສົ້າໝອງ ບໍ່ອ່ອນ ບໍ່ເໝາະ ແກ່ການໃຊ້ງານ ບໍ່ຜຸດຜ່ອງ ຟຸ້ງຊ່ານ ບໍ່ຕັ້ງໝັ້ນດີເພື່ອຄວາມໝົດສິ້ນອາສະວະ

ແຕ່ເມື່ອໃດ ຈິດພົ້ນຈາກຄວາມເສົ້າໝອງ ໕ ປະການນີ້ແລ້ວ ເມື່ອນັ້ນ ຈິດນັ້ນ ຍ່ອມ ອ່ອນ ເໝາະແກ່ການໃຊ້ງານ ຜຸດຜ່ອງ ບໍ່ຟຸ້ງຊ່ານ ຕັ້ງໝັ້ນດີເພື່ອຄວາມໝົດສິ້ນອາສະວະ ແລະ ພິກຂຸຈະນ້ອມຈິດໄປເພື່ອເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເຊິ່ງທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາ ອັນຍິ່ງໃດ ໆ ເມື່ອມີເຫດ[1] ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນ ທຳນັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ "ເຮົາເພິ່ງສະແດງລິດໄດ້ຫຼາຍແບບ ຄື ຄົນດຽວສະແດງເປັນຫຼາຍ ຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດ ຫຼືໃຫ້ຫາຍໄປກໍໄດ້ ຊອດຝາ ກຳແພງ ແລະພູໄປໄດ້ບໍ່ຕິດຂັດຄືໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນຫຼືມຸດລົງໃນແຜ່ນດິນຄືໄປໃນ ນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາ

ກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄໍາດວງຈັນ ແລະດວງອາທິດ ອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອໍານາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທໍານັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ "ເຮົາເພິ່ງໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບແລະສຽງມະນຸດ ທັງທີ່ຢູ່ໄກແລະຢູ່ໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທໍານັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ "ເຮົາເພິ່ງກໍານົດຮູ້ຈິດຂອງສັດແລະບຸກຄົນອື່ນໄດ້ດ້ວຍຈິດຂອງຕົນ ຄື ຈິດມີຣາຄະກໍຮູ້ວ່າມີຣາຄະ ຫຼືປາສະຈາກຣາຄະກໍຮູ້ວ່າປາສະຈາກຣາຄະ ຈິດມີໂທສະ ກໍຮູ້ວ່າມີໂທສະ ຫຼືປາສະຈາກໂທສະກໍຮູ້ວ່າປາສະຈາກໂທສະ ຈິດມີໂມຫະກໍຮູ້ວ່າມີໂມຫະ ຫຼື ປາສະຈາກໂມຫະກໍຮູ້ວ່າປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ວ່າຫົດຫູ່ ຫຼືຟຸ້ງຊ່ານກໍຮູ້ວ່າຟຸ້ງຊ່ານ ຈິດເປັນມະຫັກຄະຕະ[6]ກໍຮູ້ວ່າເປັນມະຫັກຄະຕະ ບໍເປັນມະຫັກຄະຕະກໍຮູ້ວ່າບໍ່ເປັນມະຫັກຄະຕະ ຈິດມີຈິດອື່ນຍິ່ງກວ່າກໍຮູ້ວ່າມີຈິດອື່ນຍິ່ງກວ່າ ບໍມີຈິດອື່ນຍິ່ງກວ່າກໍຮູ້ວ່າບໍ່ມີຈິດອື່ນຍິ່ງກວ່າ ຈິດເປັນສະມາທິກໍຮູ້ວ່າເປັນສະມາທິ ບໍ່ເປັນສະມາທິກໍຮູ້ວ່າບໍ່ເປັນສະມາທິ ຈິດລຸດພົ້ນກໍຮູ້ວ່າ ລຸດພົ້ນ ບໍລຸດພົ້ນກໍຮູ້ວ່າບໍ່ລຸດພົ້ນ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທໍານັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ "ເຮົາເພິ່ງຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບຫຼວງຫຼາຍແດ່ ຕະຫຼອດວິວັດຕະກັບ[7]ເປັນຫຼວງຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບຫຼວງຫຼາຍແດ່ວ່າ ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້ ເຮົາເພິ່ງຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທໍານັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ "ເຮົາເພິ່ງເຫັນໝູ່ສັດຜູ້ກໍາລັງຈຸຕິ ກໍາລັງເກີດທັງຊັ້ນຕໍ່າແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ເພິ່ງຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກໍາວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ຊັກຊວນຜູ້ອື່ນໃຫ້ເຮັດກໍາຕາມຄວາມເຫັນຜິດ ພວກເຂົາ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບ ກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ວ່າຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ຊັກຊວນ

ຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ເຮົາເພິ່ງເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ເພິ່ງຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ “ເຮົາເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

**ອຸປະກິເລສະສູດທີ ໓ ຈົບ**

## ໔. ທຸດສີລະສູດ

## ວ່າດ້ວຍໂທດແຫ່ງຄວາມທຸສີນແລະຄຸນແຫ່ງຄວາມມີສີນ

[໘໔] ພິກຂຸທັງຫຼາຍ ສຳມາສະມາທິຂອງບຸກຄົນຜູ້ທຸສີນ ມີສີນວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີຍະຖາພູຕະຍານທັດສະນະ[໑] ຂອງບຸກຄົນຜູ້ມີສຳມາສະມາທິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີ ນິບພິທາ[໒]ແລະວິຣາຄະ[໓]ຂອງບຸກຄົນຜູ້ມີຍະຖາພູຕະຍານທັດສະນະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອນິບພິທາແລະວິຣາຄະບໍ່ມີວິມຸດຕິຍານທັດສະນະ[໔] ຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ

ສຳມາສະມາທິຂອງບຸກຄົນຜູ້ທຸສີນ ມີສີນວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ມີສຳມາສະມາທິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ມີຍະຖາພູຕະຍານທັດສະນະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອນິບພິທາແລະວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບວິບັດ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມບໍ່ເຖິງຄວາມບໍລິບູນ

ພິກຂຸທັງຫຼາຍ ສຳມາສະມາທິຂອງບຸກຄົນຜູ້ມີສີນ ສົມບູນດ້ວຍສີນ ຊື່ວ່າມີເຫດ ສົມບູນ ເມື່ອສຳມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິ ຊື່ວ່າມີເຫດສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາແລະວິຣາຄະຂອງ ບຸກຄົນຜູ້ສົມບູນດ້ວຍຍະຖາພູຕະຍານ ທັດສະນະ ຊື່ວ່າມີເຫດສົມບູນ ເມື່ອນິບພິທາແລະ ວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະວິຣາຄະ ຊື່ວ່າ ມີເຫດສົມບູນ

ສຳມາສະມາທິຂອງບຸກຄົນຜູ້ມີສີນ ສົມບູນດ້ວຍສີນ ຊື່ວ່າມີເຫດສົມບູນ ເມື່ອສຳມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິ ຊື່ວ່າມີເຫດສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ ສົມບູນດ້ວຍຍະຖາພູຕະຍານທັດສະນະ ຊື່ວ່າມີເຫດສົມບູນ ເມື່ອນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະວິຣາຄະ ຊື່ວ່າມີເຫດສົມບູນ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບສົມບູນ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມເຖິງຄວາມບໍລິບູນ

**ທຸດສີລະສູດທີ ໔ ຈົບ**

## ໕. ອະນຸກາຄະຫິຕະສູດ

## ວ່າດ້ວຍທຳສະໜັບສະໜູນສຳມາທິດຖິ

[໔໕] ພິກຂຸທັງຫຼາຍ ສຳມາທິດຖິ[໑]ອັນອົງ ໕ ສະໜັບສະໜູນແລ້ວ ຍ່ອມມີເຈໂຕວິມຸດຕິເປັນຜົນ ມີເຈໂຕວິມຸດຕິ[໒]ເປັນຜະລານິສົງ ແລະມີປັນຍາວິມຸດຕິ[໓]ເປັນຜົນ ມີປັນຍາວິມຸດຕິເປັນຜະລານິສົງ

ອົງ ໕ ປະການ ອັນໃດແດ່ ຄື

໑. ສີນ[໑]
໒. ສາກັດສາ[໒]
໓. ສຸຕະ[໓]
໔. ສະມະຖະ[໔]
໕. ວິປັດສະນາ[໕]

ພິກຂຸທັງຫຼາຍ ສຳມາທິດຖິອັນອົງ ໕ ນີ້ແລ ສະໜັບສະໜູນແລ້ວ ຍ່ອມມີເຈໂຕວິມຸດຕິເປັນຜົນ ມີເຈໂຕວິມຸດຕິເປັນຜະລານິສົງ ແລະມີປັນຍາວິມຸດຕິເປັນຜົນ ມີປັນຍາວິມຸດຕິເປັນຜະລານິສົງ

**ອະນຸກາຄະຫິດສູດທີ ໕ ຈົບ**

## ໖. ວິມຸດຕາຍະຕະນະສູດ

## ວ່າດ້ວຍເຫດແຫ່ງວິມຸດຕິ

[໔໖] ພິກຂຸທັງຫຼາຍ ເຫດແຫ່ງວິມຸດຕິ ໕ ປະການນີ້ ເຊິ່ງເປັນເຫດໃຫ້ຈິດຂອງພິກຂຸຜູ້ບໍ່ຜະ ໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ຍັງບໍ່ລຸດພົ້ນ ຍ່ອມລຸດພົ້ນ ອາສະວະທີ່ຍັງບໍ່ໝົດໄປ ຍ່ອມເຖິງຄວາມໝົດສິ້ນໄປ ຫຼືທ່ານຍ່ອມບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ

ເຫດແຫ່ງວິມຸດຕິ ໕ ປະການ ອັນໃດແດ່ ຄື

໑. ສາດສະດາຫຼືເພື່ອນພົມມະຈາຣີຜູ້ຕັ້ງຢູ່ໃນຖານະຄູບາງອົງສະແດງທຳ[1] ແກ່ພິກຂຸໃນທຳວິໄນນີ້ ທ່ານຮູ້ແຈ້ງອັດຖະ[2] ຮູ້ແຈ້ງທຳໃນທຳ[3]ນັ້ນ ຕາມທີ່ສາດສະດາຫຼືເພື່ອນພົມມະຈາຣີຜູ້ຕັ້ງຢູ່ໃນຖານະຄູບາງອົງສະແດງແກ່ທ່ານ ເມື່ອທ່ານຮູ້ແຈ້ງອັດຖະຮູ້ແຈ້ງທຳ ຍ່ອມເກີດປາໂມດ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ທ່ານມີກາຍສະງົບ ຍ່ອມໄດ້ຮັບສຸກ ເມື່ອມີສຸກ ຈິດຍ່ອມຕັ້ງ ໝັ້ນ ນີ້ເປັນເຫດແຫ່ງວິມຸດຕິປະການທີ ໑ ເຊິ່ງເປັນເຫດໃຫ້ຈິດຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ຍັງບໍ່ລຸດພົ້ນ ຍ່ອມລຸດພົ້ນ ອາສະວະທີ່ຍັງບໍ່ໝົດໄປ ຍ່ອມເຖິງຄວາມໝົດສິ້ນໄປ ຫຼືທ່ານຍ່ອມບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ

໒. ສາດສະດາຫຼືເພື່ອນພົມມະຈາຣີຜູ້ຕັ້ງຢູ່ໃນຖານະຄູບາງອົງບໍ່ໄດ້ສະແດງທຳ ແກ່ພິກຂຸ ແຕ່ພິກຂຸສະແດງທຳຕາມທີ່ຕົນໄດ້ສະດັບມາຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ທ່ານຮູ້ແຈ້ງອັດຖະຮູ້ແຈ້ງທຳໃນທຳນັ້ນຕາມທີ່ພິກຂຸສະແດງທຳຕາມທີ່ຕົນໄດ້ສະດັບມາຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍ ພິດສະດານ ເມື່ອທ່ານຮູ້ແຈ້ງອັດຖະຮູ້ແຈ້ງທຳ ຍ່ອມເກີດປາໂມດ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ທ່ານມີກາຍສະງົບ ຍ່ອມໄດ້ຮັບສຸກ ເມື່ອມີສຸກ ຈິດຍ່ອມຕັ້ງໝັ້ນ ນີ້ເປັນເຫດແຫ່ງວິມຸດຕິປະການທີ ໒ ເຊິ່ງເປັນເຫດໃຫ້ຈິດຂອງພິກຂຸຜູ້ບໍ່ຜະໝາດ ຯລຯ ຫຼືທ່ານຍ່ອມ ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ

໓. ສາດສະດາຫຼືເພື່ອນພົມມະຈາຣີຜູ້ຕັ້ງຢູ່ໃນຖານະຄູບາງອົງບໍ່ໄດ້ສະແດງທຳ ແກ່ພິກຂຸ ແມ່ນພິກຂຸກໍບໍ່ໄດ້ສະແດງທຳຕາມທີ່ຕົນໄດ້ສະດັບມາຕາມທີ່ຕົນໄດ້ຮຽນມາ ແກ່ຜູ້ອື່ນໂດຍພິດ ສະດານ ແຕ່ພິກຂຸສາທະຍາຍທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ ທ່ານຮູ້ແຈ້ງອັດຖະ ຮູ້ແຈ້ງທຳໃນທຳນັ້ນ ຕາມທີ່ພິກຂຸສາທະຍາຍທຳ ຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ໂດຍພິດສະດານ ເມື່ອທ່ານຮູ້ແຈ້ງອັດຖະຮູ້ແຈ້ງທຳ ຍ່ອມເກີດປາໂມດ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ທ່ານມີກາຍສະງົບ ຍ່ອມໄດ້ຮັບສຸກ ເມື່ອມີສຸກ ຈິດຍ່ອມຕັ້ງໝັ້ນ ນີ້ເປັນເຫດແຫ່ງວິມຸດຕິປະການທີ ໓ ເຊິ່ງເປັນເຫດໃຫ້ຈິດຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ຯລຯ ຫຼື ທ່ານຍ່ອມບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ

໔. ສາດສະດາຫຼືເພື່ອນພົມມະຈາຣີຜູ້ຕັ້ງຢູ່ໃນຖານະຄູບາງອົງບໍ່ໄດ້ສະແດງທຳ ແກ່ພິກຂຸ ແມ່ນພິກຂຸກໍບໍ່ໄດ້ສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ແກ່ຜູ້ອື່ນໂດຍພິດສະດານ ບໍ່ໄດ້ສາທະຍາຍທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ

ແຕ່ພິກຂຸນຶກຕາມ ຕອງຕາມ ເພ່ງຕາມດ້ວຍໃຈ ເຊິ່ງທຳຕາມທີ່ຕົນໄດ້ສະດັບມາຕາມທີ່ຕົນໄດ້ຮຽນມາ ທ່ານຮູ້ແຈ້ງອັດຖະຮູ້ແຈ້ງທຳໃນທຳນັ້ນຕາມທີ່ພິກຂຸນຶກຕາມ ຕອງຕາມ ເພ່ງຕາມ ດ້ວຍໃຈເຊິ່ງທຳຕາມທີ່ຕົນໄດ້ສະດັບມາຕາມທີ່ຕົນໄດ້ຮຽນມາ ເມື່ອທ່ານ ຮູ້ແຈ້ງອັດຖະຮູ້ແຈ້ງທຳ ຍ່ອມເກີດປາໂມດ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກ ຈິດຍ່ອມຕັ້ງໝັ້ນ ນີ້ເປັນເຫດແຫ່ງວິມຸດຕິປະການທີ ໔ ເຊິ່ງເປັນເຫດໃຫ້ຈິດຂອງພິກຂຸຜູ້ບໍ່ຜະໝາດ ຯລຯ ຫຼືທ່ານຍ່ອມບັນລຸທຳ ອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ

໕. ສາດສະດາຫຼືເພື່ອນພົມມະຈາຣີຜູ້ຕັ້ງຢູ່ໃນຖານະຄູບາງອົງບໍ່ໄດ້ສະແດງທຳ ແກ່ພິກຂຸແມ່ນພິກຂຸກໍບໍ່ໄດ້ສະແດງທຳຕາມທີ່ຕົນໄດ້ສະດັບມາຕາມທີ່ຕົນ ໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ບໍ່ໄດ້ສາທະຍາຍທຳຕາມທີ່ຕົນໄດ້ສະດັບມາຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ ແລະບໍ່ໄດ້ນຶກຕາມຕອງຕາມເພ່ງຕາມດ້ວຍໃຈເຊິ່ງທຳຕາມທີ່ຕົນໄດ້ສະດັບມາຕາມທີ່ຕົນໄດ້ຮຽນມາ ແຕ່ທ່ານຮຽນສະມາທິນິມິດແນວໃດແນວໜຶ່ງມາດີ ມະນະສິການດີ ຊົງຈຳໄວ້ດີ ແທງຕະຫຼອດດີດ້ວຍປັນຍາ ທ່ານຮູ້ແຈ້ງອັດຖະຮູ້ແຈ້ງທຳໃນທຳນັ້ນຕາມທີ່ທ່ານໄດ້ຮຽນສະມາທິນິມິດແນວໃດແນວໜຶ່ງມາດີ ມະນະສິການດີ ຊົງຈຳໄວ້ດີ ແທງຕະຫຼອດດີດ້ວຍປັນຍາ ເມື່ອທ່ານຮູ້ແຈ້ງອັດຖະຮູ້ແຈ້ງທຳ ຍ່ອມເກີດປາໂມດ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈເກີດປີຕິ ກາຍຍ່ອມສະງົບ ທ່ານມີກາຍສະງົບ ຍ່ອມໄດ້ຮັບສຸກ ເມື່ອມີສຸກ ຈິດຍ່ອມຕັ້ງໝັ້ນ ນີ້ເປັນເຫດ ແຫ່ງວິມຸດຕິປະການທີ ໕ ເຊິ່ງເປັນເຫດໃຫ້ຈິດຂອງພິກຂຸຜູ້ບໍ່ຜະໝາດ ຯລຯ ຫຼືທ່ານຍ່ອມບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ

ພິກຂຸທັງຫຼາຍ ເຫດແຫ່ງວິມຸດຕິ ໕ ປະການນີ້ແລ ເຊິ່ງເປັນເຫດໃຫ້ຈິດຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ຍັງບໍ່ລຸດພົ້ນ ຍ່ອມລຸດພົ້ນ ອາສະວະທີ່ຍັງບໍ່ໝົດໄປຍ່ອມເຖິງຄວາມໝົດສິ້ນໄປ ຫຼື ທ່ານຍ່ອມບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ

**ວິມຸດຕາຍະຕະນະສູດທີ ໖ ຈົບ**

## ໗. ສະມາທິສູດ

## ວ່າດ້ວຍການຈະເລີນສະມາທິເພື່ອໃຫ້ຍານເກີດຂຶ້ນ

[໔໗] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມີປັນຍາເຄື່ອງຮັກສາຕົນ ມີສະຕິ ຈະເລີນ ອັບປະມານະສະມາທິ[^1]ເທີ້ນ ເມື່ອທ່ານມີປັນຍາເຄື່ອງຮັກສາຕົນ ມີສະຕິ ຈະເລີນອັບປະມານະສະມາທິຢູ່ ຍານ[^2] ໕ ປະການ ຍ່ອມເກີດຂຶ້ນສະເພາະຕົນ

ຍານ ໕ ປະການ ອັນໃດແດ່ ຄື

໑. ຍານຍ່ອມເກີດຂຶ້ນສະເພາະຕົນວ່າ "ສະມາທິ[๑]ນີ້ມີສຸກໃນປັດຈຸບັນ ແລະມີສຸກເປັນວິບາກຕໍ່ໄປ

໔. ຍານຍ່ອມເກີດຂຶ້ນສະເພາະຕົນວ່າ "ສະມາທິນີ້ເປັນອະຣິຍະ ປາສະຈາກອາມິດ[๒]

໓. ຍານຍ່ອມເກີດຂຶ້ນສະເພາະຕົນວ່າ "ສະມາທິນີ້ອັນຄົນຊົ່ວເສບບໍ່ໄດ້

໔. ຍານຍ່ອມເກີດຂຶ້ນສະເພາະຕົນວ່າ "ສະມາທິນີ້ສະງົບ ປະນີດ ໄດ້ດ້ວຍຄວາມສະງົບລະງັບ ບັນລຸໄດ້ດ້ວຍພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ແລະບໍ່ແມ່ນບັນລຸໄດ້ດ້ວຍການຂົ່ມທຳທີ່ເປັນຂ້າເສິກ ຫ້າມ ກິເລດດ້ວຍສະສັງຂານຈິດ[๓]

໕. ຍານຍ່ອມເກີດຂຶ້ນສະເພາະຕົນວ່າ "ເຮົາມີສະຕິເຂົ້າສະມາທິນີ້ໄດ້ ມີສະຕິອອກຈາກສະມາທິນີ້ໄດ້

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມີປັນຍາເຄື່ອງຮັກສາຕົນ ມີສະຕິ ຈະເລີນອັບປະມານະສະມາທິເຖີ້ນ ເມື່ອທ່ານທັງຫຼາຍມີປັນຍາເຄື່ອງຮັກສາຕົນ ມີສະຕິ ຈະເລີນອັບປະມານະສະມາທິຢູ່ ຍານ ໕ ປະການນີ້ແລ ຍ່ອມເກີດຂຶ້ນສະເພາະຕົນ

**ສະມາທິສູດທີ ໗ ຈົບ**

## ໗. ປັນຈັງຄິກະສູດ

### ວ່າດ້ວຍການຈະເລີນສຳມາສະມາທິທີ່ປະກອບດ້ວຍອົງ ໕

[໔໗] ພິກຂຸທັງຫຼາຍ ເຮົາຈັກສະແດງການຈະເລີນສຳມາສະມາທິທີ່ປະກອບດ້ວຍອົງ ໕ ອັນເປັນອະຣິຍະ[๔] ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໄດ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ການຈະເລີນສຳມາສະມາທິທີ່ປະກອບດ້ວຍອົງ ໕ ອັນເປັນອະຣິຍະ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກວິຈານ ມີປິຕິແລະສຸກອັນເກີດຈາກວິເວກຢູ່ ທ່ານທຳກາຍນີ້ແລໃຫ້ຊຸ່ມຊື່ນອິ່ມເອີບ ຊາບຊ່ານດ້ວຍປິຕິແລະສຸກອັນເກີດຈາກວິເວກ ບໍ່ມີສ່ວນໃດ ໆ ແຫ່ງກາຍ ຂອງທ່ານທົ່ວທັງໂຕທີ່ປິຕິແລະສຸກອັນເກີດຈາກວິເວກ ຈະບໍ່ຖືກຕ້ອງ ປຽບຄືພະນັກງານອາບນ້ຳຫຼືລູກມືພະນັກງານ ອາບນ້ຳຜູ້ສະຫຼາດ ຈະເພີ່ງໃສ່ຜົງສີໂຕລົງໃນພາຊະນະສຳຣິດແລ້ວພົມດ້ວຍນ້ຳໝັກໄວ້ ຕົກເວລາຄ່ຳຜົງສີໂຕຈັບໂຕຕິດເປັນກ້ອນ ບໍ່ກະຈາຍອອກ ສັນໃດ ພິກຂຸກໍຄືກັນສັນນັ້ນແລ ທຳກາຍນີ້ແລໃຫ້ຊຸ່ມ

ຊື່ນອິ່ມເອີບ ຊາບຊ່ານດ້ວຍປີຕິແລະສຸກອັນເກີດຈາກວິເວກ ບໍ່ມີສ່ວນໃດ ໆ ແຫ່ງກາຍຂອງທ່ານ ທົ່ວທັງໂຕທີ່ປີຕິແລະສຸກອັນເກີດຈາກວິເວກຈະບໍ່ຖືກຕ້ອງ ນີ້ຄືການຈະເລີນສຳມາສະມາທິທີ່ ປະກອບດ້ວຍອົງ ໕ ອັນເປັນອະຣິຍະ ປະການທີ ໑

໒. ພິກຂຸບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ຍ້ອນວິຕົກວິຈານສະງົບລະງັບໄປ ມີແຕ່ປີຕິ ແລະສຸກອັນເກີດຈາກສະມາທິຢູ່ ທ່ານທຳກາຍນີ້ໃຫ້ຊຸ່ມຊື່ນອິ່ມເອີບຊາບຊ່ານ ດ້ວຍປີຕິແລະສຸກອັນເກີດຈາກສະມາທິ ບໍ່ມີສ່ວນໃດ ໆ ແຫ່ງກາຍຂອງທ່ານ ທົ່ວທັງໂຕທີ່ປີຕິແລະສຸກອັນເກີດຈາກສະມາທິຈະບໍ່ຖືກຕ້ອງ ປຽບຄື ແມ່ນ້ຳເລິກທີ່ມີນ້ຳປັ່ນປ່ວນ ບໍ່ມີທາງໄຫຼມາໄດ້ທັງໃນທິດຕາເວັນອອກ ທິດໃຕ້ ທິດຕາເວັນຕົກ ທິດເໜືອ ແລະຝົນກໍບໍ່ຕົກເພີ່ມຕາມລະດູ ແຕ່ສາຍນ້ຳເຢັນພຸຂຶ້ນຈາກແມ່ນ້ຳນັ້ນແລ້ວ ຈະເພິ່ງເຮັດ ແມ່ນ້ຳນັ້ນແລໃຫ້ຊຸ່ມຊື່ນອິ່ມເອີບ ຊຶມຊາບດ້ວຍນ້ຳເຢັນ ບໍ່ມີສ່ວນໃດ ໆ ແຫ່ງແມ່ນ້ຳນັ້ນທັງໝົດທີ່ ນ້ຳເຢັນຈະບໍ່ຖືກຕ້ອງ ສັນໃດ ພິກຂຸກໍຄືກັນສັນນັ້ນແລ ຍ່ອມທຳກາຍນີ້ໃຫ້ ຊຸ່ມຊື່ນອິ່ມເອີບຊາບ ຊ່ານດ້ວຍປີຕິແລະສຸກອັນເກີດຈາກສະມາທິ ບໍ່ມີສ່ວນ ໃດ ໆ ແຫ່ງກາຍຂອງທ່ານທົ່ວທັງໂຕທີ່ປີ ຕິແລະສຸກອັນເກີດຈາກສະມາທິຈະບໍ່ຖືກຕ້ອງ ນີ້ຄືການຈະເລີນສຳມາສະມາທິທີ່ປະກອບດ້ວຍອົງ ໕ ອັນເປັນອະຣິຍະ ປະການທີ ໒

໓. ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ຍ້ອນປີຕິ ຈາງ ຄາຍອອກ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນ ສຸກ ທ່ານທຳກາຍນີ້ແລໃຫ້ຊຸ່ມຊື່ນອິ່ມເອີບຊາບຊ່ານ ດ້ວຍສຸກອັນປາສະຈາກປີຕິ ບໍ່ມີສ່ວນໃດ ໆ ແຫ່ງກາຍຂອງທ່ານທົ່ວທັງໂຕ ທີ່ສຸກອັນປາສະຈາກປີຕິຈະບໍ່ຖືກຕ້ອງ ປຽບຄືກໍອຸບົນ ກໍບົວ ຫຼວງ ຫຼືກໍບົວຂາວບາງເຫຼົ່າເຊິ່ງເກີດໃນນ້ຳ ຍັງບໍ່ພົ້ນນ້ຳ ຈົມຢູ່ໃນນ້ຳ ຖືກນ້ຳຫລໍ່ລ້ຽງໄວ້ ດອກບົວເຫຼົ່າ ນັ້ນຊຸ່ມຊື່ນອິ່ມເອີບຊຶມຊາບດ້ວຍນ້ຳເຢັນ ຕະຫຼອດຍອດ ຕະຫຼອດເຫງົ້າ ບໍ່ມີສ່ວນໃດ ໆ ແຫ່ງ ດອກບົວ ດອກບົວຫຼວງ ຫຼືດອກບົວຂາວທົ່ວທຸກສ່ວນທີ່ນ້ຳເຢັນຈະບໍ່ຖືກຕ້ອງ ສັນໃດ ພິກຂຸກໍ ສັນນັ້ນ ຄືກັນແລ ຍ່ອມທຳກາຍນີ້ແລໃຫ້ຊຸ່ມຊື່ນອິ່ມເອີບຊາບຊ່ານດ້ວຍສຸກ ອັນປາສະຈາກປີຕິ ບໍ່ ມີສ່ວນໃດ ໆ ແຫ່ງກາຍຂອງທ່ານທົ່ວທັງໂຕທີ່ສຸກອັນປາສະຈາກປີຕິຈະບໍ່ຖືກຕ້ອງ ນີ້ຄືການ ຈະເລີນສຳມາສະມາທິທີ່ປະກອບດ້ວຍອົງ ໕ ອັນເປັນອະຣິຍະ ປະການທີ ໓

໔. ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ຍ້ອນລະ ສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປ ກ່ອນແລ້ວ ທ່ານນັ່ງແຜ່ໄປທົ່ວກາຍນີ້ແລ ດ້ວຍໃຈອັນບໍລິສຸດຜຸດຜ່ອງ ບໍ່ມີສ່ວນໃດ ໆ ແຫ່ງກາຍຂອງທ່ານທົ່ວທັງໂຕທີ່ໃຈອັນບໍລິສຸດຜຸດ ຜ່ອງຈະບໍ່ຖືກຕ້ອງ ປຽບຄືບຸຣຸດເພິ່ງເອົາຜ້າຂາວ ນັ່ງຄຸມໂຕຕະຫຼອດຫົວ ກໍບໍ່ມີສ່ວນໃດ ໆ ແຫ່ງ ກາຍທຸກສ່ວນຂອງເຂົາ ທີ່ຜ້າຂາວຈະບໍ່ຖືກຕ້ອງ ສັນໃດ ພິກຂຸກໍຄືກັນສັນນັ້ນແລ ທ່ານນັ່ງແຜ່ໄປ ທົ່ວກາຍນີ້ແລ ດ້ວຍໃຈ ອັນບໍລິສຸດຜຸດຜ່ອງບໍ່ມີສ່ວນໃດ ໆ ແຫ່ງກາຍຂອງທ່ານທົ່ວທັງໂຕ ທີ່ໃຈ

ອັນບໍລິສຸດຜຸດຜ່ອງຈະບໍ່ຖືກຕ້ອງ ນີ້ຄືການຈະເລີນສຳມາສະມາທິທີ່ປະກອບດ້ວຍອົງ ໕ ອັນເປັນອະຣິຍະ ປະການທີ ໔

໕. ພິກຂຸຮຽນປັດຈະເວກຂະນະນິມິດ[9] ມາດີ ມະນະສິການດີ ຊົງຈຳໄວ້ດີ ແທງຕະຫຼອດດີດ້ວຍປັນຍາ ປຽບຄື ຄົນໜຶ່ງເພິ່ງພິຈາລະນາເຫັນຄົນໜຶ່ງ ຄົນຢືນເພິ່ງພິຈາລະນາເຫັນຄົນນັ່ງ ຫຼືຄົນນັ່ງເພິ່ງພິຈາລະນາເຫັນຄົນນອນ ສັນໃດ ພິກຂຸກໍຄືກັນສັນນັ້ນແລ ທ່ານຮຽນປັດຈະເວກຂະນະນິມິດມາດີ ມະນະສິການດີ ຊົງຈຳໄວ້ດີ ແທງຕະຫຼອດດີດ້ວຍປັນຍາ ນີ້ຄືການຈະເລີນສຳມາສະມາທິທີ່ປະກອບດ້ວຍອົງ ໕ ອັນເປັນອະຣິຍະ ປະການທີ ໕

ພິກຂຸທັງຫຼາຍ ເມື່ອສຳມາສະມາທິທີ່ປະກອບດ້ວຍອົງ ໕ ອັນເປັນອະຣິຍະ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວແນວນີ້ ທ່ານນ້ອມຈິດໄປເພື່ອເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເຊິ່ງທຳໃດ ໆ ທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ ເມື່ອມີເຫດ[6] ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມ ທີ່ຈະປະຈັກແຈ້ງໃນທຳນັ້ນ ໆ ປຽບຄື ໝໍ້ນ້ຳຕັ້ງຢູ່ເທິງເຊີງຮອງ ເຕັມດ້ວຍນ້ຳພຽງຂອບປາກພໍທີ່ກາຈະດື່ມໄດ້ ບຸຣຸດຜູ້ມີກຳລັງເພິ່ງອຽງໝໍ້ນ້ຳນັ້ນໄປຮອບ ໆ ນ້ຳຈະເພືອດອອກມາໄດ້ບໍ?

"ໄດ້ ຂ້ານ້ອຍ"

"ພິກຂຸກໍຄືກັນສັນນັ້ນ ເມື່ອສຳມາສະມາທິອັນປະກອບດ້ວຍອົງ ໕ ອັນເປັນອະຣິຍະທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວແນວນີ້ ທ່ານນ້ອມຈິດໄປເພື່ອເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເຊິ່ງທຳໃດ ໆ ທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ ປຽບຄືສະນ້ຳມີລັກສະນະສີ່ຫຼ່ຽມໃນພື້ນທີ່ງຮາບ ກັ້ນດ້ວຍທຳນົບ ເຕັມດ້ວຍນ້ຳພຽງຂອບປາກພໍທີ່ກາຈະດື່ມໄດ້ ບຸຣຸດຜູ້ມີກຳລັງເພິ່ງເປີດທຳນົບສະນ້ຳທຸກ ໆ ດ້ານ ນ້ຳຈະໄຫຼອອກມາໄດ້ບໍ?

"ໄດ້ ຂ້ານ້ອຍ"

"ພິກຂຸກໍຄືກັນສັນນັ້ນ ເມື່ອສຳມາສະມາທິອັນປະກອບດ້ວຍອົງ ໕ ອັນເປັນອະຣິຍະທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ທ່ານນ້ອມຈິດໄປເພື່ອເຮັດໃຫ້ແຈ້ງດ້ວຍປັນຍາ ອັນຍິ່ງເຊິ່ງທຳໃດ ໆ ທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມ ທີ່ຈະປະຈັກແຈ້ງໃນທຳນັ້ນ ໆ"

ປຽບຄື ລົດມ້າທີ່ທຽມແລ້ວຈອດຢູ່ທີ່ທາງໃຫຍ່ສີ່ແຍກ ມີພື້ນຮາບພຽງມີເຫຼັກແຫຼມ ວາງໄວ້ຂ້າງເທິງ ຄົນເຝິກມ້າຜູ້ດຸໝັ່ນຊ່ຽວຊານໃນການເຝິກຂຶ້ນລົດນັ້ນແລ້ວ ຖືເຊືອກດ້ວຍມືຊ້າຍ ຖືເຫຼັກແຫຼມດ້ວຍມືຂວາ ເພິ່ງຂັບລົດໃຫ້ເດີນໜ້າແດ່ ໃຫ້ຖອຍຫຼັງແດ່ໄດ້ຕາມຕ້ອງການ ສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອສຳມາສະມາທິອັນປະກອບດ້ວຍອົງ ໕ ອັນເປັນອະຣິຍະ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວແນວນີ້ ທ່ານນ້ອມຈິດໄປເພື່ອເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເຊິ່ງທຳໃດ ທີ່ຄວນ

ເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມ ທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນ ຫວັງວ່າ "ເຮົາເພິ່ງສະແດງລິດໄດ້ຫຼາຍແບບ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຯລຯ[9] ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນ ຫວັງວ່າ "ເຮົາເພິ່ງໄດ້ຍິນສຽງ ໒ ຊະນິດ ຄືສຽງທິບແລະສຽງມະນຸດ ທັງທີ່ຢູ່ໄກແລະຢູ່ໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນ ຫວັງວ່າ "ເຮົາເພິ່ງກຳນົດຮູ້ຈິດຂອງສັດແລະບຸກຄົນອື່ນໄດ້ດ້ວຍຈິດຂອງຕົນ ຄື ຈິດມີຣາຄະກໍຮູ້ວ່າມີຣາຄະ ຫຼືປາສະຈາກຣາຄະກໍຮູ້ວ່າປາສະຈາກຣາຄະ ຈິດມີໂທສະກໍຮູ້ວ່າມີໂທສະ ຫຼືປາສະຈາກໂທສະກໍຮູ້ວ່າປາສະຈາກໂທສະ ຈິດມີໂມຫະກໍຮູ້ວ່າມີໂມຫະ ຫຼືປາສະຈາກໂມຫະກໍຮູ້ວ່າປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ວ່າຫົດຫູ່ ຫຼືຟຸ້ງຊ່ານກໍຮູ້ວ່າຟຸ້ງຊ່ານ ຈິດເປັນມະຫັກຄະຕະກໍຮູ້ວ່າເປັນມະຫັກຄະຕະ ບໍເປັນມະຫັກຄະຕະກໍຮູ້ວ່າບໍ່ເປັນມະຫັກຄະຕະ ຈິດມີຈິດອື່ນຍິ່ງກວ່າກໍຮູ້ວ່າມີຈິດອື່ນຍິ່ງກວ່າ ບໍມີຈິດອື່ນຍິ່ງກວ່າກໍຮູ້ວ່າບໍ່ມີຈິດອື່ນຍິ່ງກວ່າ ຈິດເປັນສະມາທິກໍຮູ້ວ່າເປັນສະມາທິ ບໍເປັນສະມາທິກໍຮູ້ວ່າບໍ່ເປັນສະມາທິ ຈິດລຸດພົ້ນກໍຮູ້ວ່າລຸດພົ້ນ ບໍລຸດພົ້ນກໍຮູ້ວ່າບໍ່ລຸດພົ້ນ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ "ເຮົາເພິ່ງຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ເຮົາເພິ່ງຣະນຶກເຖິງຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແບບນີ້ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ "ເຮົາເພິ່ງເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ເພິ່ງຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ ຯລຯ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ "ເຮົາເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

**ປັນຈັງຄິກະສູດທີ ໘ ຈົບ**

# ໙. ຈັງກະມະສູດ

## ວ່າດ້ວຍການຍ່າງຈົງກົມ

[໒໙] ພິກຂຸທັງຫຼາຍ ອານິສົງແຫ່ງການຍ່າງຈົງກົມ ໕ ປະການນີ້

ອານິສົງແຫ່ງການຍ່າງຈົງກົມ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ມີຄວາມອົດທົນຕໍ່ການເດີນທາງໄກ
໒. ເປັນຜູ້ມີຄວາມອົດທົນຕໍ່ການພໍ່າເພັງພຽນ
໓. ເປັນຜູ້ມີອາພາດໜ້ອຍ
໔. ອາຫານທີ່ກິນ ດື່ມ ຫຍໍ້າ ຊີມແລ້ວຍ່ອຍໄດ້ງ່າຍ
໕. ສະມາທິທີ່ໄດ້ຍ້ອນການຍ່າງຈົງກົມຕັ້ງຢູ່ໄດ້ດົນ

ພິກຂຸທັງຫຼາຍ ອານິສົງແຫ່ງການຍ່າງຈົງກົມ ໕ ປະການນີ້ແລ

**ຈັງກະມະສູດທີ ໙ ຈົບ**

# ໑໐. ນາຄິຕະສູດ

## ວ່າດ້ວຍພຣະນາຄິຕະ

[໓໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງໝູ່ບ້ານພາມແຄວ້ນໂກສົນຊື່ອິດສານັງຄະລະ ເລົ່າກັນວ່າ ເວລານັ້ນພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ແຄມປ່າຊື່ ອິດສານັງຄະລະ ໃກ້ໝູ່ບ້ານພາມຊື່ອິດສານັງຄະລະ

ພວກພາມ ແລະຄະຫະບໍດີຊາວບ້ານອິດສານັງຄະລະໄດ້ຮູ້ຂ່າວວ່າ "ທ່ານຜູ້ຈະເລີນຂ່າວວ່າ ພຣະສະມະນະໂຄດົມສາກະຍະບຸດ ຊົງບວດຈາກສາກະຍະຕະກູນ ສະເດັດເຖິງບ້ານອິດສານັງຄະລະ ປະທັບຢູ່ທີ່ແຄມປ່າຊື່ອິດສານັງຄະລະໃກ້ໝູ່ບ້ານພາມຊື່ອິດສານັງຄະລະ ທ່ານພຣະສະມະນະໂຄດົມພຣະອົງນັ້ນມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນ

ພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍພຣະອົງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ[໑] ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນ[໒] ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນແບບນີ້ເປັນຄວາມດີຢ່າງແທ້ຈິງ

ເມື່ອຄືນນັ້ນຜ່ານໄປ ພາມແລະຄະຫະບໍດີຊາວບ້ານອິດສານັງຄະລະ ຈຶ່ງພາກັນຖືເອົາຂອງຫຍ້ຳຂອງສັນຫຼວງຫຼາຍເຂົ້າໄປເຖິງແຄມປ່າຊື່ອິດສານັງຄະລະ ໄດ້ຢືນຊຸມນຸມກັນ ສົ່ງສຽງອື້ອຶງທີ່ຊຸ້ມປະຕູດ້ານນອກ

ສະໄໝນັ້ນແລ ທ່ານພຣະນາຄິຕະເປັນອຸປັດຖາກຂອງພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະ ພາກເຈົ້າຮັບສັ່ງຮຽກທ່ານພຣະນາຄິຕະມາຕັດຖາມວ່າ "ນາຄິຕະ ຄົນພວກໃດສົ່ງສຽງ ອື້ອຶງຢູ່ນັ້ນ ຄ້າຍພວກຊາວປະມົງແຍ່ງປາກັນ

ທ່ານພຣະນາຄິຕະຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພາມແລະຄະຫະບໍດີຊາວບ້ານອິດສານັງຄະລະເຫຼົ່ານັ້ນ ພາກັນຖືຂອງຫຍ້ຳຂອງສັນຫຼວງຫຼາຍມາຢືນຊຸມນຸມກັນຢູ່ທີ່ຊຸ້ມປະຕູດ້ານນອກ ເພື່ອຖວາຍພຣະຜູ້ມີພຣະພາກເຈົ້າ ແລະພິກຂຸສົງ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ນາຄິຕະ ເຮົາບໍ່ຕິດຍົດ ແລະຍົດກໍບໍ່ຕິດເຮົາ ຜູ້ໃດແລບໍ່ໄດ້ຕາມຄວາມປາຖະໜາ ບໍ່ໄດ້ໂດຍບໍ່ຍາກ ບໍ່ໄດ້ໂດຍບໍ່ລຳບາກເຊິ່ງເນກຂຳມະສຸກ[໓] ປະວິເວກສຸກ ອຸປະສະມະສຸກ ສຳໂພທະສຸກທີ່ເຮົາໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກນີ້ ຜູ້ນັ້ນຊື່ວ່າຍິນດີສຸກທີ່ບໍ່ສະອາດ ສຸກໃນການນອນຫຼັບ ແລະສຸກທີ່ອີງອາໄສລາບສັກກາຣະແລະ ການສັນເສີນ

ທ່ານພຣະນາຄິຕະຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າຜູ້ ສຸຄົດຈົ່ງຊົງຮັບ ບັດນີ້ ເປັນເວລາທີ່ພຣະຜູ້ມີພຣະພາກເຈົ້າຈະຊົງຮັບ ພຣະອົງຈັກສະເດັດໄປ ທາງໃດ ໆ ພາມຄະຫະບໍດີຊາວນິຄົມແລະຊາວຊົນນະບົດກໍຈັກຫຼັ່ງໄຫຼໄປທາງນັ້ນ ໆ ປຽບຄືເມື່ອຝົນເມັດໃຫຍ່ຕົກລົງມາ ນ້ຳຍ່ອມໄຫຼໄປຕາມບ່ອນຫຼຸບ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງມີສີນແລະປັນຍາ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ນາຄິຕະ ເຮົາບໍ່ຕິດຍົດ ແລະຍົດກໍບໍ່ຕິດເຮົາ ຜູ້ໃດແລບໍ່ໄດ້ຕາມຄວາມປາຖະໜາ ບໍ່ໄດ້ໂດຍບໍ່ຍາກ ບໍ່ໄດ້ໂດຍບໍ່ລຳບາກເຊິ່ງເນກຂຳມະສຸກ ປະວິເວກສຸກ ອຸປະສະມະສຸກ ສຳໂພທະສຸກທີ່ເຮົາໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່

ລຳບາກນີ້ ຜູ້ນັ້ນຊື່ວ່າຍິນດີສຸກທີ່ບໍ່ສະອາດ ສຸກໃນການນອນຫຼັບ ແລະສຸກທີ່ອີງອາໄສລາບສັກກາຣະແລະການສັນເສີນ

ນາຄິຕະ ອາຫານທີ່ກິນ ດື່ມ ຫຍ້ຳ ແລະຊີມຍ່ອມກາຍເປັນອຸດຈາຣະ ແລະປັດສາວະ ນີ້ເປັນຜົນແຫ່ງອາຫານນັ້ນ ປິຍະຊົນເກີດມີໂສກະ (ຄວາມໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ(ຄວາມທຸກໃຈ) ແລະອຸປາຍາດ (ຄວາມແຄ້ນໃຈ) ຍ້ອນສິ່ງທີ່ຮັກປ່ຽນເປັນອື່ນໄປ ນີ້ເປັນຜົນແຫ່ງຄວາມຮັກນັ້ນ ຄວາມເປັນຂອງປະຕິກູນໃນອະສຸພະນິມິດ[១] ຍ່ອມຕັ້ງຢູ່ແກ່ພິກຂຸຜູ້ຂົນຂວາຍການປະກອບຕາມອະສຸພະນິມິດ ນີ້ເປັນຜົນແຫ່ງການປະກອບຕາມອະສຸພະນິມິດນັ້ນ ຄວາມເປັນຂອງປະຕິ ກູນໃນຜັດສະ ຍ່ອມຕັ້ງຢູ່ແກ່ພິກຂຸຜູ້ພິຈາລະນາເຫັນຄວາມບໍ່ທ່ຽງໃນຜັດສາຍະຕະນະ[໒] ໖ ຢູ່ ນີ້ ເປັນຜົນແຫ່ງການພິຈາລະນາເຫັນຄວາມບໍ່ທ່ຽງໃນຜັດສາຍະຕະນະນັ້ນ ຄວາມເປັນຂອງປະຕິກູນໃນອຸປາທານ ຍ່ອມຕັ້ງຢູ່ແກ່ພິກຂຸຜູ້ພິຈາລະນາເຫັນຄວາມເກີດແລະຄວາມດັບໃນອຸປາທານຂັນ[໓] ໕ ນີ້ເປັນຜົນແຫ່ງການພິຈາລະນາເຫັນຄວາມເກີດແລະຄວາມດັບໃນອຸປາທານຂັນນັ້ນ

**ນາຄິຕະສູດທີ ໑໐ ຈົບ**

**ປັນຈັງຄິກະວັກທີ ໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປະຖົມອະຄາຣະວະສູດ | ໒. ທຸຕິຍະອະຄາຣະວະສູດ |
| ໓. ອຸປະກິເລສະສູດ | ໔. ທຸດສີລະສູດ |
| ໕. ອະນຸກຄະຫິຕະສູດ | ໖. ວິມຸດຕາຍະຕະນະສູດ |
| ໗. ສະມາທິສູດ | ໘. ປັນຈັງຄິກະສູດ |
| ໙. ຈັງກະມະສູດ | ໑໐. ນາຄິຕະສູດ |

# ៤. ສຸມະນະວັກ

## ໝວດວ່າດ້ວຍສຸມະນາຣາດຊະກຸມາຣີ[1]

## ໑. ສຸມະນະສູດ

## ວ່າດ້ວຍສຸມະນາຣາດຊະກຸມາຣີ

[໓໑] ສະໄໝໜຶ່ງ ༧ລ༧ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ສຸມະນາຣາດຊະກຸມາຣີມີລົດ ໕໐໐ ຄັນ ແລະກຸມາຣີ ໕໐໐ ຄົນຮ້ອມລ້ອມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ[៤] ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ສາວົກຂອງພຣະຜູ້ມີພຣະພາກເຈົ້າ ៤ ຄົນ ມີສັດທາສະເໝີກັນ ມີສິນສະເໝີກັນ ມີປັນຍາສະເໝີກັນ ຄົນໜຶ່ງເປັນທາຍົກ[໓] ຄົນໜຶ່ງບໍ່ແມ່ນທາຍົກ ຄົນທັງສອງນັ້ນ ຫຼັງຈາກຕາຍແລ້ວ ໄປເກີດໃນສຸກຄະຕິໂລກສະຫວັນ ທ່ານທັງສອງຜູ້ເປັນເທວະດານັ້ນ ເພິ່ງມີຄວາມພິເສດ ມີເຫດແຕກຕ່າງກັນບໍ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມີ ສຸມະນາ ຄືເທວະດາຜູ້ເຄີຍເປັນທາຍົກ ຍ່ອມຂົ່ມເທວະດາ ຜູ້ບໍ່ເຄີຍເປັນທາຍົກດ້ວຍຖານະ ໕ ປະການ ຄື

໑. ອາຍຸທີ່ເປັນທິບ
៤. ວັນນະທີ່ເປັນທິບ
໓. ສຸກທີ່ເປັນທິບ
៤. ຍົດທີ່ເປັນທິບ
໕. ອະທິປະໄຕທີ່ເປັນທິບ

ເທວະດາຜູ້ເຄີຍເປັນທາຍົກ ຍ່ອມຂົ່ມເທວະດາຜູ້ບໍ່ເຄີຍເປັນທາຍົກດ້ວຍຖານະ ໕ ປະການນີ້

"ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າເທວະດາທັງສອງນັ້ນ ຈຸຕິຈາກເທວະໂລກນັ້ນແລ້ວມາສູ່ຄວາມເປັນມະນຸດນີ້ ທ່ານທັງສອງຜູ້ເປັນມະນຸດນັ້ນ ເພິ່ງມີຄວາມພິເສດ ມີເຫດແຕກຕ່າງກັນບໍ

"ມີ ສຸມະນາ ຄືມະນຸດຜູ້ເຄີຍເປັນທາຍົກ ຍ່ອມຂົ່ມມະນຸດຜູ້ບໍ່ເຄີຍເປັນທາຍົກດ້ວຍຖານະ ໕ ປະການ ຄື

໑. ອາຍຸທີ່ເປັນຂອງມະນຸດ
៤. ວັນນະທີ່ເປັນຂອງມະນຸດ

໓. ສຸກທີ່ເປັນຂອງມະນຸດ ໔. ຍົດທີ່ເປັນຂອງມະນຸດ
໕. ອະທິປະໄຕທີ່ເປັນຂອງມະນຸດ

ມະນຸດຜູ້ເຄີຍເປັນທາຍົກ ຍ່ອມຂົ່ມມະນຸດຜູ້ບໍ່ເຄີຍເປັນທາຍົກດ້ວຍຖານະ ໕ ປະການນີ້

"ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າຄົນທັງສອງນັ້ນອອກບວດເປັນບັນພະຊິດ ທ່ານທັງສອງຜູ້ເປັນບັນພະຊິດນັ້ນ ເພິ່ງມີຄວາມພິເສດ ມີເຫດແຕກຕ່າງກັນບໍ?

"ມີ ສຸມະນາ ບັນພະຊິດຜູ້ເຄີຍເປັນທາຍົກ ຍ່ອມຂົ່ມບັນພະຊິດຜູ້ບໍ່ເຄີຍເປັນທາຍົກດ້ວຍຖານະ ໕ ປະການ ຄື

໑. ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍຈີວອນຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ
໒. ເມື່ອເຂົາຂໍຮ້ອງຈຶ່ງສັນບິນທະບາດຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງສັນໜ້ອຍ
໓. ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍເສນາສະນະຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ
໔. ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍຄິລານະປັດໄຈເພສັດຊະບໍຣິຂານຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ
໕. ຢູ່ຮ່ວມກັບເພື່ອນພົມມະຈາຣີເຫຼົ່າໃດ ເພື່ອນພົມມະຈາຣີເຫຼົ່ານັ້ນກໍປະພຶດຕໍ່ທ່ານດ້ວຍກາຍຍະກຳ ວະຈີກຳ ແລະມະໂນກຳເປັນທີ່ພໍໃຈ ເປັນສ່ວນຫຼາຍທີ່ບໍ່ພໍໃຈເປັນສ່ວນໜ້ອຍ ນຳສິ່ງເປັນທີ່ພໍໃຈມາເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ

ບັນພະຊິດຜູ້ເຄີຍເປັນທາຍົກ ຍ່ອມຂົ່ມບັນພະຊິດຜູ້ບໍ່ເຄີຍເປັນທາຍົກດ້ວຍຖານະ ໕ ປະການນີ້

"ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າຄົນທັງສອງນັ້ນບັນລຸອະຣະຫັດຕະຜົນ ທ່ານທັງສອງຜູ້ບັນລຸອະຣະຫັດຕະຜົນ ເພິ່ງມີຄວາມພິເສດ ມີເຫດແຕກຕ່າງກັນບໍ?

"ສຸມະນາ ເຮົາບໍ່ກ່າວວ່າແຕກຕ່າງກັນເລີຍໃນລະຫວ່າງວິມຸດຕິກັບວິມຸດຕິ[๑]

"ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ຂໍ້ນີ້ກໍານົດໄດ້ວ່າ ຄວນໃຫ້ທານ ຄວນທຳບຸນ ຍ້ອນບຸນເປັນອຸປະກາຣະແມ່ນແກ່ເທວະດາ ແມ່ນແກ່ມະນຸດ ແມ່ນແກ່ບັນພະຊິດ

"ເປັນແນວນັ້ນ ສຸມະນາ ຄວນໃຫ້ທານ ຄວນທຳບຸນ ຍ້ອນບຸນເປັນອຸປະກາຣະແມ່ນແກ່ເທວະດາ ແມ່ນແກ່ມະນຸດ ແມ່ນແກ່ບັນພະຊິດ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ດວງຈັນປາສະຈາກມົນທິນ ໂຄຈອນໄປໃນອາກາດສະຫາດ
ຍ່ອມສະຫວ່າງກວ່າໝູ່ດາວທັງໝົດໃນໂລກດ້ວຍຣັດສະໝີ ສັນໃດ[໑]
ບຸກຄົນຜູ້ສົມບູນດ້ວຍສີນ ມີສັດທາ ກໍຄືກັນສັນນັ້ນ
ຍ່ອມຮຸ່ງເຮືອງກວ່າຜູ້ຂີ້ຖີ່ທັງໝົດໃນໂລກດ້ວຍຈາຄະ
ກ້ອນເຟື້ອທີ່ລອຍໄປຕາມອາກາດ ມີສາຍຟ້າແມບເຫຼື້ອມເມືອບມາບ
ມີຍອດຕັ້ງຮ້ອຍ ໃຫ້ຝົນຕົກໃສ່ແຜ່ນດິນເຕັມບ່ອນໂນນແລະບ່ອນຫຼຸບ ສັນໃດ
ສາວົກຂອງພຣະສຳມາສຳພຸດທະເຈົ້າ ຜູ້ສົມບູນດ້ວຍທັດສະນະ[໒]
ເປັນບັນດິດ ກໍຄືກັນສັນນັ້ນ
ຍ່ອມຂົ່ມຜູ້ຂີ້ຖີ່ໄດ້ດ້ວຍເຫດ ໕ ປະການ
ຄື ອາຍຸ ວັນນະ ສຸກ ຍົດ ແລະໂພຄະຊັບ
ເຂົາຕາຍໄປແລ້ວຍ່ອມບັນເທີງໃນສະຫວັນ

**ສຸມະນະສູດທີ ໑ ຈົບ**

# ໘. ຈຸນທີສູດ

## ວ່າດ້ວຍຈຸນທີຣາດຊະກຸມາຣີ[໓]

[໓໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ກະລັນທະກະນິວາປະສະຖານ[໔] ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ຈຸນທີຣາດຊະກຸມາຣີມີລົດ ໕໐໐ ຄັນແລະກຸມາຣີ ໕໐໐ ຄົນ ຮ້ອມລ້ອມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຣາດຊະກຸມານພຣະນາມວ່າຈຸນທະ ພຣະພາດາຂອງຂ້ານ້ອຍ ກ່າວແນວນີ້ວ່າ "ຍິງຫຼືຊາຍກໍຕາມ ເຖິງພຣະພຸດທະເຈົ້າ ພຣະທຳ ແລະພຣະສົງວ່າ ເປັນສະຣະນະ ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ແລະເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣ[໑]ອັນເປັນເຫດແຫ່ງຄວາມຜະໝາດ ຜູ້ນັ້ນຫຼັງຈາກຕາຍແລ້ວຍ່ອມໄປເກີດໃນສຸກຄະຕິຢ່າງດຽວ ບໍ່ເກີດໃນທຸກຄະຕິ ຂ້ານ້ອຍຈຶ່ງຂໍທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຜູ້ເຫຼື້ອມໃສໃນສາດສະດາແນວໃດ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນ ສຸກຄະຕິຢ່າງດຽວ ບໍ່ເກີດໃນທຸກຄະຕິ ຜູ້ເຫຼື້ອມໃສໃນ

ທຳແນວໃດ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນ ສຸກຄະຕິຢ່າງດຽວ ບໍ່ເກີດໃນທຸກຄະຕິ ຜູ້ເຫຼື້ອມໃສໃນສົງແນວໃດ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນ ສຸກຄະຕິຢ່າງດຽວ ບໍ່ເກີດໃນທຸກຄະຕິ ຜູ້ທີ່ເຮັດໃຫ້ສີນແນວໃດບໍລິບູນ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸກຄະຕິຢ່າງດຽວ ບໍ່ເກີດໃນ ທຸກຄະຕິ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຈຸນທີ ສັດທັງຫຼາຍທີ່ບໍ່ມີຕີນ ມີສອງຕີນ ມີສີ່ຕີນ ຫຼືມີຕີນຫຼາຍກໍຕາມ ມີຮູບບໍມີຮູບກໍຕາມ ມີສັນຍາ ບໍ່ມີສັນຍາ ຫຼືມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນກໍຕາມ ມີປະມານທໍ່ໃດ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ບັນດິດກ່າວວ່າເລີດກວ່າສັດມີປະມານທໍ່ນັ້ນ ຜູ້ທີ່ເຫຼື້ອມໃສໃນພຣະພຸດທະເຈົ້າ ຊື່ວ່າເຫຼື້ອມໃສໃນສິ່ງທີ່ເລີດ ແລະວິບາກທີ່ເລີດຍ່ອມມີແກ່ບຸກຄົນຜູ້ເຫຼື້ອມໃສໃນສິ່ງທີ່ເລີດ

ທຳທີ່ປັດໄຈປຸງແຕ່ງ ຫຼື ທຳທີ່ປັດໄຈບໍ່ປຸງແຕ່ງ ມີປະມານທໍ່ໃດ ວິຣາຄະ (ຄວາມຄາຍກຳໜັດ) ຄືຄວາມສວ່າງຄວາມເມົາ ຄວາມດັບຄວາມຢາກ ຄວາມຖອນອາໄລ ຄວາມຕັດວັດຕະຄວາມສິ້ນຕັນຫາ ຄວາມຄາຍກຳໜັດ ຄວາມດັບທຸກຄືນິບພານ ບັນດິດກ່າວວ່າເລີດກວ່າທຳເຫຼົ່ານັ້ນ ບຸກຄົນຜູ້ເຫຼື້ອມໃສໃນວິຣາຄະທຳ ຊື່ວ່າເຫຼື້ອມໃສໃນສິ່ງທີ່ເລີດ ແລະວິບາກທີ່ເລີດຍ່ອມມີແກ່ບຸກຄົນຜູ້ເຫຼື້ອມໃສໃນສິ່ງທີ່ເລີດ

ໝູ່ກໍດີ ຄະນະກໍດີ ມີປະມານທໍ່ໃດ ສົງສາວົກຂອງຕະຖາຄົດ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ຄື ໘ ບຸກຄົນ ສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ ບັນດິດກ່າວວ່າເລີດກວ່າໝູ່ຫຼືຄະນະເຫຼົ່ານັ້ນ ບຸກຄົນຜູ້ເຫຼື້ອມໃສໃນສົງ ຊື່ວ່າເຫຼື້ອມໃສໃນສິ່ງທີ່ເລີດ ແລະວິບາກທີ່ເລີດຍ່ອມມີແກ່ບຸກຄົນຜູ້ເຫຼື້ອມໃສໃນສິ່ງທີ່ເລີດ

ສີນທັງຫຼາຍມີປະມານທໍ່ໃດ ສີນທີ່ພຣະອະຣິຍະຕ້ອງການ[໑] ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ບັນດິດກ່າວວ່າເລີດກວ່າສີນເຫຼົ່ານັ້ນ ບຸກຄົນຜູ້ເຮັດສີນທີ່ພຣະອະຣິຍະຕ້ອງການໃຫ້ບໍລິບູນ ຊື່ວ່າເຮັດສິ່ງທີ່ເລີດໃຫ້ບໍລິບູນ ແລະວິບາກທີ່ເລີດຍ່ອມມີແກ່ບຸກຄົນຜູ້ເຮັດສິ່ງທີ່ເລີດໃຫ້ບໍລິບູນ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

бບຸນທີ່ເລີດ ຄືອາຍຸ ວັນນະ ກຽດຕິຍົດ ສຸກ ແລະພະລະ
ຍ່ອມຈະເລີນແກ່ບຸກຄົນຜູ້ເຫຼື້ອມໃສ
ຜູ້ຮູ້ທຳທີ່ເລີດໂດຍຄວາມເປັນທຳທີ່ເລີດ
ຜູ້ເຫຼື້ອມໃສໃນພຣະພຸດທະເຈົ້າຜູ້ເລີດ

ເຊິ່ງເປັນທັກຂິໄນຍະບຸກຄົນຊັ້ນເລີດ
ຜູ້ເຫຼື້ອມໃສໃນພຣະທຳທີ່ເລີດອັນເປັນທີ່ຄາຍຄວາມກຳໜັດ
ເປັນທີ່ສະງົບລະງັບ ນຳສຸກມາໃຫ້
ຜູ້ເຫຼື້ອມໃສໃນພຣະສົງຜູ້ເລີດເຊິ່ງເປັນນາບຸນອັນປະເສີດ
ໃຫ້ທານໃນທ່ານຜູ້ເລີດ
ບັກປາດຜູ້ຕັ້ງໝັ້ນໃນທຳທີ່ເລີດ
ໃຫ້ທານແກ່ທ່ານຜູ້ເລີດ
ເກີດເປັນເທວະດາ ຫຼືມະນຸດກໍຕາມ
ເຖິງຄວາມເປັນຜູ້ເລີດ ບັນເທີງຢູ່

**ຈົບທີ່ສູດທີ ໘ ຈົບ**

## ໙. ອຸກຄະຫະສູດ

## ວ່າດ້ວຍອຸກຄະຫະເສດຖີ

[໓໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຊາຕິຍາວັນ ເຂດເມືອງພັດທິຍະ ຄັ້ງນັ້ນ ອຸກຄະຫະເສດຖີຜູ້ເປັນຫຼານຂອງເມນທະກະເສດຖີ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸ ໔ ອົງ ຈົ່ງຮັບພັດຕາຫານຂອງຂ້າພຣະອົງໃນມື້ອື່ນນີ້ ພຣະຜູ້ມີພຣະພາກເຈົ້າຊົງຮັບດ້ວຍພຣະອາການດຸດສະນີແລ້ວ ອຸກຄະຫະເສດຖີຮູ້ວ່າພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກອາສະນະ ຖວາຍອະພິວາດ ກະທຳປະທັກຂິນແລ້ວຫຼີກໄປ

ເມື່ອຄືນນັ້ນຜ່ານໄປ ເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດຈີວອນ ສະເດັດເຂົ້າໄປສູ່ນິເວດຂອງອຸກຄະຫະເສດຖີ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້

ລຳດັບນັ້ນ ອຸກຄະຫະເສດຖີໄດ້ຖວາຍອາຫານພິກຂຸສົງ ມີພຣະຜູ້ມີພຣະພາກເຈົ້າເປັນປະທານໃຫ້ອີ່ມໜຳດ້ວຍຂອງຫຍໍ້າຂອງສັນທີ່ປະນີດດ້ວຍມືຕົນເອງ ເມື່ອພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດ ຊົງວາງພຣະຫັດ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ລູກສາວຂອງຂ້າພຣະອົງເຫຼົ່ານີ້ ຈັກໄປສູ່ຕະກູນສາມີ ຂໍພຣະຜູ້ມີພຣະພາກເຈົ້າຊົງກ່າວສອນພ່ຳສອນເດັກເຫຼົ່ານີ້ ເຊິ່ງຈະເປັນປະໂຫຍດຕໍ່ພວກເຂົາຕະຫຼອດກາລະນານເທີ້ນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດສອນກຸມາຣີເຫຼົ່ານັ້ນວ່າ ກຸມາຣີທັງຫຼາຍ

໑. ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ມານດາບິດາຜູ້ປາຖະໜາປະໂຫຍດ ຫວັງເກື້ອກູນອະນຸເຄາະດ້ວຍຄວາມອີດູ ຍົກໃຫ້ສາມີໃດ ເຮົາທັງຫຼາຍຈັກຕື່ນກ່ອນ ນອນພາຍຫຼັງສາມີນັ້ນ ຖ້າຮັບໃຊ້ ປະຕິບັດໃຫ້ເປັນທີ່ພໍໃຈເຂົາ ເວົ້າຄຳມ່ວນຕໍ່ເຂົາ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

໒. ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ຊົນເຫຼົ່າໃດເປັນທີ່ເຄົາລົບຂອງສາມີ ຄື ບິດາ ມານດາ ຫຼືສະມະນະພາມ ເຮົາທັງຫຼາຍຈັກສັກກາຣະ ເຄົາລົບ ນັບຖືບູຊາຊົນເຫຼົ່ານັ້ນ ແລະຕ້ອນຮັບ ທ່ານເຫຼົ່ານັ້ນ ຜູ້ມາເຖິງແລ້ວດ້ວຍອາສະນະແລະນ້ຳ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

໓. ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ການງານເຫຼົ່າໃດເປັນວຽກງານໃນເຮືອນຂອງສາມີ ຄື ການເຮັດຜ້າຂົນສັດ ຫຼື ຜ້າຝ້າຍ ເຮົາທັງຫຼາຍຈັກດຸໝັ່ນ ບໍ່ຂີ້ຄ້ານໃນວຽກງານເຫຼົ່ານັ້ນ ຈັກປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາອັນເປັນອຸບາຍໃນວຽກງານ ເຫຼົ່ານັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ ແນວນີ້ແລ

໔. ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍ ຈັກຮູ້ວຽກງານທີ່ຄົນໃນປົກຄອງພາຍໃນເຮືອນສາມີ ຄື ຂ້າທາດ ຄົນໃຊ້ ຫຼືກຳມະກອນວ່າເຮັດແລ້ວ ຫຼືຍັງບໍ່ໄດ້ເຮັດ ຈັກຮູ້ອາການຂອງຄົນເຫຼົ່ານັ້ນທີ່ເປັນໄຂ້ວ່າດີຂຶ້ນຫຼືຊຸດລົງ ແລະຈັກແບ່ງປັນຂອງກິນຂອງໃຊ້ໃຫ້ຕາມສ່ວນທີ່ຄວນ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

໕. ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກຮັກສາຄຸ້ມຄອງສິ່ງທີ່ສາມີຫາມາໄດ້ ຈະເປັນຊັບ ເຂົ້າ ເງິນ ຫຼືຄຳກໍຕາມ ຈັກບໍ່ເປັນນັກເລງການພະນັນ ບໍ່ເປັນຂີ້ລັກ ບໍ່ເປັນນັກເລງ ສຸຣາ ບໍ່ລ້າງຜານຊັບສົມບັດ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

ກຸມາຣີທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາເຫຼົ່າມະນາປະກາຍິກາ[໑]

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ)

ແມ່ຍິງຜູ້ເປັນບັນດິດ ຍ່ອມບໍ່ດູໝິ່ນສາມີ
ຜູ້ມີຄວາມພຽນ ຂົນຂວາຍເປັນປະຈຳ

ລ້ຽງຕົນເອງທຸກເມື່ອ ຜູ້ໃຫ້ສິ່ງທີ່ຕ້ອງການໄດ້ທຸກຢ່າງ
ບໍ່ເຮັດໃຫ້ສາມີຂຸ່ນເຄືອງດ້ວຍການສະແດງຄວາມຫຶງຫວງ
ຍ້ອງຍໍທຸກຄົນທີ່ສາມີເຄົາລົບ ເປັນຄົນດຸໝັ່ນ
ບໍ່ຂີ້ຄ້ານ ສົງເຄາະຄົນຂ້າງຄຽງຂອງສາມີ
ປະຕິບັດຖືກໃຈສາມີ ຮັກສາຊັບທີ່ສາມີຫາມາໄດ້
ແມ່ຍິງຜູ້ປະພຶດຕາມໃຈສາມີແນວນີ້
ຈະເຂົ້າເຖິງຄວາມເປັນເທວະດາເຫຼົ່າມະນາປະກາຍິກາ

**ອຸກຄະຫະສູດທີ ໓ ຈົບ**

## ໔. ສີຫະເສນາປະຕິສູດ

## ວ່າດ້ວຍສີຫະເສນາບໍດີ

[໓໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄານສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນແລ ສີຫະເສນາບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດຜົນແຫ່ງທານທີ່ຈະເພິ່ງເຫັນເອງໄດ້ບໍ? ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບວ່າ "ໄດ້ ສີຫະ" ແລ້ວໄດ້ຕັດຕໍ່ໄປວ່າ ສີຫະ

໑. ທາຍົກ ທານະບໍດີ ຍ່ອມເປັນທີ່ຮັກທີ່ພໍໃຈຂອງຄົນທັງຫຼາຍ ແມ່ນຂໍ້ນີ້ ກໍເປັນຜົນແຫ່ງທານທີ່ຈະເພິ່ງເຫັນເອງ
໒. ສັດຕະບຸຣຸດຜູ້ສະງົບຍ່ອມຄົບຫາທາຍົກ ທານະບໍດີ ແມ່ນຂໍ້ນີ້ກໍເປັນຜົນແຫ່ງທານ ທີ່ຈະເພິ່ງເຫັນເອງ
໓. ກິດຕິສັບອັນງາມຂອງທາຍົກ ທານະບໍດີຍ່ອມຂ່າລືໄປ ແມ່ນຂໍ້ນີ້ກໍເປັນຜົນແຫ່ງທານທີ່ຈະເພິ່ງເຫັນເອງ
໔. ທາຍົກ ທານະບໍດີຈະເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ກໍເປັນຜູ້ແກ່ກ້າ ບໍ່ເກີ້ເຂີນເຂົ້າໄປ ແມ່ນຂໍ້ນີ້ກໍເປັນຜົນແຫ່ງທານທີ່ຈະເພິ່ງເຫັນເອງ
໕. ທາຍົກ ທານະບໍດີ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ແມ່ນຂໍ້ນີ້ກໍເປັນຜົນແຫ່ງທານທີ່ຈະເພິ່ງເຫັນເອງໃນພົບໜ້າ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສີຫະເສນາບໍດີຈຶ່ງຂາບທູນວ່າ "ຂ້າແດ່ພຣະ

ອົງຜູ້ຈະເລີນ ຂ້າພຣະອົງບໍ່ພຽງເຊື່ອຕໍ່ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງຜົນແຫ່ງທານ ໔ ປະການທີ່ພຣະຜູ້ມີພຣະພາກເຈົ້າຕັດບອກແລ້ວນີ້ທີ່ນັ້ນ ແຕ່ຍັງຮູ້ອີກນຳ ຄື ຂ້າພຣະອົງ ເປັນທາຍົກ ເປັນທານະບໍດີ ຍ່ອມເປັນທີ່ຮັກທີ່ພໍໃຈຂອງຄົນທັງຫຼາຍ ສັດຕະບຸຣຸດຜູ້ສະງົບຍ່ອມຄົບຫາຂ້າພຣະອົງຜູ້ເປັນທາຍົກເປັນທານະບໍດີ ກິດຕິສັບອັນງາມຂອງຂ້າພຣະອົງຜູ້ເປັນທາຍົກເປັນທານະບໍດີ ຍ່ອມຊ່າລືໄປວ່າ "ສີຫະເສນາບໍດີເປັນທາຍົກ ເປັນຜູ້ຮັບໃຊ້ ເປັນຜູ້ບຳລຸງ ພຣະສົງ ຂ້າພຣະອົງຜູ້ເປັນທາຍົກ ເປັນທານະບໍດີ ຈະເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນ ຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ກໍເປັນຜູ້ແກ່ກ້າ ບໍ່ເກີ້ເຂີນເຂົ້າໄປ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ພຽງເຊື່ອ ຕໍ່ພຣະຜູ້ມີພຣະພາກເຈົ້າໃນເລື້ອງຜົນແຫ່ງທານ ໔ ປະການທີ່ ພຣະຜູ້ມີພຣະພາກເຈົ້າຕັດບອກແລ້ວນີ້ທີ່ນັ້ນ ແຕ່ຍັງຮູ້ອີກນຳ ສ່ວນຜົນແຫ່ງທານທີ່ຈະເພິ່ງເຫັນເອງປະການທີ ໕ ທີ່ພຣະຜູ້ມີພຣະພາກເຈົ້າຕັດບອກຂ້າພຣະອົງແນວນີ້ວ່າ "ທາຍົກ ທານະບໍດີ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ນັ້ນຂ້າພຣະອົງຍັງບໍ່ຮູ້ ແຕ່ຂ້າພຣະອົງກໍເຊື່ອຕໍ່ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້

ພຣະຜູ້ມີພຣະພາກເຈົ້າຕັດຢ້ຳວ່າ "ຂໍ້ນັ້ນເປັນແນວນັ້ນ ສີຫະ ຂໍ້ນັ້ນເປັນແນວນັ້ນ ສີຫະ ຄື ທາຍົກ ທານະບໍດີ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ນໍຣະຊົນຜູ້ບໍ່ຂີ້ຖີ່ ໃຫ້ທານຢູ່
ຍ່ອມເປັນທີ່ຮັກຂອງຄົນທັງຫຼາຍ
ຄົນທັງຫຼາຍຍ່ອມຄົບຫານໍຣະຊົນນັ້ນ
ເຂົາຍ່ອມໄດ້ຮັບກຽດ ຈະເລີນດ້ວຍຍົດ
ເປັນຜູ້ບໍ່ເກີ້ເຂີນ ແກ່ກ້າເຂົ້າສູ່ບໍລິສັດ
ຍ້ອນເຫດນັ້ນແລ ບັນດິດທັງຫຼາຍຜູ້ຫວັງສຸກ
ຈົ່ງກຳຈັດຄວາມຂີ້ຖີ່ອັນເປັນມົນທິນແລ້ວໃຫ້ທານ
ບັນດິດເຫຼົ່ານັ້ນ ຍ່ອມດຳລົງໃນໄຕຣທິບ
ເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາ
ມ່ວນຊື່ນຢູ່ຕະຫຼອດການລະນານ
ບັນດິດເຫຼົ່ານັ້ນໄດ້ໂອກາດພໍ່າເພັງກຸສົນແລ້ວ
ລະໂລກນີ້ໄປ ຍ່ອມມີຣັດສະໝີພຸດຜ່ອງ
ທ່ຽວຊົມໄປໃນອຸທະຍານຊື່ນັນທະວັນ
ພຽບພ້ອມດ້ວຍການມະຄຸນ ໕
ເພີດເພີນ ມ່ວນຊື່ນ ບັນເທີງຢູ່ໃນນັນທະວັນນັ້ນ
ສາວົກທັງປວງຂອງພຣະສຸຄົດເຈົ້າຜູ້ບໍ່ມີກິເລດ ຜູ້ໝັ້ນຄົງ

ເຮັດຕາມພຣະດຳຣັດຂອງພຣະອົງແລ້ວ
ຍ່ອມມ່ວນຊື່ນໃນສະຫວັນ

**ສີຫະເສນາປະຕິສູດທີ ໔ ຈົບ**

## ໕. ທານານິສັງສະສູດ

## ວ່າດ້ວຍອານິສົງການໃຫ້ທານ

[໓໕] ພິກຂຸທັງຫຼາຍ ອານິສົງການໃຫ້ທານ ໕ ປະການນີ້

ອານິສົງການໃຫ້ທານ ໕ ປະການ ອັນໃດແດ່ ຄື

໑. ຜູ້ໃຫ້ທານຍ່ອມເປັນທີ່ຮັກທີ່ພໍໃຈຂອງຄົນທັງຫຼາຍ
໒. ສັດຕະບຸຣຸດຜູ້ສະງົບຍ່ອມຄົບຫາຜູ້ໃຫ້ທານ
໓. ກິດຕິສັບອັນງາມຂອງຜູ້ໃຫ້ທານຍ່ອມຂຈ່າລືໄປ
໔. ຜູ້ໃຫ້ທານຍ່ອມບໍ່ຫ່າງເຫີນຈາກທຳຂອງຄະລືຫັດ
໕. ຜູ້ໃຫ້ທານຫຼັງຈາກຕາຍແລ້ວຍ່ອມເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ອານິສົງການໃຫ້ທານ ໕ ປະການນີ້ແລ

ຜູ້ໃຫ້ທານຍ່ອມເປັນທີ່ຮັກຂອງຄົນທັງຫຼາຍ
ຊື່ວ່າດຳເນີນຕາມທຳຂອງສັດຕະບຸຣຸດ
ສັດຕະບຸຣຸດທັງຫຼາຍຜູ້ສະງົບ ຜູ້ສັງລວມອິນຊີ
ປະພຶດພົມມະຈັນ
ຍ່ອມຄົບຫາຜູ້ໃຫ້ທານທຸກເມື່ອ
ສັດຕະບຸຣຸດເຫຼົ່ານັ້ນຍ່ອມສະແດງທຳ
ເປັນເຄື່ອງບັນເທົາທຸກທັງປວງແກ່ເຂົາ
ເຂົາຮູ້ແຈ້ງທຳນັ້ນແລ້ວ
ເປັນຜູ້ບໍ່ມີອາສະວະ ປະຣິນິບພານໃນໂລກນີ້

**ທານານິສັງສະສູດທີ ໕ ຈົບ**

## ๖. ກາລະທານະສູດ

## ວ່າດ້ວຍກາລະທານ[๑]

[๓๖] ພິກຂຸທັງຫຼາຍ ກາລະທານ ໕ ປະການນີ້

ກາລະທານ ໕ ປະການ ອັນໃດແດ່ ຄື

໑. ໃຫ້ທານແກ່ຜູ້ມາສູ່ຖິ່ນຂອງຕົນ
໒. ໃຫ້ທານແກ່ຜູ້ກຽມຈະໄປ
໓. ໃຫ້ທານແກ່ຜູ້ເປັນໄຂ້
໔. ໃຫ້ທານໃນສະໄໝມີພິກສາຫາໄດ້ຍາກ
໕. ໃຫ້ເຂົ້າຢ່າງດີ ແລະໝາກໄມ້ໃໝ່ແກ່ຜູ້ມີສິນ

ພິກຂຸທັງຫຼາຍ ກາລະທານ ໕ ປະການນີ້ແລ

ຜູ້ມີປັນຍາຮູ້ຄວາມປະສົງຂອງຜູ້ຂໍ[๒]
ເປັນຜູ້ປາສະຈາກຄວາມຂີ້ຖີ່
ຍ່ອມໃຫ້ທານໃນການທີ່ຄວນໃຫ້
ທານທີ່ໃຫ້ໃນພຣະອະຣິຍະຜູ້ຊື່ກົງ ຜູ້ໝັ້ນຄົງ
ຍ່ອມເປັນທັກຂິນາທີ່ໄພບູນ
ເຮັດໃຫ້ເຂົາມີໃຈຜ່ອງໃສ
ຊົນເຫຼົ່າໃດອະນຸໂມທະນາຫຼືຂົນຂວາຍໃນທັກຂິນານັ້ນ
ຍ້ອນການອະນຸໂມທະນາຫຼືຂົນຂວາຍຂອງຊົນເຫຼົ່ານັ້ນ
ທັກຂິນາຍ່ອມມີຜົນບໍ່ຂາດ
ແມ່ນພວກເຂົາກໍເປັນຜູ້ມີສ່ວນແຫ່ງບຸນ
ຍ້ອນແນວນັ້ນ ຜູ້ມີຈິດບໍ່ທໍ້ຖອຍ
ຈຶ່ງຄວນໃຫ້ທານໃນເຂດທີ່ມີຜົນຫຼາຍ
ຍ້ອນບຸນເປັນບ່ອນເພິ່ງຂອງສັດທັງຫຼາຍໃນໂລກໜ້າ

**ກາລະທານສູດທີ ๖ ຈົບ**

# ໗. ໂພຊະນະທານະສູດ

## ວ່າດ້ວຍການໃຫ້ໂພຊະນະ

[໓໗] ພິກຂຸທັງຫຼາຍ ທາຍົກຜູ້ໃຫ້ໂພຊະນະ ຊື່ວ່າໃຫ້ຖານະ ໕ ປະການແກ່ປະຕິຄາຫົກ

ຖານະ ໕ ປະການ ອັນໃດແດ່ ຄື

໑. ອາຍຸ
໒. ວັນນະ
໓. ສຸກ
໔. ພະລະ
໕. ປະຕິພານ[1]

ເມື່ອໃຫ້ອາຍຸແລ້ວ ຍ່ອມມີສ່ວນໄດ້ອາຍຸອັນເປັນທິບ ຫຼືເປັນຂອງມະນຸດ ເມື່ອໃຫ້ວັນນະແລ້ວ ຍ່ອມມີສ່ວນໄດ້ວັນນະອັນເປັນທິບຫຼືເປັນຂອງມະນຸດ ເມື່ອໃຫ້ສຸກແລ້ວ ຍ່ອມມີສ່ວນໄດ້ສຸກອັນເປັນທິບ ຫຼືເປັນຂອງມະນຸດ ເມື່ອໃຫ້ພະລະແລ້ວ ຍ່ອມມີສ່ວນໄດ້ພະລະອັນເປັນທິບ ຫຼືເປັນຂອງມະນຸດ ເມື່ອໃຫ້ປະຕິພານແລ້ວ ຍ່ອມມີສ່ວນໄດ້ປະຕິພານອັນເປັນທິບ ຫຼືເປັນຂອງມະນຸດ

ພິກຂຸທັງຫຼາຍ ທາຍົກຜູ້ໃຫ້ໂພຊະນະ ຊື່ວ່າໃຫ້ຖານະ ໕ ປະການນີ້ແລ

ນັກປາດຜູ້ມີປັນຍາ ໃຫ້ອາຍຸ ຍ່ອມໄດ້ອາຍຸ
ໃຫ້ພະລະ ຍ່ອມໄດ້ພະລະ ໃຫ້ວັນນະ ຍ່ອມໄດ້ວັນນະ
ໃຫ້ປະຕິພານ ຍ່ອມໄດ້ປະຕິພານ ໃຫ້ສຸກ ຍ່ອມໄດ້ສຸກ
ເມື່ອໃຫ້ອາຍຸ ພະລະ ວັນນະ ສຸຂະ ແລະປະຕິພານແລ້ວ
ຈະເກີດໃນບ່ອນໃດ? ໆ ຍ່ອມເປັນຜູ້ມີອາຍຸຍືນ ມີຍົດໃນບ່ອນນັ້ນ ໆ

**ໂພຊະນະສູດທີ ໗ ຈົບ**

# ໘. ສັດທະສູດ

## ວ່າດ້ວຍອານິສົງແຫ່ງສັດທາ

[໓໘] ພິກຂຸທັງຫຼາຍ ກຸນລະບຸດຜູ້ມີສັດທາ ຍ່ອມໄດ້ອານິສົງ ໕ ປະການ

ອານິສົງ ໕ ປະການ ອັນໃດແດ່ ຄື

ສັດຕະບຸຣຸດທັງຫຼາຍຜູ້ສະງົບໃນໂລກ

໑. ເມື່ອຈະອະນຸເຄາະ ຍ່ອມອະນຸເຄາະຜູ້ມີສັດທາກ່ອນ ບໍ່ອະນຸເຄາະຜູ້ບໍ່ມີສັດທາກ່ອນ
໔. ເມື່ອຈະເຂົ້າໄປຫາ ຍ່ອມເຂົ້າໄປຫາຜູ້ມີສັດທາກ່ອນ ບໍ່ເຂົ້າໄປຫາຜູ້ບໍ່ມີສັດທາກ່ອນ
໓. ເມື່ອຈະຕ້ອນຮັບ ຍ່ອມຕ້ອນຮັບຜູ້ມີສັດທາກ່ອນ ບໍ່ຕ້ອນຮັບຜູ້ບໍ່ມີສັດທາກ່ອນ
໔. ເມື່ອຈະສະແດງທຳ ຍ່ອມສະແດງທຳແກ່ຜູ້ມີສັດທາກ່ອນ ບໍ່ສະແດງທຳແກ່ຜູ້ບໍ່ມີສັດທາກ່ອນ
໕. ກຸນລະບຸດຜູ້ມີສັດທາ ຫຼັງຈາກຕາຍແລ້ວຍ່ອມເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ກຸນລະບຸດຜູ້ມີສັດທາ ຍ່ອມໄດ້ອານິສົງ ໕ ປະການນີ້ແລ

ປຽບຄື ຕົ້ນໄຮໃຫຍ່ທີ່ທາງໃຫຍ່ສີ່ແຍກ ມີພື້ນຮາບພຽງ ຍ່ອມເປັນບ່ອນເພິ່ງຂອງໝູ່ນົກໂດຍຮອບ ສັນໃດ ກຸນລະບຸດຜູ້ມີສັດທາກໍຄືກັນສັນນັ້ນ ຍ່ອມເປັນບ່ອນເພິ່ງຂອງຄົນທັງຫຼາຍ ຄືພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ

ຕົ້ນໄມ້ໃຫຍ່ ມີງ່າ ໃບ ແລະໝາກ
ມີລຳຕົ້ນແຂງແຮງ ມີຮາກໝັ້ນຄົງ ສົມບູນດ້ວຍໝາກ
ຍ່ອມເປັນບ່ອນເພິ່ງຂອງນົກທັງຫຼາຍ
ຝູງນົກຍ່ອມອາໄສຕົ້ນໄມ້ນັ້ນເຊິ່ງເປັນທີ່ອອນຊອນໃຈ ໃຫ້ເກີດສຸກ
ຜູ້ຕ້ອງການຄວາມຮົ່ມເຢັນ ຍ່ອມເຂົ້າໄປອາໄສຮົ່ມເງົາ
ຜູ້ຕ້ອງການໝາກ ຍ່ອມບໍຣິໂພກໝາກໄດ້ ສັນໃດ
ທ່ານຜູ້ປາສະຈາກຣາຄະ ປາສະຈາກໂທສະ
ປາສະຈາກໂມຫະ ບໍ່ມີອາສະວະ ເປັນນາບຸນຂອງໂລກ
ຍ່ອມຄົບຫາບຸກຄົນຜູ້ມີສັດທາເຊິ່ງສົມບູນດ້ວຍສິນ
ປະພຶດຖ່ອມຕົນ ບໍ່ກະດ້າງໆ ສຸພາບ
ໜ້າຊົມຊື່ນ ອ່ອນໂຍນ ໝັ້ນຄົງ ສັນນັ້ນ
ທ່ານເຫຼົ່ານັ້ນຍ່ອມສະແດງທຳ
ເປັນເຄື່ອງບັນເທົາທຸກທັງປວງແກ່ເຂົາ
ເຂົາຮູ້ແຈ້ງທຳນັ້ນແລ້ວ
ເປັນຜູ້ບໍ່ມີອາສະວະ ປະຣິນິບພານໃນໂລກນີ້

**ສັດທະສູດທີ ໗ ຈົບ**

## ໗. ປຸດຕະສູດ
## ວ່າດ້ວຍບຸດ

[໓໗] ພິກຂຸທັງຫຼາຍ ມານດາບິດາ ເມື່ອເຫັນຖານະ ໕ ປະການນີ້ ຈຶ່ງປາຖະໜາບຸດຜູ້ເກີດໃນຕະກູນ

ຖານະ ໕ ປະການ ອັນໃດແດ່ ຄື

໑. ບຸດທີ່ເຮົາລ້ຽງມາແລ້ວຈັກລ້ຽງເຮົາ
໒. ບຸດຈັກຊ່ອຍເຮັດກິດຂອງເຮົາ
໓. ວົງຕະກູນຈັກດຳລົງຢູ່ໄດ້ດົນ
໔. ບຸດຈັກປະຕິບັດຕົນໃຫ້ສົມຄວນຮັບຊັບມໍລະດົກໄວ້
໕. ເມື່ອເຮົາທັງສອງຕາຍໄປ ບຸດຈັກທຳບຸນອຸທິດໃຫ້

ພິກຂຸທັງຫຼາຍ ມານດາບິດາເມື່ອເຫັນຖານະ ໕ ປະການນີ້ແລ ຈຶ່ງປາຖະໜາບຸດຜູ້ເກີດໃນຕະກູນ

ມານດາບິດາຜູ້ສະຫຼາດ
ເມື່ອເຫັນຖານະ ໕ ປະການ ຈຶ່ງປາຖະໜາບຸດ
ດ້ວຍຫວັງວ່າ "ບຸດທີ່ເຮົາລ້ຽງແລ້ວຈັກລ້ຽງເຮົາ
ຈັກຊ່ອຍເຮັດກິດຂອງເຮົາ
ວົງຕະກູນຈັກດຳລົງຢູ່ໄດ້ດົນ
ຈັກປະຕິບັດຕົນໃຫ້ສົມຄວນແກ່ການຮັບຊັບມໍລະດົກ
ແລະເມື່ອເຮົາທັງສອງຕາຍແລ້ວຈັກທຳບຸນອຸທິດໃຫ້
ມານດາບິດາຜູ້ສະຫຼາດ
ເມື່ອເຫັນຖານະເຫຼົ່ານີ້ ຈຶ່ງປາຖະໜາບຸດ
ຍ້ອນແນວນັ້ນ ບຸດຜູ້ເປັນສັດຕະບຸຣຸດ ຜູ້ສະງົບ
ເປັນກະຕັນຍູກະຕະເວທີບຸກຄົນ
ເມື່ອຣະນຶກເຖິງຄຸນທ່ານທີ່ເຮັດໄວ້ຕໍ່ເຮົາກ່ອນ
ຈຶ່ງລ້ຽງມານດາບິດາ ຊ່ອຍເຮັດກິດຂອງທ່ານ
ເຊື່ອຟັງໂອວາດ ຕອບສະໜອງພຣະຄຸນທ່ານ
ດຳລົງວົງຕະກູນສົມກັບທີ່ທ່ານເປັນບຸບພະກາຣີ
ບຸດຜູ້ມີສັດທາ ສົມບູນດ້ວຍສີນ
ຍ່ອມເປັນທີ່ສັນເສີນ

**ປຸດຕະສູດທີ ໗ ຈົບ**

## ໑໐. ມະຫາສາລະປຸດຕະສູດ

## ວ່າດ້ວຍຕົ້ນສາລະໃຫຍ່ກັບກຸນລະບຸດ

[໔໐] ພິກຂຸທັງຫຼາຍ ໄມ້ສາລະໃຫຍ່ອາໄສພູຫຼວງຫິມະພານ ຍ່ອມງອກງາມດ້ວຍຄວາມຈະເລີນ ໕ ປະການ

ຄວາມຈະເລີນ ໕ ປະການ ອັນໃດແດ່ ຄື

໑. ງ່າ ໃບແກ່ ແລະໃບອ່ອນ
໒. ເປືອກ
໓. ເກັດ
໔. ມອກ
໕. ແກ່ນ

ພິກຂຸທັງຫຼາຍ ໄມ້ສາລະໃຫຍ່ອາໄສພູຫຼວງຫິມະພານ ຍ່ອມງອກງາມດ້ວຍຄວາມຈະເລີນ ໕ ປະການນີ້ ສັນໃດ

ຊົນພາຍໃນ[໑]ອາໄສກຸນລະບຸດຜູ້ມີສັດທາ ຍ່ອມງອກງາມດ້ວຍຄວາມຈະເລີນ ໕ ປະການ ຄືກັນສັນນັ້ນ

ຄວາມຈະເລີນ ໕ ປະການ ອັນໃດແດ່ ຄື

໑. ສັດທາ (ຄວາມເຊື່ອ)
໒. ສີນ (ການຮັກສາກາຍວາຈາໃຫ້ຮຽບຮ້ອຍ)
໓. ສຸຕະ (ການສະດັບຟັງຫາຄວາມຮູ້)
໔. ຈາຄະ (ການເສຍສະລະ)
໕. ປັນຍາ (ຄວາມຮອບຮູ້)

ພິກຂຸທັງຫຼາຍ ຊົນພາຍໃນອາໄສກຸນລະບຸດຜູ້ມີສັດທາ ຍ່ອມງອກງາມດ້ວຍຄວາມຈະເລີນ ໕ ປະການນີ້

ພູຫີນມີຢູ່ໃນປ່າໃຫຍ່
ໝູ່ໄມ້ເຫຼົ່ານັ້ນອາໄສພູນັ້ນ
ຈະເລີນງອກງາມເຕີບໃຫຍ່ໃນປ່າ ແມ່ນສັນໃດ
ບຸດ ພັນລະຍາ ພວກພ້ອງ ອຳມາດ[໑] ໝູ່ຍາດ
ແລະຊົນຜູ້ອາໄສເຂົາລ້ຽງຊີບ ກໍຄືກັນສັນນັ້ນ

ອາໄສກຸນລະບຸດຜູ້ມີສັດທາ ສົມບູນດ້ວຍສິນ
ຍ່ອມງອກງາມໃນໂລກນີ້
ຊົນຜູ້ມີປັນຍາເຫັນແຈ້ງ ເຫັນສິນ
ຈາຄະ ແລະສຸດຈະຣິດ (ຄວາມປະພຶດດີ)
ຂອງກຸນລະບຸດຜູ້ມີສັດທານັ້ນແລ້ວຍ່ອມເຮັດຕາມ
ບຸກຄົນປະພຶດທຳເຊິ່ງເປັນທາງນຳສັດໄປສູ່ສຸກຄະຕິ
ຍ່ອມເພີດເພີນໃນໂລກນີ້ສົມປາຖະໜາ
ຍ່ອມບັນເທີງໃນເທວະໂລກ໌

**ມະຫາສາລະປຸດຕະສູດທີ ໑໐ ຈົບ**

**ສຸມະນະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໕. ມຸນທະຣາຊະວັກ

## ໝວດວ່າດ້ວຍພຣະເຈົ້າມຸນທະຣາຊະ

## ໑. ອາທິຍະສູດ

## ວ່າດ້ວຍປະໂຫຍດທີ່ຄວນຖືເອົາຈາກໂພຄະຊັບ

[໔໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ອະນາຖະບິນດິກະເສດຖີເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ວ່າ ຄະຫະບໍດີ ປະໂຫຍດທີ່ຈະເພິ່ງຖືເອົາຈາກໂພຄະຊັບ ໕ ປະການນີ້

ປະໂຫຍດ ໕ ປະການນີ້ ອັນໃດແດ່ ຄື

໑. ອະຣິຍະສາວົກໃນທຳວິໄນນີ້ຍ່ອມບຳລຸງຕົນເອງ ບຳລຸງມານດາບິດາ ບຳລຸງບຸດພັນລະຍາ ຂ້າທາດ ກຳມະກອນ ແລະຄົນໃຊ້ໃຫ້ເປັນສຸກ ບໍລິຫານໃຫ້ເປັນສຸກໂດຍຖືກຕ້ອງດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮິບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບດ້ວຍທຳ ໄດ້ມາໂດຍທຳ ນີ້ເປັນປະໂຫຍດທີ່ຄວນຖືເອົາຈາກໂພຄະຊັບປະການ ທີ່ ໑

໒. ອະຣິຍະສາວົກຍ່ອມບຳລຸງຕົນເອງບຳລຸງມິດແລະອຳມາດໃຫ້ເປັນສຸກ ບໍລິຫານໃຫ້ເປັນສຸກໂດຍຖືກຕ້ອງດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮິບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບດ້ວຍທຳ ໄດ້ມາໂດຍທຳ ນີ້ເປັນປະໂຫຍດທີ່ຄວນຖືເອົາຈາກໂພຄະຊັບ ປະການທີ ໒

໓. ອະຣິຍະສາວົກຍ່ອມປ້ອງກັນອັນຕະລາຍທີ່ເກີດຈາກໄຟ ນ້ຳ ພຣະຣາຊາ ໂຈນ ຄົນທີ່ບໍ່ມັກກັນ ຫຼື ຈາກທາຍາດ ເຮັດຕົນໃຫ້ປອດໄພ ນີ້ເປັນປະໂຫຍດທີ່ຄວນຖືເອົາຈາກໂພຄະຊັບປະການທີ ໓

໔. ອະຣິຍະສາວົກຍ່ອມກະທຳພີ[๒] ໕ ຢ່າງ ຄື (໑) ຍາຕິພີ (໒) ອະຕິຖິພີ (໓) ປຸບພະເປຕະພີ (໔) ຣາຊະພີ (໕) ເທວະຕາພີ ນີ້ ເປັນປະໂຫຍດທີ່ຄວນຖືເອົາຈາກໂພຄະຊັບປະການທີ ໔

໕. ອະຣິຍະສາວົກຍ່ອມຕັ້ງທັກຂິນາທີ່ມີຜົນສູງຂຶ້ນໄປ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນໃນສະມະນະພາມ ຜູ້ເວັ້ນຂາດຈາກຄວາມມົວເມົາ ແລະຄວາມຜະໝາດ ດຳລົງ ໝັ້ນຢູ່ໃນຂັນຕິ (ຄວາມອົດທົນ) ແລະໂສຣັດຈະ (ຄວາມສະຫງ່ຽມ) ເຝິກອົບຮົມຕົນເຮັດຕົນໃຫ້ສະງົບ ເຮັດຕົນໃຫ້ດັບເຢັນສະນິດ ດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮິບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບດ້ວຍທຳ ໄດ້ມາໂດຍທຳ ນີ້ເປັນປະໂຫຍດທີ່ຄວນຖືເອົາຈາກໂພຄະຊັບປະການທີ ໕

ຄະຫະບໍດີ ປະໂຫຍດທີ່ຄວນຖືເອົາຈາກໂພຄະຊັບ ໕ ປະການນີ້ແລ

ຖ້າເມື່ອອະຣິຍະສາວົກນັ້ນຖືເອົາປະໂຫຍດຈາກໂພຄະຊັບ ໕ ປະການນີ້ ໂພຄະຊັບໝົດສິ້ນໄປ ອະຣິຍະສາວົກນັ້ນຍ່ອມມີຄວາມຄິດແນວນີ້ວ່າ “ເຮົາໄດ້ຖືເອົາປະໂຫຍດຈາກໂພຄະຊັບນັ້ນແລ້ວ ແລະໂພຄະຊັບຂອງເຮົາກໍໝົດສິ້ນໄປ ດ້ວຍເຫດນີ້ ອະຣິຍະສາວົກນັ້ນ ຈຶ່ງບໍ່ມີວິບປະຕິສານ (ຄວາມຮ້ອນໃຈ) ຖ້າເມື່ອອະຣິຍະສາວົກນັ້ນຖືເອົາປະໂຫຍດຈາກໂພຄະຊັບ ໕ ປະການນີ້ ໂພຄະຊັບເພີ່ມພູນຂຶ້ນ ອະຣິຍະສາວົກນັ້ນຍ່ອມມີຄວາມຄິດແນວນີ້ວ່າ “ເຮົາຖືເອົາປະໂຫຍດຈາກ

ໂພຄະຊັບນີ້ແລ້ວ ແລະໂພຄະຊັບຂອງເຮົາກໍເພີ່ມພູນຂຶ້ນ ອະຣິຍະສາວົກນັ້ນຍ່ອມບໍ່ມີວິບປະຕິສານດ້ວຍເຫດທັງ ໔ ປະການນີ້ເລີຍ

ນໍຣະຊົນຜູ້ຈະຕ້ອງຕາຍເມື່ອຄຳນຶງເຖິງເຫດນີ້ ວ່າ

"ໂພຄະຊັບ ເຮົາໄດ້ບໍຣິໂພກແລ້ວ
ຄົນທີ່ຄວນລ້ຽງ ເຮົາໄດ້ລ້ຽງແລ້ວ
ອັນຕະລາຍທັງຫຼາຍ ເຮົາໄດ້ຂ້າມພົ້ນແລ້ວ
ທັກຂິນາທີ່ມີຜົນສູງຂຶ້ນໄປ ເຮົາໄດ້ໃຫ້ແລ້ວ
ແລະພີ ໕ ຢ່າງ ເຮົາໄດ້ເຮັດແລ້ວ
ທ່ານຜູ້ມີສີນສັງລວມລະວັງ ປະພຶດພົມມະຈັນ ເຮົາໄດ້ບຳລຸງແລ້ວ
ປະໂຫຍດທີ່ບັນດິດຜູ້ຢູ່ຄອງເຮືອນປາຖະໜາ ເຮົາກໍໄດ້ບັນລຸແລ້ວໂດຍລຳດັບ
ກຳທີ່ບໍ່ກໍ່ຄວາມເດືອດຮ້ອນໃນພາຍຫຼັງ ເຮົາກໍໄດ້ເຮັດແລ້ວ
ຊື່ວ່າ ເປັນຜູ້ຕັ້ງຢູ່ໃນອະຣິຍະທຳ
ບັນດິດທັງຫຼາຍຍ່ອມສັນເສີນເຂົາໃນໂລກນີ້
ເຂົາຕາຍໄປແລ້ວ ຍ່ອມບັນເທີງໃນສະຫວັນ

**ອາທິຍະສູດທີ ໑ ຈົບ**

## ໘. ສັບປຸຣິສະສູດ

## ວ່າດ້ວຍສັດຕະບຸຣຸດ

[໔໘] ພິກຂຸທັງຫຼາຍ ສັດຕະບຸຣຸດເມື່ອເກີດໃນຕະກູນ ຊື່ວ່າເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ຄົນທັງຫຼາຍ ຄື ມານດາ ບິດາ ບຸດ ພັນລະຍາ ຂ້າທາດ ກຳມະກອນ ຄົນໃຊ້ ມິດ ອຳມາ[໑] ແລະສະມະນະພາມ

ສັດຕະບຸຣຸດເມື່ອເກີດໃນຕະກູນ ຊື່ວ່າເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ຄົນທັງຫຼາຍ ຄື ແກ່ມານດາ ບິດາ ບຸດ ພັນລະຍາ ຂ້າທາດ ກຳມະກອນ ຄົນໃຊ້ ມິດ ອຳມາດ ແລະສະມະນະພາມ ປຽບຄືມະຫາເມກເຮັດເຂົ້າກ້າທັງປວງໃຫ້ງອກງາມ ຊື່ວ່າມີເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ຄົນທັງຫຼາຍ

ສັດຕະບຸຣຸດຄອບຄອງໂພຄະຊັບ
ເປັນຜູ້ເກື້ອກູນແກ່ຄົນທັງຫຼາຍ

ເທວະດາຍ່ອມຮັກສາເຂົາຜູ້ມີທຳຄຸ້ມຄອງແລ້ວ
ເປັນພະຫູສູດ ສົມບູນດ້ວຍສີນແລະຂໍ້ວັດປະຕິບັດ
ກຽດຍ່ອມບໍ່ລະເຂົາຜູ້ຕັ້ງຢູ່ໃນທຳ
ໃຜນໍ ຈະສາມາດຕິຕຽນເຂົາຜູ້ຕັ້ງຢູ່ໃນທຳ
ສົມບູນດ້ວຍສີນ ມີວາຈາສັດ
ມີຫິຣິ (ຄວາມລະອາຍຕໍ່ບາບ) ໃນໃຈ
ຄືແທ່ງຄຳຊົມພູນຸດ
ແມ່ນເທວະດາກໍຊົມ ເຖິງພົມກໍສັນເສີນເຂົາ

**ສັບປຸຣິສະສູດທີ ໘ ຈົບ**

## ໙. ອິດຖະສູດ

## ວ່າດ້ວຍທຳທີ່ໜ້າປາຖະໜາ

[໔໙] ຄັ້ງນັ້ນ ອະນາຖະບິນທິກະຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບອະນາຖະບິນທິກະຄະຫະບໍດີດັ່ງນີ້ ວ່າ

ຄະຫະບໍດີ ທຳ ໕ ປະການນີ້ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ ທຳ ໕ ປະການ ອັນໃດແດ່ ຄື

໑. ອາຍຸທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ
໒. ວັນນະທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ
໓. ສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ
໔. ຍົດທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ
໕. ສະຫວັນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

ຄະຫະບໍດີ ທຳ ໕ ປະການນີ້ແລ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

ທຳ ໕ ປະການນີ້ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ ເຮົາບໍ່ໄດ້ກ່າວວ່າ ຈະເພິ່ງໄດ້ຍ້ອນຄວາມອ້ອນວອນ ຫຼື ຍ້ອນຄວາມປາຖະໜາ ຖ້າທຳ ໕ ປະການນີ້

ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ ຈັກໄດ້ຍ້ອນການອ້ອນວອນ ຫຼື ຍ້ອນຄວາມປາຖະໜາໃນໂລກນີ້ແລ້ວ ໃຜນໍ ຈະເພິ່ງເສື່ອມຈາກອັນໃດໄດ້

ອະຣິຍະສາວົກຜູ້ຕ້ອງການອາຍຸ ບໍ່ຄວນອ້ອນວອນຫຼືເພີດເພີນອາຍຸ ຫຼືປະຕິບັດປະຕິປະທາອັນເປັນໄປເພື່ອອາຍຸຍ້ອນອາຍຸເປັນເຫດ ແທ້ຈິງແລ້ວປະຕິປະທາອັນເປັນໄປເພື່ອອາຍຸທີ່ອະຣິຍະສາວົກນັ້ນປະຕິບັດແລ້ວ ຍ່ອມເປັນໄປເພື່ອໃຫ້ໄດ້ອາຍຸ ອະຣິຍະສາວົກນັ້ນຍ່ອມໄດ້ອາຍຸອັນເປັນທິບ ຫຼືເປັນຂອງມະນຸດ

ອະຣິຍະສາວົກຜູ້ຕ້ອງການວັນນະ ບໍ່ຄວນອ້ອນວອນຫຼືເພີດເພີນວັນນະ ຫຼືປະຕິບັດປະຕິປະທາອັນເປັນໄປເພື່ອວັນນະຍ້ອນວັນນະເປັນເຫດ ແທ້ຈິງແລ້ວ ປະຕິປະທາອັນເປັນໄປເພື່ອວັນນະທີ່ອະຣິຍະສາວົກນັ້ນປະຕິບັດແລ້ວ ຍ່ອມເປັນໄປເພື່ອໃຫ້ໄດ້ວັນນະ ອະຣິຍະສາວົກນັ້ນຍ່ອມໄດ້ວັນນະອັນເປັນ ທິບ ຫຼືເປັນຂອງມະນຸດ

ອະຣິຍະສາວົກຜູ້ຕ້ອງການສຸກ ບໍ່ຄວນອ້ອນວອນຫຼືເພີດເພີນສຸກ ຫຼືປະຕິບັດປະຕິປະທາອັນເປັນໄປເພື່ອສຸກຍ້ອນສຸກເປັນເຫດ ແທ້ຈິງແລ້ວ ປະຕິປະທາອັນເປັນໄປເພື່ອສຸກທີ່ອະຣິຍະສາວົກນັ້ນປະຕິບັດແລ້ວ ຍ່ອມເປັນໄປເພື່ອໃຫ້ໄດ້ສຸກ ອະຣິຍະສາວົກນັ້ນຍ່ອມໄດ້ສຸກອັນເປັນທິບ ຫຼືເປັນຂອງມະນຸດ

ອະຣິຍະສາວົກຜູ້ຕ້ອງການຍົດ ບໍ່ຄວນອ້ອນວອນຫຼືເພີດເພີນຍົດ ຫຼືປະຕິບັດ ປະຕິປະທາອັນເປັນໄປເພື່ອຍົດຍ້ອນຍົດເປັນເຫດ ແທ້ຈິງແລ້ວ ປະຕິປະທາອັນເປັນໄປເພື່ອຍົດທີ່ອະຣິຍະສາວົກນັ້ນປະຕິບັດແລ້ວ ຍ່ອມເປັນໄປເພື່ອໃຫ້ໄດ້ຍົດ ອະຣິຍະສາວົກນັ້ນຍ່ອມໄດ້ຍົດອັນເປັນທິບ ຫຼືເປັນຂອງມະນຸດ

ຄະຫະບໍດີ ອະຣິຍະສາວົກຜູ້ຕ້ອງການສະຫວັນ ບໍ່ຄວນອ້ອນວອນຫຼືເພີດເພີນສະຫວັນ ຫຼືປະຕິບັດປະຕິປະທາອັນເປັນໄປເພື່ອສະຫວັນຍ້ອນສະຫວັນເປັນເຫດ ແທ້ຈິງແລ້ວ ປະຕິປະທາອັນເປັນໄປເພື່ອສະຫວັນອັນອະຣິຍະສາວົກນັ້ນປະຕິບັດແລ້ວ ຍ່ອມເປັນໄປເພື່ອໃຫ້ໄດ້ສະຫວັນ ອະຣິຍະສາວົກ ນັ້ນຍ່ອມໄດ້ສະຫວັນ

ຊົນຜູ້ປາຖະໜາອາຍຸ ວັນນະ ກຽດຕິຍົດ
ສະຫວັນ ການເກີດໃນຕະກູນສູງ ແລະຄວາມເພີນໃຈ
ເພິ່ງທຳຄວາມບໍ່ຜະໝາດໃຫ້ຫຼາຍຍິ່ງຂຶ້ນ
ບັນດິດທັງຫຼາຍສັນເສີນຄວາມບໍ່ຜະໝາດໃນການທຳບຸນ
ບັນດິດຜູ້ບໍ່ຜະໝາດແລ້ວ ຍ່ອມຍຶດປະໂຫຍດທັງສອງໄວ້ໄດ້
ຄືປະໂຫຍດໃນພົບນີ້ ແລະປະໂຫຍດໃນພົບໜ້າ

ຜູ້ມີປັນຍາ ທ່ານຮຽກວ່າ ບັນດິດ
ຍ້ອນບັນລຸເຖິງປະໂຫຍດທັງສອງນັ້ນແລ້ວ

**ອິດຖະສູດທີ ໓ ຈົບ**

## ໔. ມະນາປະທາຍີສູດ

## ວ່າດ້ວຍຜູ້ໃຫ້ສິ່ງທີ່ໜ້າພໍໃຈ

[໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄານສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດເຂົ້າໄປສູ່ນິເວດຂອງອຸກຄະຫະບໍດີຊາວນະຄອນເວສາລີ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ລຳດັບນັ້ນ ອຸກຄະຫະບໍດີໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນຂ້າພຣະອົງໄດ້ສະດັບຮັບມາສະເພາະ ພຣະພັກພຣະຜູ້ມີພຣະພາກ ເຈົ້າວ່າ "ຜູ້ໃຫ້ຂອງທີ່ໜ້າພໍໃຈ ຍ່ອມໄດ້ຂອງທີ່ໜ້າພໍໃຈ ກໍຂອງຫຍໍ້າຊື່ສາລະປຸບຜະກະເປັນທີ່ໜ້າພໍໃຈຂອງຂ້າພຣະອົງ ຂໍພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະຮັບ ຂາທະນີຍາຫານຂອງຂ້າ ພຣະອົງນັ້ນດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະຮັບແລ້ວ

ອຸກຄະຫະບໍດີໄດ້ຂາບທູນອີກວ່າ "ຂ້າພຣະອົງໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ຜູ້ໃຫ້ຂອງທີ່ໜ້າພໍໃຈຍ່ອມໄດ້ຂອງທີ່ໜ້າພໍໃຈ ກໍຊີ້ນໝູຢ່າງດີ[໗] ເປັນທີ່ໜ້າພໍໃຈຂອງຂ້າ ພຣະອົງ ຂໍພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະຮັບຊີ້ນໝູຢ່າງດີຂອງຂ້າພຣະອົງນັ້ນດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະຮັບແລ້ວ

ອຸກຄະຫະບໍດີໄດ້ຂາບທູນອີກວ່າ "ຂ້າພຣະອົງໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ຜູ້ໃຫ້ຂອງທີ່ໜ້າພໍໃຈຍ່ອມໄດ້ຂອງທີ່ໜ້າພໍໃຈ ກໍນາລີຍະສາກະ[໘] ເຊິ່ງຈືນດ້ວຍນ້ຳມັນເປັນທີ່ໜ້າພໍໃຈຂອງຂ້າພຣະອົງ ຂໍພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະຮັບນາລີຍະສາກະຂາທະນີຍາຫານຂອງຂ້າພຣະອົງນັ້ນດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະຮັບແລ້ວ

ອຸກຄະຫະບໍດີໄດ້ຂາບທູນອີກວ່າ "ຂ້າພຣະອົງໄດ້ສະດັບຮັບມາສະເພາະພຣະພັກ ພຣະຜູ້ມີພຣະພາກເຈົ້າວ່າ "ຜູ້ໃຫ້ຂອງທີ່ໜ້າພໍໃຈຍ່ອມໄດ້ຂອງທີ່ໜ້າພໍໃຈ ກໍເຂົ້າສຸກແຫ່ງເຂົ້າສາລີທີ່ຂາວສະອາດ ມີແກງແລະກັບຫຼາຍເປັນທີ່ໜ້າພໍໃຈຂອງຂ້າພຣະອົງ ຂໍພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະຮັບເຂົ້າສຸກແຫ່ງເຂົ້າສາລີຂອງຂ້າພຣະອົງນັ້ນດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະຮັບແລ້ວ

ອຸກຄະຫະບໍດີໄດ້ຂາບທູນອີກວ່າ "ຂ້າພຣະອົງໄດ້ສະດັບຮັບມາສະເພາະພຣະພັກ ພຣະຜູ້ມີພຣະພາກເຈົ້າວ່າ "ຜູ້ໃຫ້ຂອງທີ່ໜ້າພໍໃຈຍ່ອມໄດ້ຂອງທີ່ໜ້າພໍໃຈ ກໍຜ້າທີ່ທໍໃນແຄວັ້ນກາສີເປັນທີ່ໜ້າພໍໃຈຂອງຂ້າພຣະອົງ ຂໍພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະຮັບຜ້າຂອງຂ້າພຣະອົງນັ້ນດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະຮັບແລ້ວ

ອຸກຄະຫະບໍດີໄດ້ຂາບທູນອີກວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ຜູ້ໃຫ້ຂອງທີ່ໜ້າພໍໃຈຍ່ອມໄດ້ຂອງທີ່ໜ້າພໍໃຈ ກໍບັນລັງ[໗]ທີ່ລາດດ້ວຍຜ້າໂກເຊົາ[໘] ລາດດ້ວຍຜ້າຂົນແກະສີຂາວ ລາດດ້ວຍເຄື່ອງປູລາດມີສັນຖານເປັນຊໍ່ດອກໄມ້ ລາດດ້ວຍເຄື່ອງປູລາດຢ່າງດີເຮັດດ້ວຍໜັງຊະມົດ ມີເພດານຂ້າງເທິງ ມີໝອນສີແດງທັງ ໔ ຂ້າງ[໙] ເປັນທີ່ໜ້າພໍໃຈຂອງຂ້າພຣະອົງ ແລະຂ້າພຣະອົງກໍຮູ້ດີວ່າ ສິ່ງເຫຼົ່ານີ້ບໍ່ຄວນແກ່ພຣະຜູ້ມີພຣະພາກເຈົ້າ ຕຽງໄມ້ຈັນຂອງຂ້າພຣະອົງນີ້ລາຄາເກີນກວ່າ ໑໐໐,໐໐໐ ກະຫາປະນະ ຂໍພຣະຜູ້ມີພຣະພາກເຈົ້າ ຊົງອາໄສຄວາມອະນຸເຄາະຮັບຕຽງຂອງຂ້າພຣະອົງນັ້ນດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະຮັບແລ້ວ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງອະນຸໂມທະນາອຸກຄະຫະບໍດີຊາວນະຄອນເວສາລີດ້ວຍອະນຸໂມທະນີຍະກະຖານີ້ ວ່າ

ຜູ້ໃຫ້ຂອງທີ່ໜ້າພໍໃຈ ຍ່ອມໄດ້ຂອງທີ່ໜ້າພໍໃຈ
ຜູ້ໃດໃຫ້ເຄື່ອງນຸ່ງຫົ່ມ ບ່ອນນອນ ເຂົ້າ ນ້ຳ
ແລະປັດໄຈມີປະການຕ່າງ ໆ
ແກ່ທ່ານຜູ້ປະພຶດຊື່ກົງ ດ້ວຍຄວາມພໍໃຈ
ສິ່ງຂອງທີ່ໃຫ້ໄປແລ້ວນັ້ນ ເປັນຂອງທີ່ບໍລິຈາກແລ້ວ
ສະລະແລ້ວ ບໍ່ຄິດເອົາຄືນ
ຜູ້ນັ້ນຊື່ວ່າ ເປັນສັດຕະບຸຣຸດຮູ້ແຈ້ງວ່າ
ພຣະອະຣະຫັນປຽບດ້ວຍນາບຸນ
ບໍລິຈາກສິ່ງທີ່ບໍລິຈາກໄດ້ຍາກ

ໃຫ້ຂອງທີ່ໜ້າພໍໃຈ ຍ່ອມໄດ້ຂອງທີ່ໜ້າພໍໃຈ

ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າເມື່ອຊົງອະນຸໂມທະນາອຸກຄະຫະບໍດີຊາວນະຄອນເວສາລີດ້ວຍ ອະນຸໂມທະນີຍະກະຖາແລ້ວ ຈຶ່ງສະເດັດລຸກຈາກພຸດທະອາດຫຼີກໄປ

ຕໍ່ມາບໍ່ດົນ ອຸກຄະຫະບໍດີຊາວນະຄອນເວສາລີໄດ້ເຖິງແກ່ກຳ ເຂົ້າເຖິງຊັ້ນກາຍມະໂນໄມ ຊັ້ນໃດຊັ້ນໜຶ່ງ ສະໄໝນັ້ນແລ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ເມື່ອຣາຕີ໌ຜ່ານໄປ ອຸກຄະເທບພະບຸດມີມີວັນນະງົດງາມຫຼາຍ ເປັ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດຖາມວ່າ "ອຸກຄະ ສຳເລັດຕາມທີ່ທ່ານປະສົງແລ້ວບໍ ອຸກຄະເທບພະບຸດຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ສຳເລັດຕາມທີ່ຂ້າພຣະອົງປະສົງແລ້ວ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບອຸກຄະເທບພະບຸດດ້ວຍພຣະຄາຖາ ວ່າ

ຜູ້ໃຫ້ຂອງທີ່ໜ້າພໍໃຈ ຍ່ອມໄດ້ຂອງທີ່ໜ້າພໍໃຈ
ຜູ້ໃຫ້ຂອງທີ່ເລີດ ຍ່ອມໄດ້ຂອງທີ່ເລີດ
ຜູ້ໃຫ້ຂອງທີ່ດີ ຍ່ອມໄດ້ຂອງທີ່ດີ
ແລະຜູ້ໃຫ້ຂອງທີ່ປະເສີດ ຍ່ອມເຂົ້າເຖິງສະຖານທີ່ປະເສີດ
ນໍຣະຊົນໃດໃຫ້ຂອງທີ່ເລີດ ໃຫ້ຂອງທີ່ດີ
ແລະໃຫ້ຂອງທີ່ປະເສີດ
ນໍຣະຊົນນັ້ນ ຈະເກີດໃນບ່ອນໃດ? ໆ
ຍ່ອມເປັນຜູ້ມີອາຍຸຍືນ ມີຍົດໃນບ່ອນນັ້ນ ໆ

**ມະນາປະທາຍີສູດທີ ໔ ຈົບ**

## ໕. ປຸນຍາພິສັນທະສູດ[១]

## ວ່າດ້ວຍຫ້ວງບຸນກຸສົນ

[໔໕] ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ໕ ປະການນີ້ ນຳສຸກມາໃຫ້ ເປັນໄປເພື່ອ ໃຫ້ໄດ້ອາລົມດີລ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າ ປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ຫ້ວງບຸນກຸສົນ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃຊ້ສອຍຈີວອນຂອງທາຍົກໃດ ບັນລຸເຈໂຕສະມາທິທີ່ປະມານບໍ່ໄດ້ຢູ່ ຫ້ວງບຸນກຸສົນຂອງທາຍົກນັ້ນປະມານບໍ່ໄດ້ ນຳສຸກມາໃຫ້ ເປັນໄປເພື່ອ ໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

໒. ພິກຂຸສັນບິນທະບາດຂອງທາຍົກໃດ ຯລຯ

໓. ພິກຂຸໃຊ້ສອຍວິຫານຂອງທາຍົກໃດ ຯລຯ

໔. ພິກຂຸໃຊ້ສອຍຕຽງຕັ່ງຂອງທາຍົກໃດ ຯລຯ

໕. ພິກຂຸໃຊ້ສອຍຄິລານະປັດໄຈເພສັດຊະບໍຣິຂານຂອງທາຍົກໃດ ບັນລຸເຈໂຕສະມາທິທີ່ປະມານ ບໍ່ໄດ້ຢູ່ ຫ້ວງບຸນກຸສົນຂອງທາຍົກນັ້ນປະມານບໍ່ໄດ້ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ຫ້ວງບຸນກຸສົນ ໕ ປະການນີ້ແລ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກ ເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ການກຳນົດປະມານບຸນຂອງອະຣິຍະສາວົກຜູ້ພຽບພ້ອມດ້ວຍຫ້ວງບຸນກຸສົນ ໕ ປະການນີ້ວ່າ "ຫ້ວງບຸນກຸສົນມີປະມານເທົ່ານີ້ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າໃຄ່ ໜ້າພໍໃຈ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງແລ້ວ ຫ້ວງບຸນກຸສົນນັ້ນຍ່ອມເຖິງການນັບວ່າ "ເປັນກອງບຸນໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ

ການກຳນົດປະລິມານຂອງນ້ຳໃນມະຫາສະມຸດວ່າ "ນ້ຳມີປະລິມານເທົ່ານີ້ອາລະກະ[1] ນ້ຳມີປະລິມານເທົ່ານີ້ ໑໐໐ ອາລະກະ ນ້ຳມີປະລິມານເທົ່ານີ້ ໑,໐໐໐ ອາລະກະ ຫຼືນ້ຳມີປະລິມານເທົ່ານີ້ ໑໐໐,໐໐໐ ອາລະກະ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງແລ້ວ ປະລິມານຂອງນ້ຳໃນມະຫາສະມຸດນັ້ນຍ່ອມເຖິງການນັບວ່າ "ເປັນແມ່ນ້ຳໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ ສັນໃດ

ພິກຂຸທັງຫຼາຍ ການກຳນົດປະມານຂອງອະຣິຍະສາວົກຜູ້ພຽບພ້ອມດ້ວຍຫ້ວງບຸນ ກຸສົນ ໕ ປະການນີ້ວ່າ "ຫ້ວງບຸນກຸສົນມີປະມານເທົ່ານີ້ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງແລ້ວ ຫ້ວງບຸນກຸສົນນັ້ນຍ່ອມເຖິງການນັບວ່າ "ເປັນກອງບຸນໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ ສັນນັ້ນ

ແມ່ນ້ຳຫຼາຍສາຍອັ່ງອໍໄປດ້ວຍໝູ່ປາ
ໄຫຼບ່າໄປສູ່ມະຫາສະມຸດ

ອັນເປັນບ່ອນຂັງນ້ຳຂະໜາດໃຫຍ່ປະມານບໍ່ໄດ້
ມີສິ່ງທີ່ເປັນຕາຢ້ານຫຼາຍ ເປັນແຫຼ່ງຣັດຕະນະຊັ້ນເລີດ ສັນໃດ
ສາຍນ້ຳແຫ່ງບຸນ ຍ່ອມຫຼັ່ງໄຫຼໄປສູ່ນໍຣະຊົນ
ຜູ້ເປັນບັນດິດ ຜູ້ໃຫ້ເຂົ້າ ນ້ຳ ຜ້າ
ບ່ອນນອນ ບ່ອນນັ່ງ ແລະເຄື່ອງປູລາດ
ປຽບຄືແມ່ນ້ຳໄຫຼໄປສູ່ມະຫາສະມຸດ ສັນນັ້ນ

**ປຸນຍາພິສັນທະສູດທີ ໕ ຈົບ**

## ໖. ສຳປະທາສູດ

## ວ່າດ້ວຍສຳປະທາ

[໔໖] ພິກຂຸທັງຫຼາຍ ສຳປະທາ (ຄວາມເຖິງພ້ອມ) ໕ ປະການນີ້

ສຳປະທາ ໕ ປະການ ອັນໃດແດ່ ຄື

໑. ສັດທາສຳປະທາ (ຄວາມເຖິງພ້ອມດ້ວຍສັດທາ)
໒. ສີລະສຳປະທາ (ຄວາມເຖິງພ້ອມດ້ວຍສີນ)
໓. ສຸຕະສຳປະທາ (ຄວາມເຖິງພ້ອມດ້ວຍສຸຕະ)
໔. ຈາຄະສຳປະທາ (ຄວາມເຖິງພ້ອມດ້ວຍຈາຄະ)
໕. ປັນຍາສຳປະທາ (ຄວາມເຖິງພ້ອມດ້ວຍປັນຍາ)

ພິກຂຸທັງຫຼາຍ ສຳປະທາ ໕ ປະການນີ້ແລ

**ສຳປະທາສູດທີ ໖ ຈົບ**

## ໗. ທະນະສູດ

## ວ່າດ້ວຍຊັບ

[໔໗] ພິກຂຸທັງຫຼາຍ ທະນະ (ຊັບ) ໕ ປະການນີ້

ທະນະ ໕ ປະການ ອັນໃດແດ່ ຄື

໑. ສັດທາທະນະ (ຊັບຄືສັດທາ)

໒. ສີລະທະນະ (ຊັບຄືສີນ)
໓. ສຸຕະທະນະ (ຊັບຄືສຸຕະ)
໔. ຈາຄະທະນະ (ຊັບຄືຈາຄະ)
໕. ປັນຍາທະນະ (ຊັບຄືປັນຍາ)

ສັດທາທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ເປັນຜູ້ມີສັດທາ ເຊື່ອປັນຍາເຄື່ອງຕັດສະຣູ້ຂອງຕະຖາຄົດ ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ[໑] ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ຮຽກວ່າ ສັດທາທະນະ

ສີລະທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ[໒] ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣ[໓]ອັນເປັນເຫດແຫ່ງຄວາມຜະໝາດ ນີ້ຮຽກວ່າ ສີລະທະນະ

ສຸຕະທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ເປັນພະຫູສູດ ຯລຯ[໔] ແທງຕະຫຼອດດີດ້ວຍທິດຖິ ນີ້ຮຽກວ່າ ສຸຕະທະນະ

ຈາຄະທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ເປັນຜູ້ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມ[໕] ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການແຈກທານ ນີ້ຮຽກວ່າ ຈາຄະທະນະ

ປັນຍາທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມໝົດສິ້ນທຸກໂດຍຖືກຕ້ອງ ນີ້ຮຽກວ່າ ປັນຍາທະນະ

ພິກຂຸທັງຫຼາຍ ຊັບ ໕ ປະການນີ້ແລ

ຜູ້ໃດມີສັດທາຕັ້ງໝັ້ນບໍ່ຫວັ່ນໄຫວໃນຕະຖາຄົດ
ມີສີນງາມ ເປັນສີນທີ່ພຣະອະຣິຍະຕ້ອງການ (ແລະ) ສັນເສີນ

ມີຄວາມເຫຼື້ອມໃສໃນສົງ ແລະມີຄວາມເຫັນຊື່ກົງ
ບັນດິດທັງຫຼາຍຮຽກຜູ້ນັ້ນວ່າ "ເປັນຄົນບໍ່ຂັດສົນ
ຊີວິດຂອງເຂົາບໍ່ສູນເປົ່າ
ຍ້ອນແນວນັ້ນ ຜູ້ມີປັນຍາ
ເມື່ອລະນຶກເຖິງຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ
ຄວນປະກອບສັດທາ ສີນ ຄວາມເຫຼື້ອມໃສ
ແລະການເຫັນທຳ"

**ທະນະສູດທີ ໗ ຈົບ**

## ໘. ຖານະສູດ

## ວ່າດ້ວຍຖານະທີ່ໃຜ ໆ ບໍ່ເພິ່ງໄດ້

[໔໘] ພິກຂຸທັງຫຼາຍ ຖານະ[1] ໕ ປະການນີ້ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກນີ້ບໍ່ເພິ່ງໄດ້

ຖານະ ໕ ປະການ ອັນໃດແດ່ ຄື

໑. ຂໍສິ່ງທີ່ມີຄວາມແກ່ເປັນທຳມະດາ[2] ຢ່າແກ່
໒. ຂໍສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາ ຢ່າເຈັບໄຂ້
໓. ຂໍສິ່ງທີ່ມີຄວາມຕາຍເປັນທຳມະດາ ຢ່າຕາຍ
໔. ຂໍສິ່ງທີ່ມີຄວາມໝົດສິ້ນໄປເປັນທຳມະດາ ຢ່າໝົດສິ້ນໄປ
໕. ຂໍສິ່ງທີ່ມີຄວາມສູນຫາຍເປັນທຳມະດາ ຢ່າສູນຫາຍ

ສິ່ງທີ່ມີຄວາມແກ່ເປັນທຳມະດາຂອງປຸຖຸຊົນຜູ້ບໍ່ໄດ້ສະດັບ ຍ່ອມແກ່ໄປ ເມື່ອສິ່ງທີ່ມີຄວາມແກ່ເປັນທຳມະດາ ແກ່ໄປແລ້ວ ເຂົາບໍ່ພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນສິ່ງທີ່ມີຄວາມແກ່ເປັນທຳມະດາຂອງເຮົາຄົນດຽວທໍ່ນັ້ນທີ່ແກ່ໄປ ແທ້ຈິງແລ້ວ ສິ່ງທີ່ມີຄວາມແກ່ເປັນທຳມະດາຂອງສັດທັງປວງທີ່ມີການມາ ການໄປ ການຈຸຕິ ແລະການອຸບັດ ກໍແກ່ໄປທັງໝົດ ເມື່ອສິ່ງທີ່ມີຄວາມແກ່ເປັນທຳມະດາ ແກ່ໄປແລ້ວ ຖ້າເຮົາຈະເພິ່ງເສົ້າໂສກ ລຳບາກ ເຮຮົນ ທຸບເອິກ ຮໍ່າໄຮ ຫຼົງງົມງວາຍ ອາຫານເຮົາກໍຈະບໍ່ຍາກກິນ ກາຍກໍຈະເສົ້າໝອງ ວຽກງານກໍຈະຢຸດຊະງັກ ພວກສັດຕູກໍຈະດີໃຈ ແລະພວກມິດກໍຈະເສຍໃຈ ເມື່ອສິ່ງທີ່ມີຄວາມແກ່ເປັນທຳມະດາ ແກ່ໄປແລ້ວ ເຂົາຍ່ອມເສົ້າໂສກ ລຳບາກ ເຮຮົນ ທຸບເອິກ ຮໍ່າໄຮ ຫຼົງງົມງວາຍ ນີ້ຮຽກວ່າ ປຸຖຸຊົນຜູ້ບໍ່ໄດ້ສະດັບຖືກລູກສອນຄືຄວາມໂສກທີ່ມີພິດສຽບແທງແລ້ວ ຍ່ອມເຮັດຕົນນັ້ນເອງໃຫ້ເດືອດຮ້ອນ

ສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາຂອງປຸຖຸຊົນຜູ້ບໍ່ໄດ້ສະດັບ ຍ່ອມເຈັບໄຂ້ ຯລຯ ສິ່ງທີ່ມີຄວາມຕາຍເປັນທຳມະດາຂອງປຸຖຸຊົນຜູ້ບໍ່ໄດ້ສະດັບ ຍ່ອມຕາຍໄປ ຯລຯ ສິ່ງທີ່ມີຄວາມໝົດສິ້ນໄປເປັນທຳມະດາຂອງປຸຖຸຊົນຜູ້ບໍ່ໄດ້ສະດັບ ຍ່ອມໝົດສິ້ນໄປ ຯລຯ ສິ່ງທີ່ມີຄວາມສູນຫາຍເປັນທຳມະດາຂອງປຸຖຸຊົນຜູ້ບໍ່ໄດ້ສະດັບ ຍ່ອມສູນຫາຍໄປ ເມື່ອສິ່ງທີ່ມີຄວາມສູນຫາຍເປັນທຳມະດາສູນຫາຍໄປແລ້ວ ເຂົາບໍ່ພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນສິ່ງທີ່ມີຄວາມສູນຫາຍເປັນທຳມະດາຂອງເຮົາຄົນດຽວທໍ່ນັ້ນທີ່ ສູນຫາຍໄປ ແທ້ຈິງແລ້ວ ສິ່ງທີ່ມີຄວາມສູນຫາຍເປັນທຳມະດາຂອງສັດທັງປວງທີ່ມີການມາ ການໄປ ການຈຸຕິ ການອຸບັດ ກໍສູນຫາຍໄປທັງໝົດ ເມື່ອສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາ ສູນຫາຍໄປແລ້ວ ຖ້າເຮົາຈະເພິ່ງເສົ້າໂສກ ລຳບາກ ເຮຮົນ ທຸບເອິກຮ່ຳໄຮ ຫຼົງງົມງວາຍ ອາຫານເຮົາກໍຈະບໍ່ຍາກກິນ ກາຍກໍຈະເສົ້າໝອງ ວຽກງານກໍຈະຢຸດຊະງັກພວກສັດຕູກໍຈະດີໃຈ ແລະພວກມິດກໍຈະເສຍໃຈ ເມື່ອສິ່ງທີ່ມີຄວາມສູນຫາຍ ເປັນທຳມະດາສູນຫາຍໄປແລ້ວ ເຂົາຍ່ອມເສົ້າໂສກ ລຳບາກ ເຮຮົນ ທຸບເອິກ ຮ່ຳໄຮ ຫຼົງງົມງວາຍ ນີ້ຮຽກວ່າປຸຖຸຊົນຜູ້ບໍ່ໄດ້ສະດັບ ຖືກລູກສອນຄືຄວາມໂສກທີ່ມີພິດສຽບແທງແລ້ວ ຍ່ອມເຮັດຕົນນັ້ນເອງໃຫ້ເດືອດຮ້ອນ

ສ່ວນສິ່ງທີ່ມີຄວາມແກ່ເປັນທຳມະດາຂອງອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມແກ່ໄປ ເມື່ອສິ່ງທີ່ມີຄວາມແກ່ເປັນທຳມະດາແກ່ໄປແລ້ວ ອະຣິຍະສາວົກນັ້ນພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນສິ່ງທີ່ມີຄວາມແກ່ເປັນທຳມະດາຂອງເຮົາຄົນດຽວທໍ່ນັ້ນທີ່ແກ່ໄປ ແທ້ຈິງແລ້ວ ສິ່ງທີ່ມີຄວາມແກ່ເປັນທຳມະດາຂອງສັດທັງປວງທີ່ມີການມາ ການໄປ ການຈຸຕິ ການອຸບັດ ກໍແກ່ໄປທັງໝົດ ເມື່ອສິ່ງທີ່ມີຄວາມແກ່ເປັນທຳມະດາແກ່ໄປແລ້ວ ຖ້າເຮົາຈະເພິ່ງເສົ້າໂສກ ລຳບາກ ເຮຮົນ ທຸບເອິກຮ່ຳໄຮ ຫຼົງງົມງວາຍ ອາຫານເຮົາກໍຈະບໍ່ຍາກກິນ ກາຍກໍຈະເສົ້າໝອງ ວຽກງານກໍຈະຢຸດຊະງັກພວກສັດຕູກໍຈະດີໃຈ ແລະພວກມິດກໍຈະເສຍໃຈ ເມື່ອສິ່ງທີ່ມີຄວາມແກ່ເປັນທຳມະດາແກ່ໄປແລ້ວອະຣິຍະສາວົກນັ້ນຍ່ອມບໍ່ເສົ້າໂສກ ບໍ່ລຳບາກ ບໍ່ເຮຮົນ ບໍ່ທຸບເອິກ ບໍ່ຮ່ຳໄຮ ບໍ່ຫຼົງງົມງວາຍ ນີ້ຮຽກວ່າ ອະຣິຍະສາວົກຜູ້ໄດ້ສະດັບ ຖອນລູກສອນຄືຄວາມໂສກທີ່ມີພິດສຽບແທງປຸຖຸຊົນຜູ້ບໍ່ໄດ້ສະດັບເຮັດຕົນນັ້ນເອງໃຫ້ເດືອດຮ້ອນ ອະຣິຍະສາວົກຜູ້ບໍ່ມີຄວາມໂສກ ປາສະຈາກລູກສອນຍ່ອມດັບທຸກໄດ້ດ້ວຍຕົນເອງ

ສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາຂອງອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມເຈັບໄຂ້ ຯລຯ ສິ່ງທີ່ມີຄວາມຕາຍເປັນທຳມະດາ ຂອງອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມຕາຍໄປ ຯລຯ ສິ່ງທີ່ມີຄວາມໝົດສິ້ນໄປເປັນທຳມະດາຂອງອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມໝົດສິ້ນໄປ ຯລຯ ສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາຂອງອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມສູນຫາຍໄປ ເມື່ອສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາສູນຫາຍໄປແລ້ວ ອະຣິຍະສາວົກນັ້ນພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາຂອງເຮົາຄົນດຽວທໍ່ນັ້ນທີ່ສູນຫາຍໄປ ແທ້ຈິງແລ້ວ ສິ່ງ

ທີ່ມີຄວາມສູນຫາຍໄປເປັນທຳມະດາຂອງສັດທັງປວງທີ່ມີການມາ ການໄປ ການຈຸຕິ ການອຸບັດ ກໍສູນຫາຍໄປທັງໝົດ ເມື່ອສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາ ສູນຫາຍໄປແລ້ວ ຖ້າເຮົາຈະເພິ່ງເສົ້າໂສກ ລຳບາກ ເຮຮີນ ທຸບເອິກ ຮ່ຳໄຮ ຫຼົງງົມງວາຍ ອາຫານເຮົາກໍຈະບໍ່ຢາກກິນ ກາຍກໍຈະເສົ້າໝອງ ວຽກງານກໍຈະຢຸດຊະງັກ ພວກສັດຕູກໍຈະດີໃຈ ແລະພວກມິດກໍຈະເສຍໃຈ ເມື່ອສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາ ສູນຫາຍໄປແລ້ວ ອະຣິຍະສາວົກນັ້ນຍ່ອມ ບໍ່ເສົ້າໂສກ ບໍ່ລຳບາກ ບໍ່ເຮຮີນ ບໍ່ທຸບເອິກ ບໍ່ຮ່ຳໄຮ ບໍ່ຫຼົງງົມງວາຍ ນີ້ຮຽກວ່າ ອະຣິຍະສາວົກຜູ້ໄດ້ສະດັບ ຖອນລູກສອນຄືຄວາມໂສກທີ່ມີພິດສຽບແທງປຸຖຸຊົນຜູ້ບໍ່ໄດ້ສະດັບເຮັດຕົນນັ້ນເອງໃຫ້ເດືອດຮ້ອນ ອະຣິຍະສາວົກຜູ້ບໍ່ມີຄວາມໂສກ ປາສະຈາກລູກສອນ ຍ່ອມດັບທຸກ ໄດ້ດ້ວຍຕົນເອງ

ພິກຂຸທັງຫຼາຍ ຖານະ ໕ ປະການນີ້ແລ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼືໃຜ ໆ ໃນໂລກນີ້ບໍ່ເພິ່ງໄດ້

ປະໂຫຍດ°ແມ່ນເລັກໜ້ອຍໃນໂລກນີ້
ໃຜ ໆ ຍ່ອມບໍ່ໄດ້ດ້ວຍຄວາມໂສກເສົ້າ
ຍ່ອມບໍ່ໄດ້ດ້ວຍຄວາມຮ່ຳໄຮ
ພວກສັດຕູຮູ້ວ່າ ເຂົາເສົ້າໂສກ ເປັນທຸກ
ຍ່ອມດີໃຈ
ແຕ່ໃນການໃດ ບັນດິດສະຫຼາດໃນການວິນິດໄສເຫດຜົນ
ບໍ່ຫວັ່ນໄຫວໃນອັນຕະລາຍທັງຫຼາຍ
ໃນການນັ້ນ ພວກສັດຕູເຫັນໜ້າເຊິ່ງບໍ່ຜິດປົກກະຕິ
ຂອງບັນດິດນັ້ນ ຜູ້ຍັງຍິ້ມແຍ້ມຕາມເຄີຍ
ຍ່ອມເປັນທຸກ
ບັນດິດເພິ່ງໄດ້ປະໂຫຍດໃນບ່ອນໃດ? ໆ ດ້ວຍວິທີໃດ ໆ
ຄືດ້ວຍການສັນເສີນ ດ້ວຍການຈົ່ມມົນ
ດ້ວຍການກ່າວຄຳສຸພາສິດ ດ້ວຍການໃຫ້
ຫຼື ດ້ວຍການອ້າງປະເພນີ
ກໍເພິ່ງບາກບັ່ນໃນບ່ອນນັ້ນ ໆ ດ້ວຍວິທີນັ້ນ ໆ
ຖ້າຮູ້ວ່າ "ປະໂຫຍດນີ້ ເຮົາຫຼືຄົນອື່ນບໍ່ເພິ່ງໄດ້
ທ່ານຜູ້ບໍ່ເສົ້າໂສກ ຄວນອົດທົນໂດຍພິຈາລະນາວ່າ
"ເຮົາໄດ້ເຮັດວຽກຢ່າງມຸ້ງໝັ້ນແລ້ວ
ບັດນີ້ ເຮົາຈະເຮັດແນວໃດ"

**ຖານະສູດທີ ໗ ຈົບ**

# ໙. ໂກສະລະສູດ

## ວ່າດ້ວຍພຣະເຈົ້າປະເສນທິໂກສົນ

[໔໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ

ສະໄໝນັ້ນ ພຣະນາງມັນລິກາເທວີໄດ້ສະຫວັນຄົດແລ້ວ ລຳດັບນັ້ນ ມະຫາດນ້ອຍຄົນໜຶ່ງເຂົ້າໄປເຝົ້າພຣະເຈົ້າປະເສນທິໂກສົນແລ້ວຂາບທູນຊິ່ມທີ່ໃກ້ພຣະກັນວ່າ "ຂໍເດຊະ ພຣະນາງມັນລິກາເທວີສະຫວັນຄົດແລ້ວ ເມື່ອມະຫາດນ້ອຍຂາບທູນແນວນີ້ແລ້ວ ພຣະເຈົ້າປະເສນທິໂກສົນກໍຊົງມີທຸກ ເສຍພຣະທະໄທ ປະທັບນັ່ງພຣະສໍຕົກ ກົ້ມພຣະພັກ ຊົງ ຄຸ່ນຄິດ ຊົງອ້ຳອຶ້ງຢູ່

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ແລ້ວ ຈຶ່ງຕັດກັບພຣະເຈົ້າປະເສນທິໂກສົນວ່າ ມະຫາບໍພິດ ຖານະ ໕ ປະການນີ້ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກບໍ່ເພິ່ງໄດ້ ຖານະ ໕ ປະການ ອັນໃດແດ່ ຄື

໑. ຂໍສິ່ງທີ່ມີຄວາມແກ່ເປັນທຳມະດາ ຢ່າແກ່
ຯລຯ[໑]
　　ປະໂຫຍດແມ່ນເລັກໜ້ອຍໃນໂລກນີ້
ໃຜ ໆ ຍ່ອມບໍ່ໄດ້ດ້ວຍຄວາມໂສກເສົ້າ
ຍ່ອມບໍ່ໄດ້ດ້ວຍຄວາມຮ່ຳໄຮ
ຯລຯ[໒]
　　ທ່ານຜູ້ບໍ່ເສົ້າໂສກຄວນອົດທົນໂດຍພິຈາລະນາວ່າ
"ເຮົາໄດ້ເຮັດວຽກຢ່າງນັ້ງໝັ້ນແລ້ວ
ບັດນີ້ ເຮົາຈະເຮັດແນວໃດ

**ໂກສະລະສູດທີ ໙ ຈົບ**

# ໑໐. ນາຣະທະສູດ

## ວ່າດ້ວຍພຣະນາຣະທະ

[໕໐] ສະໄໝໜຶ່ງ ທ່ານພຣະນາຣະທະຢູ່ທີ່ກຸກກຸຕາຣາມ ເຂດນະຄອນປາຕະລີບຸດ ກໍສະໄໝນັ້ນ ພຣະນາງພັນທາຣາດຊະເທວີຜູ້ເປັນທີ່ຮັກ ເປັນທີ່ພໍພຣະທະໄທຂອງພຣະເຈົ້າມຸນທະ

ສະຫວັນຄົດແລ້ວ ເມື່ອພຣະນາງພັນທາຣາດຊະເທວີສະຫວັນຄົດແລ້ວ ພຣະອົງກໍບໍ່ອາບນໍ້າ ບໍ່ແຕ່ງພຣະອົງ ບໍ່ສະເຫວີຍພຣະກະຍາຫານ ບໍ່ຊົງປະກອບພຣະຣາດຊະກິດ ຊົບຢູ່ທີ່ ພຣະສົບຂອງພຣະນາງຕະຫຼອດຄືນຕະຫຼອດມື້ ລໍາດັບນັ້ນ ພຣະເຈົ້າມຸນທະໄດ້ຮັບສັ່ງຮຽກ ມະຫາອໍາມາດຊື່ວ່າໂສກາຣັກຂະຜູ້ເປັນທີ່ຮັກມາຕັດວ່າ "ທ່ານໂສກາຣັກຂະ ຜູ້ເປັນທີ່ຮັກ ທ່ານຈົ່ງຍົກພຣະສົບພຣະນາງພັນທາຣາດຊະເທວີໃສ່ໄວ້ໃນຮາງເຫຼັກທີ່ເຕັມດ້ວຍນໍ້າມັນແລ້ວ ເອົາຮາງເຫຼັກອື່ນອັດໄວ້ເພື່ອເຮົາຈະໄດ້ເຫັນສົບພຣະນາງໃຫ້ດົນ ໆ

ໂສກາຣັກຂະ ມະຫາອໍາມາດທູນຮັບສະໜອງພຣະບໍຣົມຣາດຊະໂອງການແລ້ວ ຈຶ່ງຈັດການຍົກ ພຣະສົບພຣະນາງໃສ່ໄວ້ໃນຮາງເຫຼັກທີ່ເຕັມໄປດ້ວຍນໍ້າມັນແລ້ວເອົາຮາງເຫຼັກອື່ນອັດໄວ້

ຄັ້ງນັ້ນ ໂສກາຣັກຂະມະຫາອໍາມາດໄດ້ມີຄວາມຄິດວ່າ "ພຣະນາງພັນທາຣາດຊະເທວີ ຜູ້ເປັນທີ່ຮັກ ເປັນທີ່ພໍພຣະທະໄທຂອງພຣະເຈົ້າມຸນທະນີ້ໄດ້ສະຫວັນຄົດແລ້ວ ເມື່ອພຣະນາງສະຫວັນຄົດ ພຣະຣາຊາກໍບໍ່ອາບນໍ້າ ບໍ່ແຕ່ງພຣະອົງ ບໍ່ສະເຫວີຍພຣະກະຍາຫານ ບໍ່ຊົງປະກອບ ພຣະຣາດຊະກິດຊົງຊົບຢູ່ທີ່ພຣະສົບຂອງພຣະນາງຕະຫຼອດຄືນເມັດມື້ ພຣະອົງເພິ່ງ ສະເດັດເຂົ້າໄປຫາສະມະນະຫຼືພາມຮູບໃດນໍ ຊົງສະດັບທໍາແລ້ວ ຈະເພິ່ງລະລູກສອນຄືຄວາມໂສກໄດ້

ລໍາດັບນັ້ນ ໂສກາຣັກຂະມະຫາອໍາມາດໄດ້ຄິດຕໍ່ໄປວ່າ "ທ່ານພຣະນາຣະທະອົງນີ້ ຢູ່ທີ່ກຸກກຸຕາຣາມ ເຂດນະຄອນປາຕະລີບຸດ ກິດຕິສັບອັນງາມຂອງທ່ານຊ່າລືໄປແລ້ວແນວນີ້ວ່າ "ເປັນບັນດິດ ເປັນຜູ້ສະຫຼາດ ເປັນນັກປາດ ເປັນພະຫູສູດ ກ່າວຄໍາເວົ້າມ່ວນ ມີປະຕິພານດີ ເປັນພຣະຜູ້ໃຫຍ່ ແລະເປັນ ພຣະອະຣະຫັນ ຈຶ່ງຄວນທີ່ພຣະເຈົ້າມຸນທະຈະສະເດັດເຂົ້າໄປຫາທ່ານ ເພື່ອລາງເທື່ອໄດ້ຊົງສະດັບທໍາຂອງທ່ານແລ້ວ ຈະຊົງລະລູກສອນຄືຄວາມໂສກ ໄດ້ແດ່

ຕໍ່ມາ ໂສກາຣັກຂະມະຫາອໍາມາດ ໄດ້ເຂົ້າໄປເຝົ້າພຣະເຈົ້າມຸນທະແລ້ວຂາບທູນວ່າ "ຂໍເດຊະ ທ່ານພຣະນາຣະທະອົງນີ້ຢູ່ທີ່ກຸກກຸຕາຣາມ ເຂດນະຄອນປາຕະລີບຸດ ກິດຕິສັບ ອັນງາມຂອງທ່ານພຣະນາຣະທະຊ່າລືໄປແລ້ວແນວນີ້ວ່າ "ເປັນບັນດິດ ເປັນຜູ້ສະຫຼາດ ເປັນນັກປາດເປັນພະຫູສູດ ກ່າວຄໍາເວົ້າມ່ວນ ມີປະຕິພານດີ ເປັນພຣະຜູ້ໃຫຍ່ ແລະເປັນພຣະອະຣະຫັນ ຈຶ່ງຄວນທີ່ພຣະອົງຈະສະເດັດເຂົ້າໄປຫາທ່ານ ເພື່ອາງເທື່ອພຣະອົງໄດ້ຊົງສະດັບທໍາຂອງທ່ານແລ້ວຈະຊົງລະລູກສອນຄືຄວາມໂສກໄດ້ແດ່

ພຣະເຈົ້າມຸນທະຈຶ່ງຮັບສັ່ງວ່າ "ທ່ານອໍາມາດ ຖ້າເປັນແນວນັ້ນ ທ່ານຈົ່ງໄປຂາບຮຽນທ່ານພຣະນາຣະທະໃຫ້ຮູ້ກ່ອນ ຍ້ອນກະສັດເຊັ່ນເຮົາເພິ່ງເຂົ້າໃຈວ່າ ສະມະນະຫຼືພາມທີ່ຢູ່ໃນຣາດຊະອານາຈັກ ຍັງບໍ່ໄດ້ແຈ້ງໃຫ້ຮູ້ກ່ອນຈະເພິ່ງເຂົ້າໄປຫາໄດ້ແນວໃດ

ມະຫາອໍາມາດທູນຮັບສະໜອງພຣະບໍຣົມຣາດຊະໂອງການແລ້ວ ໄດ້ເຂົ້າໄປພົບທ່ານ

ພຣະ ນາຣະທະຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບຮຽນວ່າ "ຂ້າແດ່ທ່ານຜູ້ຈະເລີນ ພຣະນາງພັນທາຣາດຊະເທວີຜູ້ເປັນທີ່ຮັກ ເປັນທີ່ພໍພຣະທະໄທຂອງພຣະເຈົ້າມຸນທະນີ້ ໄດ້ສະຫວັນຄົດແລ້ວ ເມື່ອພຣະນາງສະຫວັນຄົດ ພຣະຣາຊາກໍບໍ່ອາບນ້ຳ ບໍ່ແຕ່ງພຣະອົງ ບໍ່ສະເຫວີຍພຣະຍາຫານ ບໍ່ຊົງປະກອບພຣະຣາດຊະກິດ ຊົງຊົບຢູ່ທີ່ພຣະສົບຂອງພຣະນາງພັນທາຣາດຊະເທວີຕະຫຼອດຄືນຕະຫຼອດມື້ ຂໍທ່ານພຣະນາຣະທະໂຜດສະແດງທຳແກ່ ພຣະຣາຊາ ໂດຍທີ່ພຣະອົງໄດ້ສະດັບທຳຂອງທ່ານແລ້ວ ຈະຊົງລະລູກສອນຄືຄວາມໂສກໄດ້

ທ່ານພຣະນາຣະທະຈຶ່ງກ່າວວ່າ "ມະຫາອຳມາດ ບັດນີ້ ຂໍໃຫ້ພຣະຣາຊາຊົງຮູ້ເວລາທີ່ສົມຄວນ

ລຳດັບນັ້ນ ໂສກາຣັກຂະມະຫາອຳມາດ ລຸກຈາກບ່ອນນັ່ງ ຖວາຍອະພິວາດທ່ານພຣະນາຣະທະ ກະທຳປະທັກຂິນແລ້ວ ໄດ້ໄປເຝົ້າພຣະເຈົ້າມຸນທະຂາບທູນວ່າ "ຂໍເດຊະ ທ່ານພຣະນາຣະທະໄດ້ເປີດໂອກາດໃຫ້ສະເດັດໄປແລ້ວ ບັດນີ້ ຂໍພຣະອົງຊົງຮູ້ເວລາທີ່ສົມຄວນເທີ້ນ ຂ້ານ້ອຍ

ພຣະເຈົ້າມຸນທະຮັບສັ່ງວ່າ "ທ່ານອຳມາດ ຖ້າເປັນແນວນັ້ນ ທ່ານຈົ່ງໃຫ້ພະນັກງານກະກຽມພາຫະນະຢ່າງດີໄວ້

ມະຫາອຳມາດທູນຮັບສະໜອງພຣະບໍຣົມຣາດຊະໂອງການແລ້ວ ໃຫ້ພະນັກງານກະກຽມພຣະຣາດຊະພາຫະນະຢ່າງດີໄວ້ສຳເລັດແລ້ວຈຶ່ງຂາບທູນວ່າ "ຂໍເດຊະ ຂ້າພຣະອົງໄດ້ໃຫ້ພະນັກງານກະກຽມພຣະຣາດຊະພາຫະນະຢ່າງດີໄວ້ສຳເລັດແລ້ວ ບັດນີ້ ຂໍພຣະອົງຊົງຮູ້ເວລາທີ່ສົມຄວນເທີ້ນ ຂ້ານ້ອຍ

ລຳດັບນັ້ນ ພຣະເຈົ້າມຸນທະສະເດັດພຣະຣາດຊະດຳເນີນໄປສູ່ກຸກກຸຕາຣາມ ເພື່ອພົບທ່ານພຣະນາຣະທະ ດ້ວຍຣາຊານຸພາບອັນຍິ່ງໃຫຍ່ ສະເດັດໄປທໍ່ທີ່ພຣະຣາດຊະພາຫະນະຈະໄປໄດ້ ເມື່ອສະເດັດເຖິງແລ້ວ ກໍໄດ້ສະເດັດພຣະຣາດຊະດຳເນີນເຂົ້າໄປສູ່ອາຣາມ ຊົງເຂົ້າໄປພົບທ່ານພຣະນາຣະທະ ຊົງຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະນາຣະທະຈຶ່ງໄດ້ຖວາຍພຣະພອນ ພຣະອົງ ວ່າ

ຂໍຖວາຍພຣະພອນ ມະຫາບໍພິດ ຖານະ ໕ ປະການນີ້ ອັນສະມະນະ ພາມ ເທວະດາມານ ພົມ ຫຼືໃຜ ໆ ໃນໂລກນີ້ບໍ່ເພິ່ງໄດ້

ຖານະ ໕ ປະການ ອັນໃດແດ່ ຄື

໑. ຂໍສິ່ງທີ່ມີຄວາມແກ່ເປັນທຳມະດາ໌ ຢ່າແກ່
໒. ຂໍສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາ ຢ່າເຈັບໄຂ້
໓. ຂໍສິ່ງທີ່ມີຄວາມຕາຍເປັນທຳມະດາ ຢ່າຕາຍ
໔. ຂໍສິ່ງທີ່ມີຄວາມໝົດສິ້ນໄປເປັນທຳມະດາ ຢ່າໝົດສິ້ນໄປ
໕. ຂໍສິ່ງທີ່ມີຄວາມສູນຫາຍເປັນທຳມະດາ ຢ່າສູນຫາຍ

ສິ່ງທີ່ມີຄວາມແກ່ເປັນທຳມະດາຂອງປຸຖຸຊົນຜູ້ບໍ່ໄດ້ສະດັບຍ່ອມແກ່ໄປ ເມື່ອສິ່ງທີ່ມີຄວາມແກ່ເປັນທຳມະດາແກ່ໄປແລ້ວ ເຂົາບໍ່ພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນສິ່ງທີ່ມີຄວາມແກ່ເປັນທຳມະດາຂອງເຮົາຄົນດຽວທໍ່ນັ້ນທີ່ແກ່ໄປ ແທ້ຈິງແລ້ວ ສິ່ງທີ່ມີຄວາມແກ່ເປັນທຳມະດາຂອງສັດທັງປວງທີ່ມີການມາ ການໄປ ການຈຸຕິ ການອຸບັດ ກໍແກ່ໄປທັງໝົດ ເມື່ອສິ່ງທີ່ມີຄວາມແກ່ເປັນທຳມະດາ ແກ່ໄປແລ້ວ ຖ້າເຮົາຈະເພິ່ງເສົ້າໂສກ ລຳບາກ ເຮຮັນ ທຸບເອິກ ຮ່ຳໄຮ ຫຼົງງົມງວາຍ ອາຫານເຮົາກໍຈະບໍ່ຍາກກິນ ກາຍກໍຈະເສົ້າໝອງ ວຽກງານກໍຈະຢຸດຊະງັກ ພວກສັດຕູກໍຈະດີໃຈ ແລະພວກມິດກໍຈະເສຍໃຈ ເມື່ອສິ່ງທີ່ມີຄວາມແກ່ເປັນທຳມະດາແກ່ໄປແລ້ວ ເຂົາຍ່ອມເສົ້າໂສກ ລຳບາກ ເຮຮັນ ທຸບເອິກ ຮ່ຳໄຮ ຫຼົງງົມງວາຍ ນີ້ຮຽກວ່າ ປຸຖຸຊົນຜູ້ບໍ່ໄດ້ສະດັບ ຖືກລູກສອນຄືຄວາມໂສກທີ່ມີພິດສຽບແທງແລ້ວ ຍ່ອມເຮັດຕົນນັ້ນເອງໃຫ້ເດືອດຮ້ອນ

ສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາຂອງປຸຖຸຊົນຜູ້ບໍ່ໄດ້ສະດັບ ຍ່ອມເຈັບໄຂ້ ฯລฯ ສິ່ງທີ່ມີຄວາມຕາຍເປັນທຳມະດາຂອງປຸຖຸຊົນຜູ້ບໍ່ໄດ້ສະດັບ ຍ່ອມຕາຍໄປ ฯລฯ ສິ່ງທີ່ມີຄວາມໝົດສິ້ນໄປເປັນທຳມະດາຂອງປຸຖຸຊົນຜູ້ບໍ່ໄດ້ສະດັບ ຍ່ອມໝົດສິ້ນໄປ ฯລฯ ສິ່ງທີ່ມີຄວາມສູນຫາຍເປັນທຳມະດາຂອງປຸຖຸຊົນຜູ້ບໍ່ໄດ້ສະດັບ ຍ່ອມສູນຫາຍໄປ ເມື່ອສິ່ງທີ່ມີຄວາມສູນຫາຍເປັນທຳມະດາສູນຫາຍໄປແລ້ວ ເຂົາບໍ່ພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນສິ່ງທີ່ມີຄວາມສູນຫາຍເປັນທຳມະດາຂອງເຮົາ ຄົນດຽວທໍ່ນັ້ນທີ່ສູນຫາຍໄປ ແທ້ຈິງແລ້ວ ສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາຂອງສັດທັງປວງທີ່ມີການມາ ການໄປ ການຈຸຕິ ການອຸບັດ ກໍສູນຫາຍໄປທັງໝົດ ເມື່ອສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາ ສູນຫາຍໄປແລ້ວ ຖ້າເຮົາຈະເພິ່ງເສົ້າໂສກ ລຳບາກ ເຮຮັນ ທຸບເອິກ ຮ່ຳໄຮ ຫຼົງງົມງວາຍ ອາຫານເຮົາກໍຈະບໍ່ຍາກກິນ ກາຍກໍຈະເສົ້າໝອງ ວຽກງານກໍຈະຢຸດຊະງັກ ພວກສັດຕູກໍຈະດີໃຈ ແລະພວກມິດກໍຈະເສຍໃຈ ເມື່ອສິ່ງທີ່ມີຄວາມສູນຫາຍເປັນທຳມະດາສູນຫາຍໄປແລ້ວ ເຂົາຍ່ອມເສົ້າໂສກ ລຳບາກ ເຮຮັນ ທຸບເອິກ ຮ່ຳໄຮ ຫຼົງງົມງວາຍ ນີ້ຮຽກວ່າ ປຸຖຸຊົນຜູ້ບໍ່ໄດ້ສະດັບ ຖືກລູກສອນຄືຄວາມໂສກທີ່ມີພິດ ສຽບແທງແລ້ວ ຍ່ອມເຮັດຕົນນັ້ນເອງໃຫ້ເດືອດຮ້ອນ

ສ່ວນສິ່ງທີ່ມີຄວາມແກ່ເປັນທຳມະດາຂອງອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມແກ່ໄປ ເມື່ອສິ່ງທີ່ມີຄວາມແກ່ໄປເປັນທຳມະດາແກ່ໄປແລ້ວ ອະຣິຍະສາວົກນັ້ນພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນສິ່ງທີ່ມີຄວາມແກ່ເປັນທຳມະດາຂອງເຮົາຄົນດຽວທໍ່ນັ້ນທີ່ແກ່ໄປ ແທ້ຈິງແລ້ວ ສິ່ງທີ່ມີຄວາມແກ່ເປັນທຳມະດາ ຂອງສັດທັງປວງທີ່ມີການມາ ການໄປ ການຈຸຕິ ການອຸບັດ ກໍແກ່ໄປທັງໝົດ ເມື່ອສິ່ງທີ່ມີຄວາມແກ່ເປັນທຳມະດາ ແກ່ໄປແລ້ວ ຖ້າເຮົາຈະເພິ່ງເສົ້າໂສກ ລຳບາກ ເຮຮັນ ທຸບເອິກ ຮ່ຳໄຮ ຫຼົງງົມງວາຍ ອາຫານເຮົາກໍຈະບໍ່ຍາກກິນ ກາຍກໍຈະເສົ້າໝອງ ວຽກງານກໍຈະຢຸດຊະງັກ ພວກສັດຕູກໍຈະດີໃຈ ແລະພວກມິດກໍຈະເສຍໃຈ ເມື່ອສິ່ງທີ່ມີຄວາມແກ່ເປັນທຳມະດາແກ່ໄປແລ້ວ ອະຣິຍະສາວົກນັ້ນຍ່ອມບໍ່ເສົ້າໂສກ ບໍ່ລຳບາກ ບໍ່ເຮຮັນ ບໍ່ທຸບເອິກ ບໍ່ຮ່ຳໄຮ ບໍ່ຫຼົງງົມ

ງວາຍ ນີ້ຮຽກວ່າ ອະຣິຍະສາວົກຜູ້ໄດ້ສະດັບ ຖອນລູກສອນ ຄືຄວາມໂສກທີ່ມີພິດສຽບແທງປຸຖຸຊົນຜູ້ບໍ່ໄດ້ສະດັບເຮັດຕົນນັ້ນເອງໃຫ້ເດືອດຮ້ອນ ອະຣິຍະສາວົກ ຜູ້ບໍ່ມີຄວາມໂສກ ປາສະຈາກລູກສອນ ຍ່ອມດັບທຸກໄດ້ດ້ວຍຕົນເອງ

ສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາຂອງອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມເຈັບໄຂ້ ฯລฯ ສິ່ງທີ່ມີຄວາມຕາຍເປັນທຳມະດາຂອງອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມຕາຍໄປ ฯລฯ ສິ່ງທີ່ມີຄວາມໝົດສິ້ນໄປເປັນທຳມະດາຂອງອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມໝົດສິ້ນໄປ ฯລฯ ສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາຂອງອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມສູນຫາຍໄປ ເມື່ອສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາສູນຫາຍໄປແລ້ວ ອະຣິຍະສາວົກນັ້ນພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາ ຂອງເຮົາຄົນດຽວທໍ່ນັ້ນທີ່ສູນຫາຍໄປ ແທ້ຈິງແລ້ວ ສິ່ງທີ່ມີຄວາມສູນຫາຍໄປເປັນທຳມະດາຂອງສັດທັງປວງທີ່ມີການມາ ການໄປ ການຈຸຕິ ການອຸບັດ ກໍສູນຫາຍໄປທັງໝົດ ເມື່ອສິ່ງທີ່ມີຄວາມສູນຫາຍເປັນທຳມະດາ ສູນຫາຍໄປແລ້ວ ຖ້າເຮົາຈະເພິ່ງເສົ້າໂສກ ລຳບາກ ເຮຣົນ ທຸບເອິກ ຮ່ຳໄຮ ຫຼົງງົມງວາຍ ອາຫານເຮົາກໍຈະບໍ່ຍາກກິນ ກາຍກໍຈະເສົ້າໝອງ ວຽກງານກໍຈະຢຸດຊະງັກ ພວກສັດຕູກໍຈະດີໃຈ ແລະພວກມິດກໍຈະເສຍໃຈ ເມື່ອສິ່ງທີ່ມີຄວາມສູນຫາຍເປັນທຳມະດາ ສູນຫາຍໄປແລ້ວ ອະຣິຍະສາວົກນັ້ນຍ່ອມບໍ່ເສົ້າໂສກ ບໍ່ລຳບາກ ບໍ່ເຮຣົນ ບໍ່ທຸບເອິກ ບໍ່ຮ່ຳໄຮ ບໍ່ຫຼົງງົມງວາຍ ນີ້ຮຽກວ່າ ອະຣິຍະສາວົກຜູ້ໄດ້ສະດັບ ຖອນລູກສອນຄືຄວາມໂສກທີ່ມີພິດສຽບແທງປຸຖຸຊົນຜູ້ບໍ່ໄດ້ສະດັບ ເຮັດຕົນເອງໃຫ້ເດືອດຮ້ອນ ອະຣິຍະສາວົກຜູ້ບໍ່ມີຄວາມໂສກ ປາສະຈາກລູກສອນ ຍ່ອມດັບທຸກໄດ້ດ້ວຍຕົນເອງ

ຂໍຖວາຍພຣະພອນ ມະຫາບໍພິດ ຖານະ ໕ ປະການນີ້ແລ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກນີ້ບໍ່ເພິ່ງໄດ້ ທ່ານພຣະນາຣະທະ ເມື່ອກ່າວໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ກ່າວຄາຖາປະພັນ ຕໍ່ໄປອີກວ່າ

ປະໂຫຍດ໌ແມ່ນເລັກໜ້ອຍໃນໂລກນີ້
ໃຜ ໆ ຍ່ອມບໍ່ໄດ້ດ້ວຍຄວາມໂສກເສົ້າ
ຍ່ອມບໍ່ໄດ້ດ້ວຍຄວາມຮ່ຳໄຮ
ພວກສັດຕູຮູ້ວ່າ ເຂົາເສົ້າໂສກ ເປັນທຸກ
ຍ່ອມດີໃຈ
ແຕ່ໃນການໃດ ບັນດິດສະຫຼາດໃນການວິນິດໄສເຫດຜົນ
ບໍ່ຫວັ່ນໄຫວໃນອັນຕະລາຍທັງຫຼາຍ
ໃນການນັ້ນ ພວກສັດຕູເຫັນໜ້າເຊິ່ງບໍ່ຜິດປົກກະຕິ
ຂອງບັນດິດນັ້ນ ຜູ້ຍັງຍິ້ມແຍ້ມຕາມເຄີຍ
ຍ່ອມເປັນທຸກ

ບັນດິດເພິ່ງໄດ້ປະໂຫຍດໃນບ່ອນໃດ? ໆ ດ້ວຍວິທີໃດ ໆ
ຄືດ້ວຍການສັນເສີນ ດ້ວຍການຈົ່ມມົນ
ດ້ວຍການກ່າວຄຳສຸພາສິດ ດ້ວຍການໃຫ້
ຫຼື ດ້ວຍການອ້າງປະເພນີ
ກໍເພິ່ງບາກບັ່ນໃນບ່ອນນັ້ນ ໆ ດ້ວຍວິທີນັ້ນ ໆ
ຖ້າຮູ້ວ່າ "ປະໂຫຍດນີ້ ເຮົາຫຼືຄົນອື່ນບໍ່ເພິ່ງໄດ້
ທ່ານຜູ້ບໍ່ເສົ້າໂສກ ຄວນອົດທົນໂດຍພິຈາລະນາວ່າ
"ເຮົາໄດ້ເຮັດວຽກຢ່າງນັ້ງໝັ້ນແລ້ວ
ບັດນີ້ ເຮົາຈະເຮັດແນວໃດ"

ເມື່ອທ່ານພຣະນາຣະທະກ່າວແນວນີ້ແລ້ວ ພຣະເຈົ້າມຸນທະໄດ້ຕັດຖາມວ່າ "ທຳບັນລະຍາຍນີ້ຊື່ອັນໃດ ທ່ານພຣະນາຣະທະຖວາຍພຣະພອນວ່າ "ຂໍຖວາຍພຣະພອນ ທຳບັນລະຍາຍນີ້ຊື່ເຫດຖອນລູກສອນຄືຄວາມໂສກ

ພຣະເຈົ້າມຸນທະຕັດຊົມວ່າ "ທ່ານຜູ້ຈະເລີນ ທຳບັນລະຍາຍນີ້ເປັນເຫດຖອນລູກສອນຄືຄວາມໂສກໄດ້ຢ່າງແທ້ຈິງແລ້ວ ທ່ານຜູ້ຈະເລີນ ທຳບັນລະຍາຍນີ້ເປັນເຫດຖອນລູກສອນຄືຄວາມໂສກໄດ້ຢ່າງແທ້ຈິງແລ້ວ ຍ້ອນໄດ້ຟັງທຳບັນລະຍາຍນີ້ ຂ້າພະເຈົ້າຈຶ່ງລະລູກສອນຄືຄວາມໂສກໄດ້

ລຳດັບນັ້ນ ພຣະເຈົ້າມຸນທະໄດ້ຮັບສັ່ງໂສກາຣັກຂະມະຫາອຳມາດວ່າ "ທ່ານຈົ່ງຖວາຍພຣະເພີງພຣະສົບຂອງພຣະນາງພັນທາຣາດຊະເທວີແລ້ວເຮັດເປັນສະຖູປໄວ້ ຕັ້ງແຕ່ມື້ນີ້ໄປ ເຮົາຈັກອາບນ້ຳແຕ່ງໂຕ ບໍຣິໂພກອາຫານ ແລະປະກອບວຽກງານ

**ນາຣະທະສູດທີ 10 ຈົບ**

**ມຸນທະຣາດຊະວັກທີ 5 ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ອາທິຍະສູດ | ໖. ສັບປຸຣິສະສູດ |
| ໒. ອິດຖະສູດ | ໗. ມະນາປະທາຍີສູດ |
| ໓. ປຸນຍາພິສັນທະສູດ | ໘. ສຳປະທາສູດ |
| ໔. ທະນະສູດ | ໙. ຖານະສູດ |
| ໕. ໂກສະລະສູດ | ໑໐. ນາຣະທະສູດ |

**ປະຖົມປັນນາດ ຈົບ**

# ໒. ທຸຕິຍະປັນນາດ

## ໑. ນີວະຣະນະວັກ

### ໝວດວ່າດ້ວຍນິວອນ

## ໑. ອາວະຣະນະສູດ

### ວ່າດ້ວຍນິວອນເຄື່ອງກາງກັ້ນ

[໕໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາ ຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ນິວອນເຄື່ອງກາງກັ້ນ ໕ ປະການນີ້ ຄອບງຳຈິດແລ້ວ ທອນກຳລັງປັນຍາ

ນິວອນເຄື່ອງກາງກັ້ນ ໕ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ການສັນທະ | (ຄວາມພໍໃຈໃນການ) |
| ໒. ພະຍາບາດ | (ຄວາມຄິດຮ້າຍ) |
| ໓. ຖີນະມິດທະ | (ຄວາມທໍດທູ່ແລະງ່ວມເຫງົາ) |
| ໔. ອຸດທັດຈະກຸກກຸດຈະ | (ຄວາມຟຸ້ງຊ່ານແລະຮ້ອນໃຈ) |
| ໕. ວິຈິກິດສາ | (ຄວາມລັງເລສົງໄສ) |

ພິກຂຸທັງຫຼາຍ ນິວອນເຄື່ອງກາງກັ້ນ ໕ ປະການນີ້ແລ ຄອບງຳຈິດແລ້ວ ທອນກຳລັງປັນຍາ

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຍັງລະນິວອນເຄື່ອງກາງກັ້ນ ໕ ປະການນີ້ທີ່ຄອບງຳຈິດ ທອນກຳລັງປັນຍາບໍ່ໄດ້ແລ້ວ ຈັກຮູ້ປະໂຫຍດຕົນ ຮູ້ປະໂຫຍດຜູ້ອື່ນ ຮູ້ປະໂຫຍດທັງສອງຫຼືຈັກເຮັດໃຫ້ແຈ້ງ ເຊິ່ງຍານທັດສະນະທີ່ປະເສີດອັນສາມາດ[๑] ອັນວິເສດຍິ່ງກວ່າທຳຂອງມະນຸດ[๒]ດ້ວຍປັນຍາທີ່ບໍ່ມີກຳລັງທີ່ອ່ອນກຳລັງໄດ້

ປຽບຄື ແມ່ນ້ຳທີ່ໄຫຼລົງຈາກພູໄປສູ່ທີ່ໄກ ມີກະແສໄຫຼແຮງ ພັດສິ່ງທີ່ຈະພັດໄປໄດ້ ບຸຣຸດເພິ່ງເປີດປາກເໝືອງທັງ ໔ ຂ້າງແຫ່ງແມ່ນ້ຳນັ້ນ ເມື່ອເປີດປາກເໝືອງແລ້ວ ແນວນີ້ ກະແສນ້ຳໃນທ່າມກາງແມ່ນ້ຳນັ້ນກໍຊັດສ່າຍໄຫຼຜິດທາງ ໄຫຼໄປສູ່ທີ່ໄກບໍ່ໄດ້ ບໍ່ມີກະແສໄຫຼແຮງ ແລະບໍ່ພັດສິ່ງທີ່ພໍຈະພັດໄປໄດ້ ສັນໃດ

ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຍັງລະນິວອນເຄື່ອງກາງກັ້ນ ໕ ປະການນີ້ທີ່ຄອບງຳຈິດ ທອນກຳລັງປັນຍາບໍ່ໄດ້ແລ້ວຈັກຮູ້ປະໂຫຍດຕົນ ຮູ້ປະໂຫຍດຜູ້ອື່ນ ຮູ້ປະໂຫຍດທັງສອງ ຫຼືຈັກເຮັດໃຫ້ແຈ້ງເຊິ່ງຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າທຳຂອງມະນຸດ ດ້ວຍປັນຍາທີ່ບໍ່ມີກຳລັງ ທີ່ອ່ອນກຳລັງໄດ້ ສັນນັ້ນ

ພິກຂຸທັງຫຼາຍ ເປັນໄປໄດ້ທີ່ພິກຂຸນັ້ນລະນິວອນເຄື່ອງກາງກັ້ນ ໕ ປະການນີ້ທີ່ຄອບງຳຈິດ ທອນກຳລັງປັນຍາໄດ້ແລ້ວຈັກຮູ້ປະໂຫຍດຕົນ ຮູ້ປະໂຫຍດຜູ້ອື່ນ ຮູ້ປະໂຫຍດທັງສອງ ຫຼືຈັກເຮັດໃຫ້ແຈ້ງເຊິ່ງຍານທັດສະນະທີ່ປະເສີດອັນສາມາດ ອັນວິເສດຍິ່ງກວ່າທຳຂອງມະນຸດດ້ວຍປັນຍາທີ່ມີກຳລັງໄດ້

ປຽບຄື ແມ່ນ້ຳທີ່ໄຫຼລົງຈາກພູໄປສູ່ທີ່ໄກ ມີກະແສໄຫຼແຮງ ພັດສິ່ງທີ່ພໍຈະພັດໄປໄດ້ ບຸຣຸດເພິ່ງອັດປາກເໝືອງທັງ ໔ ຂ້າງແຫ່ງແມ່ນ້ຳນັ້ນ ເມື່ອອັດປາກເໝືອງແລ້ວແນວນີ້ ກະແສນ້ຳໃນທ່າມກາງແມ່ນ້ຳນັ້ນກໍບໍ່ຊັດສ່າຍບໍ່ໄຫຼຜິດທາງ ໄຫຼໄປສູ່ທີ່ໄກໄດ້ ມີກະແສໄຫຼແຮງ ແລະພັດສິ່ງທີ່ພໍຈະພັດໄປໄດ້ ສັນໃດ

ເປັນໄປໄດ້ທີ່ພິກຂຸນັ້ນລະນິວອນເຄື່ອງກາງກັ້ນ ໕ ປະການນີ້ທີ່ຄອບງຳຈິດ ທອນກຳລັງປັນຍາໄດ້ແລ້ວຈັກຮູ້ປະໂຫຍດຕົນ ຮູ້ປະໂຫຍດຜູ້ອື່ນ ຮູ້ປະໂຫຍດທັງສອງ ຫຼືຈັກເຮັດໃຫ້ແຈ້ງເຊິ່ງຍານທັດສະນະ ທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າທຳຂອງມະນຸດ ດ້ວຍປັນຍາທີ່ມີກຳລັງໄດ້ ສັນນັ້ນ

**ອາວະຣະນະສູດທີ ໑ ຈົບ**

## ໘. ອະກຸສະລະຣາສີສູດ

## ວ່າດ້ວຍກອງອະກຸສົນ

[໕໘] ພິກຂຸທັງຫຼາຍ ບຸກຄົນເມື່ອຈະກ່າວເຖິງກອງອະກຸສົນ ເມື່ອຈະກ່າວໃຫ້ຖືກ ເພິ່ງກ່າວເຖິງນິວອນ (ທຳທີ່ກັ້ນຈິດບໍ່ໃຫ້ບັນລຸຄວາມດີ) ໕ ປະການ ຍ້ອນກອງອະກຸສົນທັງໝົດ ຄື ນິວອນ ໕ ປະການ

ນິວອນ ໕ ປະການ ອັນໃດແດ່ ຄື

໑. ກາມສັນທະ
໒. ພະຍາບາດ
໓. ຖີນະມິດທະ
໔. ອຸດທັດຈະກຸກກຸດຈະ
໕. ວິຈິກິດສາ

ພິກຂຸທັງຫຼາຍ ບຸກຄົນເມື່ອຈະກ່າວເຖິງກອງອະກຸສົນ ເມື່ອຈະກ່າວໃຫ້ຖືກ ເພິ່ງກ່າວເຖິງນິວອນ ໕ ປະການນີ້ ຍ້ອນກອງອະກຸສົນທັງໝົດ ຄື ນິວອນ ໕ ປະການ

**ອະກຸສະລາຣາສິສູດທີ ໒ ຈົບ**

## ໓. ປະທານິຍັງຄະສູດ

## ວ່າດ້ວຍອົງຂອງພິກຂຸຜູ້ພໍ່າເພັງພຽນ

[໕໓] ພິກຂຸທັງຫຼາຍ ອົງຂອງພິກຂຸຜູ້ພ່ຳເພັງພຽນ ໕ ປະການນີ້

ອົງຂອງພິກຂຸຜູ້ພ່ຳເພັງພຽນ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ ເຊື່ອພຣະປັນຍາເຄື່ອງຕັດສະຣູ້[¹]ຂອງພຣະຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ເປັນຜູ້ມີອາພາດໜ້ອຍ ມີພະຍາດເບົາບາງ ປະກອບດ້ວຍໄຟທາດສຳລັບຍ່ອຍອາ ຫານສະໝ່ຳສະເໝີ ບໍ່ເຢັນຫຼາຍ ບໍ່ຮ້ອນຫຼາຍ ປານກາງ ເໝາະແກ່ການພ່ຳເພັງພຽນ

໓. ເປັນຜູ້ບໍ່ໂອ້ອວດ ບໍ່ມີມານຍາ ເຮັດຕົນໃຫ້ເປີດເຜີຍຕາມຄວາມເປັນຈິງໃນສາດສະດາ ຫຼືໃນເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍ

໔. ເປັນຜູ້ພາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖືເບົາໃນກຸສົນທຳທັງຫຼາຍຢູ່

໕. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນ ທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນສຸດທຸກໂດຍຖືກຕ້ອງ[໒]

ພິກຂຸທັງຫຼາຍ ອົງຂອງພິກຂຸຜູ້ພ່ຳເພັງພຽນ ໕ ປະການນີ້ແລ

**ປະທານິຍັງຄະສູດທີ ໓ ຈົບ**

## ໔. ສະມະຍະສູດ

## ວ່າດ້ວຍສະໄໝທີ່ຄວນພ່ຳເພັງພຽນ

[໕໔] ພິກຂຸທັງຫຼາຍ ສະໄໝທີ່ບໍ່ຄວນພ່ຳເພັງພຽນ ໕ ປະການນີ້

ສະໄໝທີ່ບໍ່ຄວນພ່ຳເພັງພຽນ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ເປັນຄົນແກ່ ຖືກຊະຣາຄອບງຳ ນີ້ເປັນສະໄໝທີ່ບໍ່ຄວນພ່ຳເພັງພຽນປະການທີ ໑

໒. ພິກຂຸໃນທຳວິໄນນີ້ເປັນຜູ້ອາພາດ ຖືກພະຍາດຄອບງຳ ນີ້ເປັນສະໄໝທີ່ບໍ່ຄວນພ່ຳເພັງພຽນປະການທີ ໒

໓. ສະໄໝທີ່ມີພິກສາຫາໄດ້ຍາກ ເຂົ້າກ້າເສຍຫາຍ ບິນທະບາດໄດ້ຍາກ ຈຶ່ງບໍ່ສະດວກແກ່ການສະແຫວງຫາລ້ຽງຊີບ ນີ້ເປັນສະໄໝທີ່ບໍ່ຄວນພ່ຳເພັງພຽນປະການທີ ໓

໔. ສະໄໝທີ່ມີໄພ ມີການປຸ້ນສະດົມໃນດົງ ຊາວຊົນນະບົດພາກັນຂຶ້ນຍານພາຫະນະ ອົບພະ ຍົບໄປ ນີ້ເປັນສະໄໝທີ່ບໍ່ຄວນພ່ຳເພັງພຽນປະການທີ ໔

໕. ສະໄໝທີ່ສົງແຕກແຍກກັນ ເມື່ອສົງແຕກແຍກກັນ ຈຶ່ງມີການດ່າກັນ ມີການກ່າວໂທດກັນ ມີການໃສ່ຮ້າຍກັນ ມີການປະຖິ້ມກັນ ໝູ່ຄົນທີ່ຍັງບໍ່ເຫຼື້ອມໃສໃນສົງນັ້ນກໍບໍ່ເຫຼື້ອມໃສ ແລະໝູ່ຄົນທີ່ເຫຼື້ອມໃສແລ້ວກໍກາຍເປັນອື່ນໄປ ນີ້ເປັນສະໄໝທີ່ບໍ່ຄວນພ່ຳເພັງພຽນປະການທີ ໕

ພິກຂຸທັງຫຼາຍ ສະໄໝທີ່ບໍ່ຄວນພໍາເພັງພຽນ ໕ ປະການ ນີ້ແລ

ພິກຂຸທັງຫຼາຍ ສະໄໝທີ່ຄວນພໍາເພັງພຽນ ໕ ປະການນີ້
ສະໄໝທີ່ຄວນພໍາເພັງພຽນ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທໍາວິໄນນີ້ຍັງເປັນຄົນໜຸ່ມແໜ້ນ ມີຜົມດໍາປອດ ປະກອບ ດ້ວຍຄວາມເປັນໜຸ່ມກໍາລັງຈະເລີນ ດໍາລົງຢູ່ໃນປະຖົມໄວ ນີ້ເປັນສະໄໝທີ່ ຄວນພໍາເພັງພຽນປະການທີ ໑

໒. ພິກຂຸໃນທໍາວິໄນນີ້ເປັນຜູ້ມີອາພາດໜ້ອຍ ມີພະຍາດເບົາບາງ ປະກອບດ້ວຍໄຟທາດສໍາລັບຍ່ອຍອາຫານສະໝໍ່າສະເໝີ ບໍ່ເຢັນຫຼາຍ ບໍ່ຮ້ອນຫຼາຍ ປານກາງເໝາະແກ່ການພໍາເພັງພຽນ ນີ້ເປັນສະໄໝທີ່ຄວນພໍາເພັງພຽນປະການທີ ໒

໓. ສະໄໝທີ່ມີພິກສາຫາໄດ້ງ່າຍ ເຂົ້າກ້າດີ ບິນທະບາດໄດ້ງ່າຍ ສະດວກແກ່ການສະແຫວງຫາລ້ຽງຊີບ ນີ້ເປັນສະໄໝທີ່ຄວນພໍາເພັງພຽນປະການທີ ໓

໔. ສະໄໝທີ່ຄົນທັງຫຼາຍພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນຄື ນໍ້ານົມກັບນໍ້າ ເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ ນີ້ເປັນສະໄໝທີ່ຄວນພໍາເພັງພຽນປະການທີ ໔

໕. ສະໄໝທີ່ສົງພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ມີອຸດເທດທີ່ສູດຮ່ວມກັນ ໆ ຢູ່ຜາສຸກ ເມື່ອສົງພ້ອມພຽງກັນ ຈຶ່ງບໍ່ມີການດ່າກັນ ບໍ່ມີການກ່າວໂທດກັນ ບໍ່ມີການໃສ່ຮ້າຍກັນ ບໍ່ມີການປະຖິ້ມກັນ ໝູ່ຄົນທີ່ຍັງບໍ່ເຫຼື້ອມໃສໃນສົງນັ້ນກໍເຫຼື້ອມໃສ ແລະໝູ່ຄົນທີ່ເຫຼື້ອມໃສແລ້ວກໍເຫຼື້ອມໃສຍິ່ງຂຶ້ນ ນີ້ເປັນສະໄໝທີ່ຄວນພໍາເພັງພຽນປະການທີ ໕

ພິກຂຸທັງຫຼາຍ ສະໄໝທີ່ຄວນພໍາເພັງພຽນ ໕ ປະການນີ້ແລ

**ສະມະຍະສູດທີ ໔ ຈົບ**

## ໕. ມາຕາປຸດຕະສູດ

## ວ່າດ້ວຍມານດາກັບບຸດ

[໕໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ຄົນທັງສອງ ຄືພິກຂຸແລະພິກຂຸນີ ຜູ້ເປັນ

ມານດາເປັນບຸດກັນ ເຂົ້າຈຳພັນສາໃນນະຄອນສາວັດຖີ ຄົນທັງສອງນັ້ນຕ້ອງການຈະເຫັນກັນເນືອງ ໆ ແມ່ນມານດາກໍຕ້ອງການຈະເຫັນບຸດເນືອງ ໆ ແມ່ນບຸດກໍຕ້ອງການຈະເຫັນມານດາເນືອງ ໆ ຍ້ອນ ການເຫັນກັນເນືອງ ໆ ຂອງຄົນທັງສອງນັ້ນ ຈຶ່ງມີຄວາມຄຸກຄີກັນ ເມື່ອມີຄວາມຄຸກຄີກັນ ຈຶ່ງມີຄວາມຄຸ້ນເຄີຍກັນ ເມື່ອມີຄວາມຄຸ້ນເຄີຍກັນຈຶ່ງມີປ່ອງ ຄົນທັງສອງນັ້ນມີຈິດໄດ້ປ່ອງ ບໍ່ບອກຄືນສິກຂາ ບໍ່ເປີດເຜີຍຄວາມທີ້ແທ້[໑] ເສບເມຖຸນທຳ[໒]ແລ້ວ

ຄັ້ງນັ້ນ ພິກຂຸຈຳນວນຫຼາຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຄົນທັງສອງຄືພິກຂຸແລະພິກຂຸນີຜູ້ເປັນມານດາເປັນບຸດກັນ ເຂົ້າຈຳພັນສາໃນນະຄອນສາວັດຖີນີ້ ຄົນທັງສອງນັ້ນຕ້ອງການຈະເຫັນກັນເນືອງ ໆ ແມ່ນມານດາກໍຕ້ອງການຈະເຫັນບຸດເນືອງ ໆ ແມ່ນບຸດກໍຕ້ອງການຈະເຫັນມານດາເນືອງ ໆ ຍ້ອນການເຫັນກັນເນືອງ ໆ ຂອງຄົນທັງສອງນັ້ນ ຈຶ່ງມີຄວາມຄຸກຄີກັນ ເມື່ອມີຄວາມຄຸກຄີກັນ ຈຶ່ງມີຄວາມຄຸ້ນເຄີຍກັນ ເມື່ອມີຄວາມຄຸ້ນເຄີຍກັນຈຶ່ງມີປ່ອງ ຄົນທັງສອງນັ້ນມີຈິດໄດ້ປ່ອງ ບໍ່ບອກຄືນສິກຂາ ບໍ່ເປີດເຜີຍຄວາມ ທີ້ແທ້ເສບເມຖຸນທຳແລ້ວ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ໂມຄະບຸຣຸດນັ້ນຍ່ອມສຳຄັນຫຼືບໍ່ວ່າ "ມານດາຍ່ອມບໍ່ກຳໜັດໃນບຸດ ຫຼືບຸດຍ່ອມບໍ່ກຳໜັດໃນມານດາ

໑. ເຮົາບໍ່ເຫັນຮູບອື່ນແມ່ນແນວໜຶ່ງ ເຊິ່ງເປັນທີ່ເກີດຄວາມກຳໜັດ ເກີດຄວາມຕ້ອງການ ເກີດຄວາມມົວເມົາ ເກີດຄວາມຜູກພັນ ເກີດຄວາມໝົກມຸ້ນ ເຮັດອັນຕະລາຍແກ່ການບັນລຸທຳທີ່ເປັນແດນກະເສມຈາກໂຍຄະອັນປະເສີດ ຄືຮູບແມ່ຍິງນີ້ເລີຍ ສັດທັງຫຼາຍກຳໜັດ ຍິນດີ ຕິດໃຈ ໝົກມຸ້ນ ພົວພັນຢູ່ໃນຮູບແມ່ຍິງ ຕົກຢູ່ໃຕ້ອຳນາດຮູບແມ່ຍິງ ຈຶ່ງເສົ້າໂສກຕະຫຼອດການລະນານ

໒. ເຮົາບໍ່ເຫັນສຽງອື່ນແມ່ນແນວໜຶ່ງ ຯລຯ

໓. ເຮົາບໍ່ເຫັນກິ່ນອື່ນແມ່ນແນວໜຶ່ງ ຯລຯ

໔. ເຮົາບໍ່ເຫັນຣົດອື່ນແມ່ນແນວໜຶ່ງ ຯລຯ

໕. ເຮົາບໍ່ເຫັນໂຜດຖັບພະອື່ນແມ່ນແນວໜຶ່ງ ເຊິ່ງເປັນທີ່ເກີດຄວາມກຳໜັດ ເກີດຄວາມຕ້ອງການ ເກີດຄວາມມົວເມົາ ເກີດຄວາມຜູກພັນ ເກີດຄວາມໝົກມຸ້ນ ເຮັດອັນຕະລາຍແກ່ການບັນລຸທຳທີ່ເປັນແດນກະເສມຈາກໂຍຄະອັນປະເສີດ ຄືໂຜດຖັບພະແມ່ຍິງນີ້ເລີຍ ສັດທັງຫຼາຍກຳໜັດ ຍິນດີ ຕິດໃຈ ໝົກມຸ້ນ ພົວພັນຢູ່ໃນໂຜດຖັບພະແມ່ຍິງ ຕົກຢູ່ໃນໂຜດຖັບພະແມ່ຍິງ ຈຶ່ງເສົ້າໂສກຕະຫຼອດການລະນານ

ແມ່ຍິງແມ່ນຍ່າງຢູ່ກໍຄອບງຳຈິດຂອງບຸຣຸດໄດ້ ແມ່ນຢືນຢູ່ ຯລຯ ແມ່ນນັ່ງຢູ່ ແມ່ນນອນຢູ່ ຯລຯ ແມ່ນຫົວຢູ່ ຯລຯ ແມ່ນເວົ້າຢູ່ ຯລຯ ແມ່ນຫົວຢູ່ ຯລຯ ແມ່ນຂັບຮ້ອງຢູ່ ຯລຯ ແມ່ນຮ້ອງໄຫ້ຢູ່ ຯລຯ ແມ່ນພອງຂຶ້ນ ຯລຯ ແມ່ນຕາຍແລ້ວກໍຄອບງຳຈິດຂອງບຸຣຸດໄດ້

ພິກຂຸທັງຫຼາຍ ບຸກຄົນເມື່ອຈະກ່າວເຖິງສິ່ງໜຶ່ງສິ່ງໃດວ່າ "ເປັນບ້ວງຮ້ອຍຮັດແຫ່ງມານ ເມື່ອຈະກ່າວໃຫ້ຖືກກໍເພິ່ງກ່າວເຖິງມາຕຸຄາມ[໑]ນັ້ນແລວ່າ "ເປັນບ້ວງຮ້ອຍຮັດແຫ່ງມານ

ບຸກຄົນສົນທະນາກັບເພດຊະຄາດກໍດີ
ສົນທະນາກັບຜີສາດກໍດີ
ຖືກຕ້ອງອະສໍຣະພິດທີ່ກັດແລ້ວຕາຍກໍດີ
ກໍຍັງບໍ່ຮ້າຍແຮງທໍ່ການສົນທະນາສອງຕໍ່ສອງກັບມາຕຸຄາມເລີຍ
ແມ່ຍິງທັງຫຼາຍຍ່ອມຜູກພັນບຸຣຸດຜູ້ລຸ້ມຫຼົງ
ດ້ວຍການແນມເບິ່ງ ການຫົວຂວັນ
ການນຸ່ງຫົ່ມບໍ່ຮຽບຮ້ອຍ ແລະການເວົ້າອ່ອນຫວານ
ມາຕຸຄາມນີ້ບໍ່ແມ່ນຈະຜູກພັນພຽງສ່ຳນີ້
ແມ່ນຕາຍໄປແລ້ວພອງຂຶ້ນ ກໍຍັງຜູກພັນໄດ້
ການມະຄຸນ ໕ ນີ້ ຄື ຮູບ ສຽງ ກິ່ນ ຣົດ ແລະໂຜດຖັບພະ
ເຊິ່ງໜ້າອອນຊອນໃຈ ຍ່ອມຜາກົດໃນຮູບແມ່ຍິງ
ເຫຼົ່າຊົນຜູ້ຖືກກາໂມຄະ (ແມ່ນ້ຳຄືການ) ພັດ
ບໍ່ກຳນົດຮູ້ການ ຍ່ອມມີການ (ແຫ່ງວັດຕະ) ຄະຕິ
ແລະພົບນ້ອຍພົບໃຫຍ່ໃນວັດຕະສົງສານເປັນເບື້ອງໜ້າ
ສ່ວນຊົນເຫຼົ່າໃດ ກຳນົດຮູ້ການ[໑]
ເປັນຜູ້ບໍ່ມີໄພໃນບ່ອນໃດ? ໆ ທ່ຽວໄປ
ຊົນເຫຼົ່ານັ້ນຜູ້ບັນລຸຄວາມໝົດສິ້ນໄປແຫ່ງອາສະວະ
ເປັນຜູ້ເຖິງຝັ່ງ[໒]ໃນໂລກ

**ມາຕາປຸດຕະສູດທີ ໕ ຈົບ**

## ໖. ອຸປັດຊາຍະສູດ

## ວ່າດ້ວຍອຸປັດຊາ[໓]

[໕໖] ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປຫາພຣະອຸປັດຊາຂອງຕົນຮອດບ່ອນຢູ່ ໄດ້ກ່າວ

ດັ່ງນີ້ວ່າ "ຂ້າແດ່  ທ່ານຜູ້ຈະເລີນ ດຽວນີ້ ກາຍຂອງຂ້ານ້ອຍໜັກຂຶ້ນ ທິດທັງຫຼາຍບໍ່ຜາກົດແກ່ຂ້ານ້ອຍ ທຳທັງຫຼາຍ[๑]ກໍບໍ່ແຈ່ມແຈ້ງແກ່ຂ້ານ້ອຍ ຂ້ານ້ອຍຖືກຖີນະມິດທະຄອບງຳຈິດ ບໍ່ຍິນດີປະພຶດພົມມະຈັນ ແລະມີຄວາມສົງໄສໃນທຳທັງຫຼາຍ

ຕໍ່ມາ ພິກຂຸນັ້ນພາພິກຂຸສັດທິວິຫາຣິກ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພຣະພາກວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸນີ້ກ່າວແນວນີ້ວ່າ "ດຽວນີ້ ກາຍຂອງຂ້ານ້ອຍໜັກຂຶ້ນ ທິດທັງຫຼາຍ ບໍ່ຜາກົດແກ່ຂ້ານ້ອຍ ທຳທັງຫຼາຍກໍບໍ່ແຈ່ມແຈ້ງແກ່ຂ້ານ້ອຍ ຂ້ານ້ອຍຖືກຖີນະມິດທະຄອບງຳຈິດ ບໍ່ຍິນດີປະພຶດພົມມະຈັນ ແລະມີຄວາມສົງໄສໃນທຳທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸ ການທີ່ກາຍຂອງທ່ານໜັກຂຶ້ນ ທິດທັງຫຼາຍບໍ່ຜາກົດແກ່ທ່ານ ທຳທັງຫຼາຍບໍ່ແຈ່ມແຈ້ງແກ່ທ່ານ ທ່ານຖືກຖີນະມິດທະຄອບງຳຈິດ ບໍ່ຍິນດີປະພຶດພົມມະຈັນ ແລະມີຄວາມສົງໄສໃນທຳທັງຫຼາຍນີ້ ຍ່ອມມີແກ່ພິກຂຸຜູ້ບໍ່ຄຸ້ມຄອງທະວານໃນອິນຊີ ບໍ່ຮູ້ຈັກປະມານໃນການບໍຣິໂພກ ບໍ່ປະກອບຄວາມພຽນເປັນເຄື່ອງຕື່ນຢູ່ ບໍ່ເຫັນແຈ້ງກຸສົນທຳທັງຫຼາຍ ບໍ່ປະກອບການຈະເລີນໂພທິປັກຂິຍະທຳທັງຫຼາຍທຸກມື້ທຸກຄືນ ຍ້ອນເຫດນັ້ນແລ ທ່ານເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາຈັກຄຸ້ມຄອງທະວານໃນອິນຊີ ຮູ້ຈັກປະມານໃນການບໍຣິໂພກ ປະກອບຄວາມພຽນເປັນເຄື່ອງຕື່ນຢູ່ ເຫັນແຈ້ງກຸສົນທຳທັງຫຼາຍ ປະກອບການຈະເລີນໂພທິປັກຂິຍະທຳທັງຫຼາຍທຸກມື້ ທຸກຄືນ ພິກຂຸ ທ່ານເພິ່ງຕັ້ງໃຈຮູ້ແນວນີ້ແລ

ຄັ້ງນັ້ນ ພິກຂຸນັ້ນອັນພຣະຜູ້ມີພຣະພາກເຈົ້າຕັດສອນດ້ວຍພຣະໂອວາດນີ້ແລ້ວກໍລຸກຈາກອາສະນະ ຖວາຍອະພິວາດ ກະທຳປະທັກຂິນແລ້ວຫຼີກໄປ ລຳດັບນັ້ນ ພິກຂຸນັ້ນຫຼີກອອກໄປຢູ່ຜູ້ດຽວ ບໍ່ຜະ ໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດໄດ້ເຮັດໃຫ້ແຈ້ງ ເຊິ່ງປະໂຫຍດປະເສີດ[๒] ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ໄດ້ຮູ້ແຈ້ງວ່າ "ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດ[๓]ສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ[๔] ກໍພິກຂຸນັ້ນໄດ້ເປັນພຣະອະຣະຫັນອົງໜຶ່ງໃນຈຳນວນພຣະອະຣະຫັນທັງຫຼາຍ

ເມື່ອພິກຂຸນັ້ນໄດ້ບັນລຸຄວາມເປັນພຣະອະຣະຫັນແລ້ວ ຈຶ່ງເຂົ້າໄປຫາພຣະອຸປັດຊາຂອງຕົນຮອດບ່ອນຢູ່ແລ້ວກ່າວວ່າ "ຂ້າແດ່ທ່ານຜູ້ຈະເລີນ ດຽວນີ້ ກາຍຂອງຂ້ານ້ອຍບໍ່ໜັກຂຶ້ນ ທິດທັງຫຼາຍຜາກົດແກ່ຂ້ານ້ອຍ ທຳທັງຫຼາຍແຈ່ມແຈ້ງແກ່ຂ້ານ້ອຍ ຂ້ານ້ອຍບໍ່ຖືກຖີນະມິດທະ ຄອບງຳຈິດ ຍິນດີປະພຶດພົມມະຈັນ ແລະບໍ່ມີຄວາມສົງໄສໃນທຳທັງຫຼາຍ

ລຳດັບນັ້ນ ພິກຂຸນັ້ນພາພິກຂຸສັດທິວິຫາຣິກນັ້ນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ "ຂ້າແດ່  ພຣະອົງຜູ້

ຈະເລີນ ພິກຂຸນີ້ກ່າວແນວນີ້ວ່າ "ຂ້າແດ່ ທ່ານຜູ້ຈະເລີນ ດັ່ງວນີ້ ກາຍຂອງຂ້ານ້ອຍບໍ່ໜັກຂຶ້ນ ທິດທັງຫຼາຍຜາກົດແກ່ຂ້ານ້ອຍ ທຳທັງຫຼາຍແຈ່ມແຈ້ງແກ່ຂ້ານ້ອຍ ຂ້ານ້ອຍບໍ່ຖືກຖີນະມິດທະຄອບງຳຈິດ ຍິນດີປະພຶດພົມມະຈັນ ແລະບໍ່ມີຄວາມສົງໄສໃນທຳທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸ ການທີ່ກາຍຂອງທ່ານບໍ່ໜັກຂຶ້ນ ທິດທັງຫຼາຍຜາກົດແກ່ທ່ານ ທຳທັງຫຼາຍແຈ່ມແຈ້ງແກ່ທ່ານ ຖີນະມິດທະບໍ່ຄອບງຳຈິດ ຍິນດີປະພຶດພົມມະຈັນແລະບໍ່ມີຄວາມສົງໄສໃນທຳທັງຫຼາຍນີ້ ຍ່ອມມີແກ່ພິກຂຸຜູ້ຄຸ້ມຄອງທະວານໃນອິນຊີ ຮູ້ຈັກປະມານໃນການບໍຣິໂພກ ປະກອບຄວາມພຽນເຄື່ອງຕື່ນຢູ່ ເຫັນແຈ້ງກຸສົນທຳ ປະກອບການຈະເລີນໂພທິປັກຂິຍະທຳທັງຫຼາຍທຸກມື້ທຸກຄືນ ຍ້ອນເຫດນັ້ນແລ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາຈັກຄຸ້ມຄອງທະວານໃນອິນຊີ ຮູ້ຈັກປະມານໃນການບໍຣິໂພກ ປະກອບຄວາມພຽນເຄື່ອງຕື່ນຢູ່ ເຫັນແຈ້ງກຸສົນທຳ ປະກອບການຈະເລີນໂພທິປັກຂິຍະທຳທຸກມື້ທຸກຄືນ

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ອຸປັດຊາຍະສູດທີ ໖ ຈົບ**

## ໗. ຖານະສູດ

## ວ່າດ້ວຍຖານະທີ່ຄວນພິຈາລະນາເນືອງ ໆ

[໕໗] ພິກຂຸທັງຫຼາຍ ຖານະ ໕ ປະການນີ້ ທີ່ແມ່ຍິງ ບຸຣຸດ ຄະລຶຫັດ ຫຼື ບັນພະຊິດຕ້ອງພິຈາລະນາເນືອງ ໆ

ຖານະ ໕ ປະການ ອັນໃດແດ່ ຄື

ແມ່ຍິງ ບຸຣຸດ ຄະລຶຫັດ ຫຼື ບັນພະຊິດຄວນພິຈາລະນາ ເນືອງ ໆ ວ່າ

໑. ເຮົາມີຄວາມແກ່ເປັນທຳມະດາ ບໍ່ລ່ວງພົ້ນຄວາມແກ່ໄປໄດ້
໒. ເຮົາມີຄວາມເຈັບໄຂ້ເປັນທຳມະດາ ບໍ່ລ່ວງພົ້ນຄວາມເຈັບໄຂ້ໄປໄດ້
໓. ເຮົາມີຄວາມຕາຍເປັນທຳມະດາ ບໍ່ລ່ວງພົ້ນຄວາມຕາຍໄປໄດ້
໔. ເຮົາຈະຕ້ອງພັດພາກຈາກຂອງຮັກຂອງພໍໃຈທັງໝົດ
໕. ເຮົາມີກຳເປັນຂອງຕົນ ເປັນຜູ້ຮັບຜົນຂອງກຳ ມີກຳເປັນກຳເນີດ ມີກຳເປັນເຜົ່າພັນ ມີກຳເປັນບ່ອນເພິ່ງອາໄສ ເຮົາເຮັດກຳໃດໄວ້ຈະເປັນ ກຳດີຫຼືກຳຊົ່ວກໍຕາມ ຍ່ອມເປັນຜູ້ຮັບຜົນຂອງກຳນັ້ນສືບໄປ

ແມ່ຍິງ ບຸຣຸດ ຄະລືຫັດ ຫຼືບັນພະຊິດຄວນພິຈາລະນາເນືອງ ໆ ວ່າ "ເຮົາມີຄວາມແກ່ເປັນທຳມະດາ ບໍ່ລ່ວງພົ້ນຄວາມແກ່ໄປໄດ້ ຍ້ອນອາໄສອຳນາດປະໂຫຍດອັນໃດ

ຍ້ອນອາໄສອຳນາດປະໂຫຍດນີ້ແລວ່າ "ສັດທັງຫຼາຍມີຄວາມມົວເມົາໃນຄວາມເປັນໜຸ່ມສາວເຊິ່ງເປັນເຫດໃຫ້ປະພຶດຊົ່ວດ້ວຍກາຍ ປະພຶດຊົ່ວດ້ວຍວາຈາ ປະພຶດຊົ່ວດ້ວຍໃຈ ເມື່ອເຂົາພິຈາລະນາຖານະນັ້ນຢູ່ເນືອງ ໆ ຍ່ອມລະຄວາມມົວເມົາໃນຄວາມເປັນໜຸ່ມສາວນັ້ນໄດ້ໂດຍເດັດຂາດ ຫຼືເຮັດໃຫ້ເບົາບາງລົງໄດ້

ແມ່ຍິງ ບຸຣຸດ ຄະລືຫັດ ຫຼືບັນພະຊິດຈຶ່ງຄວນພິຈາລະນາເນືອງ ໆ ວ່າ "ເຮົາມີຄວາມແກ່ເປັນທຳມະດາ ບໍ່ລ່ວງພົ້ນຄວາມແກ່ໄປໄດ້

ແມ່ຍິງ ບຸຣຸດ ຄະລືຫັດ ຫຼືບັນພະຊິດຄວນພິຈາລະນາເນືອງ ໆ ວ່າ "ເຮົາມີຄວາມເຈັບໄຂ້ເປັນທຳມະດາ ບໍ່ລ່ວງພົ້ນຄວາມເຈັບໄຂ້ໄປໄດ້ ຍ້ອນອາໄສອຳນາດປະໂຫຍດອັນໃດ

ຍ້ອນອາໄສອຳນາດປະໂຫຍດນີ້ແລວ່າ "ສັດທັງຫຼາຍມີຄວາມມົວເມົາໃນຄວາມບໍ່ມີພະຍາດເຊິ່ງເປັນເຫດໃຫ້ສັດປະພຶດຊົ່ວດ້ວຍກາຍ ປະພຶດຊົ່ວດ້ວຍວາຈາ ປະພຶດຊົ່ວດ້ວຍໃຈ ເມື່ອເຂົາພິຈາລະນາຖານະນັ້ນຢູ່ເນືອງ ໆ ຍ່ອມລະຄວາມມົວເມົາໃນຄວາມບໍ່ມີພະຍາດນັ້ນໄດ້ໂດຍເດັດຂາດ ຫຼື ເຮັດໃຫ້ເບົາບາງລົງໄດ້

ແມ່ຍິງ ບຸຣຸດ ຄະລືຫັດ ຫຼືບັນພະຊິດຈຶ່ງຄວນພິຈາລະນາເນືອງ ໆ ວ່າ "ເຮົາມີຄວາມເຈັບໄຂ້ເປັນທຳມະດາ ບໍ່ລ່ວງພົ້ນຄວາມເຈັບໄຂ້ໄປໄດ້

ແມ່ຍິງ ບຸຣຸດ ຄະລືຫັດ ຫຼືບັນພະຊິດຄວນພິຈາລະນາເນືອງ ໆ ວ່າ "ເຮົາມີຄວາມຕາຍເປັນທຳມະດາ ບໍ່ລ່ວງພົ້ນຄວາມຕາຍໄປໄດ້ ຍ້ອນອາໄສອຳນາດປະໂຫຍດອັນໃດ

ຍ້ອນອາໄສອຳນາດປະໂຫຍດນີ້ແລວ່າ "ສັດທັງຫຼາຍ ມີຄວາມມົວເມົາໃນຊີວິດເຊິ່ງເປັນເຫດໃຫ້ປະພຶດຊົ່ວດ້ວຍກາຍ ປະພຶດຊົ່ວດ້ວຍວາຈາ ປະພຶດຊົ່ວດ້ວຍໃຈ ເມື່ອເຂົາພິຈາລະນາຖານະນັ້ນຢູ່ເນືອງ ໆ ຍ່ອມລະຄວາມມົວເມົາໃນຊີວິດນັ້ນໄດ້ໂດຍເດັດຂາດ ຫຼື ເຮັດໃຫ້ເບົາບາງລົງໄດ້

ແມ່ຍິງ ບຸຣຸດ ຄະລືຫັດ ຫຼື ບັນພະຊິດຈຶ່ງຄວນພິຈາລະນາເນືອງ ໆ ວ່າ "ເຮົາມີຄວາມຕາຍເປັນທຳມະດາ ບໍ່ລ່ວງພົ້ນຄວາມຕາຍໄປໄດ້

ແມ່ຍິງ ບຸຣຸດ ຄະລືຫັດ ຫຼື ບັນພະຊິດຄວນພິຈາລະນາເນືອງ ໆ ວ່າ "ເຮົາຈະຕ້ອງພັດພາກຈາກຂອງຮັກຂອງພໍໃຈທັງໝົດ ຍ້ອນອາໄສອຳນາດປະໂຫຍດອັນໃດ

ຍ້ອນອາໄສອຳນາດປະໂຫຍດນີ້ແລວ່າ "ສັດທັງຫຼາຍ ມີຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນຂອງຮັກຂອງພໍໃຈ ເຊິ່ງເປັນເຫດໃຫ້ປະພຶດຊົ່ວດ້ວຍກາຍ ປະພຶດຊົ່ວດ້ວຍວາຈາ ປະພຶດຊົ່ວດ້ວຍໃຈ ເມື່ອເຂົາພິຈາລະນາຖານະນັ້ນຢູ່ເນືອງ ໆ ຍ່ອມລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນຂອງຮັກຂອງພໍໃຈນັ້ນໄດ້ໂດຍເດັດຂາດ ຫຼື ເຮັດໃຫ້ເບົາບາງລົງໄດ້

ແມ່ຍິງ ບຸຣຸດ ຄະລິຫັດ ຫຼື ບັນພະຊິດຈຶ່ງຄວນພິຈາລະນາເນືອງ ໆ ວ່າ "ເຮົາຈະຕ້ອງພັດພາກຈາກຂອງຮັກຂອງພໍໃຈທັງໝົດ

ແມ່ຍິງ ບຸຣຸດ ຄະລິຫັດ ຫຼືບັນພະຊິດຄວນພິຈາລະນາເນືອງ ໆ ວ່າ "ເຮົາມີກຳ ເປັນຂອງຕົນ ເປັນຜູ້ຮັບຜົນຂອງກຳ ມີກຳເປັນກຳເນີດ ມີກຳເປັນເຜົ່າພັນ ມີກຳເປັນບ່ອນເພິ່ງອາໄສ ເຮົາເຮັດກຳໃດໄວ້ ຈະເປັນກຳດີຫຼືກຳຊົ່ວກໍຕາມ ຍ່ອມເປັນຜູ້ຮັບຜົນຂອງກຳນັ້ນ ຍ້ອນອາໄສອຳນາດປະໂຫຍດອັນໃດ

ຍ້ອນອາໄສອຳນາດປະໂຫຍດນີ້ແລວ່າ "ສັດທັງຫຼາຍມີກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ເມື່ອເຂົາພິຈາລະນາຖານະນັ້ນຢູ່ເນືອງ ໆ ຍ່ອມລະທຸດຈະຣິດໄດ້ໂດຍເດັດຂາດ ຫຼືເຮັດໃຫ້ເບົາບາງລົງໄດ້

ແມ່ຍິງ ບຸຣຸດ ຄະລິຫັດ ຫຼືບັນພະຊິດຈຶ່ງຄວນພິຈາລະນາເນືອງ ໆ ວ່າ "ເຮົາມີກຳ ເປັນຂອງຕົນ ເປັນຜູ້ຮັບຜົນຂອງກຳ ມີກຳເປັນກຳເນີດ ມີກຳເປັນເຜົ່າພັນ ມີກຳເປັນບ່ອນເພິ່ງອາໄສ ເຮົາເຮັດກຳໃດໄວ້ ຈະເປັນກຳດີຫຼືກຳຊົ່ວກໍຕາມ ຍ່ອມເປັນຜູ້ຮັບຜົນຂອງກຳນັ້ນ

ຜົນແຫ່ງການພິຈາລະນາຖານະ ໕ ປະການ

ພິກຂຸທັງຫຼາຍ

໑. ອະຣິຍະສາວົກນັ້ນພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນເຮົາຄົນດຽວທໍ່ນັ້ນ ທີ່ມີຄວາມແກ່ເປັນທຳມະດາ ບໍ່ລ່ວງພົ້ນຄວາມແກ່ໄປໄດ້ ແທ້ຈິງແລ້ວ ສັດທັງປວງທີ່ມີການມາ ການໄປ ການຈຸຕິ ການອຸບັດ ລ້ວນມີຄວາມແກ່ເປັນທຳມະດາ ບໍ່ລ່ວງພົ້ນຄວາມແກ່ໄປໄດ້ ເມື່ອອະຣິຍະສາວົກນັ້ນພິຈາລະນາຖານະນັ້ນຢູ່ເນືອງ ໆ ມັກ[໑]ຍ່ອມເກີດຂຶ້ນ ອະຣິຍະສາວົກນັ້ນຍ່ອມເສບ[໒] ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ເມື່ອເສບ ຈະເລີນ ເຮັດໃຫ້ຫຼາຍຢູ່ ຍ່ອມລະສັງໂຍດ[໓]ໄດ້ ອະນຸໄສ[໔] ຍ່ອມໝົດສິ້ນໄປ

໒. ອະຣິຍະສາວົກນັ້ນພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນເຮົາຄົນດຽວທໍ່ນັ້ນທີ່ມີຄວາມເຈັບໄຂ້ເປັນທຳມະດາ ບໍ່ລ່ວງພົ້ນຄວາມເຈັບໄຂ້ໄປໄດ້ ແທ້ຈິງແລ້ວ ສັດທັງປວງທີ່ມີການມາ ການໄປ ການຈຸຕິ ການອຸບັດ ກໍລ້ວນມີຄວາມເຈັບໄຂ້ ເປັນທຳມະດາ ບໍ່ລ່ວງພົ້ນຄວາມເຈັບໄຂ້ໄປໄດ້ ເມື່ອອະຣິຍະສາວົກນັ້ນພິຈາລະນາ ຖານະນັ້ນຢູ່ເນືອງ ໆ ມັກຍ່ອມເກີດຂຶ້ນ ອະຣິຍະສາວົກນັ້ນ

ຍ່ອມເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ເມື່ອເສບ ຈະເລີນ ເຮັດໃຫ້ຫຼາຍຢູ່ ຍ່ອມລະສັງໂຍດໄດ້ ອະນຸໄສຍ່ອມໝົດສິ້ນໄປ

໓. ອະຣິຍະສາວິການັ້ນພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນເຮົາຄົນດຽວເທົ່ານັ້ນທີ່ມີຄວາມຕາຍເປັນທຳມະດາ ບໍ່ລ່ວງພົ້ນຄວາມຕາຍໄປໄດ້ ແທ້ຈິງແລ້ວ ສັດທັງປວງ ທີ່ມີການມາ ການໄປ ການຈຸຕິ ການອຸບັດ ກໍລ້ວນມີຄວາມຕາຍເປັນທຳມະດາ ບໍ່ລ່ວງພົ້ນຄວາມຕາຍໄປໄດ້ ເມື່ອອະຣິຍະສາວິການັ້ນພິຈາລະນາຖານະນັ້ນຢູ່ເນືອງ ໆ ມັກຍ່ອມເກີດຂຶ້ນ ອະຣິຍະສາວິການັ້ນຍ່ອມເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ເມື່ອເສບ ຈະເລີນ ເຮັດໃຫ້ຫຼາຍຢູ່ ຍ່ອມລະສັງໂຍດໄດ້ ອະນຸໄສຍ່ອມໝົດສິ້ນໄປ

໔. ອະຣິຍະສາວິການັ້ນພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນເຮົາຄົນດຽວເທົ່ານັ້ນ ທີ່ຈະຕ້ອງພັດພາກຈາກຂອງຮັກຂອງພໍໃຈທັງໝົດ ແທ້ຈິງແລ້ວ ສັດທັງປວງທີ່ມີການມາ ການໄປ ການຈຸຕິ ການອຸບັດ ກໍລ້ວນຈະຕ້ອງພັດພາກຈາກຂອງຮັກຂອງພໍໃຈທັງໝົດ ເມື່ອອະຣິຍະສາວິການັ້ນພິຈາລະນາຖານະນັ້ນຢູ່ເນືອງ ໆ ມັກຍ່ອມເກີດຂຶ້ນ ອະຣິຍະສາວິການັ້ນຍ່ອມເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ເມື່ອເສບ ຈະເລີນ ເຮັດໃຫ້ຫຼາຍຢູ່ ຍ່ອມລະສັງໂຍດໄດ້ ອະນຸໄສຍ່ອມໝົດສິ້ນໄປ

໕. ອະຣິຍະສາວິການັ້ນພິຈາລະນາເຫັນດັ່ງນີ້ວ່າ "ບໍ່ແມ່ນເຮົາຄົນດຽວເທົ່ານັ້ນທີ່ມີກຳ ເປັນຂອງຕົນ ເປັນຜູ້ຮັບຜົນຂອງກຳ ມີກຳເປັນກຳເນີດ ມີກຳເປັນເຜົ່າພັນ ມີກຳເປັນບ່ອນເພິ່ງອາໄສ ເຮົາເຮັດກຳໃດໄວ້ ຈະເປັນກຳດີຫຼື ກຳຊົ່ວກໍຕາມ ຍ່ອມເປັນຜູ້ຮັບຜົນຂອງກຳນັ້ນ ແທ້ຈິງແລ້ວ ສັດທັງປວງທີ່ມີການມາ ການໄປ ການຈຸຕິ ການອຸບັດ ລ້ວນມີກຳເປັນຂອງຕົນ ເປັນຜູ້ຮັບຜົນຂອງກຳ ມີກຳເປັນກຳເນີດ ມີກຳເປັນເຜົ່າພັນ ມີກຳເປັນບ່ອນເພິ່ງອາໄສ ເຮັດກຳໃດໄວ້ ຈະເປັນກຳດີຫຼືກຳຊົ່ວກໍຕາມ ຍ່ອມເປັນຜູ້ຮັບຜົນຂອງກຳນັ້ນ ເມື່ອອະຣິຍະສາວິການັ້ນ ພິຈາລະນາຖານະນັ້ນຢູ່ ເນືອງ ໆ ມັກຍ່ອມເກີດຂຶ້ນ ອະຣິຍະສາວິການັ້ນ ຍ່ອມເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ເມື່ອເສບ ຈະເລີນ ເຮັດໃຫ້ຫຼາຍຢູ່ ຍ່ອມລະສັງໂຍດໄດ້ ອະນຸໄສຍ່ອມໝົດສິ້ນໄປ

ສັດທັງຫຼາຍ ມີຄວາມແກ່ ມີຄວາມເຈັບ
ແລະມີຄວາມຕາຍເປັນທຳມະດາ
ຍ່ອມເປັນໄປຕາມທຳ
ພວກປຸຖຸຊົນຍ່ອມກຽດຊັງ
ຖ້າເຮົາເພິ່ງກຽດຊັງທຳນັ້ນ
ໃນສັດທັງຫຼາຍຜູ້ມີທຳແນວນັ້ນ
ຂໍ້ນັ້ນບໍ່ສົມຄວນແກ່ເຮົາ ຜູ້ເປັນຢູ່ແນວນີ້

ເຮົານັ້ນ ດຳລົງຢູ່ແນວນີ້ ຮູ້ທຳທີ່ບໍ່ມີອຸປະທິກິເລດ[໑]
ເຫັນເນກຂຳມະ[໒]ວ່າ ເປັນທຳກະເສມ
ຄອບງຳຄວາມມົວເມົາທັງປວງໃນຄວາມບໍ່ມີພະຍາດ
ໃນຄວາມເປັນໜຸ່ມ ສາວ ແລະໃນຊີວິດ
ຄວາມອຸດສາຫະໄດ້ມີແລ້ວແກ່ເຮົາຜູ້ເຫັນແຈ້ງນິບພານ
ບັດນີ້ ເຮົາບໍ່ຄວນເສບກາມ
ຈັກປະພຶດບໍ່ຖອຍຫຼັງ[໓]
ມຸ້ງປະພຶດພົມມະຈັນ[໔]

**ຖານະສູດທີ ໗ ຈົບ**

## ໘. ລິດສະວິກຸມາຣະກະສູດ

## ວ່າດ້ວຍເຈົ້າລິດສະຫວິກຸມານ

[໕໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ກູຕາຄານສາລາ ປ່າມະຫາວັນເຂດນະຄອນເວສາລີ ຄັ້ງນັ້ນແລ ເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດ ແລະຈີວອນ ສະເດັດເຂົ້າໄປໃນເມືອງເວສາລີເພື່ອບິນທະບາດ ສະເດັດກັບຈາກບິນທະບາດຫຼັງຈາກສະເຫວີຍພຣະກະຍາຫານສຳເລັດແລ້ວ ຈຶ່ງສະເດັດເຂົ້າໄປສູ່ປ່າມະຫາວັນ ປະທັບນັ່ງພັກຜ່ອນກາງເວັນຢູ່ເຫງົ້າໄມ້ຕົ້ນໜຶ່ງ

ສະໄໝນັ້ນ ເຈົ້າລິດສະຫວິກຸມານຫຼາຍພຣະອົງຖືທະນູທີ່ຂຶ້ນສາຍ ມີຝູງໝາຮ້ອມລ້ອມຍ່າງທ່ຽວໄປໃນປ່າມະຫາວັນ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າປະທັບນັ່ງຢູ່ທີ່ເຫງົ້າໄມ້ຕົ້ນໜຶ່ງ ຈຶ່ງວາງທະນູທີ່ຂຶ້ນສາຍໄວ້ແລ້ວ ປ່ອຍຝູງໝາໄປບ່ອນທີ່ສົມຄວນ ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ຕ່າງນັ່ງມິດປະຄອງອັນຊະລີຢູ່ໃກ້ພຣະຜູ້ມີພຣະພາກເຈົ້າ

ສະໄໝນັ້ນ ເຈົ້າລິດສະຫວີນາມວ່າ ມະຫານາມຍ່າງພັກຜ່ອນຢູ່ໃນປ່າມະຫາວັນ ໄດ້ເຫັນເຈົ້າລິດສະຫວິກຸມານເຫຼົ່ານັ້ນ ຜູ້ຕ່າງນັ່ງມິດປະຄອງອັນຊະລີຢູ່ໃກ້ພຣະຜູ້ມີພຣະພາກເຈົ້າຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ເປ່ງອຸທານວ່າ "ເຈົ້າວັດຊີຈັກຈະເລີນ ເຈົ້າວັດຊີຈັກຈະເລີນ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ມະຫານາມ ຍ້ອນເຫດໃດ ທ່ານຈຶ່ງກ່າວແນວນີ້ວ່າ "ເຈົ້າວັດຊີຈັກຈະເລີນ ເຈົ້າວັດຊີຈັກຈະເລີນ"

ເຈົ້າມະຫານາມຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເຈົ້າລິດສະຫວິກຸມານເຫຼົ່ານີ້

ເປັນຜູ້ ດຸຮ້າຍ ຫຍາບຄາຍ ກະດ້າງ ຂອງຂວັນຕ່າງ ໆ ຄື ອ້ອຍ ໝາກກະທັນ ເຂົ້າໜົມ ເຂົ້າຕົ້ມ ຫຼື ເຂົ້າໜົມແດກງາທີ່ເຂົາສົ່ງໄປໃນຕະກູນທັງຫຼາຍ ເຈົ້າລິດສະຫວີກຸມານເຫຼົ່ານີ້ກໍແຍ່ງຊີງເອົາໄປກິນ ຖີບຫຼັງກຸນລະສະຕີແດ່ ກຸນລະກຸມາຣີແດ່ ແຕ່ບັດນີ້ ເຈົ້າລິດສະຫວີກຸມານເຫຼົ່ານີ້ຕ່າງນັ່ງມິດປະຄອງອັນຊະລີ ຢູ່ໃກ້ພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫານາມ ກຸນລະບຸດຄົນໃດ ເປັນກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກ໌ແລ້ວກໍຕາມ ເປັນຜູ້ປົກຄອງຣັດເຊິ່ງຮັບມໍລະດົກຈາກບິດາກໍຕາມ ເປັນອັກຄະຣະເສນາບໍດີກໍຕາມ ເປັນນາຍບ້ານກໍຕາມ ເປັນຫົວໜ້າຄະນະກໍຕາມ ເປັນໃຫຍ່ສະເພາະຕະກູນ ກໍຕາມ ມີທຳ ໕ ປະການນີ້ ກຸນລະບຸດນັ້ນເພິ່ງຫວັງໄດ້ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ກຸນລະບຸດໃນໂລກນີ້ ສັກກາຣະ ເຄົາລົບ ນັບຖື ບູຊາມານດາບິດາດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮີບໂຮມດ້ວຍ ເຫື່ອແຮງ ອາບເຫື່ອຕາງນໍ້າປະກອບດ້ວຍທຳ ໄດ້ມາໂດຍທຳ ມານດາບິດາຜູ້ໄດ້ຮັບສັກກາຣະ ເຄົາລົບ ນັບຖື ບູຊາແລ້ວຍ່ອມອະນຸເຄາະກຸນລະບຸດນັ້ນດ້ວຍນໍ້າໃຈອັນງາມວ່າ "ຂໍເຈົ້າຈົ່ງມີຊີວິດຍືນຍາວ ມີອາຍຸຍືນຍາວກຸນລະບຸດຜູ້ອັນມານດາບິດາອະນຸເຄາະແລ້ວ ເພິ່ງຫວັງໄດ້ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ

໔. ກຸນລະບຸດໃນໂລກນີ້ສັກກາຣະ ເຄົາລົບ ນັບຖື ບູຊາ ບຸດ ພັນລະຍາ ຂ້າທາດ ກຳມະກອນ ແລະຄົນໃຊ້ດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮີບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນໍ້າ ປະກອບດ້ວຍທຳ ໄດ້ມາໂດຍທຳ ບຸດ ພັນລະຍາ ຂ້າທາດກຳມະກອນ ແລະຄົນໃຊ້ຜູ້ໄດ້ຮັບສັກກາຣະ ເຄົາລົບ ນັບຖື ບູຊາແລ້ວ ຍ່ອມ ອະນຸເຄາະກຸນລະບຸດນັ້ນດ້ວຍນໍ້າໃຈອັນງາມວ່າ "ຂໍທ່ານຈົ່ງມີຊີວິດຍືນຍາວ ມີອາຍຸຍືນຍາວ ກຸນລະບຸດຜູ້ອັນບຸດພັນລະຍາ ຂ້າທາດ ກຳມະກອນ ແລະຄົນ ໃຊ້ອະນຸເຄາະແລ້ວ ເພິ່ງຫວັງໄດ້ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ

໓. ກຸນລະບຸດໃນໂລກນີ້ສັກກາຣະ ເຄົາລົບ ນັບຖື ບູຊາເພື່ອນຊາວນາ ແລະເພື່ອນຮ່ວມງານດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮີບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນໍ້າ ປະກອບດ້ວຍທຳ ໄດ້ມາໂດຍທຳ ເພື່ອນຊາວນາ ແລະເພື່ອນຮ່ວມງານຜູ້ໄດ້ຮັບສັກກາຣະ ເຄົາລົບ ນັບຖື ບູຊາແລ້ວ ຍ່ອມອະນຸເຄາະກຸນລະບຸດນັ້ນດ້ວຍນໍ້າໃຈອັນງາມ ວ່າ "ຂໍເພື່ອນຈົ່ງມີຊີວິດຍືນຍາວ ມີອາຍຸຍືນຍາວ ກຸນລະບຸດຜູ້ອັນເພື່ອນ ຊາວນາ ແລະເພື່ອນຮ່ວມງານອະນຸເຄາະແລ້ວ ເພິ່ງຫວັງໄດ້ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ

໔. ກຸນລະບຸດໃນໂລກນີ້ສັກກາຣະ ເຄົາລົບ ນັບຖື ບູຊາເທວະດາຜູ້ຮັບການບູຊາດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮິບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນໍ້າ ປະກອບດ້ວຍທໍາ ໄດ້ມາໂດຍທໍາ ເທວະດາຜູ້ຮັບການບູຊາ ໄດ້ຮັບສັກກາຣະ ເຄົາລົບ ນັບຖື ບູຊາແລ້ວ ຍ່ອມອະນຸເຄາະກຸນລະບຸດນັ້ນດ້ວຍນໍ້າໃຈອັນງາມວ່າ "ຂໍທ່ານຈົ່ງມີຊີວິດຍືນຍາວ ມີອາຍຸຍືນຍາວ ກຸນລະບຸດຜູ້ອັນເທວະດາອະນຸເຄາະແລ້ວ ເພິ່ງຫວັງ ໄດ້ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ

໕. ກຸນລະບຸດໃນໂລກນີ້ສັກກາຣະ ເຄົາລົບ ນັບຖື ບູຊາສະມະນະພາມດ້ວຍໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບຮິບໂຮມດ້ວຍເຫື່ອແຮງ ອາບເຫື່ອຕາງນໍ້າ ປະກອບດ້ວຍທໍາ ໄດ້ມາໂດຍທໍາ ສະມະນະພາມຜູ້ໄດ້ຮັບສັກກາຣະ ເຄົາລົບ ນັບຖື ບູຊາແລ້ວ ຍ່ອມອະນຸເຄາະກຸນລະບຸດນັ້ນດ້ວຍນໍ້າໃຈອັນງາມວ່າ "ຂໍທ່ານຈົ່ງມີຊີວິດຍືນຍາວ ມີອາຍຸຍືນຍາວ ກຸນລະບຸດຜູ້ອັນສະມະນະພາມອະນຸເຄາະແລ້ວ ເພິ່ງຫວັງໄດ້ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ

ມະຫານາມ ກຸນລະບຸດຄົນໃດ ເປັນກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວກໍຕາມ ເປັນຜູ້ປົກຄອງຣັດເຊິ່ງຮັບມໍລະດົກຈາກບິດາກໍຕາມ ເປັນອັກຄະຣະເສນາບໍດີກໍຕາມ ເປັນນາຍບ້ານກໍຕາມ ເປັນຫົວໜ້າຄະນະກໍຕາມ ເປັນໃຫຍ່ສະເພາະຕະກູນກໍຕາມ ມີທໍາ ໕ ປະການນີ້ ເພິ່ງຫວັງໄດ້ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ

ກຸນລະບຸດຜູ້ມີສິນ ຮູ້ຄວາມປະສົງຂອງຜູ້ຂໍ°
ຊ່ວຍເຮັດກິດຂອງມານດາບິດາ ເກື້ອກຸນ ບຸດ ພັນລະຍາ
ປະຕິບັດເພື່ອປະໂຫຍດແກ່ຄົນທັງ ໔ ຝ່າຍ
ຄື ຊົນພາຍໃນແລະຊົນຜູ້ອາໄສບຸກຄົນນັ້ນຢູ່
ກຸນລະບຸດຜູ້ເປັນບັນດິດເມື່ອ ຢູ່ຄອງເຮືອນໂດຍທໍາ
ທໍາຄວາມຍິນດີໃຫ້ເກີດຂຶ້ນແກ່ຍາດທັງທີ່ລ່ວງລັບໄປແລ້ວ
ແລະທີ່ຍັງມີຊີວິດຢູ່ໃນປັດຈຸບັນ
ຍັງຄວາມຍິນດີໃຫ້ເກີດຂຶ້ນແກ່ສະມະນະພາມແລະເທວະດາ
ກຸນລະບຸດນັ້ນ ເມື່ອພໍ່າເພັງກັນລະຍານະທໍາແລ້ວ
ເປັນຜູ້ຄວນບູຊາ ເປັນຜູ້ຄວນສັນເສີນ
ບັນດິດທັງຫຼາຍຍ່ອມສັນເສີນເຂົາໃນໂລກນີ້
ເຂົາຕາຍໄປແລ້ວ ຍ່ອມບັນເທີງໃນສະຫວັນ

**ລິດສະວີກຸມາຣະກະສູດທີ ໗ ຈົບ**

## ໙. ປະຖົມວຸດທະປັບພະຊິຕະສູດ
## ວ່າດ້ວຍພິກຂຸຜູ້ບວດເມື່ອແກ່ສູດທີ ໑

[໔໙] ພິກຂຸທັງຫຼາຍ ພິກຂຸຜູ້ບວດເມື່ອແກ່ ປະກອບດ້ວຍທຳ ໕ ປະການ ຫາໄດ້ຍາກ
ທຳ ໕ ປະການ ອັນໃດແດ່ ຄື
ພິກຂຸຜູ້ບວດເມື່ອແກ່

໑. ເປັນຜູ້ລະອຽດ ຫາໄດ້ຍາກ
໒. ເປັນຜູ້ເຖິງພ້ອມດ້ວຍມາຣະຍາດ[1] ຫາໄດ້ຍາກ
໓. ເປັນພະຫູສູດ ຫາໄດ້ຍາກ
໔. ເປັນທຳມະກະຖຶກ[2] ຫາໄດ້ຍາກ
໕. ເປັນວິໄນທອນ[3] ຫາໄດ້ຍາກ

ພິກຂຸທັງຫຼາຍ ພິກຂຸຜູ້ບວດເມື່ອແກ່ ປະກອບດ້ວຍທຳ ໕ ປະການນີ້ແລ ຫາໄດ້ຍາກ

**ປະຖົມວຸດທປັບພະຊິຕະສູດທີ ໙ ຈົບ**

## ໑໐. ທຸຕິຍະວຸດທະປັບພະຊິຕະສູດ
## ວ່າດ້ວຍພິກຂຸຜູ້ບວດເມື່ອແກ່ສູດທີ ໒

[໕໐] ພິກຂຸທັງຫຼາຍ ພິກຂຸຜູ້ບວດເມື່ອແກ່ ປະກອບດ້ວຍທຳ ໕ ປະການ ຫາໄດ້ຍາກ
ທຳ ໕ ປະການ ອັນໃດແດ່ ຄື
ພິກຂຸຜູ້ບວດເມື່ອແກ່

໑. ເປັນຜູ້ວ່າງ່າຍ ຫາໄດ້ຍາກ
໒. ເປັນຜູ້ຄົງແກ່ຮຽນ ຫາໄດ້ຍາກ
໓. ເປັນຜູ້ຮັບຄຳພ່ຳສອນໂດຍເຄົາລົບ ຫາໄດ້ຍາກ
໔. ເປັນທຳມະກະຖຶກ ຫາໄດ້ຍາກ
໕. ເປັນວິໄນທອນ ຫາໄດ້ຍາກ

ພິກຂຸທັງຫຼາຍ ພິກຂຸຜູ້ບວດເມື່ອແກ່ ປະກອບດ້ວຍທຳ ໕ ປະການນີ້ແລ ຫາໄດ້ຍາກ

**ທຸຕິຍະວຸດທະປັບພະຊິຕະສູດທີ ໑໐ ຈົບ**

**ນີວະຣະນະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໖. ສັນຍາວັກ

## ໝວດວ່າດ້ວຍສັນຍາ

## ໑. ປະຖົມສັນຍາສູດ[๑]

### ວ່າດ້ວຍສັນຍາສູດທີ ໑

[໖໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນຍາ ໕ ປະການນີ້ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຍັ່ງລົງສູ່ອະມະຕະ[๒] ມີອະມະຕະເປັນບ່ອນສຸດ

ສັນຍາ ໕ ປະການ ອັນໃດແດ່ ຄື

໑. ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແຫ່ງສັງຂານ)
໒. ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາແຫ່ງທຳທັງປວງ)
໓. ມໍຣະນະສັນຍາ (ກຳນົດໝາຍຄວາມຕາຍທີ່ຈະຕ້ອງມາເຖິງເປັນທຳມະດາ)
໔. ອາຫາເຣປະຕິກູນສັນຍາ (ກຳນົດໝາຍຄວາມປະຕິກູນໃນອາຫານ)
໕. ສັບພະໂລເກ ອະນະພິຣະຕິສັນຍາ (ກຳນົດໝາຍຄວາມບໍ່ໜ້າເພີດເພີນໃນໂລກທັງປວງ)

ພິກຂຸທັງຫຼາຍ ສັນຍາ ໕ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຍັ່ງລົງສູ່ອະມະຕະ ມີອະມະຕະເປັນບ່ອນສຸດ

**ປະຖົມສັນຍາສູດທີ ໑ ຈົບ**

# ໒. ທຸຕິຍະສັນຍາສູດ
## ວ່າດ້ວຍສັນຍາສູດທີ ໒

[໑໒] ພິກຂຸທັງຫຼາຍ ສັນຍາ ໕ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອະມະຕະ ມີອະມະຕະເປັນບ່ອນສຸດ

ສັນຍາ ໕ ປະການ ອັນໃດແດ່ ຄື

໑. ອະນິດຈະສັນຍາ

໒. ອະນັດຕະສັນຍາ

໓. ມໍຣະນະສັນຍາ

໔. ອາຫາເຣ ປະຕິກູນສັນຍາ

໕. ສັບພະໂລເກ ອະນະພິຣະຕິສັນຍາ

ພິກຂຸທັງຫຼາຍ ສັນຍາ ໕ ປະການນີ້ແລ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອະມະຕະ ມີອະມະຕະເປັນບ່ອນສຸດ

**ທຸຕິຍະສັນຍາສູດທີ ໒ ຈົບ**

# ໓. ປະຖົມວັດທິສູດ
## ວ່າດ້ວຍທຳເປັນເຫດຈະເລີນສູດທີ ໑

[໑໓] ພິກຂຸທັງຫຼາຍ ອະຣິຍະສາວົກເມື່ອຈະເລີນດ້ວຍທຳເປັນເຫດຈະເລີນ ໕ ປະການ ຊື່ວ່າຍ່ອມຈະເລີນດ້ວຍທຳເປັນເຫດຈະເລີນຢ່າງປະເສີດ ຊື່ວ່າ ເປັນຜູ້ຖືເອົາສິ່ງທີ່ເປັນສາຣະ ແລະຖືເອົາສິ່ງທີ່ປະເສີດແຫ່ງກາຍ

ທຳເປັນເຫດຈະເລີນ ໕ ປະການ ອັນໃດແດ່ ຄື

໑. ສັດທາ (ຄວາມເຊື່ອ)

໒. ສີນ (ການຮັກສາກາຍ ວາຈາ ໃຫ້ຮຽບຮ້ອຍ)

໓. ສຸຕະ (ການສະດັບຟັງຫາຄວາມຮູ້)

໔. ຈາຄະ (ການເສຍສະລະ)

໕. ປັນຍາ (ຄວາມຮອບຮູ້)

ພິກຂຸທັງຫຼາຍ ອະຣິຍະສາວົກເມື່ອຈະເລີນດ້ວຍທຳເປັນເຫດຈະເລີນ ໕ ປະການນີ້ແລ ຊື່ວ່າຍ່ອມຈະເລີນດ້ວຍທຳເປັນເຫດຈະເລີນຢ່າງປະເສີດ ຊື່ວ່າ ເປັນຜູ້ຖືເອົາແຕ່ສິ່ງທີ່ເປັນສາຣະ ແລະຖືເອົາສິ່ງທີ່ປະເສີດແຫ່ງກາຍ

ອະຣິຍະສາວິກາໃດ ຈະເລີນດ້ວຍສັດທາ
ສີນ ສຸຕະ ຈາຄະ ແລະປັນຍາ
ອະຣິຍະສາວິການັ້ນ ເປັນສັດຕະບຸຣຸດ
ມີປັນຍາເຫັນປະຈັກ
ຊື່ວ່າຖືເອົາແຕ່ສິ່ງທີ່ເປັນສາຣະສຳລັບຕົນໄວ້ໄດ້
ໃນໂລກນີ້ຢ່າງແນ່ນອນ

**ປະຖົມວັດທິສູດທີ ໓ ຈົບ**

## ໔. ທຸຕິຍະວັດທິສູດ

### ວ່າດ້ວຍທຳເປັນເຫດຈະເລີນສູດທີ ໔

[໖໔] ພິກຂຸທັງຫຼາຍ ອະຣິຍະສາວິກາເມື່ອຈະເລີນດ້ວຍທຳເປັນເຫດຈະເລີນ ໕ ປະການ ຊື່ວ່າຍ່ອມຈະເລີນດ້ວຍທຳເປັນເຫດຈະເລີນຢ່າງປະເສີດ ຊື່ວ່າເປັນຜູ້ຖືເອົາສິ່ງທີ່ເປັນສາຣະ ແລະຖືເອົາສິ່ງທີ່ປະເສີດແຫ່ງກາຍ

ທຳເປັນເຫດຈະເລີນ ໕ ປະການ ອັນໃດແດ່ ຄື

໑. ສັດທາ
໒. ສີນ
໓. ສຸຕະ
໔. ຈາຄະ
໕. ປັນຍາ

ພິກຂຸທັງຫຼາຍ ອະຣິຍະສາວິກາເມື່ອຈະເລີນດ້ວຍທຳເປັນເຫດຈະເລີນ ໕ ປະການນີ້ແລ ຊື່ວ່າຍ່ອມຈະເລີນດ້ວຍທຳເປັນເຫດຈະເລີນຢ່າງປະເສີດ ຊື່ວ່າເປັນຜູ້ຖືເອົາສິ່ງທີ່ເປັນສາຣະ ແລະຖືເອົາສິ່ງທີ່ປະເສີດແຫ່ງກາຍ

ອະຣິຍະສາວິກາໃດ ຈະເລີນດ້ວຍສັດທາ
ສີນ ສຸຕະ ຈາຄະ ແລະປັນຍາ
ອະຣິຍະສາວິການັ້ນ ເປັນຜູ້ມີສີນ ເປັນອຸປາສິກາ
ຊື່ວ່າຖືເອົາສິ່ງທີ່ເປັນສາຣະສຳລັບຕົນໄວ້ໄດ້
ໃນໂລກນີ້ຢ່າງແນ່ນອນ

**ທຸຕິຍະວັດທິສູດທີ ໔ ຈົບ**

# ໕. ສາກັດສະສູດ

## ວ່າດ້ວຍພິກຂຸຜູ້ຄວນສົນທະນາດ້ວຍ

[໒໕] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໕ ປະການ ເປັນຜູ້ສົມຄວນ ທີ່ເພື່ອນພົມມະຈາຣີທັງຫຼາຍຈະສົນທະນາດ້ວຍ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ແລະຕອບບັນຫາທີ່ມາໃນເລື້ອງສີລະສຳປະທາໄດ້
໒. ຕົນເອງເປັນຜູ້ເຖິງພ້ອມດ້ວຍສະມາທິ ແລະຕອບບັນຫາທີ່ມາໃນເລື້ອງສະມາທິສຳປະທາໄດ້
໓. ຕົນເອງເປັນຜູ້ເຖິງພ້ອມດ້ວຍປັນຍາ ແລະຕອບບັນຫາທີ່ມາໃນເລື້ອງປັນຍາສຳປະທາໄດ້
໔. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິ ແລະຕອບບັນຫາທີ່ມາໃນເລື້ອງວິມຸດຕິສຳປະທາໄດ້
໕. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ແລະຕອບບັນຫາທີ່ມາໃນເລື້ອງວິມຸດຕິຍານທັດສະນະສຳປະທາໄດ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ສົມຄວນທີ່ເພື່ອນພົມມະຈາຣີທັງຫຼາຍຈະສົນທະນາດ້ວຍ

**ສາກັດສະສູດທີ ໕ ຈົບ**

# ໖. ສາຊີວະສູດ

## ວ່າດ້ວຍພິກຂຸຜູ້ຄວນແກ່ສາຊີບ[๑]

[໒໖] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໕ ປະການ ເປັນຜູ້ຄວນແກ່ສາຊີບຂອງເພື່ອນພົມມະຈາຣີທັງຫຼາຍ

ທຳ ໕ ປະການ ອັນໃດແດ່

ພິກຂຸໃນທຳວິໄນນີ້

໑. ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ແລະຕອບບັນຫາທີ່ຕັ້ງຂຶ້ນຖາມໃນເລື້ອງ ສີລະສຳປະທາໄດ້
໒. ຕົນເອງເປັນຜູ້ເຖິງພ້ອມດ້ວຍສະມາທິ ແລະຕອບບັນຫາທີ່ຕັ້ງຂຶ້ນຖາມໃນເລື້ອງສະມາທິສຳປະທາໄດ້
໓. ຕົນເອງເປັນຜູ້ເຖິງພ້ອມດ້ວຍປັນຍາ ແລະຕອບບັນຫາທີ່ຕັ້ງຂຶ້ນຖາມໃນເລື້ອງປັນຍາສຳປະທາໄດ້
໔. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິ ແລະຕອບບັນຫາທີ່ຕັ້ງຂຶ້ນຖາມໃນເລື້ອງວິມຸດຕິສຳປະທາໄດ້
໕. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ແລະຕອບບັນຫາທີ່ຕັ້ງຂຶ້ນຖາມໃນເລື້ອງວິມຸດຕິຍານທັດສະນະສຳປະທາໄດ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ຄວນແກ່ສາຊີບຂອງເພື່ອນພົມມະຈາຣີທັງຫຼາຍ

**ສາຊີວະສູດທີ ໖ ຈົບ**

## ໗. ປະຖົມອິດທິປາທະສູດ

## ວ່າດ້ວຍອິດທິບາດສູດທີ ໑

[໖໗] ພິກຂຸທັງຫຼາຍ ພິກຂຸຫຼືພິກຂຸນີອົງໃດອົງໜຶ່ງຈະເລີນເຮັດໃຫ້ຫຼາຍເຊິ່ງທຳ ໕ ປະການ ພິກຂຸຫຼືພິກຂຸນີອົງນັ້ນເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້ຈະເລີນ

໑. ອິດທິບາດທີ່ປະກອບດ້ວຍ ສັນທະສະມາທິແລະປະທານສັງຂານ[๑]
໒. ອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິແລະປະທານສັງຂານ
໓. ອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິແລະປະທານສັງຂານ
໔. ອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິແລະປະທານສັງຂານ
໕. ຄວາມຕັ້ງໃຈ[๒]

ພິກຂຸທັງຫຼາຍ ພິກຂຸຫຼືພິກຂຸນີອົງໃດອົງໜຶ່ງຈະເລີນເຮັດໃຫ້ຫຼາຍເຊິ່ງທຳ ໕ ປະການນີ້ແລ ພິກຂຸຫຼືພິກຂຸນີອົງນັ້ນເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນ ປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

**ປະຖົມອິດທິປາທະສູດທີ ໗ ຈົບ**

## ໘. ທຸຕິຍະອິດທິປາທະສູດ

## ວ່າດ້ວຍອິດທິບາດສູດທີ ໒

[໗໘] ພິກຂຸທັງຫຼາຍ ກ່ອນຈະຕັດສະຮູ້ ເຮົາເປັນພຣະໂພທິສັດ ຍັງບໍ່ໄດ້ຕັດສະຮູ້ ໄດ້ຈະເລີນເຮັດໃຫ້ຫຼາຍເຊິ່ງທຳ ໕ ປະການ

ທຳ ໕ ປະການ ອັນໃດແດ່ ຄື

ເຮົາໄດ້ຈະເລີນ

໑. ອິດທິບາດທີ່ປະກອບດ້ວຍສັນທະສະມາທິ ແລະປະທານສັງຂານ
໒. ອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິ ແລະປະທານສັງຂານ
໓. ອິດທິບາດທີ່ປະກອບດ້ວຍຈິດຕະສະມາທິ ແລະປະທານສັງຂານ
໔. ອິດທິບາດທີ່ປະກອບດ້ວຍວິມັງສາສະມາທິ ແລະປະທານສັງຂານ
໕. ຄວາມຕັ້ງໃຈ

ພິກຂຸທັງຫຼາຍ ຍ້ອນໄດ້ຈະເລີນເຮັດໃຫ້ຫຼາຍເຊິ່ງທຳມີຄວາມຕັ້ງໃຈເປັນທີ ໕ ນີ້ ເຮົາຈຶ່ງໄດ້ນ້ອມຈິດໄປເພື່ອເຮັດໃຫ້ແຈ້ງທຳທີ່ຈະເພິ່ງເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງໃດ ໆ ເມື່ອມີເຫດ[໑] ເຮົາຈຶ່ງບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າເຮົານັ້ນ ເພິ່ງຫວັງວ່າ "ເຮົາເພິ່ງສະແດງລິດໄດ້ຫຼາຍແບບ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຯລຯ[໒] ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ເມື່ອມີເຫດ ເຮົາຈຶ່ງບັນລຸຄວາມເປັນຜູ້ ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າເຮົານັ້ ນເພິ່ງຫວັງວ່າ ຯລຯ ເຮົາເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີ ອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ເມື່ອມີເຫດ ເຮົາຈຶ່ງບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ[໓]

**ທຸຕິຍະອິດທິປາທະສູດທີ ໘ ຈົບ**

# ໙. ນິບພິທາສູດ[១]

## ວ່າດ້ວຍຄວາມເບື່ອໜ່າຍ

[໖໙] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ ໂດຍສ່ວນດຽວ

ທຳ ໕ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນຄວາມບໍ່ງາມໃນກາຍຢູ່
໒. ກຳນົດໝາຍຄວາມປະຕິກູນໃນອາຫານ
໓. ກຳນົດໝາຍຄວາມບໍ່ໜ້າເພີດເພີນໃນໂລກທັງປວງ
໔. ພິຈາລະນາເຫັນຄວາມບໍ່ທ່ຽງໃນສັງຂານທັງປວງ
໕. ເຂົ້າໄປຕັ້ງມໍຣະນະສັນຍາໄວ້ໃນພາຍໃນ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ ໂດຍສ່ວນດຽວ

**ນິບພິທາສູດທີ ໙ ຈົບ**

# ໑໐. ອາສະວັກຂະຍະສູດ

## ວ່າດ້ວຍທຳທີ່ເຮັດໃຫ້ໝົດສິ້ນອາສະວະ

[໗໐] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມໝົດສິ້ນອາສະວະທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນຄວາມບໍ່ງາມໃນກາຍຢູ່
໒. ກຳນົດໝາຍຄວາມປະຕິກູນໃນອາຫານ

໓. ກຳນົດຄວາມບໍ່ໜ້າເພີດເພີນໃນໂລກທັງປວງ
໔. ພິຈາລະນາເຫັນຄວາມບໍ່ທ່ຽງໃນສັງຂານທັງປວງ
໕. ເຂົ້າໄປຕັ້ງມໍຣະນະສັນຍາໄວ້ໃນພາຍໃນ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມໝົດສິ້ນອາສະວະທັງຫຼາຍ

**ອາສະວັກຂະຍະສູດທີ ໑໐ ຈົບ**

**ສັນຍາວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໓. ໂຍທາຊີວະວັກ

## ໝວດວ່າດ້ວຍນັກຮົບອາຊີບ

## ໑. ປະຖົມເຈໂຕວິມຸດຕິຜະລະສູດ

### ວ່າດ້ວຍທຳມີເຈໂຕວິມຸດຕິເປັນຜົນສູດທີ ໑

[໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳ ໕ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີເຈໂຕວິມຸດຕິເປັນຜົນ ມີເຈໂຕວິມຸດຕິເປັນຜະລານິສົງ ຍ່ອມມີປັນຍາວິມຸດຕິເປັນຜົນ ມີປັນຍາວິມຸດຕິເປັນຜະລານິສົງ

ທຳ ໕ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນຄວາມບໍ່ງາມໃນກາຍຢູ່
໒. ກຳນົດໝາຍຄວາມປະຕິກູນໃນອາຫານ
໓. ກຳນົດຄວາມບໍ່ໜ້າເພີດເພີນໃນໂລກທັງປວງ
໔. ພິຈາລະນາເຫັນຄວາມບໍ່ທ່ຽງໃນສັງຂານທັງປວງ
໕. ເຂົ້າໄປຕັ້ງມໍຣະນະສັນຍາໄວ້ໃນພາຍໃນ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີ ເຈໂຕວິມຸດຕິເປັນຜົນ ມີເຈໂຕວິມຸດຕິເປັນຜະລານິສົງ ຍ່ອມມີປັນຍາວິມຸດຕິເປັນຜົນ ມີປັນຍາວິມຸດຕິເປັນຜະລານິສົງ

ເມື່ອໃດ ພິກຂຸມີເຈໂຕວິມຸດຕິ ແລະປັນຍາວິມຸດຕິ ເມື່ອນັ້ນ ພິກຂຸນີ້ເຮົາຮຽກວ່າ "ເປັນຜູ້ຖອນຫຼັ້ມສະລັກຂຶ້ນໄດ້ ແດ່ ວ່າ "ເປັນຜູ້ຮື້ເຄື່ອງຮ້ອມລ້ອມໄດ້ ແດ່ ວ່າ "ເປັນຜູ້ຖອນຫຼັກຮົ້ວຕ້າຍຂຶ້ນໄດ້ ແດ່ ວ່າ "ເປັນຜູ້ຖອດກອນອອກໄດ້ ແດ່ ວ່າ "ເປັນຜູ້ໄກຈາກຂ້າເສິກ ປົດທຸງລົງໄດ້ ປົງພາຣະລົງໄດ້໌ ບໍ່ປະກອບດ້ວຍວັດຕະແດ່

ພິກຂຸຊື່ວ່າເປັນຜູ້ຖອນຫຼັ້ມສະລັກຂຶ້ນໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ລະອະວິດຊາໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸຊື່ວ່າເປັນຜູ້ຖອນຫຼັ້ມສະລັກຂຶ້ນໄດ້ ເປັນແນວນີ້ແລ

ພິກຂຸຊື່ວ່າເປັນຜູ້ຮື້ເຄື່ອງຮ້ອມລ້ອມໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ລະຊາດສົງສານເຊິ່ງເປັນເຫດໃຫ້ເກີດໃນພົບໃໝ່ໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸຊື່ວ່າເປັນຜູ້ຮື້ເຄື່ອງຮ້ອມລ້ອມໄດ້ ເປັນແນວນີ້ແລ

ພິກຂຸຊື່ວ່າເປັນຜູ້ຖອນຫຼັກຮົ້ວຕ້າຍຂຶ້ນໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ລະຕັນຫາໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸຊື່ວ່າເປັນຜູ້ຖອນຫຼັກຮົ້ວຕ້າຍຂຶ້ນໄດ້ ເປັນແນວນີ້ແລ

ພິກຂຸຊື່ວ່າ ເປັນຜູ້ຖອດກອນອອກໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ລະໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໕ ປະການ ໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸຊື່ວ່າເປັນຜູ້ຖອດກອນອອກໄດ້ ເປັນແນວນີ້ແລ

ພິກຂຸຊື່ວ່າ ເປັນຜູ້ໄກຈາກຂ້າເສິກ ປົດທຸງລົງໄດ້ ປົງພາຣະລົງໄດ້ ບໍ່ປະກອບດ້ວຍວັດຕະເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ລະອັດສະມິມານະ°ໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸທັງຫຼາຍ ພິກຂຸຊື່ວ່າ ເປັນຜູ້ໄກຈາກຂ້າເສິກ ປົດທຸງລົງໄດ້ ປົງພາຣະລົງໄດ້ ບໍ່ປະກອບດ້ວຍວັດຕະເປັນແນວນີ້ແລ

**ປະຖົມເຈໂຕວິມຸດຕິຜະລະສູດທີ ໑ ຈົບ**

## ໒. ທຸຕິຍະເຈໂຕວິມຸດຕິຜະລະສູດ

## ວ່າດ້ວຍທຳມີເຈໂຕວິມຸດຕິເປັນຜົນສູດທີ ໒

[໗໒] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີເຈໂຕວິມຸດຕິເປັນຜົນ ມີເຈໂຕວິມຸດຕິເປັນຜະລານິສົງ ຍ່ອມມີປັນຍາວິມຸດຕິເປັນຜົນ ມີປັນຍາວິມຸດຕິເປັນຜະລານິສົງ

ທຳ ໕ ປະການ ອັນໃດແດ່ ຄື

໑. ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແທ່ງສັງຂານ)
໒. ອະນິດເຈ ທຸກຂະສັນຍາ (ກຳນົດໝາຍຄວາມເປັນທຸກໃນຄວາມບໍ່ທ່ຽງແທ່ງສັງຂານ)
໓. ທຸກເຂ ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາໃນຄວາມເປັນທຸກ)
໔. ປະຫານະສັນຍາ (ກຳນົດໝາຍເພື່ອລະອະກຸສົນວິຕົກແລະບາບທຳທັງຫຼາຍ)
໕. ວິຣາຄະສັນຍາ (ກຳນົດໝາຍວິຣາຄະວ່າເປັນທຳລະອຽດປະນີດ)

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີເຈໂຕວິມຸດຕິເປັນຜົນ ມີເຈໂຕວິມຸດຕິເປັນຜະລານິສົງ ຍ່ອມມີປັນຍາວິມຸດຕິເປັນຜົນ ມີປັນຍາວິມຸດຕິເປັນຜະລານິສົງ

ເມື່ອໃດ ພິກຂຸມີເຈໂຕວິມຸດຕິ ແລະປັນຍາວິມຸດຕິ ເມື່ອນັ້ນ ພິກຂຸນີ້ເຮົາຮຽກວ່າ "ເປັນຜູ້ຖອນຫຼັ້ມສະລັກຂຶ້ນໄດ້ ແດ່ ວ່າ "ເປັນຜູ້ຮື້ເຄື່ອງຮ້ອມລ້ອມໄດ້ ແດ່ ວ່າ "ເປັນຜູ້ຖອນຫຼັກຮົ້ວຕ້າຍຂຶ້ນໄດ້ ແດ່ ວ່າ "ເປັນຜູ້ຖອດກອນອອກໄດ້ ແດ່ ວ່າ "ເປັນຜູ້ໄກຈາກຂ້າເສິກ ປົດທຸງລົງໄດ້ ປົງພາຣະລົງໄດ້ ບໍ່ປະກອບດ້ວຍອັດຕະ ແດ່

ພິກຂຸຊື່ວ່ າເປັນຜູ້ຖອນຫຼັ້ມສະລັກຂຶ້ນໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ລະອະວິດຊາໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸຊື່ວ່າເປັນຜູ້ຖອນຫຼັ້ມສະລັກຂຶ້ນໄດ້ ເປັນແນວນີ້ແລ

ພິກຂຸຊື່ວ່າເປັນຜູ້ຮື້ເຄື່ອງຮ້ອມລ້ອມໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ລະຊາດສົງສານເຊິ່ງເປັນເຫດໃຫ້ເກີດໃນພົບໃໝ່ໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸຊື່ວ່າເປັນຜູ້ຮື້ເຄື່ອງຮ້ອມລ້ອມໄດ້ ເປັນແນວນີ້ແລ

ພິກຂຸຊື່ວ່າເປັນຜູ້ຖອນຫຼັກຮົ້ວຕ້າຍຂຶ້ນໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ລະຕັນຫາໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸຊື່ວ່າເປັນຜູ້ຖອນຫຼັກຮົ້ວຕ້າຍຂຶ້ນໄດ້ ເປັນແນວນີ້ແລ

ພິກຂຸຊື່ວ່າເປັນຜູ້ຖອດກອນອອກໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ລະໂອຣຳພາຄິຍະສັງໂຍດ ໕ ປະການໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸຊື່ວ່າເປັນຜູ້ຖອດກອນອອກໄດ້ ເປັນແນວນີ້ແລ

ພິກຂຸຊື່ວ່າເປັນຜູ້ໄກຈາກຂ້າເສິກ ປົດທຸງລົງໄດ້ ປົງພາຣະລົງໄດ້ ບໍ່ປະກອບດ້ວຍອັດຕະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ລະອັດສະມິມານະໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸທັງຫຼາຍ ພິກຂຸຊື່ວ່າເປັນຜູ້ໄກຈາກຂ້າເສິກ ປົດທຸງລົງໄດ້ ປົງພາຣະລົງໄດ້ ບໍ່ປະກອບດ້ວຍອັດຕະ ເປັນແນວນີ້ແລ

**ທຸຕິຍະເຈໂຕວິມຸດຕິຜະລະສູດທີ ໘ ຈົບ**

# ໓. ປະຖົມທຳມະວິຫາຣີສູດ

## ວ່າດ້ວຍບຸກຄົນຜູ້ຢູ່ດ້ວຍທຳສູດທີ ໑

[໗໓] ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ "ຜູ້ຢູ່ດ້ວຍທຳ ຜູ້ຢູ່ດ້ວຍທຳ ພິກຂຸຊື່ວ່າເປັນຜູ້ຢູ່ດ້ວຍທຳ ດ້ວຍເຫດທີ່ໃດນໍ?

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

໑. ພິກຂຸໃນທຳວິໄນນີ້ ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ແລະເວທັນລະ ທ່ານປ່ອຍໃຫ້ມື້ຄືນລ່ວງເລີຍໄປ ລະການຫຼີບຫຼີກຢູ່ ບໍ່ປະກອບຄວາມສະງົບໃຈພາຍໃນ ຍ້ອນການຮຽນທຳນັ້ນ ພິກຂຸນີ້ເຮົາຮຽກວ່າເປັນຜູ້ຫຼາຍດ້ວຍການຮຽນທຳບໍ່ຮຽກວ່າ ເປັນຜູ້ຢູ່ດ້ວຍທຳ

໒. ພິກຂຸໃນທຳວິໄນນີ້ ສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ແກ່ຜູ້ອື່ນໂດຍພິດສະດານ ທ່ານປ່ອຍໃຫ້ມື້ຄືນລ່ວງເລີຍໄປ ລະການຫຼີບຫຼີກຢູ່ ບໍ່ປະກອບຄວາມສະງົບໃຈພາຍໃນ ຍ້ອນການສະແດງທຳນັ້ນ ພິກຂຸນີ້ເຮົາຮຽກວ່າເປັນຜູ້ຫຼາຍດ້ວຍການສະແດງທຳ ບໍ່ຮຽກວ່າ ເປັນຜູ້ຢູ່ດ້ວຍທຳ

໓. ພິກຂຸໃນທຳວິໄນນີ້ ສາທະຍາຍທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ແກ່ຜູ້ອື່ນໂດຍພິດສະດານ ທ່ານປ່ອຍໃຫ້ມື້ຄືນລ່ວງເລີຍໄປ ລະການຫຼີບຫຼີກຢູ່ ບໍ່ປະກອບຄວາມສະງົບໃຈພາຍໃນ ຍ້ອນການສາທະຍາຍທຳນັ້ນ ພິກຂຸນີ້ເຮົາຮຽກວ່າເປັນຜູ້ຫຼາຍດ້ວຍການສາທະຍາຍທຳ ບໍ່ຮຽກວ່າເປັນຜູ້ຢູ່ດ້ວຍທຳ

໔. ພິກຂຸໃນທຳວິໄນນີ້ ນຶກຕາມ ຕອງຕາມ ເພ່ງຕາມດ້ວຍໃຈເຊິ່ງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ທ່ານປ່ອຍໃຫ້ມື້ຄືນລ່ວງເລີຍໄປ ລະການຫຼີບຫຼີກຢູ່ ບໍ່ປະກອບຄວາມສະງົບໃຈພາຍໃນ ຍ້ອນການນຶກຕາມທຳນັ້ນ ພິກຂຸນີ້ເຮົາຮຽກວ່າເປັນຜູ້ຫຼາຍດ້ວຍການນຶກທຳ ບໍ່ຮຽກວ່າເປັນຜູ້ຢູ່ດ້ວຍທຳ

໕. ພິກຂຸໃນທຳວິໄນນີ້ ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ແລະເວທັນລະ ທ່ານບໍ່ປ່ອຍໃຫ້ມື້ຄືນລ່ວງເລີຍໄປ ບໍ່ລະການຫຼີບຫຼີກຢູ່ ຕາມປະກອບຄວາມສະງົບໃຈພາຍໃນ ຍ້ອນການຮຽນທຳນັ້ນ ພິກຂຸຊື່ວ່າເປັນຜູ້ຢູ່ດ້ວຍທຳ ແບບນີ້ແລ

ເຮົາສະແດງພິກຂຸຜູ້ຫຼາຍດ້ວຍການຮຽນທຳ ຜູ້ຫຼາຍດ້ວຍການສະແດງທຳ ຜູ້ຫຼາຍດ້ວຍການສາທະຍາຍທຳ ຜູ້ຫຼາຍດ້ວຍການນຶກທຳ ຜູ້ຢູ່ດ້ວຍທຳ ດ້ວຍປະການດັ່ງນີ້ແລ ພິກຂຸ ກິດໃດທີ່ສາດສະດາຜູ້ຫວັງປະໂຫຍດເກື້ອກູນ ອະນຸເຄາະ ອາໄສຄວາມອີດູ ເພິ່ງເຮັດແກ່ສາວົກທັງຫຼາຍ ກິດນັ້ນ ເຮົາໄດ້ເຮັດແລ້ວແກ່ທ່ານທັງຫຼາຍ ພິກຂຸ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ[໑] ທ່ານຈົ່ງເພ່ງ[໒] ຢ່າຜະໝາດ ຢ່າເປັນຜູ້ມີວິບປະຕິສານ(ຄວາມຮ້ອນໃຈ)ໃນພາຍຫຼັງເລີຍ ນີ້ເປັນ ອະນຸສາສະນີຂອງເຮົາເພື່ອທ່ານທັງຫຼາຍ

**ປະຖົມທຳມະວິຫາຣີສູດທີ ໓ ຈົບ**

## ໔. ທຸຕິຍະທຳມະວິຫາຣີສູດ

## ວ່າດ້ວຍບຸກຄົນຜູ້ຢູ່ດ້ວຍທຳສູດທີ ໔

[໗໔] ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ວ່າ

ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ "ຜູ້ຢູ່ດ້ວຍທຳ ຜູ້ຢູ່ດ້ວຍທຳ ພິກຂຸຊື່ວ່າເປັນຜູ້ຢູ່ດ້ວຍທຳ ດ້ວຍເຫດທໍ່ໃດນໍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ

໑. ພິກຂຸໃນທຳວິໄນນີ້ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ແລະເວທັນລະ ທ່ານຍ່ອມບໍ່ຮູ້ເນື້ອຄວາມຂອງທຳນັ້ນທີ່ຍິ່ງຂຶ້ນໄປດ້ວຍປັນຍາ ພິກຂຸນີ້ເຮົາຮຽກວ່າເປັນຜູ້ຫຼາຍດ້ວຍການຮຽນທຳ ບໍ່ຮຽກວ່າເປັນຜູ້ຢູ່ດ້ວຍທຳ

ฯลฯ[໑]

໕. ພິກຂຸໃນທຳວິໄນນີ້ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ແລະເວທັນລະ ທ່ານຮູ້ ເນື້ອ

ຄວາມຂອງທຳນັ້ນທີ່ຍິ່ງຂຶ້ນໄປດ້ວຍປັນຍາ ພິກຂຸຊື່ວ່າ ເປັນຜູ້ຢູ່ດ້ວຍທຳ ແນວນີ້ແລ

ພິກຂຸ ໗ລ໗ ນີ້ເປັນອະນຸສາສະນີຂອງເຮົາເພື່ອທ່ານທັງຫຼາຍ

**ທຸຕິຍະທຳມະວິຫາຣີສູດທີ ໔ ຈົບ**

## ໕. ປະຖົມໂຍທາຊີວະສູດ

## ວ່າດ້ວຍນັກຣົບອາຊີບສູດທີ ໑

[໗໕] ພິກຂຸທັງຫຼາຍ ນັກຣົບອາຊີບ ໕ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ນັກຣົບອາຊີບ ໕ ຈຳພວກໃດແດ່ ຄື

໑. ນັກຣົບອາຊີບລາງຄົນໃນໂລກນີ້ ພໍເຫັນຝຸ່ນຟຸ້ງຂຶ້ນທີ່ນັ້ນ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດເຂົ້າສູ່ສະໜໍລະພູມໄດ້ ນັກຣົບອາຊີບລາງຄົນແມ່ນແນວນີ້ກໍມີຢູ່ໃນໂລກນີ້ ນີ້ຄືນັກຣົບອາຊີບຈຳພວກທີ ໑ ເຊິ່ງມີຜາກົດຢູ່ໃນໂລກ

໒. ນັກຣົບອາຊີບລາງຄົນໃນໂລກນີ້ ແມ່ນເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແຕ່ພໍເຫັນຍອດທຸງຂອງຂ້າເສິກທີ່ນັ້ນກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດເຂົ້າສູ່ ສະໜໍລະພູມໄດ້ ນັກຣົບອາຊີບລາງຄົນແມ່ນແນວນີ້ກໍມີຢູ່ໃນໂລກນີ້ ນີ້ຄືນັກຣົບອາຊີບຈຳພວກທີ ໒ ເຊິ່ງມີຜາກົດຢູ່ໃນໂລກ

໓. ນັກຣົບອາຊີບລາງຄົນໃນໂລກນີ້ ແມ່ນເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແມ່ນເຫັນຍອດທຸງຂອງຂ້າເສິກກໍອົດທົນໄດ້ ແຕ່ພໍໄດ້ຍິນສຽງກຶກກ້ອງຂອງຂ້າເສິກທີ່ນັ້ນ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດເຂົ້າສູ່ສະໜໍລະພູມໄດ້ ນັກຣົບອາຊີບລາງຄົນແມ່ນແນວນີ້ກໍມີຢູ່ໃນໂລກນີ້ ນີ້ຄືນັກຣົບອາຊີບຈຳພວກທີ ໓ ເຊິ່ງມີຜາກົດຢູ່ໃນໂລກ

໔. ນັກຣົບອາຊີບລາງຄົນໃນໂລກນີ້ ແມ່ນເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແມ່ນເຫັນຍອດທຸງຂອງຂ້າເສິກກໍອົດທົນໄດ້ ແມ່ນໄດ້ຍິນສຽງກຶກກ້ອງຂອງຂ້າເສິກກໍອົດທົນໄດ້ ແຕ່ຕື່ນຕົກໃຈຕໍ່ການປະຫານຂອງຂ້າເສິກ ນັກຣົບອາຊີບລາງຄົນແມ່ນແນວນີ້ ກໍມີຢູ່ໃນໂລກນີ້ ນີ້ຄືນັກຣົບອາຊີບຈຳພວກທີ ໔ ເຊິ່ງມີຜາກົດຢູ່ໃນໂລກ

໕. ນັກຣົບອາຊີບລາງຄົນໃນໂລກນີ້ ແມ່ນເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແມ່ນເຫັນຍອດທຸງຂອງຂ້າເສິກກໍອົດທົນໄດ້ ແມ່ນໄດ້ຍິນສຽງກຶກກ້ອງຂອງຂ້າເສິກກໍອົດທົນໄດ້ ອົດທົນຕໍ່ການປະຫານຂອງຂ້າເສິກໄດ້ ເຂົາຊະນະສົງຄາມນັ້ນແລ້ວເປັນຜູ້ພິຊິດສົງຄາມ ຢຶດຄອງຄ່າຍສົງຄາມນັ້ນໄວ້ໄດ້ ນັກຣົບອາຊີບລາງຄົນແມ່ນແນວນີ້ກໍມີຢູ່ໃນໂລກນີ້ ນີ້ຄືນັກຣົບອາຊີບຈຳພວກທີ ໕ ເຊິ່ງມີຜາກົດຢູ່ໃນໂລກ

ພິກຂຸທັງຫຼາຍ ນັກຣົບອາຊີບ ໕ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ ສັນໃດ

ພິກຂຸທັງຫຼາຍ ບຸກຄົນຜູ້ປຽບດ້ວຍນັກຣົບອາຊີບ ໕ ຈຳພວກນີ້ ມີຜາກົດຢູ່ໃນພິກຂຸທັງຫຼາຍກໍຄືກັນສັນນັ້ນ

ບຸກຄົນຜູ້ປຽບດ້ວຍນັກຣົບອາຊີບ ໕ ຈຳພວກໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ພໍເຫັນຝຸ່ນຟຸ້ງຂຶ້ນທໍ່ນັ້ນ ກໍຢຸດນິດ[໑] ຫວັ່ນໄຫວ ບໍ່ສາມາດສືບຕໍ່ພົມມະຈັນໄດ້ ເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລຶຫັດ ອັນໃດຊື່ວ່າຝຸ່ນຟຸ້ງຂຶ້ນສຳລັບທ່ານ ຄື ພິກຂຸໃນທຳວິໄນນີ້ໄດ້ຟັງວ່າ ໃນບ້ານຫຼືນິຄົມນັ້ນ ມີຍິງຫຼືຍິງສາວຮູບງາມໜ້າເບິ່ງ ໜ້າເຫຼື້ອມໃສ ມີສະຫວີວັນຜຸດຜ່ອງຍິ່ງ ທ່ານໄດ້ຟັງດັ່ງນັ້ນແລ້ວ ກໍຢຸດນິດ ຫວັ່ນໄຫວບໍ່ສາມາດສືບຕໍ່ພົມມະຈັນໄດ້ ເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລຶຫັດ ນີ້ຊື່ວ່າຝຸ່ນຟຸ້ງຂຶ້ນສຳລັບທ່ານ

ເຮົາກ່າວວ່າ ພິກຂຸນີ້ປຽບຄືນັກຣົບອາຊີບທີ່ພໍເຫັນຝຸ່ນຟຸ້ງຂຶ້ນທໍ່ນັ້ນ ກໍຢຸດນິດ ຫວັ່ນໄຫວບໍ່ສາມາດເຂົ້າສູ່ສະໝໍລະພູມໄດ້ ບຸກຄົນລາງຄົນແມ່ນແນວນີ້ກໍມີຢູ່ໃນທຳວິໄນນີ້ ນີ້ຄືບຸກຄົນຜູ້ປຽບດ້ວຍນັກຣົບອາຊີບຈຳພວກທີ ໑ ເຊິ່ງມີຜາກົດຢູ່ໃນພິກຂຸທັງຫຼາຍ

໒. ພິກຂຸໃນທຳວິໄນນີ້ແມ່ນເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແຕ່ພໍເຫັນຍອດທຸງຂອງຂ້າເສິກທໍ່ນັ້ນ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດສືບຕໍ່ພົມມະຈັນໄດ້ ເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລຶຫັດ ອັນໃດຊື່ວ່າຍອດທຸງຂອງຂ້າເສິກສຳລັບທ່ານ ຄື ພິກຂຸໃນທຳວິໄນນີ້ ບໍ່ໄດ້ຟັງວ່າ ໃນບ້ານຫຼືນິຄົມຊື່ນັ້ນ ມີຍິງຫຼືຍິງສາວຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີສະຫວີວັນຜຸດຜ່ອງຍິ່ງ ແຕ່ທ່ານໄດ້ເຫັນດ້ວຍຕົນເອງ ເມື່ອເຫັນແລ້ວ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດສືບຕໍ່ພົມມະຈັນໄດ້ ເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລຶຫັດ ນີ້ຊື່ວ່າຍອດທຸງຂ້າເສິກສຳລັບທ່ານ

ເຮົາກ່າວວ່າພິກຂຸນີ້ປຽບຄືນັກຣົບອາຊີບທີ່ເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແຕ່ພໍເຫັນຍອດທຸງຂອງຂ້າເສິກທໍ່ນັ້ນ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດເຂົ້າສູ່ສະໝໍລະພູມໄດ້ ບຸກຄົນລາງຄົນແມ່ນ

ແບບນີ້ກໍມີຢູ່ໃນທຳວິໄນນີ້ ນີ້ຄືບຸກຄົນຜູ້ປຽບດ້ວຍນັກຮົບອາຊີບຈຳພວກ ທີ ໔ ເຊິ່ງມີຜາກົດຢູ່ໃນພິກຂຸທັງຫຼາຍ

໓. ພິກຂຸໃນທຳວິໄນນີ້ແມ່ນເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແມ່ນເຫັນຍອດທຸງຂອງຂ້າເສິກກໍອົດທົນໄດ້ ແຕ່ພໍໄດ້ຍິນສຽງກຶກກ້ອງຂອງຂ້າເສິກທີ່ນັ້ນ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດສືບຕໍ່ພົມມະຈັນໄດ້ ເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລືຫັດ ອັນໃດຊື່ວ່າສຽງກຶກກ້ອງຂອງຂ້າເສິກສຳລັບທ່ານ ຄື ມາຕຸຄາມເຂົ້າໄປຫາພິກຂຸໃນທຳວິໄນນີ້ ຜູ້ໄປສູ່ປ່າ ໄປສູ່ເຫງົ້າໄມ້ ຫຼືໄປສູ່ເຮືອນວ່າງ ແລ້ວຍິ້ມແຍ້ມ ປາໄສ ກະຊິກກະຊີ້ ຍົວະຍຸ ທ່ານຖືກມາຕຸຄາມຍິ້ມແຍ້ມ ປາໄສ ກະຊິກກະຊີ້ ຍົວະຍຸຢູ່ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດສືບຕໍ່ພົມມະຈັນໄດ້ ເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລືຫັດ ນີ້ຊື່ວ່າສຽງກຶກກ້ອງຂອງຂ້າເສິກສຳລັບທ່ານ

ເຮົາກ່າວວ່າພິກຂຸນີ້ປຽບຄືນັກຮົບອາຊີບທີ່ແມ່ນເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແມ່ນເຫັນຍອດທຸງຂອງຂ້າເສິກກໍອົດທົນໄດ້ ແຕ່ພໍໄດ້ຍິນສຽງກຶກກ້ອງຂອງຂ້າເສິກທີ່ນັ້ນ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດເຂົ້າສູ່ສະໜໍລະພູມໄດ້ ບຸກຄົນລາງຄົນແມ່ນແບບນີ້ກໍມີຢູ່ໃນທຳວິໄນນີ້ ນີ້ຄືບຸກຄົນຜູ້ປຽບດ້ວຍນັກຮົບອາຊີບຈຳພວກທີ ໓ ເຊິ່ງມີຜາກົດຢູ່ໃນພິກຂຸທັງຫຼາຍ

໔. ພິກຂຸໃນທຳວິໄນນີ້ແມ່ນເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແມ່ນເຫັນຍອດທຸງຂອງຂ້າເສິກກໍອົດທົນໄດ້ ແມ່ນໄດ້ຍິນສຽງກຶກກ້ອງຂອງຂ້າເສິກກໍອົດທົນໄດ້ ແຕ່ຕື່ນຕົກໃຈຕໍ່ການປະຫານຂອງຂ້າເສິກ ອັນໃດຊື່ວ່າການປະຫານສຳລັບຂ້າເສິກຂອງທ່ານ ຄື ມາຕຸຄາມເຂົ້າໄປຫາພິກຂຸໃນທຳວິໄນນີ້ຜູ້ໄປສູ່ປ່າ ໄປສູ່ເຫງົ້າໄມ້ ຫຼືໄປສູ່ເຮືອນວ່າງ ແລ້ວນັ່ງເຕັງ໌ ນອນເຕັງ ຂົ່ມຂືນ ທ່ານຖືກມາຕຸຄາມນັ່ງເຕັງ ນອນເຕັງ ຂົ່ມຂືນຢູ່ ບໍ່ບອກຄືນສິກຂາ ບໍ່ເປີດເຜີຍ ຄວາມທໍ້ແທ້໌ ເສບເມຖຸນທຳ໌ ນີ້ຊື່ວ່າການປະຫານຂອງຂ້າເສິກ ສຳລັບທ່ານ

ເຮົາກ່າວວ່າພິກຂຸນີ້ປຽບຄືນັກຮົບອາຊີບທີ່ແມ່ນເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແມ່ນເຫັນຍອດທຸງຂອງຂ້າເສິກກໍອົດທົນໄດ້ ແມ່ນໄດ້ຍິນສຽງກຶກກ້ອງຂອງຂ້າເສິກກໍອົດທົນໄດ້ ແຕ່ຕື່ນຕົກໃຈຕໍ່ການປະຫານຂອງຂ້າເສິກ ບຸກຄົນລາງຄົນແມ່ນແບບນີ້ກໍມີຢູ່ໃນທຳວິໄນນີ້ ນີ້ຄືບຸກຄົນຜູ້ປຽບດ້ວຍນັກຮົບອາຊີບຈຳພວກທີ ໔ ເຊິ່ງມີຜາກົດຢູ່ໃນພິກຂຸທັງຫຼາຍ

໕. ພິກຂຸໃນທຳວິໄນນີ້ແມ່ນເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແມ່ນເຫັນຍອດທຸງຂອງຂ້າເສິກກໍອົດທົນໄດ້ ແມ່ນໄດ້ຍິນສຽງກຶກກ້ອງຂອງຂ້າເສິກກໍອົດທົນໄດ້ ອົດທົນ ຕໍ່ການປະຫານຂອງຂ້າເສິກໄດ້ ຊະນະສົງຄາມແລ້ວ ເປັນຜູ້ພິຊິດສົງຄາມ ຍຶດຄ່າຍສົງຄາມນັ້ນໄວ້ໄດ້ ອັນໃດຊື່ວ່າໄຊຊະນະໃນສົງຄາມສຳລັບທ່ານ ຄື ມາຕຸຄາມເຂົ້າໄປຫາພິກຂຸໃນທຳວິໄນນີ້ຜູ້ໄປສູ່ປ່າ ໄປສູ່ເຫງົ້າໄມ້ ຫຼືໄປສູ່ເຮືອນວ່າງ ແລ້ວນັ່ງເຕັງ ນອນເຕັງ ຂົ່ມຂືນ ທ່ານຖືກມາຕຸຄາມນັ່ງເຕັງ ນອນ

ເຕັງ ຂົ່ມຂືນຢູ່ ບໍ່ພົວພັນ ແຕ່ປົດເປື້ອງ ຫຼີກອອກໄດ້ ແລ້ວຫຼີກໄປຕາມຄວາມປະສົງ ທ່ານພັກຢູ່ເສນາສະນະອັນງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຮ່ອມພູ ຖ້ຳ ປ່າຊ້າ ປ່າທຶບ[໓] ກາງແຈ້ງ ກອງເຟືອງ ທ່ານໄປສູ່ປ່າ ໄປສູ່ເຫງົ້າໄມ້ ຫຼືໄປສູ່ເຮືອນວ່າງ ນັ່ງຄູ້ບັນລັງ[໔] ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ[໕] ລະອະພິດຊາ(ຄວາມເພ່ງເລັງຢາກໄດ້ຂອງເຂົາ)ໃນໂລກ[໖] ມີໃຈປາສະຈາກອະພິດຊາຢູ່ ຊຳຣະຈິດໃຫ້ບໍລິສຸດຈາກອະພິດຊາ ລະຄວາມມຸ້ງຮ້າຍຄືພະຍາບາດ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນສັບພະສັດຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍຄືພະຍາບາດ ລະຖີນະມິດທະ (ຄວາມຫົດຫູ່ແລະຄວາມງ່ວມເຫງົາ) ປາສະຈາກຖີນະມິດທະ ກຳນົດແສງສະຫວ່າງ ມີສະຕິສຳປະຊັນຍະຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ(ຄວາມຟຸ້ງຊ່ານແລະລຳຄານໃຈ) ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະຫງົບພາຍໃນ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງໄສ) ຂ້າມພົ້ນວິຈິກິດສາໄດ້ແລ້ວ ບໍ່ມີວິຈິ ກິດສາໃນກຸສົນທຳຢູ່ ຊຳຣະຈິດໃຫ້ບໍລິສຸດຈາກວິຈິກິດສາ ທ່ານລະນິວອນ ໕ ປະການນີ້ ເຊິ່ງເປັນເຄື່ອງເສົ້າໝອງໃຈ ທອນກຳລັງປັນຍາແລ້ວ ສະຫງັດຈາກກາມ ໗ລ໗ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກມີສະຕິບໍລິສຸດຍ້ອນອຸເປກຂາຢູ່

ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ[໗] ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວ ແນວນີ້ ທ່ານນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງ ວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ເມື່ອທ່ານຮູ້ ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະວະ ພະວາສະວະ ແລະອະວິດຊາສະວະ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ "ລຸດພົ້ນແລ້ວ ຮູ້ແຈ້ງວ່າ "ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ[໘] ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ນີ້ຊື່ວ່າໄຊຊະນະໃນສົງຄາມ ສຳລັບທ່ານ

ເຮົາກ່າວວ່າພິກຂຸນີ້ປຽບຄືນັກຮົບອາຊີບທີ່ແມ່ນເຫັນຝຸ່ນຟຸ້ງຂຶ້ນກໍອົດທົນໄດ້ ແມ່ນເຫັນຍອດທຸງຂອງຂ້າເສິກກໍອົດທົນໄດ້ ແມ່ນໄດ້ຍິນສຽງກຶກກ້ອງຂອງຂ້າເສິກກໍອົດທົນໄດ້ ອົດທົນຕໍ່ການປະຫານຂອງຂ້າເສິກໄດ້ ເຂົາຊະນະສົງຄາມນັ້ນແລ້ວ ເປັນຜູ້ພິຊິດສົງຄາມ ຍຶດຄ່າຍສົງຄາມນັ້ນໄວ້ໄດ້ ບຸກຄົນລາງຄົນແມ່ນແນວນີ້ກໍມີຢູ່ໃນທຳວິໄນນີ້ ນີ້ຄືບຸກຄົນຜູ້ປຽບດ້ວຍນັກຮົບອາຊີບຈຳພວກທີ ໕ ເຊິ່ງມີຜາກົດຢູ່ໃນພິກຂຸທັງຫຼາຍ

ພິກຂຸທັງຫຼາຍ ບຸກຄົນຜູ້ປຽບດ້ວຍນັກຮົບອາຊີບ ໕ ຈຳພວກນີ້ແລ ມີຜາກົດຢູ່ໃນພິກຂຸທັງຫຼາຍ

**ປະຖົມໂຍທາຊີວະສູດທີ ໕ ຈົບ**

# ໘. ທຸຕິຍະໂຍທາຊີວະສູດ

## ວ່າດ້ວຍນັກຮົບອາຊີບສູດທີ ໘

[໗໘] ພິກຂຸທັງຫຼາຍ ນັກຮົບອາຊີບ ໕ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ນັກຮົບອາຊີບ ໕ ຈຳພວກໃດແດ່ ຄື

໑. ນັກຮົບອາຊີບລາງຄົນໃນໂລກນີ້ຖືດາບແລະໂລ່ ມັດສອດທະນູແລະແລ່ງແລ້ວ ເຂົ້າສູ່ສະໜໍລະພູມ ເຂົາຕັ້ງໃຈພະຍາຍາມຮົບໃນສະໜໍລະພູມນັ້ນ ພວກຂ້າເສິກ ຂ້າເຂົາຕາຍທຳລາຍເຂົາໄດ້ ນັກຮົບອາຊີບລາງຄົນແມ່ນແນວນີ້ ກໍມີຢູ່ໃນໂລກນີ້ ນີ້ຄືນັກຮົບອາຊີບຈຳພວກທີ ໑ ເຊິ່ງມີຜາກົດຢູ່ໃນໂລກ

໒. ນັກຮົບອາຊີບລາງຄົນໃນໂລກນີ້ຖືດາບແລະໂລ່ ມັດສອດທະນູແລະແລ່ງແລ້ວ ເຂົ້າສູ່ສະໜໍລະພູມ ເຂົາຕັ້ງໃຈພະຍາຍາມຮົບໃນສະໜໍລະພູມນັ້ນ ພວກຂ້າເສິກ ທຳຮ້າຍເຂົາໃຫ້ບາດເຈັບ ພວກຂອງເຂົານຳເຂົາອອກມາສົ່ງໃຫ້ເຖິງໝູ່ຍາດ ເຂົາກຳລັງຖືກນຳໄປຢູ່ ຍັງບໍ່ທັນເຖິງໝູ່ຍາດ ກໍເສຍຊີວິດໃນລະຫວ່າງທາງ ນັກຮົບອາຊີບລາງຄົນແມ່ນແນວນີ້ກໍມີຢູ່ໃນໂລກນີ້ ນີ້ຄືນັກຮົບອາຊີບຈຳພວກທີ ໒ ເຊິ່ງມີຜາກົດຢູ່ໃນໂລກ

໓. ນັກຮົບອາຊີບລາງຄົນໃນໂລກນີ້ຖືດາບແລະໂລ່ ມັດສອດທະນູແລະແລ່ງແລ້ວ ເຂົ້າສູ່ສະໜໍລະພູມ ເຂົາຕັ້ງໃຈພະຍາຍາມຮົບໃນສະໜໍລະພູມນັ້ນ ພວກຂ້າເສິກ ທຳຮ້າຍເຂົາໃຫ້ບາດເຈັບ ພວກຂອງເຂົານຳເຂົາອອກມາສົ່ງໃຫ້ເຖິງໝູ່ຍາດ ໝູ່ຍາດຍ່ອມປິ່ນປົວຮັກສາ ເຂົາອັນໝູ່ຍາດປິ່ນປົວຮັກສາຢູ່ ແຕ່ເສຍຊີວິດດ້ວຍອາການບາດເຈັບນັ້ນ ໆເອງ ນັກຮົບອາຊີບລາງຄົນແມ່ນແນວນີ້ກໍມີຢູ່ໃນໂລກນີ້ ນີ້ເປັນນັກຮົບອາຊີບຈຳພວກທີ ໓ ເຊິ່ງມີຜາກົດຢູ່ໃນໂລກ

໔. ນັກຮົບອາຊີບລາງຄົນໃນໂລກນີ້ຖືດາບແລະໂລ່ ມັດສອດທະນູແລະແລ່ງແລ້ວ ເຂົ້າສູ່ສະໜໍລະພູມ ເຂົາຕັ້ງໃຈພະຍາຍາມຮົບໃນສະໜໍລະພູມນັ້ນ ພວກຂ້າເສິກ ທຳຮ້າຍເຂົາໃຫ້ບາດເຈັບ ພວກຂອງເຂົານຳເຂົາອອກມາສົ່ງໃຫ້ເຖິງໝູ່ຍາດ ໝູ່ຍາດປິ່ນປົວຮັກສາ ເຂົາອັນໝູ່ຍາດປິ່ນປົວຮັກສາຢູ່ກໍຫາຍຈາກ ອາການບາດເຈັບນັ້ນ ນັກຮົບອາຊີບລາງຄົນແມ່ນແນວນີ້ ກໍມີຢູ່ໃນໂລກນີ້ ນີ້ເປັນນັກຮົບອາຊີບຈຳພວກທີ ໔ ເຊິ່ງມີຜາກົດຢູ່ໃນໂລກ

໕. ນັກຮົບອາຊີບລາງຄົນໃນໂລກນີ້ຖືດາບແລະໂລ່ ມັດສອດທະນູແລະແລ່ງແລ້ວ ເຂົ້າສູ່ສະໜໍລະພູມ ເຂົາຊະນະສົງຄາມນັ້ນແລ້ວ ເປັນຜູ້ພິຊິດສົງຄາມ ຍຶດຄ່າຍສົງຄາມນັ້ນໄວ້ໄດ້ ນັກ

ຮັບອາຊີບລາງຄົນແມ່ນແນວນີ້ກໍມີຢູ່ໃນໂລກນີ້ ນີ້ເປັນນັກຮົບອາຊີບຈຳພວກທີ ໕ ເຊິ່ງມີຜາກົດຢູ່ໃນໂລກ

ພິກຂຸທັງຫຼາຍ ນັກຮົບອາຊີບ ໕ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ ສັນໃດ ບຸກຄົນຜູ້ປຽບດ້ວຍນັກຮົບອາຊີບ ໕ ຈຳພວກນີ້ ມີຜາກົດຢູ່ໃນພິກຂຸທັງຫຼາຍ ຄືກັນສັນນັ້ນ ບຸກຄົນຜູ້ປຽບດ້ວຍນັກຮົບອາຊີບ ໕ ຈຳພວກໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ເຂົ້າໄປອາໄສໝູ່ບ້ານຫຼືນິຄົມບາງແຫ່ງຢູ່ ເວລາເຊົ້າ ທ່ານຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປສູ່ໝູ່ບ້ານຫຼື ນິຄົມນັ້ນເພື່ອບິນທະບາດ ບໍ່ຮັກສາກາຍ ບໍ່ຮັກສາວາຈາ ບໍ່ຮັກສາຈິດ ມີສະຕິບໍ່ຕັ້ງໝັ້ນ ບໍ່ສັງລວມອິນຊີ ທ່ານໄດ້ເຫັນມາຕຸຄາມນຸ່ງຫົ່ມບໍ່ຮຽບຮ້ອຍໃນໝູ່ບ້ານຫຼືໃນນິຄົມນັ້ນ ຍ້ອນເຫັນມາຕຸຄາມນຸ່ງຫົ່ມບໍ່ຮຽບຮ້ອຍນັ້ນ ຣາຄະ(ຄວາມກຳໜັດ) ຈຶ່ງລົບກວນຈິດຂອງທ່ານ ທ່ານຖືກ ຣາຄະລົບກວນຈິດແລ້ວ ບໍ່ບອກຄືນສິກຂາ ບໍ່ເປີດເຜີຍຄວາມທໍ້ແທ້ ເສບເມຖຸນທຳ

ເຮົາກ່າວວ່າພິກຂຸນີ້ປຽບຄືນັກຮົບອາຊີບນັ້ນຖືດາບແລະໂລ່ ມັດສອດທະນູແລະແລ່ງແລ້ວ ເຂົ້າສູ່ສະໜໍລະພູມ ເຂົາຕັ້ງໃຈພະຍາຍາມຮົບໃນສະໜໍລະພູມນັ້ນ ພວກຂ້າເສິກຂ້າເຂົາຕາຍ ທຳລາຍເຂົາໄດ້ ບຸກຄົນລາງຄົນແມ່ນແນວນີ້ກໍມີຜາກົດຢູ່ໃນທຳວິໄນນີ້ ນີ້ຄືບຸກຄົນຜູ້ປຽບດ້ວຍນັກຮົບອາຊີບຈຳພວກທີ ໑ ເຊິ່ງມີຜາກົດຢູ່ໃນພິກຂຸທັງຫຼາຍ

໒. ພິກຂຸໃນທຳວິໄນນີ້ເຂົ້າໄປອາໄສໝູ່ບ້ານຫຼືນິຄົມບາງແຫ່ງຢູ່ ເວລາເຊົ້າ ທ່ານຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ໝູ່ບ້ານຫຼືນິຄົມນັ້ນ ເພື່ອບິນທະບາດ ບໍ່ຮັກສາກາຍ ບໍ່ຮັກສາວາຈາ ບໍ່ຮັກສາຈິດ ມີສະຕິບໍ່ຕັ້ງໝັ້ນ ບໍ່ສັງລວມອິນຊີ ທ່ານໄດ້ເຫັນມາຕຸຄາມນຸ່ງຫົ່ມບໍ່ຮຽບຮ້ອຍ ໃນໝູ່ບ້ານຫຼືໃນນິຄົມນັ້ນ ຍ້ອນເຫັນມາຕຸຄາມນຸ່ງຫົ່ມບໍ່ຮຽບຮ້ອຍນັ້ນ ຣາຄະຈຶ່ງລົບກວນຈິດຂອງທ່ານ ທ່ານຖືກຣາຄະລົບກວນຈິດແລ້ວ ຈຶ່ງມີກາຍຮ້ອນຮົນ ມີໃຈຮ້ອນຮົນ ມີຄວາມຄິດແນວນີ້ວ່າ "ທາງທີ່ດີ ເຮົາຄວນຈະໄປອາຮາມບອກພວກພິກຂຸວ່າ "ຜູ້ມີອາຍຸ ຂ້ານ້ອຍຖືກຣາຄະກຸ້ມລຸມ ຖືກຣາຄະຄອບງຳແລ້ວ ບໍ່ສາມາດສືບຕໍ່ພົມມະຈັນໄດ້ ຈັກເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລືຫັດ ທ່ານກຳລັງຍ່າງໄປສູ່ອາຮາມ ຍັງບໍ່ທັນເຖິງອາຮາມ ກໍເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລືຫັດໃນລະຫວ່າງທາງ

ເຮົາກ່າວວ່າພິກຂຸນີ້ປຽບຄືນັກຮົບອາຊີບນັ້ນຖືດາບແລະໂລ່ ມັດສອດທະນູ ແລະແລ່ງແລ້ວເຂົ້າສູ່ສະໜໍລະພູມ ເຂົາຕັ້ງໃຈພະຍາຍາມຮົບໃນສະໜໍລະພູມນັ້ນ ພວກຂ້າເສິກ ທຳຮ້າຍເຂົາໃຫ້ບາດເຈັບ ພວກຂອງເຂົານຳເຂົາອອກມາສົ່ງໃຫ້ເຖິງໝູ່ຍາດ ເຂົາກຳລັງຖືກນຳໄປຢູ່ ຍັງບໍ່ທັນເຖິງໝູ່ຍາດ ກໍເສຍຊີວິດໃນລະຫວ່າງທາງ ບຸກຄົນລາງຄົນແມ່ນແນວນີ້ກໍມີຜາກົດຢູ່ໃນທຳວິໄນນີ້ ນີ້ຄືບຸກຄົນຜູ້ປຽບດ້ວຍນັກຮົບອາຊີບຈຳພວກທີ ໒ ເຊິ່ງມີຜາກົດຢູ່ໃນພິກຂຸທັງຫຼາຍ

໓. ພິກຂຸໃນທຳວິໄນນີ້ເຂົ້າໄປອາໄສໝູ່ບ້ານຫຼືນິຄົມບາງແຫ່ງຢູ່ ເວລາເຊົ້າ ທ່ານຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ໝູ່ບ້ານຫຼືນິຄົມນັ້ນເພື່ອບິນທະບາດ ບໍ່ຮັກສາກາຍ ບໍ່ຮັກສາວາຈາ ບໍ່ຮັກສາຈິດ ມີສະຕິບໍ່ຕັ້ງໝັ້ນ ບໍ່ສັງລວມອິນຊີ ທ່ານໄດ້ເຫັນມາຕຸຄາມນຸ່ງຫົ່ມບໍ່ຮຽບຮ້ອຍໃນໝູ່ບ້ານຫຼືໃນນິຄົມນັ້ນ ຍ້ອນເຫັນມາຕຸຄາມນຸ່ງຫົ່ມບໍ່ຮຽບຮ້ອຍນັ້ນ ຣາຄະຈຶ່ງລົບກວນຈິດຂອງທ່ານ ທ່ານຖືກຣາຄະລົບກວນຈິດແລ້ວ ຈຶ່ງມີກາຍຮ້ອນຮົນ ມີໃຈຮ້ອນຮົນ ມີຄວາມຄິດແນວນີ້ວ່າ "ທາງທີ່ດີ ເຮົາຄວນຈະໄປສູ່ອາຣາມບອກພວກພິກຂຸວ່າ "ຜູ້ມີອາຍຸ ຂ້ານ້ອຍຖືກຣາຄະ ກຸ້ມລຸມ ຖືກຣາຄະຄອບງຳແລ້ວ ບໍ່ສາມາດສືບຕໍ່ພົມມະຈັນໄດ້ ຈັກເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລຶຫັດ ທ່ານຈຶ່ງໄປສູ່ອາຣາມແລ້ວບອກພວກພິກຂຸວ່າ "ຜູ້ມີອາຍຸ ຂ້ານ້ອຍຖືກຣາຄະ ກຸ້ມລຸມ ຖືກຣາຄະຄອບງຳແລ້ວ ບໍ່ສາມາດສືບຕໍ່ພົມມະຈັນໄດ້ ຈັກເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລຶຫັດ

ເພື່ອນພົມມະຈາຣີທັງຫຼາຍຈຶ່ງກ່າວສອນພ່ຳສອນທ່ານວ່າ "ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ

ກາມທັງຫຼາຍ ມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດຍິ່ງໃຫຍ່
ກາມທັງຫຼາຍ ປຽບຄື ຮ່າງໂຄງກະດູກ ฯລฯ
ກາມທັງຫຼາຍ ປຽບຄື ຕ່ອນຊີ້ນ ฯລฯ
ກາມທັງຫຼາຍ ປຽບຄື ທວນໄຟຫຍ້າ ฯລฯ
ກາມທັງຫຼາຍ ປຽບຄື ຂຸມຖ່ານໄຟ ฯລฯ
ກາມທັງຫຼາຍ ປຽບຄື ຄວາມຝັນ ฯລฯ
ກາມທັງຫຼາຍ ປຽບຄື ຂອງທີ່ຂໍຢືມມາ ฯລฯ
ກາມທັງຫຼາຍ ປຽບຄື ໝາກໄມ້ຄາຕົ້ນ ฯລฯ
ກາມທັງຫຼາຍ ປຽບຄື ຊຽງຊອຍຊີ້ນ ฯລฯ
ກາມທັງຫຼາຍ ປຽບຄື ຫອກຫຼາວ ฯລฯ
ກາມທັງຫຼາຍ ປຽບຄື ຫົວງູ ມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດຍິ່ງໃຫຍ່

ຂໍຜູ້ມີອາຍຸຈົ່ງຍິນດີໃນພົມມະຈັນ ຢ່າເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລຶຫັດເລີຍ

ທ່ານອັນເພື່ອນພົມມະຈາຣີທັງຫຼາຍກ່າວສອນພ່ຳສອນຢູ່ແນວນີ້ ຈຶ່ງກ່າວແນວນີ້ວ່າ "ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາມທັງຫຼາຍ ມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດຍິ່ງໃຫຍ່ກໍຈິງ ແນວໃດກໍ່ຕາມ ຂ້ານ້ອຍບໍ່ສາມາດສືບຕໍ່ພົມມະຈັນໄດ້

ຈັກເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລືຫັດ ທ່ານຈຶ່ງເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລືຫັດ

ເຮົາກ່າວວ່າພິກຂຸນີ້ປຽບຄືນັກຮົບອາຊີບນັ້ນຖືດາບແລະໂລ່ ມັດສອດທະນູແລະ ແລ່ງແລ້ວເຂົ້າສູ່ສະໜໍລະພູມ ເຂົາຕັ້ງໃຈພະຍາຍາມຮົບໃນສະໜໍລະພູມນັ້ນ ພວກຂ້າເສິກທໍາຮ້າຍເຂົາໃຫ້ບາດເຈັບ ພວກຂອງເຂົານໍາເຂົາມາສົ່ງໃຫ້ເຖິງໝູ່ຍາດ ໝູ່ຍາດຍ່ອມປິ່ນປົວຮັກສາເຂົາ ເຂົາອັນໝູ່ຍາດປິ່ນປົວຮັກສາຢູ່ ກໍເສຍຊີວິດດ້ວຍອາການບາດເຈັບນັ້ນ ນັ້ນເອງ ບຸກຄົນລາງຄົນແມ່ນແນວນີ້ກໍມີຢູ່ໃນທໍາວິໄນນີ້ ນີ້ຄືບຸກຄົນຜູ້ປຽບດ້ວຍນັກຮົບອາຊີບຈໍາພວກທີ ໓ ເຊິ່ງມີຜາກົດຢູ່ໃນພິກຂຸທັງຫຼາຍ

໔. ພິກຂຸໃນທໍາວິໄນນີ້ ເຂົ້າໄປອາໄສໝູ່ບ້ານຫຼືນິຄົມບາງແຫ່ງຢູ່ ເວລາເຊົ້າ ທ່ານຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ໝູ່ບ້ານຫຼືນິຄົມນັ້ນເພື່ອບິນທະບາດ ບໍ່ຮັກສາກາຍບໍ່ຮັກສາວາຈາ ບໍ່ຮັກສາຈິດ ມີສະຕິບໍ່ຕັ້ງໝັ້ນ ບໍ່ສັງລວມອິນຊີ ທ່ານໄດ້ເຫັນມາຕຸຄາມນຸ່ງຫົ່ມບໍ່ຮຽບຮ້ອຍ ໃນໝູ່ບ້ານຫຼືໃນນິຄົມນັ້ນ ຍ້ອນເຫັນມາຕຸຄາມນຸ່ງຫົ່ມບໍ່ຮຽບຮ້ອຍນັ້ນ ຣາຄະຈຶ່ງລົບກວນຈິດຂອງທ່ານ ທ່ານຖືກຣາຄະລົບກວນຈິດແລ້ວ ຈຶ່ງມີກາຍຮ້ອນຮົນ ມີໃຈຮ້ອນຮົນ ມີຄວາມຄິດແນວນີ້ວ່າ "ທາງທີ່ດີ ເຮົາຄວນຈະໄປສູ່ອາຣາມບອກພວກພິກຂຸວ່າ "ຜູ້ມີອາຍຸ ຂ້ານ້ອຍຖືກຣາຄະ ກຸ້ມລຸມແລ້ວ ຖືກຣາຄະຄອບງໍາແລ້ວ ບໍ່ສາມາດສືບຕໍ່ພົມມະຈັນໄດ້ ຈັກເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລືຫັດ ທ່ານຈຶ່ງໄປສູ່ອາຣາມແລ້ວ ບອກພວກພິກຂຸວ່າ "ຜູ້ມີອາຍຸ ຂ້ານ້ອຍຖືກຣາຄະກຸ້ມລຸມ ຖືກຣາຄະຄອບງໍາແລ້ວ ບໍ່ສາມາດສືບຕໍ່ພົມມະຈັນໄດ້ຈັກເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລືຫັດ

ເພື່ອນພົມມະຈາຣີທັງຫຼາຍ ຈຶ່ງກ່າວສອນ ພໍ່າສອນທ່ານວ່າ "ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ

ກາມທັງຫຼາຍ ມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດຍິ່ງໃຫຍ່
ກາມທັງຫຼາຍ ປຽບຄື ຮ່າງໂຄງກະດູກ ຯລຯ
ກາມທັງຫຼາຍ ປຽບຄື ຕ່ອນຊີ້ນ ຯລຯ
ກາມທັງຫຼາຍ ປຽບຄື ທວນໄຟຫຍ້າ ຯລຯ
ກາມທັງຫຼາຍ ປຽບຄື ຂຸມຖ່ານໄຟ ຯລຯ
ກາມທັງຫຼາຍ ປຽບຄື ຄວາມຝັນ ຯລຯ
ກາມທັງຫຼາຍ ປຽບຄື ຂອງທີ່ຂໍຢືມມາ ຯລຯ
ກາມທັງຫຼາຍ ປຽບຄື ໝາກໄມ້ຄາຕົ້ນ ຯລຯ
ກາມທັງຫຼາຍ ປຽບຄື ຊຽງຊອຍຊີ້ນ ຯລຯ

ການທັງຫຼາຍ ປຽບຄື ຫອກຫຼາວ ຯລຯ

ການທັງຫຼາຍ ປຽບຄື ຫົວງູ ມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດຍິ່ງໃຫຍ່

ຂໍຜູ້ມີອາຍຸຈົ່ງຍິນດີໃນພົມມະຈັນເທີ້ນ ຢ່າເປີດເຜີຍຄວາມທໍ້ແທ້ໃນສິກຂາ ບອກຄືນສິກຂາກັບມາເປັນຄະລິຫັດເລີຍ ທ່ານອັນເພື່ອນພົມມະຈາຣີທັງຫຼາຍກ່າວສອນພ່ຳສອນຢູ່ແນວນີ້ຈຶ່ງກ່າວແນວນີ້ ວ່າ "ຜູ້ມີອາຍຸທັງຫຼາຍ ຂ້ານ້ອຍຈັກຕັ້ງໃຈພຽນພະຍາຍາມຢ່າງດີຍິ່ງ ຈັກບໍ່ເປີດເຜີຍຄວາມທໍ້ແທ້ໃນສິກຂາ ບໍ່ບອກຄືນສິກຂາກັບມາເປັນຄະລິຫັດອີກ

ເຮົາກ່າວວ່າພິກຂຸນີ້ປຽບຄືນັກຮົບອາຊີບນັ້ນຖືດາບແລະໂລ່ ມັດສອດທະນູແລະ ແລ່ງແລ້ວເຂົ້າສູ່ສະໜໍລະພູມ ເຂົາຕັ້ງໃຈພະຍາຍາມຮົບໃນສະໜໍລະພູມນັ້ນ ພວກຂ້າເສິກທຳຮ້າຍເຂົາໃຫ້ບາດເຈັບ ພວກຂອງເຂົານຳເຂົາມາສົ່ງໃຫ້ເຖິງໝູ່ຍາດ ໝູ່ຍາດປິ່ນປົວຮັກສາເຂົາ ເຂົາອັນໝູ່ຍາດປິ່ນປົວຮັກສາຢູ່ກໍຫາຍຈາກອາການບາດເຈັບນັ້ນ ບຸກຄົນລາງຄົນແມ່ນ ແນວນີ້ກໍມີຢູ່ໃນທຳວິໄນນີ້ ນີ້ຄືບຸກຄົນຜູ້ປຽບດ້ວຍນັກຮົບອາຊີບຈຳພວກທີ ໔ ເຊິ່ງມີຜາກົດຢູ່ໃນພິກຂຸທັງຫຼາຍ

໕. ພິກຂຸໃນທຳວິໄນນີ້ເຂົ້າໄປອາໄສໝູ່ບ້ານຫຼືນິຄົມບາງແຫ່ງຢູ່ ເວລາເຊົ້າ ທ່ານຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ໝູ່ບ້ານຫຼືນິຄົມນັ້ນເພື່ອບິນທະບາດ ຮັກສາກາຍຮັກສາວາຈາ ຮັກສາຈິດ ມີສະຕິຕັ້ງໝັ້ນ ສັງລວມອິນຊີ ທ່ານເຫັນຮູບທາງຕາແລ້ວບໍ່ໂຮມຖືບໍ່ແຍກຖືປະຕິບັດເພື່ອສັງລວມໃນຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີຟັງສຽງທາງຫູ ຯລຯ ດົມກິ່ນທາງ ດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ປະຕິບັດເພື່ອສັງລວມໃນມະນິນຊີເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳ ຄືອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ທ່ານກັບຈາກບິນທະບາດ ຫຼັງຈາກສັນອາຫານສຳເລັດແລ້ວ ພັກຢູ່ ເສນາສະນະອັນງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຮ່ອມພູ ຖ້ຳ ປ່າຊ້າ ປ່າທຶບ ກາງແຈ້ງ ກອງເຟືອງ ທ່ານໄປສູ່ປ່າ ໄປສູ່ເຫງົ້າໄມ້ ຫຼືໄປສູ່ເຮືອນວ່າງ ນັ່ງຄູ້ບັນລັງຕັ້ງກາຍກົງ ດຳລົງສະຕິໄວ້ ສະເພາະໜ້າ ທ່ານລະອະພິດຊາໃນໂລກໄດ້ແລ້ວ ຯລຯ ລະນິວອນ ໕ ປະການນີ້ ເຊິ່ງເປັນເຄື່ອງເສົ້າໝອງໃຈ ທອນກຳລັງປັນຍາແລ້ວ ສະຫງັດຈາກການ ຯລຯ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່

ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັງເນີນ ປາສະຈາກຄວາມເສົ້າໝອງອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ທ່ານນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງ ຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ" ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ ອີກຕໍ່ໄປ

ເຮົາກ່າວວ່າພິກຂຸນີ້ປຽບຄືນັກຮົບອາຊີບນັ້ນຖືດາບແລະໂລ່ ມັດສອດທະນູແລະແລ່ງແລ້ວ ເຂົ້າສູ່ສະໜາມລະພູມ ເຂົາຊະນະສົງຄາມນັ້ນແລ້ວ ເປັນຜູ້ພິຊິດສົງຄາມ ຍຶດຄ່າຍສົງຄາມນັ້ນໄວ້ໄດ້ ບຸກຄົນລາງຄົນແມ່ນແນວນີ້ກໍມີຢູ່ໃນທຳວິໄນນີ້ ນີ້ຄືບຸກຄົນຜູ້ປຽບດ້ວຍນັກຮົບອາຊີບຈຳພວກທີ ໕ ເຊິ່ງມີຜາກົດຢູ່ໃນພິກຂຸທັງຫຼາຍ

ພິກຂຸທັງຫຼາຍ ບຸກຄົນຜູ້ປຽບດ້ວຍນັກຮົບອາຊີບ ໕ ຈຳພວກນີ້ ມີຜາກົດຢູ່ໃນພິກຂຸທັງຫຼາຍ

**ທຸຕິຍະໂຍທາຊີວະສູດທີ ໖ ຈົບ**

## ໗. ປະຖົມອະນາຄະຕະພະຍະສູດ

## ວ່າດ້ວຍໄພໃນອະນາຄົດສູດທີ ໑

[໗໗] ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ປ່າ ເມື່ອພິຈາລະນາເຫັນໄພໃນອະນາຄົດ ໕ ປະການນີ້ ບໍ່ຄວນເປັນຜູ້ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

ໄພໃນອະນາຄົດ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ ຢູ່ປ່າພິຈາລະນາເຫັນດັ່ງນີ້ວ່າ “ບັດນີ້ ເຮົາຢູ່ໃນປ່າຜູ້ດຽວ ງູເພິ່ງກັດເຮົາກໍໄດ້ ແມງງອດເພິ່ງຕອດເຮົາກໍໄດ້ ຫຼືຂີ້ເຂັບເພິ່ງກັດເຮົາກໍໄດ້ ຍ້ອນເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍ[1]ນັ້ນ ຖ້າຈັ່ງຊັ້ນແລ້ວ ເຮົາຈະຜາຮົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

ພິກຂຸຜູ້ຢູ່ປ່າ ເມື່ອພິຈາລະນາເຫັນໄພໃນອະນາຄົດປະການທີ ໑ ນີ້ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

໔. ພິກຂຸໃນທຳວິໄນນີ້ ຢູ່ປ່າພິຈາລະນາເຫັນດັ່ງນີ້ວ່າ “ບັດນີ້ ເຮົາຢູ່ໃນປ່າຜູ້ດຽວ ເຮົາເມື່ອຢູ່ໃນປ່າຜູ້ດຽວ ເພິ່ງພາດມື່ນລົ້ມກໍໄດ້ ພັດຕາຫານທີ່ເຮົາສັນແລ້ວບໍ່ເພິ່ງຍ່ອຍກໍໄດ້ ປິຂອງເຮົາເພິ່ງກຳເຮີບກໍໄດ້ ເສມທະຂອງເຮົາ ເພິ່ງກຳເຮີບກໍໄດ້ ຫຼືລົມມີພິດດັ່ງອາວຸດຂອງເຮົາເພິ່ງກຳເຮີບກໍໄດ້ ຍ້ອນເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍນັ້ນ ຖ້າຈັ່ງຊັ້ນແລ້ວ ເຮົາຈະຜາຮົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

ພິກຂຸຜູ້ຢູ່ປ່າ ເມື່ອພິຈາລະນາເຫັນໄພໃນອະນາຄົດປະການທີ ໔ ນີ້ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

໓. ພິກຂຸໃນທຳວິໄນນີ້ຢູ່ປ່າພິຈາລະນາເຫັນດັ່ງນີ້ວ່າ "ບັດນີ້ ເຮົາຢູ່ໃນປ່າຜູ້ດຽວ ເມື່ອເຮົາຢູ່ໃນປ່າຜູ້ດຽວ ເພິ່ງພົບສັດຮ້າຍຄືຣາດຊະສີ ເສືອໂຄ່ງ ເສືອເຫຼືອງ ໝີ ຫຼືເສືອດາວກໍໄດ້ ສັດເຫຼົ່ານັ້ນເພິ່ງທຳຮ້າຍເຮົາເຖິງຕາຍກໍໄດ້ ຍ້ອນເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍນັ້ນ ຖ້າຈັ່ງຊັ້ນແລ້ວ ເຮົາຈະຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

ພິກຂຸຜູ້ຢູ່ປ່າ ເມື່ອພິຈາລະນາເຫັນໄພໃນອະນາຄົດປະການທີ ໓ ນີ້ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

໔. ພິກຂຸໃນທຳວິໄນນີ້ຢູ່ປ່າພິຈາລະນາເຫັນດັ່ງນີ້ວ່າ "ບັດນີ້ ເຮົາຢູ່ໃນປ່າຜູ້ດຽວ ເມື່ອເຮົາຢູ່ໃນປ່າຜູ້ດຽວ ເຮົາເພິ່ງພົບຄົນຮ້າຍຜູ້ກໍ່ຄະດີແລ້ວຫຼືຍັງບໍ່ໄດ້ກໍ່ຄະດີກໍໄດ້ ພວກຄົນຮ້າຍນັ້ນເພິ່ງຕັດຊີວິດເຮົາເສຍກໍໄດ້ ຍ້ອນເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍນັ້ນ ຖ້າຈັ່ງຊັ້ນແລ້ວ ເຮົາຈະຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

ພິກຂຸຜູ້ຢູ່ປ່າ ເມື່ອພິຈາລະນາເຫັນໄພໃນອະນາຄົດປະການທີ ໔ ນີ້ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

໕. ພິກຂຸໃນທຳວິໄນນີ້ຢູ່ປ່າພິຈາລະນາເຫັນດັ່ງນີ້ວ່າ "ບັດນີ້ ເຮົາຢູ່ໃນປ່າຜູ້ດຽວ ກໍໃນປ່າມີພວກອະມະນຸດດຸຮ້າຍ ພວກອະມະນຸດນັ້ນເພິ່ງຕັດຊີວິດເຮົາກໍໄດ້ ຍ້ອນເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍນັ້ນ ຖ້າຈັ່ງຊັ້ນແລ້ວ ເຮົາຈະຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

ພິກຂຸຜູ້ຢູ່ປ່າ ເມື່ອພິຈາລະນາເຫັນໄພໃນອະນາຄົດປະການທີ ໕ ນີ້ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ປ່າເມື່ອເຫັນໄພໃນອະນາຄົດ ໕ ປະການນີ້ແລ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

**ປະຖົມອະນາຄະຕະພະຍະສູດທີ ໗ ຈົບ**

## ໘. ທຸຕິຍະອະນາຄະຕະພະຍະສູດ

## ວ່າດ້ວຍໄພໃນອະນາຄົດສູດທີ ໘

[໗໘] ພິກຂຸທັງຫຼາຍ ພິກຂຸເມື່ອພິຈາລະນາເຫັນໄພໃນອະນາຄົດ ໕ ປະການນີ້ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

ໄພໃນອະນາຄົດ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ພິຈາລະນາເຫັນດັ່ງນີ້ວ່າ "ບັດນີ້ ເຮົາຍັງເປັນຄົນໜຸ່ມແໜ້ນ ມີຜົມດຳປອດ ປະກອບດ້ວຍຄວາມເປັນໜຸ່ມກຳລັງຈະເລີນ ດຳລົງຢູ່ໃນປະຖົມໄວກໍຈິງ ແນວໃດກໍ່ຕາມກໍຍັງມີສະໄໝທີ່ຊະຣາຈະຖືກຕ້ອງກາຍນີ້ໄດ້ ການທີ່ບຸກຄົນຜູ້ແກ່ຖືກຊະຣາຄອບງຳແລ້ວຈະມະນະສິການເຖິງຄຳສັ່ງສອນຂອງ ພຣະພຸດທະເຈົ້າ ບໍ່ແມ່ນເຮັດໄດ້ງ່າຍ ທັງຈະອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງ[໑] ແລະປ່າທຶບ[໒] ກໍບໍ່ແມ່ນເຮັດໄດ້ງ່າຍ ກ່ອນທີ່ທຳເຊິ່ງບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈນັ້ນຈະມາເຖິງເຮົາ ເຮົາຈະຟ້າວຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງກ່ອນຢ່າງແນ່ນອນ ເຊິ່ງເມື່ອເຮົາມີແລ້ວແມ່ນເຖົ້າກໍຈັກຢູ່ສະບາຍ

ພິກຂຸເມື່ອພິຈາລະນາເຫັນໄພໃນອະນາຄົດປະການທີ ໑ ນີ້ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

໒. ພິກຂຸໃນທຳວິໄນນີ້ພິຈາລະນາເຫັນດັ່ງນີ້ວ່າ "ບັດນີ້ ເຮົາມີອາພາດໜ້ອຍ ມີພະຍາດເບົາບາງ ປະກອບດ້ວຍໄຟທາດສຳລັບຍ່ອຍອາຫານສະໝ່ຳສະເໝີ ບໍ່ເຢັນຫຼາຍ ບໍ່ຮ້ອນຫຼາຍປານກາງ ເໝາະແກ່ການພໍ່າເພັງພຽນກໍຈິງ ແນວໃດກໍ່ຕາມ ກໍຍັງມີສະໄໝທີ່ພະຍາດຈະຖືກຕ້ອງກາຍນີ້ໄດ້ ການທີ່ບຸກຄົນຜູ້ເຈັບໄຂ້ຖືກພະຍາດຄອບງຳແລ້ວຈະມະນະສິການເຖິງຄຳສັ່ງສອນຂອງພຣະພຸດທະເຈົ້າ ບໍ່ແມ່ນເຮັດໄດ້ງ່າຍ ທັງຈະອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງ

ແລະ ປ່າທຶບ ກໍບໍ່ແມ່ນເຮັດໄດ້ງ່າຍ ກ່ອນທີ່ທຳເຊິ່ງບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈນັ້ນຈະມາເຖິງເຮົາ ເຮົາຈະຟ້າວຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງ ບໍ່ໄດ້ເຮັດໃຫ້ແຈ້ງ ກ່ອນຢ່າງແນ່ນອນ ເຊິ່ງເມື່ອເຮົາມີແລ້ວແມ່ນອາພາດກໍຈັກຢູ່ສະບາຍ

ພິກຂຸເມື່ອພິຈາລະນາເຫັນໄພໃນອະນາຄົດປະການທີ ໔ ນີ້ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

໕. ພິກຂຸໃນທຳວິໄນນີ້ພິຈາລະນາເຫັນດັ່ງນີ້ວ່າ "ບັດນີ້ ມີພິກສາຫາໄດ້ງ່າຍ ເຂົ້າກ້າດີ ບິນທະບາດໄດ້ງ່າຍ ສະດວກແກ່ການສະແຫວງຫາລ້ຽງຊີບກໍຈິງ ແນວໃດກໍ່ຕາມ ກໍຍັງມີສະໄໝທີ່ພິກສາຫາໄດ້ຍາກ ເຂົ້າກ້າເສຍຫາຍ ບິນທະບາດໄດ້ຍາກ ຈຶ່ງບໍ່ສະດວກແກ່ການສະແຫວງຫາລ້ຽງຊີບ ເມື່ອພິກສາຫາໄດ້ຍາກ ຄົນທັງຫຼາຍຈຶ່ງອົບພະຍົບໄປໃນບ່ອນມີອາຫານດີ ບ່ອນນັ້ນຍ່ອມມີການຢູ່ຄຸກຄີດ້ວຍໝູ່ຄະນະ ຢູ່ກັນຢ່າງບໍ່ເປັນລະບຽບ ເມື່ອມີການຢູ່ຄຸກຄີດ້ວຍ ໝູ່ຄະນະຢູ່ກັນຢ່າງບໍ່ເປັນລະບຽບ ການທີ່ຈະມະນະສິການເຖິງຄຳສັ່ງສອນ ຂອງພຣະພຸດທະເຈົ້າ ບໍ່ແມ່ນເຮັດໄດ້ງ່າຍ ທັງຈະອາໄສເສນາສະນະອັນງຽບສະຫງັດ ຄືປ່າໂລ່ງ ແລະປ່າທຶບ ກໍບໍ່ແມ່ນເຮັດໄດ້ງ່າຍ ກ່ອນທີ່ທຳເຊິ່ງບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈນັ້ນຈະມາເຖິງເຮົາ ຖ້າຈັ່ງຊັ້ນແລ້ວ ເຮົາຈະຟ້າວຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງກ່ອນຢ່າງແນ່ນອນ ເຊິ່ງເມື່ອເຮົາມີແລ້ວ ແມ່ນໃນສະໄໝທີ່ມີພິກສາຫາໄດ້ຍາກກໍຈັກຢູ່ສະບາຍ

ພິກຂຸເມື່ອພິຈາລະນາເຫັນໄພໃນອະນາຄົດປະການທີ ໕ ນີ້ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

໔. ພິກຂຸໃນທຳວິໄນນີ້ພິຈາລະນາເຫັນດັ່ງນີ້ວ່າ "ບັດນີ້ ຄົນທັງຫຼາຍພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນຄືນ້ຳນົມກັບນ້ຳ ເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ກໍຈິງ ແນວໃດກໍ່ຕາມ ກໍຍັງມີສະໄໝທີ່ມີໄພ ມີຄວາມປັ່ນປ່ວນໃນດົງ ປະຊາຊົນວຸ່ນວາຍ ເມື່ອມີໄພ ຄົນທັງຫຼາຍ ຈຶ່ງອົບພະຍົບໄປໃນບ່ອນປອດໄພ ບ່ອນນັ້ນຍ່ອມມີການຄຸກຄີດ້ວຍໝູ່ຄະນະ ຢູ່ກັນຢ່າງບໍ່ເປັນລະບຽບ ເມື່ອມີການຢູ່ຄຸກຄີດ້ວຍໝູ່ຄະນະ ຢູ່ກັນຢ່າງບໍ່ເປັນລະບຽບ ການທີ່ຈະມະນະສິການເຖິງຄຳສັ່ງສອນຂອງພຣະພຸດທະເຈົ້າ ບໍ່ແມ່ນເຮັດໄດ້ງ່າຍ ທັງຈະອາໄສເສນາສະນະອັນງຽບສະຫງັດ ຄືປ່າໂລ່ງ ແລະ ປ່າທຶບ ກໍບໍ່ແມ່ນເຮັດໄດ້ງ່າຍ ກ່ອນທີ່ທຳເຊິ່ງບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈນັ້ນຈະມາເຖິງເຮົາ ຖ້າຈັ່ງຊັ້ນແລ້ວ ເຮົາຈະຟ້າວຜາຣົບຄວາມພຽນ

ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ກ່ອນຢ່າງແນ່ນອນ ເຊິ່ງເມື່ອເຮົາມີແລ້ວ ແມ່ນໃນສະໄໝທີ່ມີໄພກໍຈັກຢູ່ສະບາຍ

ພິກຂຸເມື່ອພິຈາລະນາເຫັນໄພໃນອະນາຄົດປະການທີ ໔ ນີ້ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

໕. ພິກຂຸໃນທຳວິໄນນີ້ພິຈາລະນາເຫັນດັ່ງນີ້ວ່າ "ບັດນີ້ ສົງພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ມີອຸດເທດທີ່ສູດຮ່ວມກັນ[໑] ຢູ່ຜາສຸກກໍຈິງ ແນວໃດກໍ່ຕາມ ກໍຍັງມີສະໄໝທີ່ສົງແຕກແຍກກັນ ເມື່ອສົງແຕກແຍກກັນແລ້ວ ການທີ່ຈະມະນະສິການເຖິງຄຳສັ່ງສອນຂອງພຣະພຸດທະເຈົ້າ ບໍ່ແມ່ນເຮັດໄດ້ງ່າຍ ທັງຈະອາໄສເສນາສະນະອັນງຽບສະຫງັດ ຄືປ່າໂລ່ງ ແລະປ່າທຶບ ກໍບໍ່ແມ່ນເຮັດໄດ້ງ່າຍ ກ່ອນທີ່ທຳເຊິ່ງບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈນັ້ນຈະມາເຖິງເຮົາ ຖ້າຈັ່ງຊັ້ນແລ້ວ ເຮົາຈະຟ້າວຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງກ່ອນຢ່າງແນ່ນອນ ເຊິ່ງເມື່ອເຮົາມີແລ້ວ ແມ່ນໃນເມື່ອສົງແຕກແຍກກັນກໍຈັກຢູ່ສະບາຍ

ພິກຂຸເມື່ອພິຈາລະນາເຫັນໄພໃນອະນາຄົດປະການທີ ໕ ນີ້ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

ພິກຂຸທັງຫຼາຍ ພິກຂຸເມື່ອພິຈາລະນາເຫັນໄພໃນອະນາຄົດ ໕ ປະການນີ້ແລ ຄວນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ

**ທຸຕິຍະອະນາຄະຕະພະຍະສູດທີ ໗ ຈົບ**

## ໘. ຕະຕິຍະອະນາຄະຕະພະຍະສູດ

## ວ່າດ້ວຍໄພໃນອະນາຄົດສູດທີ ໓

[໗໘] ພິກຂຸທັງຫຼາຍ ໄພໃນອະນາຄົດ ໕ ປະການນີ້ ຍັງບໍ່ເກີດຂຶ້ນໃນປັດຈຸບັນ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພເຫຼົ່ານັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພເຫຼົ່ານັ້ນສາ

ໄພໃນອະນາຄົດ ໕ ປະການ ອັນໃດແດ່ ຄື

໑. ໃນອະນາຄົດ ໝູ່ພິກຂຸຈັກບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ເມື່ອບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ໃຫ້ກຸນລະບຸດເຫຼົ່າອື່ນອຸປະສົມບົດ ກໍຈັກບໍ່ສາມາດແນະນຳ ກຸນລະບຸດເຫຼົ່ານັ້ນໃນອະທິສີນ ອະທິຈິດ ແລະອະທິປັນຍາໄດ້ ແມ່ນກຸນລະບຸດເຫຼົ່ານັ້ນກໍຈັກບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ເມື່ອບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ໃຫ້ກຸນລະບຸດເຫຼົ່າອື່ນອຸປະສົມບົດອີກ ກໍຈັກບໍ່ສາມາດແນະນຳກຸນລະ ບຸດ ເຫຼົ່ານັ້ນໃນອະທິສີນ ອະທິຈິດ ແລະອະທິປັນຍາໄດ້ ເຖິງກຸນລະບຸດເຫຼົ່ານັ້ນກໍຈັກບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ໂດຍໄນນີ້ແລ ຍ້ອນທຳເລີເລືອນ ວິໄນຈຶ່ງເລີເລືອນ ຍ້ອນວິໄນ ເລີເລືອນ ທຳຈຶ່ງເລີເລືອນ

ໄພໃນອະນາຄົດປະການທີ ໑ ນີ້ ທີ່ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພນັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພນັ້ນສາ

໘. ໃນອະນາຄົດ ໝູ່ພິກຂຸຈັກບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ເມື່ອບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ໃຫ້ນິດໄສແກ່ກຸນລະບຸດເຫຼົ່າອື່ນກໍຈັກບໍ່ສາມາດແນະນຳ ກຸນລະບຸດເຫຼົ່ານັ້ນໃນອະທິສີນ ອະທິຈິດ ແລະອະທິປັນຍາໄດ້ ກຸນລະບຸດເຫຼົ່ານັ້ນ ກໍຈັກບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ເມື່ອ ບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ໃຫ້ນິດໄສ ແກ່ກຸນລະບຸດເຫຼົ່າອື່ນອີກ ກໍຈັກບໍ່ສາມາດແນະນຳກຸນລະບຸດເຫຼົ່ານັ້ນ ໃນອະທິສີນ ອະທິຈິດ ແລະອະທິປັນຍາໄດ້ ເຖິງກຸນລະບຸດເຫຼົ່ານັ້ນກໍຈັກບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ໂດຍໄນນີ້ແລ ຍ້ອນທຳເລີເລືອນ ວິໄນຈຶ່ງເລີເລືອນ ຍ້ອນວິໄນເລີເລືອນ ທຳຈຶ່ງເລີເລືອນ

ໄພໃນອະນາຄົດປະການທີ ໘ ນີ້ ທີ່ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພນັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພນັ້ນສາ

໙. ໃນອະນາຄົດ ໝູ່ພິກຂຸຈັກບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ເມື່ອບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ສະແດງອະພິທຳມະກະຖາ[໑] ເວທັນລະກະຖາ[໒] ຖະຫຼຳລົງສູ່ທຳດຳກໍຈັກບໍ່ຮູ້ໂຕ ໂດຍໄນນີ້ແລ ຍ້ອນທຳເລີເລືອນ ວິໄນຈຶ່ງເລີເລືອນ ຍ້ອນວິໄນເລີເລືອນ ທຳຈຶ່ງເລີເລືອນ

ໄພໃນອະນາຄົດປະການທີ ໙ ນີ້ ທີ່ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພນັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພນັ້ນສາ

໔. ໃນອະນາຄົດ ໝູ່ພິກຂຸຈັກບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ເມື່ອຜູ້ອື່ນກ່າວສູດທີ່ຕະຖາຄົດຕັດໄວ້ ລ້ຳເລິກ ມີເນື້ອຄວາມເລິກເຊິ່ງ ເປັນໂລກຸດຕະຣະ

ທຳ ປະກອບດ້ວຍຄວາມວ່າງ ພິກຂຸເຫຼົ່ານັ້ນບໍ່ຕັ້ງໃຈຟັງດ້ວຍດີ ບໍ່ງ່ຽງໂສດສະດັບ ບໍ່ຕັ້ງໃຈໃຝ່ຮູ້ ແລະບໍ່ໃຫ້ຄວາມສຳຄັນທຳວ່າຄວນຮຽນ ຄວນທ່ອງຈຳໃຫ້ຂຶ້ນໃຈ ແຕ່ເມື່ອຜູ້ອື່ນກ່າວສູດທີ່ທ່ານຜູ້ຊ່ຽວຊານໄດ້ຮ້ອຍຈະນາໄວ້ເປັນບົດກະວີມີອັກສອນວິຈິດ ມີພະຍັນຊະນະວິຈິດ ຢູ່ພາຍນອກ ເປັນສາວົກພາສິດ[໕] ພິກຂຸເຫຼົ່ານັ້ນກັບຕັ້ງໃຈຟັງດ້ວຍດີ ງ່ຽງໂສດສະດັບ ຕັ້ງໃຈໃຝ່ຮູ້ ແລະໃຫ້ຄວາມສຳຄັນທຳວ່າຄວນຮຽນ ຄວນທ່ອງຈຳໃຫ້ຂຶ້ນໃຈ ໂດຍໄນນີ້ແລ ຍ້ອນທຳເລີເລືອນ ວິໄນຈຶ່ງເລີເລືອນ ຍ້ອນວິໄນເລີເລືອນ ທຳຈຶ່ງເລີເລືອນ

ໄພໃນອະນາຄົດປະການທີ ໔ ນີ້ ທີ່ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພນັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພນັ້ນສາ

໕. ໃນອະນາຄົດ ໝູ່ພິກຂຸຈັກບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ເມື່ອບໍ່ຈະເລີນກາຍ ບໍ່ຈະເລີນສີນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ພິກຂຸຜູ້ເຖຣະກໍຈັກເປັນຜູ້ມັກຫຼາຍ ເປັນຜູ້ຫຍ່ອນຍານ ເປັນຜູ້ນຳໃນໂອກກະມະນະທຳ[໗] ຖິ້ມເປົ່າໃນປະວິເວກ[໘] ຈັກບໍ່ຜາຮົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໝູ່ຄົນລຸ້ນຫຼັງກໍຈັກພາກັນເອົາຢ່າງພວກພິກຂຸເຖຣະເຫຼົ່ານັ້ນ ແມ່ນໝູ່ຄົນລຸ້ນຫຼັງນັ້ນ ກໍຈັກເປັນຜູ້ມັກຫຼາຍ ເປັນຜູ້ຫຍ່ອນຍານ ເປັນຜູ້ນຳໃນໂອກກະມະນະທຳ ຖິ້ມເປົ່າໃນປະວິເວກ ຈັກບໍ່ຜາຮົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໂດຍໄນນີ້ແລ ຍ້ອນທຳເລີເລືອນ ວິໄນຈຶ່ງເລີເລືອນ ຍ້ອນວິໄນເລີເລືອນ ທຳຈຶ່ງເລີເລືອນ

ໄພໃນອະນາຄົດປະການທີ ໕ ນີ້ ທີ່ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພນັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພນັ້ນສາ

ພິກຂຸທັງຫຼາຍ ໄພໃນອະນາຄົດ ໕ ປະການນີ້ແລ ທີ່ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພເຫຼົ່ານັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພເຫຼົ່ານັ້ນສາ

**ຕະຕິຍະອະນາຄະຕະພະຍະສູດທີ ໙ ຈົບ**

## ໑໐. ຈະຕຸດຖະອະນາຄະຕະພະຍະສູດ
## ວ່າດ້ວຍໄພໃນອະນາຄົດສູດທີ ໔

[໘໐] ພິກຂຸທັງຫຼາຍ ໄພໃນອະນາຄົດ ໕ ປະການນີ້ ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພເຫຼົ່ານັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພເຫຼົ່ານັ້ນສາ

ໄພໃນອະນາຄົດ ໕ ປະການ ອັນໃດແດ່ ຄື

໑. ໃນອະນາຄົດ ໝູ່ພິກຂຸຈັກເປັນຜູ້ມັກທີ່ຈີວອນສວຍງາມ ເມື່ອມັກຈີວອນທີ່ສວຍງາມ ກໍຈັກລະຄວາມເປັນຜູ້ຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ຈັກລະເສນາສະນະອັນງຽບສະຫງັດ ຄືປ່າໂລ່ງ ແລະປ່າທຶບ ໄປລວມກັນຢູ່ທີ່ໝູ່ບ້ານ ນິຄົມ ແລະເມືອງຫຼວງ ແລະຈັກເຖິງການສະແຫວງຫາທີ່ບໍ່ສົມຄວນ ບໍ່ເໝາະສົມຫຼາຍແນວ ຍ້ອນຈີວອນເປັນເຫດ

ໄພໃນອະນາຄົດປະການທີ ໑ ນີ້ ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພນັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພນັ້ນສາ

໔. ໃນອະນາຄົດ ໝູ່ພິກຂຸຈັກເປັນຜູ້ມັກບິນທະບາດທີ່ມີຣົດແຊບ ເມື່ອມັກບິນທະບາດທີ່ມີຣົດແຊບ ກໍຈັກລະຄວາມເປັນຜູ້ຖືທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ຈັກລະເສນາສະນະອັນງຽບສະຫງັດ ຄືປ່າໂລ່ງ ແລະປ່າທຶບ ໄປລວມກັນຢູ່ທີ່ໝູ່ບ້ານ ນິຄົມ ແລະເມືອງຫຼວງ ສະແຫວງຫາບິນທະບາດທີ່ມີຣົດເລີດແຊບ ແລະຈັກເຖິງການສະແຫວງຫາທີ່ບໍ່ສົມຄວນ ບໍ່ເໝາະສົມຫຼາຍແນວ ຍ້ອນບິນທະບາດເປັນເຫດ

ໄພໃນອະນາຄົດປະການທີ ໔ ນີ້ ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພນັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພນັ້ນສາ

໓. ໃນອະນາຄົດ ໝູ່ພິກຂຸຈັກເປັນຜູ້ມັກເສນາສະນະທີ່ສວຍງາມ ເມື່ອມັກເສນາສະນະທີ່ສວຍງາມ ກໍຈັກລະການຢູ່ປ່າເປັນຂໍ້ວັດປະຕິບັດ ຈັກລະເສນາສະນະອັນງຽບສະຫງັດ ຄືປ່າໂລ່ງ ແລະປ່າທຶບ ໄປລວມກັນຢູ່ທີ່ໝູ່ບ້ານ ນິຄົມ ແລະເມືອງຫຼວງ ແລະຈັກເຖິງການສະແຫວງຫາທີ່ບໍ່ສົມຄວນ ບໍ່ເໝາະສົມຫຼາຍແນວ ຍ້ອນເສນາສະນະເປັນເຫດ

ໄພໃນອະນາຄົດປະການທີ ໓ ນີ້ ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພນັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພນັ້ນສາ

໔. ໃນອະນາຄົດ ໝູ່ພິກຂຸຈັກຢູ່ຄຸກຄີກັບພິກຂຸນີ ນາງສິກຂະມານາ໑ ແລະເຫຼົ່າສາມະເນນ ເມື່ອ ຢູ່ຄຸກຄີກັບພິກຂຸນີ ນາງສິກຂະມານາ ແລະເຫຼົ່າສາມະເນນ ກໍເພິ່ງຫວັງຂໍ້ນີ້ໄດ້ວ່າ "ທ່ານເຫຼົ່ານັ້ນຈັກບໍ່ຍິນດີປະພຶດພົມມະຈັນ ຈັກຕ້ອງອາບັດເສົ້າໝອງບາງຢ່າງ ຫຼືຈັກບອກຄືນສິກຂາກັບມາເປັນຄະລືຫັດ

ໄພໃນອະນາຄົດປະການທີ ໔ ນີ້ ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພນັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພນັ້ນສາ

໕. ໃນອະນາຄົດ ໝູ່ພິກຂຸຈັກຢູ່ຄຸກຄີກັບພວກຄົນວັດແລະເຫຼົ່າສາມະເນນ ເມື່ອຢູ່ຄຸກຄີກັບພວກຄົນວັດແລະເຫຼົ່າສາມະເນນ ກໍເພິ່ງຫວັງຂໍ້ນີ້ໄດ້ວ່າ "ທ່ານເຫຼົ່ານັ້ນຈັກບໍຣິໂພກຂອງທີ່ສະສົມໄວ້ຫຼາຍແນວ ຈັກທໍານິມິດແນວຫຍາບໄວ້ທີ່ແຜ່ນດິນແດ່ ທີ່ປາຍຂອງຂຽວແດ່"

ໄພໃນອະນາຄົດປະການທີ ໕ ນີ້ ຍັງບໍ່ເກີດຂຶ້ນໃນບັດນີ້ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພນັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພນັ້ນສາ

ພິກຂຸທັງຫຼາຍ ໄພໃນອະນາຄົດ ໕ ປະການນີ້ ຍັງບໍ່ເກີດຂຶ້ນໃນປັດຈຸບັນ ແຕ່ຈັກເກີດຂຶ້ນໃນການຕໍ່ໄປ ໄພເຫຼົ່ານັ້ນ ທ່ານທັງຫຼາຍເພິ່ງຮັບຮູ້ໄວ້ ແລະເພິ່ງພະຍາຍາມເພື່ອລະໄພເຫຼົ່ານັ້ນສາ

**ຈະຕຸດຖະອະນາຄະຕະພະຍະສູດທີ ໑໐ ຈົບ**

**ໂຍທາຊີວະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ເຖຣະວັກ
## ໝວດວ່າດ້ວຍທຳຂອງພຣະເຖຣະ

## ໑. ຣະຊະນີຍະສູດ
## ວ່າດ້ວຍທຳທີ່ເປັນເຫດໃຫ້ກຳໜັດ

[໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ກຳໜັດໃນສິ່ງ°ທີ່ເປັນເຫດໃຫ້ກຳໜັດ
໒. ຂັດເຄືອງໃນສິ່ງທີ່ເປັນເຫດໃຫ້ຂັດເຄືອງ
໓. ຫຼົງໃນສິ່ງທີ່ເປັນເຫດໃຫ້ຫຼົງ
໔. ໂກດໃນສິ່ງທີ່ເປັນເຫດໃຫ້ໂກດ
໕. ມົວເມົາໃນສິ່ງທີ່ເປັນເຫດໃຫ້ມົວເມົາ

ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ກຳໜັດໃນສິ່ງທີ່ເປັນເຫດໃຫ້ກຳໜັດ
໒. ບໍ່ຂັດເຄືອງໃນສິ່ງທີ່ເປັນເຫດໃຫ້ຂັດເຄືອງ
໓. ບໍ່ຫຼົງໃນສິ່ງທີ່ເປັນເຫດໃຫ້ຫຼົງ
໔. ບໍ່ໂກດໃນສິ່ງທີ່ເປັນເຫດໃຫ້ໂກດ
໕. ບໍ່ມົວເມົາໃນສິ່ງທີ່ເປັນເຫດໃຫ້ມົວເມົາ

ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ຣະຊະນີຍະສູດທີ ໑ ຈົບ**

# ໘. ວິຕະຣາຄະສູດ

## ວ່າດ້ວຍທຳຂອງຜູ້ປາສະຈາກຣາຄະ

[໗໘] ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີ ທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ບໍ່ປາສະຈາກຣາຄະ
໒. ເປັນຜູ້ບໍ່ປາສະຈາກໂທສະ
໓. ເປັນຜູ້ບໍ່ປາສະຈາກໂມຫະ
໔. ເປັນຜູ້ລົບຫຼູ່ຄຸນທ່ານ
໕. ເປັນຜູ້ຕີສະເໝີ

ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ປາສະຈາກຣາຄະ
໒. ເປັນຜູ້ປາສະຈາກໂທສະ
໓. ເປັນຜູ້ປາສະຈາກໂມຫະ
໔. ເປັນຜູ້ບໍ່ລົບຫຼູ່ຄຸນທ່ານ
໕. ເປັນຜູ້ບໍ່ຕີສະເໝີ

ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ວິຕະຣາຄະສູດທີ ໒ ຈົບ**

# ໓. ກຸຫະກະສູດ

## ວ່າດ້ວຍຜູ້ຫຼອກລວງ

[໗໓] ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການ ຍ່ອມບໍ່ ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີ ທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ຫຼອກລວງ[໑]
໒. ເປັນຜູ້ເວົ້າປໍ້ຍໍ[໒]
໓. ເປັນຜູ້ເຮັດນິມິດ[໓]
໔. ເປັນຜູ້ເວົ້າບີບບັງຄັບ[໔]
໕. ເປັນຜູ້ສະແຫວງຫາລາບດ້ວຍລາບ[໕]

ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ບໍ່ຫຼອກລວງ
໒. ເປັນຜູ້ບໍ່ເວົ້າປໍ້ຍໍ
໓. ເປັນຜູ້ບໍ່ເຮັດນິມິດ
໔. ເປັນຜູ້ບໍ່ເວົ້າບີບບັງຄັບ
໕. ເປັນຜູ້ບໍ່ສະແຫວງຫາລາບດ້ວຍລາບ

ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ກຸຫະກະສູດທີ ໓ ຈົບ**

# ໔. ອັດສັດທະສູດ

## ວ່າດ້ວຍພິກຂຸຜູ້ບໍ່ມີສັດທາ

[໗໔] ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ບໍ່ມີຫິຣິ
໓. ເປັນຜູ້ບໍ່ມີໂອດຕັບປະ
໔. ເປັນຜູ້ຂີ້ຄ້ານ
໕. ເປັນຜູ້ມີປັນຍາຊາມ

ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີຫິຣິ
໓. ເປັນຜູ້ມີໂອດຕັບປະ
໔. ເປັນຜູ້ພາຣົບຄວາມພຽນ
໕. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ອັດສັດທະສູດທີ ໔ ຈົບ**

# ໕. ອັກຂະມະສູດ

## ວ່າດ້ວຍພິກຂຸຜູ້ບໍ່ອົດທົນ

[໗໕] ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທໍາ ໕ ປະການ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ທໍາ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ບໍ່ອົດທົນຕໍ່ຮູບ
໒. ເປັນຜູ້ບໍ່ອົດທົນຕໍ່ສຽງ
໓. ເປັນຜູ້ບໍ່ອົດທົນຕໍ່ກິ່ນ
໔. ເປັນຜູ້ບໍ່ອົດທົນຕໍ່ຣົດ
໕. ເປັນຜູ້ບໍ່ອົດທົນຕໍ່ໂຜດຖັບພະ

ພິກຂຸຜູ້ເຖຣະປະກອບດ້ວຍທໍາ ໕ ປະການນີ້ແລ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ພິກຂຸຜູ້ເຖຣະປະກອບດ້ວຍທໍາ ໕ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ທໍາ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ອົດທົນຕໍ່ຮູບ
໒. ເປັນຜູ້ອົດທົນຕໍ່ສຽງ
໓. ເປັນຜູ້ອົດທົນຕໍ່ກິ່ນ
໔. ເປັນຜູ້ອົດທົນຕໍ່ຣົດ
໕. ເປັນຜູ້ອົດທົນຕໍ່ໂຜດຖັບພະ

ພິກຂຸຜູ້ເຖຣະປະກອບດ້ວຍທໍາ ໕ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ອັກຂະມະສູດທີ ໕ ຈົບ**

# ໖. ປະຕິສຳພິທາປັດຕະສູດ[1]

## ວ່າດ້ວຍພິກຂຸຜູ້ບັນລຸປະຕິສຳພິທາ

[໘໖] ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ບັນລຸອັດຖະປະຕິສຳພິທາ (ປັນຍາແຕກສານໃນອັດຖະ)
໒. ເປັນຜູ້ບັນລຸທຳມະປະຕິສຳພິທາ (ປັນຍາແຕກສານໃນທຳ)
໓. ເປັນຜູ້ບັນລຸນິຣຸດຕິປະຕິສຳພິທາ (ປັນຍາແຕກສານໃນນິຣຸດຕິ)
໔. ເປັນຜູ້ບັນລຸປະຕິພານະປະຕິສຳພິທາ (ປັນຍາແຕກສານໃນປະຕິພານ)
໕. ເປັນຜູ້ດຸໝັ່ນ ບໍ່ຂີ້ຄ້ານໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດ ທັງງານສູງແລະງານຕ່ຳໆຂອງເພື່ອນພົມມະຈາຣີທັງຫຼາຍ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາອັນເປັນອຸບາຍໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້

ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ປະຕິສຳພິທາປັດຕະສູດທີ ໖ ຈົບ**

# ໗. ສີລະວັນຕະສູດ

## ວ່າດ້ວຍພິກຂຸຜູ້ມີສິນ

[໘໗] ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ມີສິນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະ(ມາຣະຍາດ) ແລະໂຄຈອນ(ການທ່ຽວໄປ) ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

໔. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ແລ້ວຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ

໓. ເປັນຜູ້ມີວາຈາງາມ ເຈຣະຈາຄຳເວົ້າມ່ວນ ປະກອບດ້ວຍວາຈາຊາວເມືອງ ທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້

໔. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໕. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ສີລະວັນຕະສູດທີ ៣ ຈົບ**

## ๙. ເຖຣະສູດ

## ວ່າດ້ວຍທຳຂອງພຣະເຖຣະ

[๙๙] ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການ ຍ່ອມເປັນຜູ້ປະຕິບັດເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຣັດຕັນຍູ[๑] ບວດມາດົນ

໔. ເປັນຜູ້ມີຊື່ສຽງ ມີຍົດ ມີບໍລິວານຫຼາຍ ຜາກົດແກ່ພວກຄະລຶຫັດແລະບັນພະຊິດ

໓. ເປັນຜູ້ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ

໔. ເປັນພະຫູສູດ ຊົງສຸຕະ[๑] ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ແລ້ວຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍ ທິດຖິ

໕. ເປັນມິດສາທິດຖິ ມີຄວາມເຫັນວິປະຣິດ ບຸກຄົນນັ້ນເຮັດໃຫ້ຄົນທັງຫຼາຍອອກຈາກສັດທໍາໃຫ້ຕັ້ງຢູ່ໃນອະສັດທໍາ໌ ຄົນທັງຫຼາຍພາກັນເອົາຢ່າງທ່ານ ດ້ວຍຄິດວ່າ "ເປັນພິກຂຸ ເຖຣະ ເປັນຣັດຕັນຍູ ບວດມາດົນແດ່ "ເປັນພິກຂຸເຖຣະ ມີຊື່ສຽງ ມີຍົດ ມີບໍລິວານຫຼາຍ ຜາກົດແກ່ພວກຄະລຶຫັດແລະບັນພະຊິດແດ່ "ເປັນພິກຂຸເຖຣະ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ແດ່ "ເປັນພິກຂຸເຖຣະເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະແດ່

ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທໍາ ໕ ປະການນີ້ແລ ຍ່ອມເປັນຜູ້ປະຕິບັດເພື່ອບໍ່ເກື້ອກູນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ

ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທໍາ ໕ ປະການນີ້ແລ ຍ່ອມເປັນຜູ້ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

ທໍາ ໕ ປະການ ອັນໃດແດ່ ຄື

໑. ເປັນຣັດຕັນຍູ ບວດມາດົນ
໒. ເປັນຜູ້ມີຊື່ສຽງ ມີຍົດ ມີບໍລິວານຫຼາຍ ຜາກົດແກ່ພວກຄະລຶຫັດແລະບັນພະຊິດ
໓. ເປັນຜູ້ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ
໔. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທໍາທັງຫຼາຍ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນແລ້ວ ຊົງຈໍາໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີ ດ້ວຍທິດຖິ
໕. ເປັນສໍາມາທິດຖິ ມີຄວາມເຫັນບໍ່ວິປະຣິດ ບຸກຄົນນັ້ນເຮັດໃຫ້ຄົນທັງຫຼາຍອອກຈາກອະສັດທໍາ ໃຫ້ຕັ້ງຢູ່ໃນສັດທໍາ ຄົນທັງຫຼາຍພາກັນເອົາຢ່າງທ່ານດ້ວຍຄິດວ່າ "ເປັນພິກຂຸເຖຣະ ເປັນຣັດຕັນຍູ ບວດມາດົນ ແດ່ "ເປັນພິກຂຸເຖຣະ ມີຊື່ສຽງ ມີຍົດ ມີບໍລິວານຫຼາຍ ຜາກົດແກ່ພວກຄະລຶຫັດ ແລະບັນພະຊິດ ແດ່ "ເປັນພິກຂຸເຖຣະ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ແດ່ "ເປັນ ພິກຂຸເຖຣະເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະແດ່

ພິກຂຸທັງຫຼາຍ ພິກຂຸຜູ້ເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນຜູ້ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

**ເຖຣະສູດທີ ໗ ຈົບ**

# ໘. ປະຖົມເສຂະສູດ

## ວ່າດ້ວຍທຳຂອງພຣະເສຂະ໑ສູດທີ ໑

[໗໘] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ

ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກວຽກງານ[໒]
໒. ຄວາມເປັນຜູ້ມັກການໂອ້ລົມ
໓. ຄວາມເປັນຜູ້ມັກການນອນຫຼັບ
໔. ຄວາມເປັນຜູ້ມັກການຄຸກຄີດ້ວຍໝູ່
໕. ບໍ່ພິຈາລະນາຈິດຕາມທີ່ລຸດພົ້ນແລ້ວ[໓]

ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ
ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ
ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ບໍ່ມັກວຽກງານ
໒. ຄວາມເປັນຜູ້ບໍ່ມັກການໂອ້ລົມ
໓. ຄວາມເປັນຜູ້ບໍ່ມັກການນອນຫຼັບ
໔. ຄວາມເປັນຜູ້ບໍ່ມັກການຄຸກຄີດ້ວຍໝູ່
໕. ພິຈາລະນາຈິດຕາມທີ່ລຸດພົ້ນແລ້ວ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ

**ປະຖົມເສຂະສູດທີ ໘ ຈົບ**

## ໑໐. ທຸຕິຍະເສຂະສູດ

### ວ່າດ້ວຍທຳຂອງພຣະເສຂະສູດທີ ໒

[໙໐] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ ທຳ ໕ ປະການ ອັນໃດແດ່ ຄື

໑. ພິກຂຸຜູ້ເປັນເສຂະໃນທຳວິໄນນີ້ ເປັນຜູ້ມີກິດຫຼາຍ ມີວຽກງານຫຼາຍ ບໍ່ສະຫຼາດໃນກິດນ້ອຍໃຫຍ່ ລະການຫຼີບຫຼີກ ບໍ່ຕາມປະກອບຄວາມສະງົບໃຈ[໑] ພາຍໃນ ນີ້ເປັນທຳປະການທີ ໑ ເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ

໒. ພິກຂຸຜູ້ເປັນເສຂະໃຫ້ມື້ເວລາລ່ວງໄປຍ້ອນວຽກງານເລັກໜ້ອຍ ລະການຫຼີບຫຼີກ ບໍ່ປະກອບຄວາມສະງົບໃຈພາຍໃນ ນີ້ເປັນທຳປະການທີ ໒ ເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ

໓. ພິກຂຸຜູ້ເປັນເສຂະຄຸກຄີກັບພວກຄະລືຫັດແລະບັນພະຊິດ ດ້ວຍການຄຸກຄີຢ່າງຄະລືຫັດທີ່ບໍ່ສົມຄວນ ລະການຫຼີບຫຼີກ ບໍ່ປະກອບຄວາມສະງົບໃຈພາຍໃນ ນີ້ເປັນທຳປະການທີ ໓ ເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ

໔. ພິກຂຸຜູ້ເປັນເສຂະເຂົ້າໄປສູ່ໝູ່ບ້ານໃນເວລາເຊົ້າໂພດ ກັບມາໃນເວລາສາຍໂພດ ລະການຫຼີບຫຼີກ ບໍ່ປະກອບຄວາມສະງົບໃຈພາຍໃນ ນີ້ເປັນທຳປະການທີ ໔ ເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ

໕. ພິກຂຸຜູ້ເປັນເສຂະບໍ່ໄດ້ກະຖາເປັນເຄື່ອງຂັດເກົາ ເປັນສັບປາຍະແຫ່ງຄວາມເປັນໄປຂອງຈິດ[໒] ຄືອັບປິດສະກະຖາ (ເລື້ອງຄວາມມັກໜ້ອຍ) ສັນຕຸດຖິກະຖາ (ເລື້ອງຄວາມສັນໂດດ) ປະວິເວກະຖາ (ເລື້ອງຄວາມສະຫງັດ) ອະສັງສັກຄະກະຖາ (ເລື້ອງຄວາມບໍ່ຄຸກຄີ) ວິຣິຍາຣຳພະກະຖາ (ເລື້ອງການຜາຣົບຄວາມພຽນ) ສີລະກະຖາ (ເລື້ອງສີນ) ສະມາທິກະຖາ (ເລື້ອງສະມາທິ) ປັນຍາກະຖາ (ເລື້ອງປັນຍາ) ວິມຸດຕິກະຖາ (ເລື້ອງວິມຸດຕິ) ວິມຸດຕິຍານທັດສະນະກະຖາ (ເລື້ອງຄວາມຮູ້ ຄວາມເຫັນໃນວິມຸດຕິ) ຕາມຄວາມປາຖະໜາໄດ້ໂດຍຍາກ ໄດ້ໂດຍລຳບາກ ລະການຫຼີບຫຼີກ ບໍ່ປະກອບຄວາມສະງົບໃຈພາຍໃນ ນີ້ເປັນທຳປະການທີ ໕ ເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສ

ຂະ ພິກຂຸທັງຫຼາຍ ທຳ ໕ ປະການຕໍ່ໄປນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມ ແກ່ ພິກຂຸຜູ້ເປັນເສຂະ

ທຳ ໕ ປະການ ອັນໃດແດ່ ຄື

໑. ພິກຂຸຜູ້ເປັນເສຂະໃນທຳວິໄນນີ້ ເປັນຜູ້ບໍ່ມີກິດຫຼາຍ ບໍ່ມີວຽກງານຫຼາຍ ສະຫຼາດໃນກິດນ້ອຍໃຫຍ່ ບໍ່ລະການຫຼີກຫຼີກ ຕາມປະກອບຄວາມສະງົບໃຈພາຍໃນ ນີ້ເປັນທຳປະການທີ ໑ ເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ ຜູ້ເປັນເສຂະ

໒. ພິກຂຸຜູ້ເປັນເສຂະບໍ່ໃຫ້ມື້ເວລາລ່ວງໄປ ຍ້ອນວຽກງານເລັກໜ້ອຍ ບໍ່ລະການຫຼີກຫຼີກ ປະກອບຄວາມສະງົບໃຈພາຍໃນ ນີ້ເປັນທຳປະການທີ ໒ ເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ

໓. ພິກຂຸຜູ້ເປັນເສຂະບໍ່ຄຸກຄີກັບພວກຄະລຶຫັດແລະບັນພະຊິດ ດ້ວຍການຄຸກຄີກັບຄະລຶຫັດທີ່ບໍ່ສົມຄວນ ບໍ່ລະການຫຼີກຫຼີກ ປະກອບຄວາມສະງົບໃຈພາຍໃນ ນີ້ເປັນທຳປະການທີ ໓ ເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ

໔. ພິກຂຸຜູ້ເປັນເສຂະບໍ່ເຂົ້າໄປສູ່ໝູ່ບ້ານໃນເວລາເຊົ້າໂພດ ບໍ່ກັບໃນເວລາສາຍໂພດ ບໍ່ລະການຫຼີກຫຼີກ ປະກອບຄວາມສະງົບໃຈພາຍໃນ ນີ້ເປັນທຳປະການທີ ໔ ເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ

໕. ພິກຂຸຜູ້ເປັນເສຂະໄດ້ກະຖາເປັນເຄື່ອງຂັດເກົາຢ່າງຍິ່ງ ເປັນສັບປາຍະແຫ່ງຄວາມເປັນໄປຂອງຈິດ ຄື ອັບປິດສະກະຖາ ສັນຕຸດຖີກະຖາ ປະວິເວກະຖາ ອະສັງສັກຄະກະຖາ ວິຣິຍາຣຳພະກະຖາ ສີລະກະຖາ ສະມາທິກະຖາ ປັນຍາກະຖາ ວິມຸດຕິກະຖາ ວິມຸດຕິຍານທັດສະນະກະຖາ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ບໍ່ລຳບາກ ບໍ່ລະການຫຼີກຫຼີກ ປະກອບຄວາມສະງົບໃຈ ພາຍໃນ ນີ້ເປັນທຳປະການທີ ໕ ເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ ຜູ້ເປັນເສຂະ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ

**ທຸຕິຍະເສຂະສູດທີ ໑໐ ຈົບ**

**ເຖຣະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໕. ກະກຸທະວັກ

## ໝວດວ່າດ້ວຍກະກຸທະເທບພະບຸດ

## ໑. ປະຖົມສຳປະທາສູດ

### ວ່າດ້ວຍສຳປະທາສູດທີ ໑

[໙໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສຳປະທາ(ຄວາມເຖິງພ້ອມ) ໕ ປະການນີ້ ສຳປະທາ ໕ ປະການ ອັນໃດແດ່ ຄື

໑. ສັດທາສຳປະທາ (ຄວາມເຖິງພ້ອມດ້ວຍສັດທາ)
໒. ສີລະສຳປະທາ (ຄວາມເຖິງພ້ອມດ້ວຍສີນ)
໓. ສຸຕະສຳປະທາ (ຄວາມເຖິງພ້ອມດ້ວຍສຸຕະ)
໔. ຈາຄະສຳປະທາ (ຄວາມເຖິງພ້ອມດ້ວຍຈາຄະ)
໕. ປັນຍາສຳປະທາ (ຄວາມເຖິງພ້ອມດ້ວຍປັນຍາ)

ພິກຂຸທັງຫຼາຍ ສຳປະທາ ໕ ປະການນີ້ແລ

**ປະຖົມສຳປະທາສູດທີ ໑ ຈົບ**

## ໒. ທຸຕິຍະສຳປະທາສູດ

### ວ່າດ້ວຍສຳປະທາສູດທີ ໒

[໙໒] ພິກຂຸທັງຫຼາຍ ສຳປະທາ ໕ ປະການນີ້

ສຳປະທາ ໕ ປະການ ອັນໃດແດ່ ຄື

໑. ສີລະສຳປະທາ (ຄວາມເຖິງພ້ອມດ້ວຍສີນ)
໒. ສະມາທິສຳປະທາ (ຄວາມເຖິງພ້ອມດ້ວຍສະມາທິ)
໓. ປັນຍາສຳປະທາ (ຄວາມເຖິງພ້ອມດ້ວຍປັນຍາ)
໔. ວິມຸດຕິສຳປະທາ (ຄວາມເຖິງພ້ອມດ້ວຍວິມຸດຕິ)
໕. ວິມຸດຕິຍານທັດສະນະສຳປະທາ (ຄວາມເຖິງພ້ອມດ້ວຍວິມຸດຕິຍານທັດສະນະ)

ພິກຂຸທັງຫຼາຍ ສຳປະທາ ໕ ປະການນີ້ແລ

**ທຸຕິຍະສຳປະທາສູດທີ ໒ ຈົບ**

## ໓. ພະຍາກະຣະນະສູດ

## ວ່າດ້ວຍການພະຍາກອນອະຣະຫັດຕະຜົນ

[໘໓] ພິກຂຸທັງຫຼາຍ ການພະຍາກອນອະຣະຫັດຕະຜົນ໑ ໕ ປະການນີ້

ການພະຍາກອນອະຣະຫັດຕະຜົນ ໕ ປະການ ອັນໃດແດ່ ຄື

໑. ພະຍາກອນອະຣະຫັດຕະຜົນ ຍ້ອນໂງ່ຈ້າ ຍ້ອນຫຼົງງົມງວາຍ
໒. ມີຄວາມປາຖະໜາຊົ່ວ ຖືກຄວາມປາຖະໜາຄອບງຳ ຈຶ່ງພະຍາກອນອະຣະຫັດຕະຜົນ
໓. ພະຍາກອນອະຣະຫັດຕະຜົນ ຍ້ອນຄວາມບ້າ ຍ້ອນຈິດຟຸ້ງຊ່ານ
໔. ພະຍາກອນອະຣະຫັດຕະຜົນ ຍ້ອນສຳຄັນວ່າໄດ້ບັນລຸ
໕. ພະຍາກອນອະຣະຫັດຕະຜົນໂດຍຖືກຕ້ອງ

ພິກຂຸທັງຫຼາຍ ການພະຍາກອນອະຣະຫັດຕະຜົນ ໕ ປະການນີ້ແລ

**ພະຍາກະຣະນະສູດທີ ໓ ຈົບ**

## ໔. ຜາສຸວິຫາຣະສູດ

## ວ່າດ້ວຍຜາສຸວິຫາຣະທຳ໒

[໘໔] ພິກຂຸທັງຫຼາຍ ຜາສຸວິຫາຣະທຳ ໕ ປະການນີ້

ຜາສຸວິຫາຣະທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານ ຯລຯ ຢູ່
໒. ຍ້ອນວິຕົກວິຈານສະງົບລະງັບໄປບັນລຸທຸຕິຍະຊານ ຯລຯ ຢູ່
໓. ຍ້ອນປິຕິຈາງຄາຍອອກມີອຸເປກຂາມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍ ນາມກາຍບັນລຸຕະຕິຍະຊານ ຯລຯ ຢູ່
໔. ຍ້ອນລະສຸກແລະທຸກໄດ້ ຍ້ອນໂມນັສແລະໂທມະນັດດັບໄປກ່ອນແລ້ວບັນລຸ ຈະຕຸດຖະຊານ ຯລຯ ຢູ່
໕. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນ ໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ໃນປັດຈຸບັນ

ພິກຂຸທັງຫຼາຍ ຜາສຸວິຫາຣະທຳ ໕ ປະການນີ້ແລ

**ຜາສຸວິຫາຣະສູດທີ ໔ ຈົບ**

## ໕. ອະກຸບປະສູດ

## ວ່າດ້ວຍອະກຸບປະທຳ໑

[໙໕] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ບໍ່ດົນປານໃດກໍຈະບັນລຸອະກຸບປະທຳທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບັນລຸອັດຖະປະຕິສຳພິທາ (ປັນຍາແຕກສານໃນອັດຖະ)
໒. ເປັນຜູ້ບັນລຸທຳມະປະຕິສຳພິທາ (ປັນຍາແຕກສານໃນທຳ)
໓. ເປັນຜູ້ບັນລຸນິຣຸດຕິປະຕິສຳພິທາ (ປັນຍາແຕກສານໃນນິຣຸດຕິ)
໔. ເປັນຜູ້ບັນລຸປະຕິພານະປະຕິສຳພິທາ (ປັນຍາແຕກສານໃນປະຕິພານ)
໕. ພິຈາລະນາຈິດຕາມທີ່ລຸດພົ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ບໍ່ດົນປານໃດ ກໍຈະບັນລຸ ອະກຸບປະທຳ

**ອະກຸບປະສູດທີ ໕ ຈົບ**

# ໖. ສຸຕະທະຣະສູດ

## ວ່າດ້ວຍພິກຂຸຜູ້ຊົງສຸຕະ

[໑໖] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເສບ°ອານາປານະສະຕິກຳມັດຖານຢູ່ ບໍ່ດົນປານໃດ ຍ່ອມບັນລຸອະກຸບປະທຳ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີທຸຣະໜ້ອຍ ມີກິດໜ້ອຍ ລ້ຽງງ່າຍ ສັນໂດດໃນບໍຣິຂານແຫ່ງຊີວິດ
໒. ເປັນຜູ້ມີອາຫານໜ້ອຍ ໝັ່ນປະກອບຄວາມບໍ່ເຫັນແກ່ປາກແກ່ທ້ອງ
໓. ເປັນຜູ້ມີການຫຼັບໜ້ອຍ ໝັ່ນປະກອບຄວາມພຽນເຄື່ອງຕື່ນຢູ່
໔ ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນ ຄົບຖ້ວນ ແລ້ວຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ
໕. ພິຈາລະນາຈິດຕາມທີ່ລຸດພົ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເສບອານາປານະສະຕິກຳມັດຖານຢູ່ ບໍ່ດົນປານໃດ ຍ່ອມບັນລຸອະກຸບປະທຳ

**ສຸຕະທະຣະສູດທີ ໖ ຈົບ**

# ໗. ກະຖາສູດ

## ວ່າດ້ວຍກະຖາເຄື່ອງຂັດເກົາກິເລດ

[໑໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຈະເລີນອານາປານະສະຕິກຳມັດຖານຢູ່ ບໍ່ດົນປານໃດ ຍ່ອມບັນລຸອະກຸບປະທຳ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີທຸຣະໜ້ອຍ ມີກິດໜ້ອຍ ລ້ຽງງ່າຍ ສັນໂດດໃນບໍຣິຂານແຫ່ງຊີວິດ
໒. ເປັນຜູ້ມີອາຫານໜ້ອຍ ໝັ່ນປະກອບຄວາມບໍ່ເຫັນແກ່ປາກແກ່ທ້ອງ
໓. ເປັນຜູ້ມີການຫຼັບໜ້ອຍ ໝັ່ນປະກອບຄວາມພຽນເຄື່ອງຕື່ນຢູ່

໔. ເປັນຜູ້ໄດ້ກະຖາເປັນເຄື່ອງຂັດເກົາຢ່າງຍິ່ງ ເປັນສັບປາຍະແຫ່ງຄວາມເປັນໄປຂອງຈິດ ຄື ອັບປິດສະກະຖາ ສັນຕຸດຖີກະຖາ ປະວິເວກະຖາ ອະສັງສັກຄະກະຖາ ວິຣິຍາຣຳພະກະຖາ ສີລະກະຖາ ສະມາທິກະຖາ ປັນຍາກະຖາ ວິມຸດຕິກະຖາ ວິມຸດຕິ-ຍານທັດສະນະກະຖາ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ບໍ່ລຳບາກ

໕. ພິຈາລະນາຈິດຕາມທີ່ລຸດພົ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຈະເລີນອານາປານະສະຕິກຳມັດຖານຢູ່ ບໍ່ດົນປານໃດ ຍ່ອມບັນລຸອະກຸບປະທຳ

**ກະຖາສູດທີ ໗ ຈົບ**

## ໘. ອາຣັນຍະກະສູດ
## ວ່າດ້ວຍພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ

[໙໘] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເຮັດອານາປານະສະຕິກຳມັດຖານໃຫ້ຫຼາຍຢູ່ ບໍ່ດົນປານໃດ ຍ່ອມບັນລຸອະກຸບປະທຳ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີທຸຣະໜອຍ ມີກິດໜ້ອຍ ລ້ຽງງ່າຍ ສັນໂດດໃນບໍຣິຂານແຫ່ງຊີວິດ

໒. ເປັນຜູ້ມີອາຫານໜ້ອຍ ໝັ່ນປະກອບຄວາມບໍ່ເຫັນແກ່ປາກແກ່ທ້ອງ

໓. ເປັນຜູ້ມີການຫຼັບໜ້ອຍ ໝັ່ນປະກອບຄວາມພຽນເຄື່ອງຕື່ນຢູ່

໔. ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຢູ່ໃນເສນາສະນະອັນງຽບສະຫງັດ

໕. ພິຈາລະນາຈິດຕາມທີ່ລຸດພົ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໕ ປະການນີ້ແລ ເຮັດອານາປານະສະຕິ-ກຳມັດຖານໃຫ້ຫຼາຍຢູ່ ບໍ່ດົນປານໃດ ຍ່ອມບັນລຸອະກຸບປະທຳ

**ອາຣັນຍະກະສູດທີ ໘ ຈົບ**

## ໙. ສີຫະສູດ
## ວ່າດ້ວຍພະຍາຣາດຊະສີ

[໙໙] ພິກຂຸທັງຫຼາຍ ໃນເວລາຄ່ຳ ພະຍາຣາດຊະສີອອກຈາກບ່ອນອາໄສແລ້ວບິດກາຍ

ເຫຼືອດຕາເບິ່ງຮອບ ໆ ທັງ ໔ ທິດ ບັນລືສີຫະນາດ ໓ ຄັ້ງ ແລ້ວກໍໜີໄປຫາກິນ ພະຍາຣາດຊະສີນັ້ນ ຖ້າແມ່ນຈະຈັບຊ້າງ ກໍຈັບໄດ້ແມ່ນຍໍາ ບໍ່ພາດ ແມ່ນຈະຈັບຄວາຍ ກໍຈັບໄດ້ແມ່ນຍໍາບໍ່ພາດ ແມ່ນຈະຈັບງົວ ກໍຈັບໄດ້ແມ່ນຍໍາບໍ່ພາດ ແມ່ນຈະຈັບເສືອເຫຼືອງ ກໍຈັບໄດ້ແມ່ນຍໍາບໍ່ພາດ ແມ່ນຈະຈັບພວກສັດນ້ອຍໆ ໂດຍທີ່ສຸດແມ່ນກະຕ່າຍແລະແມວ ກໍຈັບໄດ້ ແມ່ນຍໍາ ບໍ່ພາດຢ່າງແນ່ນອນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພະຍາຣາດຊະສີນັ້ນຄິດວ່າ "ປ່ອງທາງຫາກິນຂອງເຮົາຢ່າເສຍໄປ

ພິກຂຸທັງຫຼາຍ ຄໍາວ່າ ສີຫະ ນີ້ເປັນຊື່ຂອງຕະຖາຄົດອະຣະຫັນຕະສໍາມາສໍາພຸດທະເຈົ້າ ອາການທີ່ຕະຖາຄົດສະແດງທໍາແກ່ບໍລິສັດ ເປັນສີຫະນາດ[๑]ຂອງຕະຖາຄົດແທ້ ຄື ຕະຖາຄົດ

໑. ແມ່ນຈະສະແດງທໍາແກ່ພິກຂຸທັງຫຼາຍ ກໍສະແດງໂດຍເຄົາລົບ[໒] ບໍ່ສະແດງໂດຍບໍ່ເຄົາລົບ
໒. ແມ່ນຈະສະແດງທໍາແກ່ພິກຂຸນີທັງຫຼາຍ ກໍສະແດງໂດຍເຄົາລົບ ບໍ່ສະແດງໂດຍບໍ່ເຄົາລົບ
໓. ແມ່ນຈະສະແດງທໍາແກ່ອຸປາສົກທັງຫຼາຍ ກໍສະແດງໂດຍເຄົາລົບ ບໍ່ສະແດງໂດຍບໍ່ເຄົາລົບ
໔. ແມ່ນຈະສະແດງທໍາແກ່ອຸປາສິກາທັງຫຼາຍ ກໍສະແດງໂດຍເຄົາລົບ ບໍ່ສະແດງໂດຍບໍ່ເຄົາລົບ
໕. ແມ່ນຈະສະແດງທໍາແກ່ປຸຖຸຊົນທັງຫຼາຍ ກໍສະແດງໂດຍເຄົາລົບ ບໍ່ສະແດງໂດຍບໍ່ເຄົາລົບ ໂດຍທີ່ສຸດແມ່ນຈະສະແດງແກ່ຄົນຂໍທານແລະພານນົກ[໓] ກໍສະແດງໂດຍເຄົາລົບ ບໍ່ສະແດງໂດຍບໍ່ເຄົາລົບ

ຂໍ້ນັ້ນ ຍ້ອນເຫດໃດ
ພິກຂຸທັງຫຼາຍ ຍ້ອນຕະຖາຄົດເປັນຜູ້ໜັກໃນທໍາ ເຄົາລົບທໍາ

**ສີຫະສູດທີ ๙ ຈົບ**

# ໑໐. ກະກຸທະເຖຣະສູດ

## ວ່າດ້ວຍກະກຸທະເທບພະບຸດກັບພຣະມະຫາໂມກຄັນລານະ

[໑໐໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໂຄສິຕາຣາມ ເຂດນະຄອນໂກສໍາພີ ສະໄໝນັ້ນແລ ບຸດເຈົ້າໂກລິຍະນາມວ່າກະກຸທະເປັນອຸປັດຖາກຂອງທ່ານພຣະມະຫາໂມກຄັນລານະ ສິ້ນ

ຊີບໄດ້ບໍ່ດົນ ເຂົ້າເຖິງຊັ້ນກາຍມະໂນໄມ°ຊັ້ນໃດຊັ້ນໜຶ່ງ ເປັນຜູ້ໄດ້ອັດຕະພາບໃຫຍ່ຄືຄາມເຂດໃນແຄວ້ນມະຄົດສອງສາມບ້ານ ຍ້ອນການໄດ້ອັດຕະພາບນັ້ນ ເຂົາຈຶ່ງບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດໃຫ້ຜູ້ອື່ນເດືອດຮ້ອນ

ຄັ້ງນັ້ນ ກະກຸທະເທບພະບຸດໄດ້ເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ໄຫວ້ແລ້ວ ຢືນຢູ່ບ່ອນທີ່ສົມຄວນ ແລ້ວ ໄດ້ກ່າວແນວນີ້ວ່າ ຂ້າແດ່ທ່ານຜູ້ຈະເລີນ ພຣະເທວະທັດ ເກີດຄວາມປາຖະໜາແນວນີ້ວ່າ "ເຮົາຈັກປົກຄອງພິກຂຸສົງ ແລະພຣະເທວະທັດໄດ້ເສື່ອມຈາກລິດນັ້ນພ້ອມກັບຈິດຕຸປະບາດ ກະກຸທະເທບພະບຸດເມື່ອກ່າວດັ່ງນີ້ແລ້ວ ໄດ້ໄຫວ້ທ່ານພຣະມະຫາໂມກຄັນລານະກະທຳປະທັກຂິນແລ້ວຫາຍໄປ ໃນບ່ອນນັ້ນ ນັ້ນເອງ

ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ບຸດຂອງເຈົ້າໂກລິຍະນາມວ່າກະກຸທະເປັນອຸປັດຖາກຂອງຂ້າພຣະອົງ ສິ້ນຊີບໄດ້ບໍ່ດົນ ເຂົ້າເຖິງຊັ້ນກາຍມະໂນໄມຊັ້ນໃດຊັ້ນໜຶ່ງ ເປັນຜູ້ໄດ້ອັດຕະພາບໃຫຍ່ຄືຄາມເຂດໃນແຄວ້ນມະຄົດສອງສາມບ້ານ ຍ້ອນການໄດ້ອັດຕະພາບນັ້ນ ເຂົາຈຶ່ງບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດໃຫ້ຜູ້ອື່ນເດືອດຮ້ອນ ຕໍ່ມາກະກຸທະເທບພະບຸດໄດ້ເຂົ້າໄປ ຫາຂ້າພຣະອົງຮອດບ່ອນຢູ່ ໄຫວ້ແລ້ວ ຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບຂ້າພຣະອົງ ດັ່ງນີ້ວ່າ "ຂ້າແດ່ ທ່ານຜູ້ຈະເລີນ ພຣະເທວະທັດເກີດຄວາມປາຖະໜາແນວນີ້ວ່າ ເຮົາຈັກປົກຄອງພິກຂຸສົງ ແລະພຣະເທວະທັດໄດ້ເສື່ອມຈາກລິດນັ້ນພ້ອມກັບຈິດຕຸປະບາດ ກະກຸທະເທບພະບຸດເມື່ອກ່າວດັ່ງນີ້ແລ້ວໄດ້ໄຫວ້ຂ້າພຣະອົງກະທຳປະທັກຂິນແລ້ວຫາຍໄປ ໃນບ່ອນນັ້ນ ໆ ເອງ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໂມກຄັນລານະ ທ່ານກຳນົດຮູ້ກະກຸທະເພບບຸດດ້ວຍໃຈດີແລ້ວບໍວ່າ "ກະກຸທະເທບພະບຸດກ່າວສິ່ງໜຶ່ງສິ່ງໃດ ສິ່ງນັ້ນທັງໝົດຍ່ອມເປັນແນວນັ້ນຢ່າງແນ່ນອນ ບໍ່ເປັນແນວອື່ນ

ທ່ານພຣະມະຫາໂມກຄັນລານະຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງກຳນົດຮູ້ກະກຸທະເທບພະບຸດດ້ວຍໃຈດີແລ້ວວ່າ "ກະກຸທະເທບພະບຸດກ່າວສິ່ງໜຶ່ງສິ່ງໃດ ສິ່ງນັ້ນທັງໝົດຍ່ອມເປັນແນວນັ້ນ ຢ່າງແນ່ນອນ ບໍ່ເປັນແນວອື່ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ໂມກຄັນລານະ ທ່ານຈົ່ງຮັກສາວາຈານັ້ນ ໂມກຄັນລານະທ່ານຈົ່ງຮັກສາວາຈານັ້ນ ບັດນີ້ ໂມຄະບຸຣຸດ°ນັ້ນຈັກເຮັດຕົນໃຫ້ຜາກົດດ້ວຍຕົນເອງ ໂມກຄັນລານະ ສາດສະດາ ໕ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ສາດສະດາ ໕ ຈຳພວກໃດແດ່ ຄື

໑. ສາດສະດາບາງທ່ານໃນໂລກນີ້ເປັນຜູ້ມີສີນບໍ່ບໍລິສຸດແຕ່ປະຕິຍານວ່າ "ເຮົາເປັນຜູ້ມີສີນບໍລິສຸດ ສີນຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ພວກສາວົກຮູ້ຈັກເຂົາແບບນີ້ວ່າ "ສາດສະດາທ່ານນີ້ເປັນຜູ້ມີສີນບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີສີນບໍລິສຸດ ສີນຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາຈັກບອກແກ່ພວກຄະລືຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດແນວໜຶ່ງ ມະຫາຊົນກໍຍ້ອງຍໍທ່ານດ້ວຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດຊະບໍຣິຂານດ້ວຍຄິດວ່າ "ສາດສະດາທ່ານນີ້ຈັກທົນ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດ ແນວໜຶ່ງ ມະຫາຊົນກໍຍ້ອງຍໍທ່ານດ້ວຍຈີວອນ ບິນທະບາດເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານດ້ວຍຄິດວ່າ "ສາດສະດາທ່ານນີ້ຈັກເຮັດກຳໃດ ເຂົາເອງກໍຈັກຜາກົດດ້ວຍກຳນັ້ນ ພວກສາວົກຮັກສາສາດສະດາແນວນີ້ໂດຍອາຊີບ ແລະສາດສະດາແນວນີ້ກໍຫວັງການຮັກສາຈາກພວກສາວົກໂດຍອາຊີບ (໔ ຫາຍ)

໓. ສາດສະດາບາງທ່ານໃນໂລກນີ້ເປັນຜູ້ມີທຳມະເທດສະໜາບໍ່ບໍລິສຸດ ແຕ່ປະຕິຍານວ່າ "ເຮົາເປັນຜູ້ມີທຳມະເທດສະໜາບໍລິສຸດ ທຳມະເທດສະໜາຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ພວກສາວົກຮູ້ຈັກເຂົາແບບນີ້ວ່າ "ສາດສະດາ ທ່ານນີ້ເປັນຜູ້ມີທຳມະເທດສະໜາບໍ່ບໍລິສຸດແຕ່ປະຕິຍານວ່າ "ເຮົາເປັນຜູ້ມີທຳມະເທດສະໜາບໍລິສຸດ ທຳມະເທດສະໜາຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລືຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດແນວໜຶ່ງ ມະຫາຊົນກໍຍ້ອງຍໍທ່ານດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານດ້ວຍຄິດວ່າ "ສາດສະດາທ່ານນີ້ຈັກເຮັດກຳໃດ ເຂົາເອງກໍຈັກຜາກົດດ້ວຍກຳນັ້ນ ພວກສາວົກຮັກສາສາດສະດາແນວນີ້ໂດຍທຳມະເທດສະໜາ ແລະສາດສະດາແນວນີ້ ກໍຫວັງການຮັກສາຈາກພວກສາວົກໂດຍທຳມະເທດສະໜາ

໔. ສາດສະດາບາງທ່ານໃນໂລກນີ້ເປັນຜູ້ມີເວີຍຍາກະຣະນະບໍ່ບໍລິສຸດແຕ່ປະຕິຍານວ່າ "ເຮົາເປັນຜູ້ມີເວີຍຍາກະຣະນະບໍລິສຸດ ເວີຍຍາກະຣະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ພວກສາວົກຮູ້ຈັກເຂົາແບບນີ້ວ່າ "ສາດສະດາ ທ່ານນີ້ເປັນຜູ້ມີເວີຍຍາກະຣະນະບໍ່ບໍລິສຸດແຕ່ປະຕິຍານວ່າ "ເຮົາເປັນຜູ້ມີ ເວີຍຍາກະຣະນະບໍລິສຸດ ເວີຍຍາກະຣະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລືຫັດ ກໍຈະບໍ່ເປັນທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດແນວໜຶ່ງ ມະຫາຊົນກໍຍ້ອງຍໍທ່ານດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດຊະບໍຣິຂານດ້ວຍຄິດວ່າ "ສາດສະດາທ່ານນີ້

ຈັກເຮັດກຳໃດ ເຂົາເອງກໍຈັກຜາກົດດ້ວຍກຳນັ້ນ ພວກສາວົກຮັກສາສາດສະດາແນວນີ້ໂດຍເວີຍຍາກະຣະນະ ແລະສາດສະດາແນວນີ້ ກໍຫວັງການຮັກສາຈາກພວກສາວົກໂດຍເວີຍຍາກະຣະນະ

໕. ສາດສະດາບາງທ່ານໃນໂລກນີ້ເປັນຜູ້ມີຍານທັດສະນະບໍ່ບໍລິສຸດແຕ່ປະຕິຍານ ວ່າ "ເຮົາເປັນຜູ້ມີຍານທັດສະນະບໍລິສຸດ ຍານທັດສະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ພວກສາວົກຍ່ອມຮູ້ຈັກເຂົາແນວນີ້ວ່າ "ສາດສະດາທ່ານນີ້ເປັນຜູ້ມີຍານທັດສະນະບໍ່ບໍລິສຸດແຕ່ປະຕິຍານວ່າ "ເຮົາເປັນຜູ້ ມີຍານທັດສະນະບໍລິສຸດ ຍານທັດສະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ແຕ່ຖ້າພວກເຮົາເພິ່ງບອກແກ່ພວກຄະລືຫັດ ກໍຈະບໍ່ເປັນ ທີ່ພໍໃຈຂອງທ່ານ ພວກເຮົາຈະກ່າວຄຳເວົ້າທີ່ທ່ານບໍ່ພໍໃຈໄດ້ແນວໃດແນວໜຶ່ງ ມະຫາຊົນກໍຍ້ອງຍໍທ່ານດ້ວຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານດ້ວຍຄິດວ່າ "ສາດສະດາທ່ານນີ້ຈັກເຮັດກຳໃດ ເຂົາເອງກໍຈັກຜາກົດດ້ວຍກຳນັ້ນ ພວກສາວົກຮັກສາສາດສະດາແນວນີ້ໂດຍຍານທັດສະນະ ແລະສາດສະດາແນວນີ້ ກໍຫວັງການຮັກສາຈາກພວກສາວົກໂດຍຍານທັດສະນະ

ໂມກຄັນລານະ ສາດສະດາ ໕ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

ໂມກຄັນລານະ ເຮົາມີສິນບໍລິສຸດຈຶ່ງປະຕິຍານວ່າ"ເຮົາເປັນຜູ້ມີສິນບໍລິສຸດ ສິນຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ພວກສາວົກບໍ່ຮັກສາເຮົາໂດຍສິນ ແລະເຮົາກໍບໍ່ຫວັງການຮັກສາຈາກພວກສາວົກໂດຍສິນ ເຮົາມີອາຊີບບໍລິສຸດຈຶ່ງປະຕິຍານວ່າ "ເຮົາເປັນຜູ້ມີອາຊີບ ບໍລິສຸດ ອາຊີບຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ພວກສາວົກບໍ່ຮັກສາເຮົາໂດຍອາຊີບ ແລະເຮົາກໍບໍ່ຫວັງການຮັກສາຈາກພວກສາວົກໂດຍອາຊີບ ເຮົາມີທຳມະເທດສະໜາບໍລິສຸດ ຈຶ່ງປະຕິຍານວ່າ "ເຮົາເປັນຜູ້ມີທຳມະເທດສະໜາບໍລິສຸດ ທຳມະເທດສະໜາຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ພວກສາວົກບໍ່ຮັກສາເຮົາໂດຍທຳມະເທດສະໜາ ແລະເຮົາກໍບໍ່ຫວັງການຮັກສາຈາກພວກສາວົກໂດຍທຳມະເທດສະໜາ ເຮົາມີເວີຍຍາກະຣະນະບໍລິສຸດຈຶ່ງປະຕິຍານວ່າ "ເຮົາເປັນຜູ້ມີເວີຍຍາກະຣະນະບໍລິສຸດ ເວີຍຍາກະຣະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ພວກສາວົກບໍ່ຮັກສາເຮົາໂດຍເວີຍຍາກະຣະນະ ແລະເຮົາກໍບໍ່ຫວັງການຮັກສາຈາກພວກສາວົກໂດຍເວີຍຍາກະຣະນະ ເຮົາມີຍານທັດສະນະບໍລິສຸດຈຶ່ງປະຕິຍານວ່າ "ເຮົາເປັນຜູ້ມີຍານທັດສະນະບໍລິສຸດ ຍານທັດສະນະຂອງເຮົາບໍລິສຸດ ຜ່ອງແຜ້ວ ບໍ່ເສົ້າໝອງ ພວກສາວົກບໍ່ຮັກສາເຮົາໂດຍຍານທັດສະນະ ແລະເຮົາກໍບໍ່ຫວັງການຮັກສາຈາກພວກສາວົກໂດຍຍານທັດສະນະ

**ກະກຸທະເຖຣະສູດທີ ໑໐ ຈົບ**

**ກະກຸທະວັກທີ ໕ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື



**ທຸຕິຍະປັນນາດ ຈົບ**

# ໕. ຕະຕິຍະປັນນາດ

## ໑. ຜາສຸວິຫາຣະວັກ

### ໝວດວ່າດ້ວຍຜາສຸວິຫາຣະທຳ

## ໑. ສາຣັດຊະສູດ

### ວ່າດ້ວຍຄວາມແກ່ກ້າແລະຄວາມເກງກົວ[1]

[໑໐໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳເຄື່ອງທຳຄວາມແກ່ກ້າ ສຳລັບພິກຂຸຜູ້ເປັນເສຂະ ໕ ປະການນີ້ ທຳເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ ໕ ປະການອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີສີນ
໓. ເປັນພະຫູສູດ
໔. ເປັນຜູ້ຜາຣົບຄວາມພຽນ
໕. ເປັນຜູ້ມີປັນຍາ

ຜູ້ບໍ່ມີສັດທາມີຄວາມເກງກົວໃດ ແຕ່ຜູ້ມີສັດທາຫາມີຄວາມເກງກົວນັ້ນບໍ່ ສັນນັ້ນ ທຳນີ້ຈຶ່ງຊື່ວ່າເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ

ຜູ້ທຸສີນມີຄວາມເກງກົວໃດ ແຕ່ຜູ້ມີສີນຫາມີຄວາມເກງກົວນັ້ນບໍ່ ສັນນັ້ນ ທຳນີ້ຈຶ່ງຊື່ວ່າເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ

ຜູ້ມີສຸຕະໜ້ອຍມີຄວາມເກງກົວໃດ ແຕ່ຜູ້ເປັນພະຫູສູດຫາມີຄວາມເກງກົວນັ້ນບໍ່ ສັນນັ້ນ ທຳນີ້ຈຶ່ງຊື່ວ່າເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ

ຜູ້ຂີ້ຄ້ານມີຄວາມເກງກົວໃດ ແຕ່ຜູ້ຜາຣົບຄວາມພຽນຫາມີຄວາມເກງກົວ ນັ້ນບໍ່ ສັນນັ້ນ ທຳນີ້ຈຶ່ງຊື່ວ່າເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ

ຜູ້ມີປັນຍາຊາມມີຄວາມເກງກົວໃດ ແຕ່ຜູ້ມີປັນຍາຫາມີຄວາມເກງກົວນັ້ນບໍ່ ສັນນັ້ນ ທຳນີ້ຈຶ່ງຊື່ວ່າເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ

ພິກຂຸທັງຫຼາຍ ທຳເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ ໕ ປະການ ນີ້ແລ

**ສາຣັຊຊະສູດທີ ໑ ຈົບ**

## ໒. ອຸດສັງກິຕະສູດ

## ວ່າດ້ວຍທຳທີ່ເຮັດໃຫ້ໜ້າລັງກຽດ

[໑໐໒] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມເປັນທີ່ລັງກຽດສົງໄສວ່າ "ເປັນພິກຂຸຊົ່ວ ແມ່ນຈະເປັນຜູ້ມີອະກຸບປະທຳໆກໍຕາມ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີຍິງແພດສະຍາ ເປັນໂຄຈອນ
໒. ເປັນຜູ້ມີແມ່ໝ້າຍ ເປັນໂຄຈອນ
໓. ເປັນຜູ້ມີສາວເທື້ອ ເປັນໂຄຈອນ
໔. ເປັນຜູ້ມີບັນເດາະ ເປັນໂຄຈອນ
໕. ເປັນຜູ້ມີພິກຂຸນີ ເປັນໂຄຈອນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ລັງກຽດ ສົງໄສວ່າ "ເປັນພິກຂຸຊົ່ວ ແມ່ນຈະເປັນຜູ້ມີອະກຸບປະທຳກໍຕາມ

**ອຸດສັງກິຕະສູດທີ ໒ ຈົບ**

## ໓. ມະຫາໂຈຣະສູດ

### ວ່າດ້ວຍອົງປະກອບຂອງມະຫາໂຈນ໓

[໑໐໓] ພິກຂຸທັງຫຼາຍ ມະຫາໂຈນປະກອບດ້ວຍອົງ ໕ ປະການ ຍ່ອມງັດແງະແດ່ ທຳການປຸ້ນແດ່ ລ້ອມປຸ້ນເຮືອນຫຼັງດຽວແດ່ ດັກປຸ້ນໃນທາງປ່ຽວແດ່ ອົງ ໕ ປະການ ອັນໃດແດ່ ຄື

ມະຫາໂຈນໃນໂລກນີ້

໑. ອາໄສບ່ອນຂຸຂະ
໒. ອາໄສປ່າຣົກ
໓. ອາໄສຜູ້ມີອິດທິພົນ
໔. ແຈກຈ່າຍໂພຄະຊັບ
໕. ທ່ຽວໄປຄົນດຽວ

ມະຫາໂຈນອາໄສບ່ອນຂຸຂະ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ອາໄສເກາະແກ່ງແຫ່ງແມ່ນ້ຳ ຫຼືບ່ອນຂຸຂະແຫ່ງພູ ມະຫາໂຈນອາໄສບ່ອນຂຸຂະເປັນແນວນີ້ແລ

ມະຫາໂຈນອາໄສປ່າຣົກ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ອາໄສປ່າຣົກດ້ວຍຫຍ້າແດ່ ປ່າຣົກດ້ວຍຕົ້ນໄມ້ແດ່ ປ່າທີ່ມີແນວປ້ອງກັນແດ່ ແນວປ່າໃຫຍ່ແດ່ ມະຫາໂຈນອາໄສປ່າຣົກ ເປັນແນວນີ້ແລ

ມະຫາໂຈນອາໄສຜູ້ມີອິດທິພົນ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ອາໄສພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາ ເຂົາຄິດແນວນີ້ວ່າ "ຖ້າໃຜຈັກກ່າວຫາອັນໃດເຮົາ ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາ ເຫຼົ່ານີ້ ກໍຈັກວ່າຄະດີຄວາມຊ່ອຍປົກປ້ອງເຮົາ ຖ້າໃຜກ່າວຫາອັນໃດມະຫາໂຈນນັ້ນ ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊານັ້ນ ຕ່າງກໍວ່າຄະດີຄວາມຊ່ອຍປົກປ້ອງເຂົາ ມະຫາໂຈນອາໄສ ຜູ້ມີອິດທິພົນ ເປັນແນວນີ້ແລ

ມະຫາໂຈນແຈກຈ່າຍໂພຄະຊັບ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ເປັນຜູ້ຮັ່ງມີ ມີຊັບຫຼາຍ ມີສົມບັດຫຼາຍ ເຂົາຄິດແນວນີ້ວ່າ "ຖ້າໃຜຈັກກ່າວຫາອັນໃດເຮົາ ເຮົາກໍຈັກຈ່າຍໂພຄະຊັບປົກປິດເລື້ອງນັ້ນ ຖ້າໃຜກ່າວຫາອັນໃດມະຫາໂຈນນັ້ນ ເຂົາກໍຈ່າຍໂພຄະຊັບປົກປິດເລື້ອງນັ້ນ ມະຫາໂຈນແຈກຈ່າຍໂພຄະຊັບ ເປັນແນວນີ້ແລ

ມະຫາໂຈນທ່ຽວໄປຄົນດຽວ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ເປັນຜູ້ທຳໂຈຣະກຳຄົນດຽວ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຂົາຍ່ອມປາຖະໜາວ່າ "ເລື້ອງລັບຂອງເຮົາຢ່າໄດ້ກະຈາຍໄປອອກໄປພາຍນອກ ມະຫາໂຈນທ່ຽວໄປຄົນດຽວ ເປັນແນວນີ້ແລ

ມະຫາໂຈນປະກອບດ້ວຍອົງ ໕ ປະການນີ້ແລ ຍ່ອມງັດແງະແດ່ ທຳການປຸ້ນແດ່ ລ້ອມປຸ້ນເຮືອນຫຼັງດຽວແດ່ ດັກປຸ້ນໃນທາງປ່ຽວແດ່ ສັນໃດ

ພິກຂຸທັງຫຼາຍ ພິກຂຸຊົ່ວປະກອບດ້ວຍທຳ ໕ ປະການ ກໍຄືກັບສັນນັ້ນ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບ໑ ສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸຊົ່ວໃນທຳວິໄນນີ້

໑. ອາໄສກຳທີ່ບໍ່ກົງໄປກົງມາ
໒. ອາໄສບ່ອນລີ້ລັບ
໓. ອາໄສຜູ້ມີອິດທິພົນ
໔. ແຈກຈ່າຍໂພຄະຊັບ
໕. ທ່ຽວໄປອົງດຽວ

ພິກຂຸຊົ່ວອາໄສກຳທີ່ບໍ່ກົງໄປກົງມາ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ປະກອບກາຍຍະກຳ ວະຈີກຳ ມະໂນກຳ ທີ່ບໍ່ກົງໄປກົງມາ ພິກຂຸຊົ່ວອາໄສກຳທີ່ບໍ່ກົງໄປກົງມາ ເປັນແນວນີ້ແລ

ພິກຂຸຊົ່ວອາໄສກຳບ່ອນລີ້ລັບ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ເປັນມິດສາທິດຖິ ປະກອບດ້ວຍອັນຕະຄາຫິກະທິດຖິ໑ ພິກຂຸຊົ່ວອາໄສກຳບ່ອນລີ້ລັບ ເປັນແນວນີ້ແລ

ພິກຂຸຊົ່ວອາໄສຜູ້ມີອິດທິພົນ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ອາໄສພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາ ພິກຂຸນັ້ນຄິດແນວນີ້ວ່າ "ຖ້າໃຜຈັກກ່າວຫາອັນໃດເຮົາ ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາເຫຼົ່ານີ້ກໍຈັກວ່າຄະດີຄວາມຊ່ອຍປົກປ້ອງເຮົາ ຖ້າໃຜວ່າກ່າວອັນໃດພິກຂຸນັ້ນ ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊານັ້ນ ຕ່າງກໍວ່າຄະດີຄວາມຊ່ອຍປົກປ້ອງທ່ານ ພິກຂຸ ຊົ່ວອາໄສຜູ້ມີອິດທິພົນ ເປັນແນວນີ້ແລ

ພິກຂຸຊົ່ວແຈກຈ່າຍໂພຄະຊັບ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈ-ເພສັດຊະບໍຣິຂານ ທ່ານຄິດແນວນີ້ວ່າ "ຖ້າໃຜຈັກກ່າວຫາອັນໃດເຮົາ ເຮົາຈັກແຈກຈ່າຍລາບປົກປິດເລື້ອງນັ້ນ ຖ້າໃຜກ່າວຫາອັນໃດທ່ານ ທ່ານກໍແຈກຈ່າຍລາບປົກປິດເລື້ອງນັ້ນ ພິກຂຸຊົ່ວແຈກຈ່າຍໂພຄະຊັບ ເປັນແນວນີ້ແລ

ພິກຂຸຊົ່ວທ່ຽວໄປອົງດຽວ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ຢູ່ທີ່ຊົນນະບົດຊາຍແດນຮູບດຽວ ທ່ານເຂົ້າໄປສູ່ຕະກູນໃນຊົນນະບົດນັ້ນຍ່ອມໄດ້ລາບ ພິກຂຸຊົ່ວທ່ຽວໄປອີງດຽວເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸຊົ່ວປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນ ຫຼວງຫຼາຍ

**ມະຫາໂຈຣະສູດທີ ໑ ຈົບ**

## ໔. ສະມະນະສຸຂຸມາລະສູດ

## ວ່າດ້ວຍທຳຂອງສະມະນະຜູ້ລະອຽດອ່ອນ

[໑໐໔] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຊື່ວ່າເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ

ທຳ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍຈີວອນຫຼາຍ ເມື່ອເຂົາບໍ່ ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງສັນບິນທະບາດຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງສັນໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍເສນາສະນະຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍຄິລານະປັດໄຈເພສັດຊະບໍຣິຂານຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ

໒. ທ່ານຢູ່ຮ່ວມກັບເພື່ອນພົມມະຈາຣີເຫຼົ່າໃດ ເພື່ອນພົມມະຈາຣີເຫຼົ່ານັ້ນ ກໍປະພຶດຕໍ່ທ່ານດ້ວຍກາຍຍະກຳເປັນທີ່ພໍໃຈເປັນສ່ວນຫຼາຍ ທີ່ບໍ່ພໍໃຈ ເປັນສ່ວນໜ້ອຍ ປະພຶດຕໍ່ທ່ານດ້ວຍວະຈີກຳເປັນທີ່ພໍໃຈເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ ປະພຶດຕໍ່ທ່ານດ້ວຍມະໂນກຳເປັນທີ່ພໍໃຈ ເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ ນຳສິ່ງເປັນທີ່ພໍໃຈມາເປັນ ສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ

໓. ເວທະນາທີ່ເກີດຈາກດີ ເວທະນາທີ່ເກີດຈາກເສມຫະ ເວທະນາທີ່ເກີດຈາກລົມ ເວທະນາທີ່ເກີດຈາກໄຂ້ສັນນິບາດ ເວທະນາທີ່ເກີດຈາກການປ່ຽນລະດູ ເວທະນາທີ່ເກີດຈາກການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນ ເວທະນາທີ່ເກີດຈາກການພາກພຽນເກີນກຳລັງ ເວທະນາທີ່ເກີດຈາກຜົນກຳ ສ່ວນຫຼາຍບໍ່ເກີດແກ່ທ່ານ ທ່ານຈຶ່ງມີຄວາມເຈັບໄຂ້ໜ້ອຍ

໔. ທ່ານເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ໑ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໕. ທ່ານເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະ ສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຊື່ວ່າເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ

ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງຜູ້ໃດວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ບຸກຄົນນັ້ນຄືເຮົານັ້ນເອງ ທີ່ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ຍ້ອນເຮົາເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍຈີວອນຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງສັນບິນທະບາດຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງສັນໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍເສນາສະນະຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍຄິລານະປັດໄຈເພສັດຊະບໍຣິຂານຫຼາຍ ເມື່ອເຂົາບໍ່ຂອງຮ້ອງຈຶ່ງໃຊ້ສອຍໜ້ອຍ

ແລະເຮົາຢູ່ຮ່ວມກັບພິກຂຸເຫຼົ່າໃດ ພິກຂຸເຫຼົ່ານັ້ນປະພຶດຕໍ່ເຮົາດ້ວຍກາຍຍະກຳ ເປັນທີ່ພໍໃຈເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ ປະພຶດຕໍ່ເຮົາດ້ວຍວະຈີກຳ ເປັນ ທີ່ພໍໃຈເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ ປະພຶດຕໍ່ເຮົາດ້ວຍມະໂນກຳເປັນທີ່ພໍໃຈ ເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ ນຳສິ່ງເປັນທີ່ພໍໃຈມາເປັນສ່ວນຫຼາຍ ທີ່ບໍ່ພໍໃຈ ເປັນສ່ວນໜ້ອຍ ແລະເວທະນາທີ່ເກີດຈາກດີ ເວທະນາທີ່ເກີດຈາກເສມຫະ ເວທະນາທີ່ເກີດຈາກລົມ ເວທະນາທີ່ເກີດຈາກໄຂ້ສັນນິບາດ ເວທະນາທີ່ເກີດຈາກການປ່ຽນລະດູ ເວທະນາທີ່ເກີດຈາກ ການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນ ເວທະນາທີ່ເກີດຈາກການພາກພຽນເກີນກຳລັງ ແລະ ເວທະນາທີ່ເກີດຈາກຜົນກຳສ່ວນຫຼາຍບໍ່ເກີດແກ່ເຮົາ ເຮົາຈຶ່ງມີຄວາມເຈັບໄຂ້ໜ້ອຍ ເຮົາເປັນ ຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງຜູ້ໃດວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ບຸກຄົນນັ້ນຄືເຮົານັ້ນເອງ ທີ່ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ

**ສະມະນະສຸຂຸມານສູດທີ ໔ ຈົບ**

# ໕. ຜາສຸວິຫາຣະສູດ

## ວ່າດ້ວຍຜາສຸວິຫາຣະທໍາ

[໑໐໕] ພິກຂຸທັງຫຼາຍ ຜາສຸວິຫາຣະທໍາ ໕ ປະການນີ້ ຜາສຸວິຫາຣະທໍາ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທໍາວິໄນນີ້

໑. ຕັ້ງໝັ້ນກາຍຍະກໍາປະກອບດ້ວຍເມດຕາໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ
໒. ຕັ້ງໝັ້ນວະຈີກໍາປະກອບດ້ວຍເມດຕາໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ
໓. ຕັ້ງໝັ້ນມະໂນກໍາປະກອບດ້ວຍເມດຕາໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ
໔. ມີສີນທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງໍາ ເປັນໄປເພື່ອສະມາທິ ສະເໝີກັນກັບເພື່ອນ ພົມມະຈາຣີທັງຫຼາຍທັງຕໍ່ໜ້າແລະລັບຫຼັງ
໕. ມີອະຣິຍະທິດຖິ໒ ອັນເປັນທໍາເຄື່ອງນໍາອອກເພື່ອຄວາມສິ້ນທຸກໂດຍຖືກຕ້ອງແກ່ຜູ້ເຮັດຕາມສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍທັງຕໍ່ໜ້າແລະ ລັບຫຼັງ

ພິກຂຸທັງຫຼາຍ ຜາສຸວິຫາຣະທໍາ ໕ ປະການນີ້ແລ

**ຜາສຸວິຫາຣະສູດທີ ໕ ຈົບ**

# ໖. ອານັນທະສູດ

## ວ່າດ້ວຍພຣະອານົນ

[໑໐໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໂຄສິຕາຣາມ ເຂດນະຄອນ ໂກສໍາພີ ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

໑. "ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຜູ້ຢູ່ໃນສົງເພິ່ງຢູ່ຜາສຸກດ້ວຍເຫດທໍ່ໃດນໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ພິກຂຸ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ແລະບໍ່ຕິຽນຜູ້ອື່ນຍ້ອນອະທິສີນ ແມ່ນດ້ວຍເຫດທໍ່ນີ້ ພິກຂຸຜູ້ຢູ່ໃນສົງກໍເພິ່ງຢູ່ຜາສຸກໄດ້

໔. "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນເຫດອື່ນທີ່ພິກຂຸຜູ້ຢູ່ໃນສົງເພິ່ງຢູ່ຜາສຸກກໍມີ ຢູ່ບໍ?

"ມີ ອານົນ ພິກຂຸ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ບໍ່ຕິຽນຜູ້ອື່ນຍ້ອນອະທິສີນ ແລະ ເປັນຜູ້ໃສ່ໃຈຕົນເອງ ບໍ່ໃສ່ໃຈຜູ້ອື່ນ ແມ່ນດ້ວຍເຫດທໍ່ນີ້ ພິກຂຸຜູ້ຢູ່ໃນສົງກໍເພິ່ງຢູ່ ຜາສຸກໄດ້

໖. "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນເຫດອື່ນທີ່ພິກຂຸຜູ້ຢູ່ໃນສົງເພິ່ງຢູ່ຜາສຸກກໍມີຢູ່ບໍ?

"ມີ ອານົນ ພິກຂຸ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ບໍ່ຕິຽນຜູ້ອື່ນຍ້ອນອະທິສີນ ເປັນຜູ້ ໃສ່ໃຈຕົນເອງ ບໍ່ໃສ່ໃຈຜູ້ອື່ນ ແລະເປັນຜູ້ບໍ່ມີຊື່ສຽງ ບໍ່ສະດຸ້ງຍ້ອນຄວາມບໍ່ມີ ຊື່ສຽງນັ້ນ ແມ່ນ ດ້ວຍເຫດທໍ່ນີ້ ພິກຂຸຜູ້ຢູ່ໃນສົງກໍເພິ່ງຢູ່ຜາສຸກໄດ້

໘. "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນເຫດອື່ນທີ່ພິກຂຸຜູ້ຢູ່ໃນສົງເພິ່ງຢູ່ຜາສຸກກໍມີຢູ່ບໍ?

"ມີ ອານົນ ພິກຂຸ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ບໍ່ຕິຽນຜູ້ອື່ນຍ້ອນອະທິສີນ ເປັນຜູ້ ໃສ່ໃຈຕົນເອງ ບໍ່ໃສ່ໃຈຜູ້ອື່ນ ແມ່ນເປັນຜູ້ບໍ່ມີຊື່ສຽງກໍບໍ່ສະດຸ້ງຍ້ອນຄວາມບໍ່ມີ ຊື່ສຽງນັ້ນ ແລະ ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລໍາບາກ ແມ່ນດ້ວຍເຫດທໍ່ນີ້ ພິກຂຸຜູ້ຢູ່ໃນສົງກໍເພິ່ງຢູ່ຜາສຸກໄດ້

໕. "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນເຫດອື່ນທີ່ພິກຂຸຜູ້ຢູ່ໃນສົງເພິ່ງຢູ່ຜາສຸກ ກໍມີຢູ່ບໍ?

"ມີ ອານົນ ພິກຂຸ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ບໍ່ຕິຽນຜູ້ອື່ນຍ້ອນອະທິສີນ ເປັນຜູ້ ໃສ່ໃຈຕົນເອງ ບໍ່ໃສ່ໃຈຜູ້ອື່ນ ແມ່ນເປັນຜູ້ບໍ່ມີຊື່ສຽງກໍບໍ່ສະດຸ້ງຍ້ອນຄວາມບໍ່ມີ ຊື່ສຽງນັ້ນ ເປັນຜູ້ ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍ ບໍ່ຍາກ ໄດ້ໂດຍບໍ່ລໍາບາກ ແລະເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາ-ວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ແມ່ນດ້ວຍເຫດທໍ່ນີ້ ພິກຂຸຜູ້ຢູ່ໃນສົງກໍເພິ່ງຢູ່ຜາສຸກໄດ້

ອານົນ ເຮົາກ່າວວ່າ "ຜາສຸວິຫາຣະທໍາອື່ນທີ່ດີກວ່າ ປະນີດກວ່າຜາສຸວິຫາຣະທໍານີ້ ຍ່ອມບໍ່ມີ

**ອານັນທະສູດທີ ໖ ຈົບ**

## ໗. ສີລະສູດ

## ວ່າດ້ວຍສິນທີ່ເປັນອົງປະກອບຂອງພິກຂຸ

[໑໐໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມເປັນຜູ້ ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການເຮັດ ອັນຊະລີ ເປັນນາບຸນອັນປະເສີດຂອງໂລກ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ເຖິງພ້ອມດ້ວຍສິນ
໒. ເປັນຜູ້ເຖິງພ້ອມດ້ວຍສະມາທິ
໓. ເປັນຜູ້ເຖິງພ້ອມດ້ວຍປັນຍາ
໔. ເປັນຜູ້ເຖິງພ້ອມດ້ວຍວິມຸດຕິ
໕. ເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

**ສີລະສູດທີ ໗ ຈົບ**

## ໘. ອະເສຂະສູດ

## ວ່າດ້ວຍທຳຂອງພຣະອະເສຂະ

[໑໐໘] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມເປັນຜູ້ ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ປະກອບດ້ວຍ ອະຣິຍະສີນຂັນ ອັນເປັນຂອງພຣະອະເສຂະ
໒. ເປັນຜູ້ປະກອບດ້ວຍ ສະມາທິຂັນ ອັນເປັນຂອງພຣະອະເສຂະ
໓. ເປັນຜູ້ປະກອບດ້ວຍ ປັນຍາຂັນ ອັນເປັນຂອງພຣະອະເສຂະ

໔. ເປັນຜູ້ປະກອບດ້ວຍ ວິມຸດຕິຂັນ ອັນເປັນຂອງພຣະອະເສຂະ
໕. ເປັນຜູ້ປະກອບດ້ວຍ ວິມຸດຕິຍານທັດສະນະຂັນອັນເປັນຂອງພຣະອະເສຂະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາຖວາຍ ໆລໆ ເປັນນາບຸນອັນປະເສີດຂອງໂລກ

**ອະເສຂະສູດທີ ໗ ຈົບ**

## ໘. ຈາຕຸດທິສະສູດ

## ວ່າດ້ວຍທຳຂອງພິກຂຸຜູ້ທ່ຽວໄປໃນທິດທັງສີ່

[໑໐໘] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ທ່ຽວໄປໃນທິດທັງສີ່ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍ ອາຈາ ຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກ ສາຢູ່ ໃນສິກຂາບົດທັງຫຼາຍ

໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍ ທີ່ມີ ຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະບໍລິສຸດບໍລິບູນ ຄົບຖ້ວນ ແລ້ວຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ

໓. ເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈ ເພສັດຊະບໍຣິຂານຕາມແຕ່ຈະໄດ້

໔. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມ ຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໕. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະ ໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ທ່ຽວໄປໃນ ທິດທັງສີ່

**ຈາຕຸທທິສະສູດທີ ໘ ຈົບ**

## ໑໐. ອະຣັນຍະສູດ
## ວ່າດ້ວຍຄຸນສົມບັດຂອງພິກຂຸຜູ້ຄວນຢູ່ໃນປ່າ

[໑໑໐] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ຄວນອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງ ແລະປ່າທຶບ

ທຳ ໕ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ
໓. ເປັນຜູ້ຜາຣົບຄວາມພຽນ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖິ້ມເປົາໃນກຸສົນທຳທັງຫຼາຍ
໔. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ
໕. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ຄວນອາໄສ ເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງ ແລະປ່າທຶບ

**ອະຣັນຍະສູດທີ ໑໐ ຈົບ**

**ຜາສຸວິຫາຣະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ສາຣັດຊະສູດ | ໒. ອຸດສັງກິຕະສູດ |
| ໓. ມະຫາໂຈຣະສູດ | ໔. ສະມະນະສຸຂຸມາລະສູດ |
| ໕. ຜາສຸວິຫາຣະສູດ | ໖. ອານັນທະສູດ |
| ໗. ສີລະສູດ | ໘. ອະເສຂະສູດ |
| ໙. ຈາຕຸດທິສະສູດ | ໑໐. ອະຣັນຍະສູດ |

# ໑. ຜາສຸວິຫາຣະວັກ

## ໝວດວ່າດ້ວຍຜາສຸວິຫາຣະທຳ

## ໑. ສາຣັດຊະສູດ

### ວ່າດ້ວຍຄວາມແກ່ກ້າແລະຄວາມເກງກົວ[1]

[໑໐໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳເຄື່ອງທຳຄວາມແກ່ກ້າ ສຳລັບພິກຂຸຜູ້ເປັນເສຂະ ໕ ປະການນີ້

ທຳເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີສີນ
໓. ເປັນພະຫູສູດ
໔. ເປັນຜູ້ຜາຣົບຄວາມພຽນ
໕. ເປັນຜູ້ມີປັນຍາ

ຜູ້ບໍ່ມີສັດທາມີຄວາມເກງກົວໃດ ແຕ່ຜູ້ມີສັດທາບໍ່ມີຄວາມເກງກົວນັ້ນ ດັ່ງນັ້ນ ທຳນີ້ຈຶ່ງຊື່ວ່າເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ

ຜູ້ທຸສີນມີຄວາມເກງກົວໃດ ແຕ່ຜູ້ມີສີນບໍ່ມີຄວາມເກງກົວນັ້ນ ດັ່ງນັ້ນ ທຳນີ້ຈຶ່ງຊື່ວ່າເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ

ຜູ້ມີສຸຕະໜ້ອຍມີຄວາມເກງກົວໃດ ແຕ່ຜູ້ເປັນພະຫູສູດບໍ່ມີຄວາມເກງກົວນັ້ນ ດັ່ງນັ້ນ ທຳນີ້ຈຶ່ງຊື່ວ່າເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ

ຜູ້ຂີ້ຄ້ານມີຄວາມເກງກົວໃດ ແຕ່ຜູ້ຜາຣົບຄວາມພຽນບໍ່ມີຄວາມເກງກົວນັ້ນ ດັ່ງນັ້ນ ທຳນີ້ຈຶ່ງຊື່ວ່າເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ

ຜູ້ມີປັນຍາຊາມມີຄວາມເກງກົວໃດ ແຕ່ຜູ້ມີປັນຍາດີບໍ່ມີຄວາມເກງກົວນັ້ນ ດັ່ງນັ້ນ ທຳນີ້ຈຶ່ງຊື່ວ່າເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ

ພິກຂຸທັງຫຼາຍ ທຳເຄື່ອງທຳຄວາມແກ່ກ້າສຳລັບພິກຂຸຜູ້ເປັນເສຂະ ໕ ປະການ ນີ້ແລ

**ສາຣັດຊະສູດທີ ໑ ຈົບ**

## ໒. ອຸດສັງກິຕະສູດ

### ວ່າດ້ວຍທຳທີ່ເຮັດໃຫ້ໜ້າລັງກຽດ

[໑໐໒] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມເປັນທີ່ລັງກຽດສົງໄສວ່າ "ເປັນພິກຂຸຊົ່ວ ແມ່ນຈະເປັນຜູ້ມີອະກຸບປະທຳ[໑]ກໍຕາມ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີຍິງແພດສະຍາ[໒]ເປັນໂຄຈອນ[໓]
໒. ເປັນຜູ້ມີແມ່ໝ້າຍເປັນໂຄຈອນ
໓. ເປັນຜູ້ມີສາວເທື້ອ[໑]ເປັນໂຄຈອນ
໔. ເປັນຜູ້ມີບັນເດາະ[໒]ເປັນໂຄຈອນ
໕. ເປັນຜູ້ມີພິກຂຸນີເປັນໂຄຈອນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ລັງກຽດ ສົງໄສວ່າ "ເປັນພິກຂຸຊົ່ວ ແມ່ນຈະເປັນຜູ້ມີອະກຸບປະທຳກໍຕາມ

**ອຸດສັງກິຕະສູດທີ ໒ ຈົບ**

## ໓. ມະຫາໂຈຣະສູດ

### ວ່າດ້ວຍອົງປະກອບຂອງມະຫາໂຈນ[໓]

[໑໐໓] ພິກຂຸທັງຫຼາຍ ມະຫາໂຈນປະກອບດ້ວຍອົງ ໕ ປະການ ຍ່ອມງັດແງະແດ່ ທຳການປຸ້ນແດ່ ລ້ອມປຸ້ນເຮືອນຫຼັງດຽວແດ່ ດັກປຸ້ນໃນທາງປ່ຽວແດ່ ອົງ ໕ ປະການ ອັນໃດແດ່ ຄື

ມະຫາໂຈນໃນໂລກນີ້

໑. ອາໄສບ່ອນຊຸຂະ
໒. ອາໄສປ່າຣົກ

໓. ອາໄສຜູ້ມີອິດທິພົນ ໔. ແຈກຈ່າຍໂພຄະຊັບ

໕. ທ່ຽວໄປຄົນດຽວ

ມະຫາໂຈນອາໄສບ່ອນຂຸຂະ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ອາໄສເກາະແກ່ງແຫ່ງແມ່ນ້ຳ ຫຼືບ່ອນຂຸຂະແຫ່ງພູ ມະຫາໂຈນອາໄສບ່ອນຂຸຂະເປັນແນວນີ້ແລ

ມະຫາໂຈນອາໄສປ່າຣົກ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ອາໄສປ່າຣົກດ້ວຍຫຍ້າແດ່ ປ່າຣົກດ້ວຍຕົ້ນໄມ້ແດ່ ປ່າທີ່ມີແນວປ້ອງກັນແດ່ ປ່າໃຫຍ່ແດ່ ມະຫາໂຈນອາໄສປ່າຣົກ ເປັນແນວນີ້ແລ

ມະຫາໂຈນອາໄສຜູ້ມີອິດທິພົນ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ອາໄສພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາ ເຂົາຄິດແນວນີ້ວ່າ "ຖ້າໃຜຈັກກ່າວຫາອັນໃດເຮົາ ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາ ເຫຼົ່ານີ້ ກໍຈັກວ່າຄະດີຄວາມຊ່ອຍປົກປ້ອງເຮົາ ຖ້າໃຜກ່າວຫາອັນໃດມະຫາໂຈນນັ້ນ ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊານັ້ນ ຕ່າງກໍວ່າຄະດີຄວາມຊ່ອຍປົກປ້ອງເຂົາ ມະຫາໂຈນອາໄສ ຜູ້ມີອິດທິພົນ ເປັນແນວນີ້ແລ

ມະຫາໂຈນແຈກຈ່າຍໂພຄະຊັບ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ເປັນຜູ້ຮັ່ງມີ ມີຊັບຫຼາຍ ມີສົມບັດຫຼາຍ ເຂົາຄິດແນວນີ້ວ່າ "ຖ້າໃຜຈັກກ່າວຫາອັນໃດເຮົາ ເຮົາກໍຈັກຈ່າຍໂພຄະຊັບປົກປິດເລື້ອງນັ້ນ ຖ້າໃຜກ່າວຫາອັນໃດມະຫາໂຈນນັ້ນ ເຂົາກໍຈ່າຍໂພຄະຊັບປົກປິດເລື້ອງນັ້ນ ມະຫາໂຈນແຈກຈ່າຍ ໂພຄະຊັບ ເປັນແນວນີ້ແລ

ມະຫາໂຈນທ່ຽວໄປຄົນດຽວ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ເປັນຜູ້ທຳໂຈຣະກຳຄົນດຽວ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຂົາຍ່ອມປາຖະໜາວ່າ "ເລື້ອງລັບຂອງເຮົາຢ່າໄດ້ກະຈາຍໄປອອກໄປພາຍນອກ ມະຫາໂຈນທ່ຽວໄປຄົນດຽວ ເປັນແນວນີ້ແລ

ມະຫາໂຈນປະກອບດ້ວຍອົງ ໕ ປະການນີ້ແລ ຍ່ອມງັດແງະແດ່ ທຳການປຸ້ນແດ່ ລ້ອມປຸ້ນເຮືອນຫຼັງດຽວແດ່ ດັກປຸ້ນໃນທາງປ່ຽວແດ່ ສົນໃດ

ພິກຂຸທັງຫຼາຍ ພິກຂຸຊົ່ວປະກອບດ້ວຍທຳ ໕ ປະການ ກໍຄືກັນສັນນັ້ນ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບ[໑] ສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸຊົ່ວໃນທຳວິໄນນີ້

໑. ອາໄສກຳທີ່ບໍ່ກົງໄປກົງມາ
໒. ອາໄສບ່ອນລີ້ລັບ
໓. ອາໄສຜູ້ມີອິດທິພົນ
໔. ແຈກຈ່າຍໂພຄະຊັບ
໕. ທ່ຽວໄປອົງດຽວ

ພິກຂຸຊົ່ວອາໄສກຳທີ່ບໍ່ກົງໄປກົງມາ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ປະກອບກາຍຍະກຳ ວະຈີກຳ ມະໂນກຳ ທີ່ບໍ່ກົງໄປກົງມາ ພິກຂຸຊົ່ວອາໄສກຳທີ່ບໍ່ກົງໄປກົງມາ ເປັນແນວນີ້ແລ

ພິກຂຸຊົ່ວອາໄສກຳບ່ອນລີ້ລັບ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ເປັນມິດສາທິດຖິ ປະກອບດ້ວຍອັນຕະຄາຫິກະທິດຖິ[໑] ພິກຂຸຊົ່ວອາໄສກຳບ່ອນລີ້ລັບ ເປັນແນວນີ້ແລ

ພິກຂຸຊົ່ວອາໄສຜູ້ມີອິດທິພົນ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ອາໄສພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາ ພິກຂຸນັ້ນຄິດແນວນີ້ວ່າ "ຖ້າໃຜຈັກກ່າວຫາອັນໃດເຮົາ ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາເຫຼົ່ານີ້ກໍຈັກວ່າຄະດີຄວາມຊ່ອຍປົກປ້ອງເຮົາ ຖ້າໃຜວ່າກ່າວອັນໃດພິກຂຸນັ້ນ ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊານັ້ນ ຕ່າງກໍວ່າຄະດີຄວາມຊ່ອຍປົກປ້ອງທ່ານ ພິກຂຸ ຊົ່ວອາໄສຜູ້ມີອິດທິພົນ ເປັນແນວນີ້ແລ

ພິກຂຸຊົ່ວແຈກຈ່າຍໂພຄະຊັບ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ທ່ານຄິດແນວນີ້ວ່າ "ຖ້າໃຜຈັກກ່າວຫາອັນໃດເຮົາ ເຮົາຈັກແຈກຈ່າຍລາບ ປົກປິດເລື້ອງນັ້ນ ຖ້າໃຜກ່າວຫາອັນໃດທ່ານ ທ່ານກໍແຈກຈ່າຍລາບປົກປິດເລື້ອງນັ້ນ ພິກຂຸຊົ່ວແຈກຈ່າຍໂພຄະຊັບ ເປັນແນວນີ້ແລ

ພິກຂຸຊົ່ວທ່ຽວໄປອົງດຽວ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ຢູ່ທີ່ຊົນນະບົດຊາຍແດນຮູບດຽວ ທ່ານເຂົ້າໄປສູ່ຕະກູນໃນຊົນນະບົດນັ້ນຍ່ອມໄດ້ລາບ ພິກຂຸຊົ່ວທ່ຽວໄປອົງດຽວເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸຊົ່ວປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

**ມະຫາໂຈຣະສູດທີ ໑ ຈົບ**

## ໘. ສະມະນະສຸຂຸມາລະສູດ

## ວ່າດ້ວຍທຳຂອງສະມະນະຜູ້ລະອຽດອ່ອນ

[໑໐໘] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຊື່ວ່າ ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ

ທຳ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍຈີວອນຫຼາຍ ເມື່ອເຂົາບໍ່ ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງສັນບິນທະບາດຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງສັນໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍເສນາສະນະຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍຄິລານະປັດໄຈເພສັດຊະບໍຣິຂານຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ

໒. ທ່ານຢູ່ຮ່ວມກັບເພື່ອນພົມມະຈາຣີເຫຼົ່າໃດ ເພື່ອນພົມມະຈາຣີເຫຼົ່ານັ້ນ ກໍປະພຶດຕໍ່ທ່ານດ້ວຍກາຍຍະກຳເປັນທີ່ພໍໃຈເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ ປະພຶດຕໍ່ທ່ານດ້ວຍວະຈີກຳເປັນທີ່ພໍໃຈເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ ປະພຶດຕໍ່ທ່ານດ້ວຍມະໂນກຳເປັນທີ່ພໍໃຈເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ ນຳສິ່ງເປັນທີ່ພໍໃຈມາເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ

໓. ເວທະນາທີ່ເກີດຈາກບີ ເວທະນາທີ່ເກີດຈາກເສມຫະ ເວທະນາທີ່ເກີດຈາກລົມ ເວທະນາທີ່ເກີດຈາກໄຂ້ສັນນິບາດ ເວທະນາທີ່ເກີດຈາກການປ່ຽນລະດູ ເວທະນາທີ່ເກີດຈາກການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນ ເວທະນາທີ່ເກີດຈາກການພາກພຽນເກີນກຳລັງ ເວທະນາທີ່ເກີດຈາກຜົນກຳ ສ່ວນຫຼາຍບໍ່ເກີດແກ່ທ່ານ ທ່ານຈຶ່ງມີຄວາມເຈັບໄຂ້ໜ້ອຍ

໔. ທ່ານເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ[១] ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໕. ທ່ານເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຊື່ວ່າເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ

ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງຜູ້ໃດວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ບຸກຄົນນັ້ນຄືເຮົານັ້ນເອງ ທີ່ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ຍ້ອນເຮົາເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍຈີວອນຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງສັນບິນທະບາດຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງສັນໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍເສນາສະນະຫຼາຍ ເມື່ອເຂົາບໍ່ຂໍຮ້ອງຈຶ່ງໃຊ້ສອຍໜ້ອຍ ເມື່ອເຂົາຂໍຮ້ອງຈຶ່ງໃຊ້ສອຍຄິລານະ ປັດໄຈເພສັດຊະບໍຣິຂານຫຼາຍ ເມື່ອເຂົາບໍ່ຂອງຮ້ອງຈຶ່ງໃຊ້ສອຍໜ້ອຍ

ແລະເຮົາຢູ່ຮ່ວມກັບພິກຂຸເຫຼົ່າໃດ ພິກຂຸເຫຼົ່ານັ້ນປະພຶດຕໍ່ເຮົາດ້ວຍກາຍຍະກຳ ເປັນທີ່ພໍໃຈເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ ປະພຶດຕໍ່ເຮົາດ້ວຍວະຈີກຳ ເປັນທີ່ພໍໃຈເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ ປະພຶດຕໍ່ເຮົາດ້ວຍມະໂນກຳເປັນທີ່ພໍໃຈ ເປັນສ່ວນຫຼາຍ ທີ່ບໍ່ພໍໃຈເປັນສ່ວນໜ້ອຍ ນຳສິ່ງເປັນທີ່ພໍໃຈມາເປັນສ່ວນຫຼາຍ ທີ່ບໍ່ພໍໃຈ ເປັນສ່ວນໜ້ອຍ ແລະເວທະນາທີ່ເກີດຈາກບີ ເວທະນາທີ່ເກີດຈາກເສມຫະ ເວທະນາທີ່ເກີດຈາກລົມ ເວທະນາທີ່ເກີດຈາກໄຂ້ສັນນິບາດ ເວທະນາທີ່ເກີດຈາກການປ່ຽນລະດູ ເວທະນາທີ່ເກີດຈາກການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນ ເວທະນາທີ່ເກີດຈາກການພາກພຽນເກີນກຳລັງ ແລະ ເວທະນາທີ່ເກີດຈາກຜົນກຳສ່ວນຫຼາຍບໍ່ເກີດແກ່ເຮົາ ເຮົາຈຶ່ງມີຄວາມເຈັບໄຂ້ໜ້ອຍ ເຮົາເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງຜູ້ໃດວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ ບຸກຄົນນັ້ນຄືເຮົານັ້ນເອງ ທີ່ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວວ່າ "ເປັນສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ

**ສະມະນະສຸຂຸມາລະສູດທີ່ ໘ ຈົບ**

# ໕. ຜາສຸວິຫາຣະສູດ

## ວ່າດ້ວຍຜາສຸວິຫາຣະທຳ[໑]

[໑໐໕] ພິກຂຸທັງຫຼາຍ ຜາສຸວິຫາຣະທຳ ໕ ປະການນີ້ ຜາສຸວິຫາຣະທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຕັ້ງໝັ້ນກາຍຍະກຳປະກອບດ້ວຍເມດຕາໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ

໒. ຕັ້ງໝັ້ນວະຈີກຳປະກອບດ້ວຍເມດຕາໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ

໓. ຕັ້ງໝັ້ນມະໂນກຳປະກອບດ້ວຍເມດຕາໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ

໔. ມີສີນ[໑]ທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ສະເໝີກັນກັບເພື່ອນ ພົມມະຈາຣີທັງຫຼາຍທັງຕໍ່ໜ້າແລະລັບຫຼັງ

໕. ມີອະຣິຍະທິດຖິ[໒] ອັນເປັນທຳເຄື່ອງນຳອອກເພື່ອຄວາມສິ້ນທຸກໂດຍຖືກຕ້ອງແກ່ຜູ້ເຮັດຕາມສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍທັງຕໍ່ໜ້າແລະ ລັບຫຼັງ

ພິກຂຸທັງຫຼາຍ ຜາສຸວິຫາຣະທຳ ໕ ປະການນີ້ແລ

**ຜາສຸວິຫາຣະສູດທີ ໕ ຈົບ**

# ໖. ອານັນທະສູດ

## ວ່າດ້ວຍພຣະອານົນ

[໑໐໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໂຄສິຕາຣາມ ເຂດນະຄອນ ໂກສຳພີ ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນ ທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

໑. "ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຜູ້ຢູ່ໃນສົງເພິ່ງຢູ່ຜາສຸກດ້ວຍເຫດທີ່ໃດນໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ພິກຂຸ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ແລະບໍ່ຕິຕຽນຜູ້ອື່ນຍ້ອນອະທິສີນ ແມ່ນດ້ວຍເຫດທີ່ນີ້ ພິກຂຸຜູ້ຢູ່ໃນສົງກໍເພິ່ງຢູ່ຜາສຸກໄດ້

໒. "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນເຫດອື່ນທີ່ພິກຂຸຜູ້ຢູ່ໃນສົງເພິ່ງຢູ່ຜາສຸກກໍມີຢູ່ບໍ?

"ມີ ອານົນ ພິກຂຸ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ບໍ່ຕິຕຽນຜູ້ອື່ນຍ້ອນອະທິສີນ ແລະ ເປັນຜູ້ໃສ່ໃຈຕົນເອງ ບໍ່ໃສ່ໃຈຜູ້ອື່ນ ແມ່ນດ້ວຍເຫດທີ່ນີ້ ພິກຂຸຜູ້ຢູ່ໃນສົງກໍເພິ່ງຢູ່ ຜາສຸກໄດ້

໓. "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນເຫດອື່ນທີ່ພິກຂຸຜູ້ຢູ່ໃນສົງເພິ່ງຢູ່ຜາສຸກກໍມີຢູ່ບໍ?

"ມີ ອານົນ ພິກຂຸ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ບໍ່ຕິຕຽນຜູ້ອື່ນຍ້ອນອະທິສີນ ເປັນຜູ້ໃສ່ໃຈຕົນເອງ ບໍ່ໃສ່ໃຈຜູ້ອື່ນ ແລະເປັນຜູ້ບໍ່ມີຊື່ສຽງ ບໍ່ສະດຸ້ງຍ້ອນຄວາມບໍ່ມີຊື່ສຽງນັ້ນ ແມ່ນດ້ວຍເຫດທີ່ນີ້ ພິກຂຸຜູ້ຢູ່ໃນສົງກໍເພິ່ງຢູ່ຜາສຸກໄດ້

໔. "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນເຫດອື່ນທີ່ພິກຂຸຜູ້ຢູ່ໃນສົງເພິ່ງຢູ່ຜາສຸກກໍມີ ຢູ່ບໍ?

"ມີ ອານົນ ພິກຂຸ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ບໍ່ຕິຕຽນຜູ້ອື່ນຍ້ອນອະທິສີນ ເປັນຜູ້ໃສ່ໃຈຕົນເອງ ບໍ່ໃສ່ໃຈຜູ້ອື່ນ ແມ່ນເປັນຜູ້ບໍ່ມີຊື່ສຽງກໍບໍ່ສະດຸ້ງຍ້ອນຄວາມບໍ່ມີຊື່ສຽງນັ້ນ ແລະເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ແມ່ນດ້ວຍເຫດທີ່ນີ້ ພິກຂຸຜູ້ຢູ່ໃນສົງກໍເພິ່ງຢູ່ຜາສຸກໄດ້

໕. "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນເຫດອື່ນທີ່ພິກຂຸຜູ້ຢູ່ໃນສົງເພິ່ງຢູ່ຜາສຸກ ກໍມີຢູ່ບໍ?

"ມີ ອານົນ ພິກຂຸ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ບໍ່ຕິຕຽນຜູ້ອື່ນຍ້ອນອະທິສີນ ເປັນຜູ້ໃສ່ໃຈຕົນເອງ ບໍ່ໃສ່ໃຈຜູ້ອື່ນ ແມ່ນເປັນຜູ້ບໍ່ມີຊື່ສຽງກໍບໍ່ສະດຸ້ງຍ້ອນຄວາມບໍ່ມີຊື່ສຽງນັ້ນ ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ແລະເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ແມ່ນດ້ວຍເຫດທີ່ນີ້ ພິກຂຸຜູ້ຢູ່ໃນສົງກໍເພິ່ງຢູ່ຜາສຸກໄດ້

ອານົນ ເຮົາກ່າວວ່າ "ຜາສຸວິຫາຣະທຳອື່ນທີ່ດີກວ່າ ປະນີດກວ່າຜາສຸວິຫາຣະທຳນີ້ ຍ່ອມບໍ່ມີ

**ອານັນທະສູດທີ ໖ ຈົບ**

# ໗. ສີລະສູດ

## ວ່າດ້ວຍສີນທີ່ເປັນອົງປະກອບຂອງພິກຂຸ

[໑໐໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂີນາ ຄວນແກ່ການເຮັດອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ເຖິງພ້ອມດ້ວຍສີນ
໒. ເປັນຜູ້ເຖິງພ້ອມດ້ວຍສະມາທິ
໓. ເປັນຜູ້ເຖິງພ້ອມດ້ວຍປັນຍາ
໔. ເປັນຜູ້ເຖິງພ້ອມດ້ວຍວິມຸດຕິ
໕. ເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂີນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

**ສີລະສູດທີ ໗ ຈົບ**

# ໘. ອະເສຂະສູດ

## ວ່າດ້ວຍທຳຂອງພຣະອະເສຂະ

[໑໐໘] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມເປັນຜູ້ ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ປະກອບດ້ວຍອະຣິຍະສີນຂັນອັນເປັນຂອງພຣະອະເສຂະ

໒. ເປັນຜູ້ປະກອບດ້ວຍສະມາທິຂັນອັນເປັນຂອງພຣະອະເສຂະ
໓. ເປັນຜູ້ປະກອບດ້ວຍປັນຍາຂັນອັນເປັນຂອງພຣະອະເສຂະ
໔. ເປັນຜູ້ປະກອບດ້ວຍວິມຸດຕິຂັນອັນເປັນຂອງພຣະອະເສຂະ
໕. ເປັນຜູ້ປະກອບດ້ວຍວິມຸດຕິຍານທັດສະນະຂັນອັນເປັນຂອງພຣະອະເສຂະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ອະເສຂະສູດທີ ៧ ຈົບ**

## ໗. ຈາຕຸດທິສະສູດ

## ວ່າດ້ວຍທຳຂອງພິກຂຸຜູ້ທ່ຽວໄປໃນທິດທັງສີ່

[໑໐໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ທ່ຽວໄປໃນທິດທັງສີ່

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍ ອາຈາ ຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກ ສາຢູ່ ໃນສິກຂາບົດທັງຫຼາຍ

໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍ ທີ່ມີ ຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະບໍລິສຸດບໍລິບູນ ຄົບຖ້ວນ ແລ້ວຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ

໓. ເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈ ເພສັດຊະບໍຣິຂານຕາມແຕ່ຈະໄດ້

໔. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມ ຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

๕. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ๕ ປະການນີ້ແລ ເປັນຜູ້ທ່ຽວໄປໃນ ທິດທັງສີ່

**ຈາຕຸດທິສະສູດທີ ๗ ຈົບ**

## ໑໐. ອະຣັນຍະສູດ

## ວ່າດ້ວຍຄຸນສົມບັດຂອງພິກຂຸຜູ້ຄວນຢູ່ໃນປ່າ

[໑໑໐] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ๕ ປະການ ເປັນຜູ້ຄວນອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງ ແລະປ່າທຶບ[๑]

ທຳ ๕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ

໓. ເປັນຜູ້ຜາຣົບຄວາມພຽນ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖິ້ມເບົາໃນກຸສົນທຳທັງຫຼາຍ

໔. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

๕. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ๕ ປະການນີ້ແລ ເປັນຜູ້ຄວນອາໄສ ເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງ ແລະປ່າທຶບ

**ອະຣັນຍະສູດທີ ໑໐ ຈົບ**

**ຜາສຸວິຫາຣະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໔. ອັນທະກະວິນທະວັກ

### ໝວດວ່າດ້ວຍໝູ່ບ້ານອັນທະກະວິນທະ

## ໑. ກຸລູປະກະສູດ

### ວ່າດ້ວຍທຳຂອງພິກຂຸຜູ້ເຂົ້າໄປສູ່ຕະກູນ

[໑໑໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຜູ້ເຂົ້າໄປສູ່ຕະກູນປະກອບດ້ວຍທຳ ໕ ປະການ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນ ທີ່ຍົກຍ້ອງໃນຕະກູນທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ເຮັດຄວາມຄຸ້ນເຄີຍກັບຜູ້ບໍ່ຄຸ້ນເຄີຍ
໒. ຄົບຫາຕະກູນທີ່ແຕກແຍກກັນ
໓. ຂໍຫຼາຍເກີນໄປ
໔. ສັ່ງການທັງທີ່ຕົນບໍ່ໄດ້ເປັນໃຫຍ່
໕. ເວົ້າຊິ່ມທີ່ຫູ

ພິກຂຸທັງຫຼາຍ ພິກຂຸຜູ້ເຂົ້າໄປສູ່ຕະກູນປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງໃນຕະກູນທັງຫຼາຍ

ພິກຂຸທັງຫຼາຍ ພິກຂຸຜູ້ເຂົ້າໄປສູ່ຕະກູນປະກອບດ້ວຍທຳ ໕ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງໃນຕະກູນທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ເຮັດຄວາມຄຸ້ນເຄີຍກັບຜູ້ບໍ່ຄຸ້ນເຄີຍ

໒. ບໍ່ສັ່ງການທັງທີ່ຕົນບໍ່ໄດ້ເປັນໃຫຍ່
໓. ບໍ່ຄົບຕະກູນທີ່ແຕກແຍກກັນ
໔. ບໍ່ເວົ້າຊິ່ມທີ່ຫູ
໕. ບໍ່ຂໍຫຼາຍເກີນໄປ

ພິກຂຸທັງຫຼາຍ ພິກຂຸຜູ້ເຂົ້າໄປສູ່ຕະກູນປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງໃນຕະກູນທັງຫຼາຍ

**ກຸລູປະກະສູດທີ ໑ ຈົບ**

# ໒. ປັດສາສະມະນະສູດ

## ວ່າດ້ວຍທຳຂອງພິກຂຸຜູ້ເປັນປັດສາສະມະນະ[๑]

[໑໑໒] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ບໍ່ຄວນພາໄປ ເປັນປັດສາສະມະນະ

ທຳ ໕ ປະການ ອັນໃດແດ່ ຄື

໑. ຍ່າງຫ່າງເກີນໄປຫຼືໃກ້ເກີນໄປ
໒. ບໍ່ຮັບບາດຫຼືຂອງໃນບາດ[໒]
໓. ເມື່ອພຣະອຸປັດຊາເວົ້າໃກ້ອາບັດກໍບໍ່ຫ້າມ[໓]
໔. ເມື່ອພຣະອຸປັດຊາກຳລັງເວົ້າຢູ່ກໍເວົ້າແຊກຂຶ້ນ
໕. ມີປັນຍາຊາມ ໂງ່ຈ້ຳ ເປັນຄົນປຶກ[໔]

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ບໍ່ຄວນພາໄປເປັນປັດສາສະມະນະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຈຶ່ງຄວນພາໄປເປັນ ປັດສາສະມະນະ

ທຳ ໕ ປະການ ອັນໃດແດ່ ຄື

໑. ຍ່າງບໍ່ຫ່າງເກີນໄປ ບໍ່ໃກ້ເກີນໄປ
໒. ຮັບບາດຫຼືຂອງໃນບາດ
໓. ເມື່ອພຣະອຸປັດຊາເວົ້າໃກ້ອາບັດກໍຫ້າມ
໔. ເມື່ອພຣະອຸປັດຊາກຳລັງເວົ້າຢູ່ກໍບໍ່ເວົ້າແຊກຂຶ້ນ

໕. ມີປັນຍາ ບໍ່ໂງ່ຈ້າ ບໍ່ເປັນຄົນປຶກ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຈຶ່ງຄວນພາໄປເປັນປັດສາສະມະນະ

**ປັດສາສະມະນະສູດທີ ໒ ຈົບ**

## ໓. ສຳມາສະມາທິສູດ

## ວ່າດ້ວຍສຳມາສະມາທິ

[໑໑໓] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ບໍ່ອາດບັນລຸສຳມາສະມາທິຢູ່ໄດ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ອົດທົນຕໍ່ ຮູບ
໒. ເປັນຜູ້ບໍ່ອົດທົນຕໍ່ ສຽງ
໓. ເປັນຜູ້ບໍ່ອົດທົນຕໍ່ ກິ່ນ
໔. ເປັນຜູ້ບໍ່ອົດທົນຕໍ່ ຣົດ
໕. ເປັນຜູ້ບໍ່ອົດທົນຕໍ່ ໂຜດຖັບພະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ ເປັນຜູ້ບໍ່ອາດບັນລຸສຳມາສະມາທິຢູ່ໄດ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ອາດບັນລຸສຳມາສະມາທິຢູ່ໄດ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ອົດທົນຕໍ່ ຮູບ
໒. ເປັນຜູ້ອົດທົນຕໍ່ ສຽງ
໓. ເປັນຜູ້ອົດທົນຕໍ່ ກິ່ນ
໔. ເປັນຜູ້ອົດທົນຕໍ່ ຣົດ
໕. ເປັນຜູ້ອົດທົນຕໍ່ ໂຜດຖັບພະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ອາດບັນລຸ ສຳມາສະມາທິຢູ່ໄດ້

**ສຳມາສະມາທິສູດທີ ໓ ຈົບ**

# ໔. ອັນທະກະວິນທະສູດ

## ວ່າດ້ວຍໝູ່ບ້ານອັນທະກະວິນທະ

[໑໑໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ໝູ່ບ້ານອັນທະກະວິນທະ ແຄວ້ນມະຄົດ ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ອານົນ ທ່ານທັງຫຼາຍເພິ່ງຍັງພວກພິກຂຸໃໝ່ ບວດໄດ້ບໍ່ດົນ ເພິ່ງມາສູ່ທຳວິໄນໃຫ້ສະມາທານ ໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນທຳ ໕ ປະການ

ທຳ ໕ ປະການ ອັນໃດແດ່ ຄື

໑. ທ່ານທັງຫຼາຍເພິ່ງຍັງພິກຂຸເຫຼົ່ານັ້ນໃຫ້ສະມາທານ ໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນປາຕິໂມກຂະສັງວອນສີນວ່າ "ຜູ້ມີອາຍຸທັງຫຼາຍ ມາເທີ້ນ ຂໍທ່ານທັງຫຼາຍຈົ່ງເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

໒. ທ່ານທັງຫຼາຍເພິ່ງຍັງພິກຂຸເຫຼົ່ານັ້ນໃຫ້ສະມາທານ ໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນອິນຊີສັງວອນສີນວ່າ "ຜູ້ມີອາຍຸທັງຫຼາຍ ມາເທີ້ນ ຂໍທ່ານທັງຫຼາຍ ຈົ່ງເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ ມີສະຕິເປັນເຄື່ອງຮັກສາ[໑] ມີສະຕິປັນຍາເປັນເຄື່ອງຮັກສາຕົນ[໒] ມີໃຈຮັກສາດີແລ້ວ ປະກອບດ້ວຍຈິດ ທີ່ມີສະຕິເປັນເຄື່ອງຮັກສາຢູ່

໓. ທ່ານທັງຫຼາຍເພິ່ງຍັງພິກຂຸເຫຼົ່ານັ້ນໃຫ້ສະມາທານ ໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນການເວົ້າມີທີ່ຈົບວ່າ "ຜູ້ມີອາຍຸທັງຫຼາຍ ມາເທີ້ນ ຂໍທ່ານທັງຫຼາຍຈົ່ງເປັນ ຜູ້ເວົ້າໜ້ອຍ ເວົ້າໃຫ້ມີບ່ອນຈົບ

໔. ທ່ານທັງຫຼາຍເພິ່ງຍັງພິກຂຸເຫຼົ່ານັ້ນໃຫ້ສະມາທານ ໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນຄວາມສະງົບກາຍວ່າ "ຜູ້ມີອາຍຸທັງຫຼາຍ ມາເທີ້ນ ຂໍທ່ານທັງຫຼາຍຈົ່ງຢູ່ປ່າເປັນຂໍ້ວັດປະຕິບັດ ຈົ່ງອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າທຶບ

໕. ທ່ານທັງຫຼາຍເພິ່ງຍັງພິກຂຸເຫຼົ່ານັ້ນໃຫ້ສະມາທານ ໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນ

ສຳມາທັດສະນະ(ຄວາມເຫັນຖືກ)ວ່າ "ຜູ້ມີອາຍຸທັງຫຼາຍ ມາເທີ້ນ ຂໍທ່ານທັງຫຼາຍຈົ່ງເປັນຜູ້ມີສຳມາທິດຖິ[a] ປະກອບດ້ວຍສຳມາທັດສະນະ

ອານົນ ທ່ານທັງຫຼາຍເພິ່ງຍັງພວກພິກຂຸໃໝ່ ບວດໄດ້ບໍ່ດົນ ເພິ່ງມາສູ່ທຳວິໄນນີ້ໃຫ້ສະມາທານ ໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນທຳ ໕ ປະການນີ້ແລ

**ອັນທະກະວິນທະສູດທີ ໔ ຈົບ**

## ໕. ມັດສະຣິນີສູດ

## ວ່າດ້ວຍພິກຂຸນີຜູ້ຂີ້ຖີ່

[໑໑໕] ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ຂີ້ຖີ່ທີ່ຢູ່
໒. ຂີ້ຖີ່ຕະກູນ
໓. ຂີ້ຖີ່ລາບ
໔. ຂີ້ຖີ່ວັນນະ
໕. ຂີ້ຖີ່ທຳ

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ຂີ້ຖີ່ທີ່ຢູ່
໒. ບໍ່ຂີ້ຖີ່ຕະກູນ
໓. ບໍ່ຂີ້ຖີ່ລາບ
໔. ບໍ່ຂີ້ຖີ່ວັນນະ
໕. ບໍ່ຂີ້ຖີ່ທຳ

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ມັດສະຣິນີສູດທີ ໕ ຈົບ**

## ໙. ວັນນະນາສູດ

## ວ່າດ້ວຍພິກຂຸນີຜູ້ສັນເສີນ

[໑໑໙] ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຣົກ ຄື ຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ພິຈາລະນາ ບໍ່ຮິ່ນຕອງ ສັນເສີນຄົນທີ່ຄວນຕິຕຽນ
໒. ບໍ່ພິຈາລະນາ ບໍ່ຮິ່ນຕອງ ຕິຕຽນຄົນທີ່ຄວນສັນເສີນ
໓. ບໍ່ພິຈາລະນາ ບໍ່ຮິ່ນຕອງ ສະແດງຄວາມເຫຼື້ອມໃສໃນຖານະບໍ່ເປັນບ່ອນຕັ້ງແຫ່ງຄວາມເຫຼື້ອມໃສ
໔. ບໍ່ພິຈາລະນາ ບໍ່ຮິ່ນຕອງ ສະແດງຄວາມບໍ່ເຫຼື້ອມໃສໃນຖານະເປັນບ່ອນຕັ້ງແຫ່ງ ຄວາມເຫຼື້ອມໃສ
໕. ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ພິຈາລະນາ ຮິ່ນຕອງແລ້ວ ຕິຕຽນຄົນທີ່ຄວນຕິຕຽນ
໒. ພິຈາລະນາ ຮິ່ນຕອງແລ້ວ ສັນເສີນຄົນທີ່ຄວນສັນເສີນ
໓. ພິຈາລະນາ ຮິ່ນຕອງແລ້ວ ສະແດງຄວາມບໍ່ເຫຼື້ອມໃສໃນຖານະບໍ່ເປັນບ່ອນຕັ້ງແຫ່ງຄວາມເຫຼື້ອມໃສ
໔. ພິຈາລະນາ ຮິ່ນຕອງແລ້ວ ສະແດງຄວາມເຫຼື້ອມໃສໃນຖານະເປັນບ່ອນຕັ້ງແຫ່ງຄວາມເຫຼື້ອມໃສ
໕. ບໍ່ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ວັນນະນາສູດທີ ໖ ຈົບ**

## ໗. ອິດສຸກີນີສູດ

## ວ່າດ້ວຍພິກຂຸນີຜູ້ມີຄວາມຣິດສະຫຍາ

[໑໑໗] ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຣົກ ຄື ຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ພິຈາລະນາ ບໍ່ຮິ່ນຕອງ ສັນເສີນຄົນທີ່ຄວນຕິຕຽນ
໒. ບໍ່ພິຈາລະນາ ບໍ່ຮິ່ນຕອງ ຕິຕຽນຄົນທີ່ຄວນສັນເສີນ
໓. ມີຄວາມຣິດສະຫຍາ
໔. ມີຄວາມຂີ້ຖີ່
໕. ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ພິຈາລະນາ ຮິ່ນຕອງແລ້ວ ຕິຕຽນຄົນທີ່ຄວນຕິຕຽນ
໒. ພິຈາລະນາ ຮິ່ນຕອງແລ້ວ ສັນເສີນຄົນທີ່ຄວນສັນເສີນ
໓. ບໍ່ມີຄວາມຣິດສະຫຍາ
໔. ບໍ່ມີຄວາມຂີ້ຖີ່
໕. ບໍ່ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ອິດສຸກີນີສູດທີ ໗ ຈົບ**

# ๗. ມິດສາທິດຖິກະສູດ

## ວ່າດ້ວຍພິກຂຸມີຜູ້ມີຄວາມເຫັນຜິດ

[໑໑๗] ພິກຂຸທັງຫຼາຍ ພິກຂຸມີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ພິຈາລະນາ ບໍ່ຮິ່ນຕອງ ສັນເສີນຄົນທີ່ຄວນຕິຕຽນ
໒. ບໍ່ພິຈາລະນາ ບໍ່ຮິ່ນຕອງ ຕິຕຽນຄົນທີ່ຄວນສັນເສີນ
໓. ມີຄວາມເຫັນຜິດ
໔. ມີຄວາມດຳຣິຜິດ
໕. ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸມີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸມີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ພິຈາລະນາ ຮິ່ນຕອງແລ້ວ ຕິຕຽນຄົນທີ່ຄວນຕິຕຽນ
໒. ພິຈາລະນາ ຮິ່ນຕອງແລ້ວ ສັນເສີນຄົນທີ່ຄວນສັນເສີນ
໓. ມີຄວາມເຫັນຖືກ
໔. ມີຄວາມຄິດຖືກ
໕. ບໍ່ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸມີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ມິດສາທິດຖິກະສູດທີ ๗ ຈົບ**

# ໗. ມິດສາວາຈາສູດ

## ວ່າດ້ວຍພິກຂຸນີຜູ້ມີການເຈລະຈາຜິດ

[໑໑໗] ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ພິຈາລະນາ ບໍ່ຮິ່ນຕອງ ສັນເສີນຄົນທີ່ຄວນຕິຕຽນ
໒. ບໍ່ພິຈາລະນາ ບໍ່ຮິ່ນຕອງ ຕິຕຽນຄົນທີ່ຄວນສັນເສີນ
໓. ມີການເຈລະຈາຜິດ
໔. ມີການກະທຳຜິດ
໕. ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ພິຈາລະນາ ຮິ່ນຕອງແລ້ວ ຕິຕຽນຄົນທີ່ຄວນຕິຕຽນ
໒. ພິຈາລະນາ ຮິ່ນຕອງແລ້ວ ສັນເສີນຄົນທີ່ຄວນສັນເສີນ
໓. ມີການເຈລະຈາຖືກ
໔. ມີການການງານຖືກ
໕. ບໍ່ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ມິດສາວາຈາສູດທີ ໗ ຈົບ**

# ໑໐. ມິດສາວາຍາມະສູດ

## ວ່າດ້ວຍພິກຂຸນີຜູ້ມີຄວາມພະຍາຍາມຜິດ

[໑໘໐] ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ພິຈາລະນາ ບໍ່ຮິ່ນຕອງ ສັນເສີນຄົນທີ່ຄວນຕິຕຽນ
໒. ບໍ່ພິຈາລະນາ ບໍ່ຮິ່ນຕອງ ຕິຕຽນຄົນທີ່ຄວນສັນເສີນ
໓. ມີຄວາມພະຍາຍາມຜິດ
໔. ມີຄວາມຮະນຶກຜິດ
໕. ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ພິຈາລະນາ ຮິ່ນຕອງແລ້ວ ຕິຕຽນຄົນທີ່ຄວນຕິຕຽນ
໒. ພິຈາລະນາ ຮິ່ນຕອງແລ້ວ ສັນເສີນຄົນທີ່ຄວນສັນເສີນ
໓. ມີຄວາມພະຍາຍາມຖືກ
໔. ມີຄວາມຮະນຶກຖືກ
໕. ບໍ່ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ມິດສາວາຍາມະສູດທີ ໑໐ ຈົບ**

**ອັນທະກະວິນະທະວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໑. ຄິລານະວັກ

## ໝວດວ່າດ້ວຍທຳສຳລັບພິກຂຸໄຂ້

## ໑. ຄິລານະສູດ

### ວ່າດ້ວຍທຳສຳລັບພິກຂຸໄຂ້

[໑໒໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ກູຕາຄານສາລາ[໑]ປ່າມະຫາວັນ ເຂດນະຄອນເວສາລີ[໒] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກໃນເວລາຄ່ຳ ສະເດັດ ເຂົ້າໄປທີ່ສາລາບຳລຸງພິກຂຸໄຂ້ ໄດ້ຊົງເຫັນພິກຂຸອົງໜຶ່ງຜູ້ທຸບພົນລະພາບ ເປັນໄຂ້ ແລ້ວປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດ ວ່າ

ພິກຂຸທັງຫຼາຍ ທຳ ໕ ປະການ ຍ່ອມບໍ່ລະພິກຂຸລາງອົງຜູ້ທຸບພົນລະພາບ ເປັນໄຂ້ ທ່ານເພິ່ງຫວັງໄດ້ຜົນນີ້ຄື “ບໍ່ດົນປານໃດຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີ ອາສະວະຍ້ອນ ອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນຄວາມບໍ່ງາມໃນກາຍຢູ່
໒. ກຳນົດໝາຍຄວາມປະຕິກູນໃນອາຫານ
໓. ກຳນົດໝາຍຄວາມບໍ່ໜ້າເພີດເພີນໃນໂລກທັງປວງ
໔. ພິຈາລະນາເຫັນຄວາມບໍ່ທ່ຽງໃນສັງຂານທັງປວງ
໕. ເຂົ້າໄປຕັ້ງມໍຣະນະສັນຍາ(ກຳນົດໝາຍຄວາມຕາຍ)ໄວ້ໃນພາຍໃນ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມບໍ່ລະພິກຂຸລາງອົງຜູ້ທຸບພົນລະພາບ ເປັນໄຂ້ ທ່ານເພິ່ງຫວັງໄດ້ຜົນນີ້ຄື "ບໍ່ດົນປານໃດຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນ ອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

**ຄິລານະສູດທີ່ ໑ ຈົບ**

## ໔. ສະຕິສຸປັດຖິຕະສູດ

## ວ່າດ້ວຍຜູ້ມີສະຕິຕັ້ງໄວ້ດີ

[໑໒໔] ພິກຂຸທັງຫຼາຍ ພິກຂຸຫຼືພິກຂຸນີອົງໃດອົງໜຶ່ງ ຈະເລີນ ເຮັດໃຫ້ຫຼາຍເຊິ່ງ ທຳ ໕ ປະການ ທ່ານເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

ທຳ ໕ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເຂົ້າໄປຕັ້ງສະຕິໄວ້ໃນພາຍໃນ
໒. ພິຈາລະນາເຫັນກາຍວ່າເປັນຂອງບໍ່ງາມ ດ້ວຍປັນຍາເປັນເຄື່ອງພິຈາລະນາ ເຫັນທັງຄວາມເກີດແລະຄວາມດັບແຫ່ງທຳທັງຫຼາຍ
໓. ກຳນົດໝາຍຄວາມປະຕິກູນໃນອາຫານ
໔. ກຳນົດໝາຍຄວາມບໍ່ໜ້າເພີດເພີນໃນໂລກທັງປວງ
໕. ພິຈາລະນາເຫັນຄວາມບໍ່ທ່ຽງໃນສັງຂານທັງປວງ

ພິກຂຸທັງຫຼາຍ ພິກຂຸຫຼືພິກຂຸນີອົງໃດອົງໜຶ່ງ ຈະເລີນ ເຮັດໃຫ້ຫຼາຍເຊິ່ງທຳ ໕ ປະການນີ້ ທ່ານເພິ່ງຫວັງໄດ້ຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

**ສະຕິສຸປັດຖິຕະສູດທີ່ ໒ ຈົບ**

## ໓. ປະຖົມອຸປັດຖາກະສູດ

### ວ່າດ້ວຍພິກຂຸໄຂ້ທີ່ປິ່ນປົວໄດ້ຍາກແລະງ່າຍສູດທີ່ ໑

[໑໒໓] ພິກຂຸທັງຫຼາຍ ພິກຂຸໄຂ້ປະກອບດ້ວຍທຳ ໕ ປະການ ເປັນຜູ້ປິ່ນປົວໄດ້ຍາກ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ເຮັດສິ່ງທີ່ເປັນສັບປາຍະ
໒. ບໍ່ຮູ້ຈັກປະມານໃນສິ່ງທີ່ເປັນສັບປາຍະ
໓. ບໍ່ສັນຍາ
໔. ບໍ່ບອກອາພາດທີ່ມີຢູ່ຕາມຄວາມເປັນຈິງແກ່ຜູ້ປິ່ນປົວທີ່ປາຖະໜາປະໂຫຍດ ເຊັ່ນບໍ່ບອກອາພາດທີ່ກຳເຣີບວ່າ "ກຳເຣີບບໍ່ບອກອາພາດທີ່ທຸເລົາວ່າ "ທຸເລົາ ບໍ່ບອກອາພາດທີ່ຍັງຊົງຢູ່ວ່າ ຊົງຢູ່
໕. ບໍ່ອົດກັ້ນຕໍ່ເວທະນາທັງຫຼາຍ ອັນມີໃນຮ່າງກາຍທີ່ເກີດຂຶ້ນແລ້ວເປັນທຸກກ້າ ແຂງ ເຈັບປວດ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດ

ພິກຂຸທັງຫຼາຍ ພິກຂຸໄຂ້ປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ປິ່ນປົວໄດ້ຍາກ
ພິກຂຸທັງຫຼາຍ ພິກຂຸໄຂ້ປະກອບດ້ວຍທຳ ໕ ປະການ ເປັນຜູ້ປິ່ນປົວໄດ້ງ່າຍ
ທຳ ໕ ປະການ ອັນໃດແດ່ ຄື

໑. ເຮັດສິ່ງທີ່ເປັນສັບປາຍະ
໒. ຮູ້ຈັກປະມານໃນສິ່ງທີ່ເປັນສັບປາຍະ
໓. ສັນຍາ
໔. ບອກອາພາດທີ່ມີຢູ່ຕາມຄວາມເປັນຈິງແກ່ຜູ້ປິ່ນປົວທີ່ປາຖະໜາປະໂຫຍດ ເຊັ່ນ ບອກອາພາດທີ່ກຳເຣີບວ່າ ກຳເຣີບ ບອກອາພາດທີ່ທຸເລົາວ່າ ທຸເລົາ ບອກອາພາດທີ່ຍັງຊົງຢູ່ວ່າ ຊົງຢູ່
໕. ເປັນຜູ້ອົດກັ້ນຕໍ່ເວທະນາທັງຫຼາຍອັນມີໃນຮ່າງກາຍທີ່ເກີດຂຶ້ນແລ້ວເປັນທຸກ ກ້າແຂງ ເຈັບປວດ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດ

ພິກຂຸທັງຫຼາຍ ພິກຂຸໄຂ້ປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ປິ່ນປົວ ໄດ້ງ່າຍ

**ປະຖົມອຸປັດຖາກສູດທີ ໓ ຈົບ**

## ໔. ທຸຕິຍະອຸປັດຖາກສູດ

### ວ່າດ້ວຍພິກຂຸຜູ້ຄວນແລະບໍ່ຄວນປິ່ນປົວພິກຂຸໄຂ້ສູດທີ ໔

[໑໒໔] ພິກຂຸທັງຫຼາຍ ພິກຂຸຜູ້ປິ່ນປົວພິກຂຸໄຂ້ປະກອບດ້ວຍທຳ ໕ ປະການ ບໍ່ຄວນປິ່ນປົວພິກຂຸໄຂ້

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ສາມາດ°ຈັດຢາ
໒. ບໍ່ຮູ້ສິ່ງທີ່ເປັນສັບປາຍະແລະສິ່ງທີ່ບໍ່ເປັນສັບປາຍະ ນຳສິ່ງທີ່ບໍ່ເປັນສັບປາຍະ ເຂົ້າມາ ນຳສິ່ງທີ່ເປັນສັບປາຍະອອກໄປ
໓. ເຫັນແກ່ອາມິດ໌ປິ່ນປົວ ບໍ່ມີຈິດເມດຕາປິ່ນປົວ
໔. ລັງກຽດທີ່ຈະນຳອຸດຈາຣະ ປັດສາວະ ອາຈຽນ ຫຼື ນໍ້າລາຍອອກໄປຖິ້ມ
໕. ບໍ່ສາມາດຊີ້ແຈ່ງໃຫ້ພິກຂຸໄຂ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈ ໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ຕາມການອັນຄວນ

ພິກຂຸທັງຫຼາຍ ພິກຂຸຜູ້ປິ່ນປົວພິກຂຸໄຂ້ປະກອບດ້ວຍທຳ ໕ ປະການນີ້ແລ ບໍ່ຄວນປິ່ນປົວ ພິກຂຸໄຂ້

ພິກຂຸທັງຫຼາຍ ພິກຂຸຜູ້ປິ່ນປົວພິກຂຸໄຂ້ປະກອບດ້ວຍທຳ ໕ ປະການ ຄວນປິ່ນປົວພິກຂຸໄຂ້ ທຳ ໕ ປະການ ອັນໃດແດ່ ຄື

໑. ສາມາດຈັດຢາ
໒. ຮູ້ສິ່ງທີ່ເປັນສັບປາຍະ ແລະສິ່ງທີ່ບໍ່ເປັນສັບປາຍະ ນຳສິ່ງທີ່ບໍ່ເປັນສັບປາຍະ ອອກໄປ ນຳສິ່ງທີ່ເປັນສັບປາຍະເຂົ້າມາ
໓. ມີຈິດເມດຕາປິ່ນປົວ ບໍ່ເຫັນແກ່ອາມິດປິ່ນປົວ
໔. ບໍ່ລັງກຽດທີ່ຈະນຳອຸດຈາຣະ ປັດສາວະ ອາຈຽນ ຫຼືນໍ້າລາຍອອກໄປຖິ້ມ
໕. ສາມາດຊີ້ແຈ່ງໃຫ້ພິກຂຸໄຂ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈ ໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ຕາມການອັນຄວນ

ພິກຂຸທັງຫຼາຍ ພິກຂຸຜູ້ປິ່ນປົວພິກຂຸໄຂ້ປະກອບດ້ວຍທຳ ໕ ປະການນີ້ແລ ຄວນປິ່ນປົວ ພິກຂຸໄຂ້

**ທຸຕິຍະອຸປັດຖາກະສູດທີ ໔ ຈົບ**

## ໕. ປະຖົມອະນາຍຸດສາສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ອາຍຸສັ້ນແລະອາຍຸຍືນສູດທີ ໑

[໑໒໕] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ເປັນເຫດໃຫ້ອາຍຸສັ້ນ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ເຮັດສິ່ງທີ່ເປັນສັບປາຍະ
໒. ບໍ່ຮູ້ຈັກປະມານໃນສິ່ງທີ່ເປັນສັບປາຍະ
໓. ບໍຣິໂພກສິ່ງທີ່ຍ່ອຍຍາກ
໔. ທ່ຽວໃນເວລາບໍ່ສົມຄວນ
໕. ບໍ່ປະພຶດພົມມະຈັນ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ເປັນເຫດໃຫ້ອາຍຸສັ້ນ
ພິກຂຸທັງຫຼາຍ ທຳ ໕ ປະການນີ້ ເປັນເຫດໃຫ້ອາຍຸຍືນ
ທຳ ໕ ປະການ ອັນໃດແດ່ ຄື

໑. ເຮັດສິ່ງທີ່ເປັນສັບປາຍະ
໒. ຮູ້ຈັກປະມານໃນສິ່ງທີ່ເປັນສັບປາຍະ
໓. ບໍຣິໂພກສິ່ງທີ່ຍ່ອຍງ່າຍ
໔. ທ່ຽວໃນເວລາທີ່ສົມຄວນ
໕. ປະພຶດພົມມະຈັນ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ເປັນເຫດໃຫ້ອາຍຸຍືນ

**ປະຖົມອະນາຍຸດສາສູດທີ ໕ ຈົບ**

## ໖. ທຸຕິຍະອະນາຍຸດສາສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ອາຍຸສັ້ນແລະອາຍຸຍືນສູດທີ ໒

[໑໒໖] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ເປັນເຫດໃຫ້ອາຍຸສັ້ນ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ເຮັດສິ່ງທີ່ເປັນສັບປາຍະ
໒. ບໍ່ຮູ້ຈັກປະມານໃນສິ່ງທີ່ເປັນສັບປາຍະ
໓. ບໍຣິໂພກສິ່ງທີ່ຍ່ອຍຍາກ
໔. ທຸສີນ
໕. ມີປາປະມິດ (ມິດຊົ່ວ)

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ເປັນເຫດໃຫ້ອາຍຸສັ້ນ
ພິກຂຸທັງຫຼາຍ ທຳ ໕ ປະການນີ້ ເປັນເຫດໃຫ້ອາຍຸຍືນ
ທຳ ໕ ປະການ ອັນໃດແດ່ ຄື

໑. ເຮັດສິ່ງທີ່ເປັນສັບປາຍະ
໒. ຮູ້ຈັກປະມານໃນສິ່ງທີ່ເປັນສັບປາຍະ
໓. ບໍຣິໂພກສິ່ງທີ່ຍ່ອຍງ່າຍ
໔. ມີສີນ
໕. ມີກັນລະຍານະມິດ (ມິດດີ)

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ເປັນເຫດໃຫ້ອາຍຸຍືນ

**ທຸຕິຍະອະນາຍຸສສາສູດທີ ໖ ຈົບ**

## ໗. ວະປະກາສະສູດ

## ວ່າດ້ວຍພິກຂຸຜູ້ຄວນຫຼີກອອກຈາກໝູ່

[໑໔໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ບໍ່ຄວນຫຼີກອອກຈາກໝູ່ຢູ່ຜູ້ດຽວ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ບໍ່ສັນໂດດດ້ວຍຈີວອນຕາມແຕ່ຈະໄດ້
໒. ບໍ່ສັນໂດດດ້ວຍບິນທະບາດຕາມແຕ່ຈະໄດ້
໓. ບໍ່ສັນໂດດດ້ວຍເສນາສະນະຕາມແຕ່ຈະໄດ້
໔. ບໍ່ສັນໂດດດ້ວຍຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້
໕. ຫຼາຍດ້ວຍຄວາມດຳຣິໃນກາມ

ພິກຂຸທັງຫຼາຍ ພິກຂຸປະກອບທຳ ໕ ປະການນີ້ແລ ບໍ່ຄວນຫຼີກອອກຈາກໝູ່ຢູ່ຜູ້ດຽວ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຄວນຫຼີກອອກຈາກໝູ່ຢູ່ຜູ້ດຽວ
ທຳ ໕ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ສັນໂດດດ້ວຍຈີວອນຕາມແຕ່ຈະໄດ້

໒. ສັນໂດດດ້ວຍບິນທະບາດຕາມແຕ່ຈະໄດ້
໓. ສັນໂດດດ້ວຍເສນາສະນະຕາມແຕ່ຈະໄດ້
໔. ສັນໂດດດ້ວຍຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້
໕. ຫຼາຍດ້ວຍຄວາມດໍາຣິໃນການອອກຈາກກາມ

ພິກຂຸທັງຫຼາຍ ພິກຂຸປະກອບທໍາ ໕ ປະການນີ້ແລ ຄວນຫຼີກອອກຈາກໝູ່ ຢູ່ຜູ້ດຽວ

**ວະປະກາສະສູດທີ ໗ ຈົບ**

## ໘. ສະມະນະສຸຂະສູດ

## ວ່າດ້ວຍສຸກຂອງສະມະນະ

[໑໘໘] ພິກຂຸທັງຫຼາຍ ທຸກຂອງສະມະນະ ໕ ປະການ ທຸກຂອງສະມະນະ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທໍາວິໄນນີ້

໑. ບໍ່ສັນໂດດດ້ວຍຈີວອນຕາມແຕ່ຈະໄດ້
໒. ບໍ່ສັນໂດດດ້ວຍບິນທະບາດຕາມແຕ່ຈະໄດ້
໓. ບໍ່ສັນໂດດດ້ວຍເສນາສະນະຕາມແຕ່ຈະໄດ້
໔. ບໍ່ສັນໂດດດ້ວຍຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້
໕. ບໍ່ຍິນດີປະພຶດພົມມະຈັນ

ພິກຂຸທັງຫຼາຍ ທຸກຂອງສະມະນະ ໕ ປະການນີ້ແລ

ພິກຂຸທັງຫຼາຍ ສຸກຂອງສະມະນະ ໕ ປະການ
ສຸກຂອງສະມະນະ ໕ ປະການ ອັນໃດແດ່ ຄື
ພິກຂຸໃນທໍາວິໄນນີ້

໑. ສັນໂດດດ້ວຍຈີວອນຕາມແຕ່ຈະໄດ້
໒. ສັນໂດດດ້ວຍບິນທະບາດຕາມແຕ່ຈະໄດ້
໓. ສັນໂດດດ້ວຍເສນາສະນະຕາມແຕ່ຈະໄດ້
໔. ສັນໂດດດ້ວຍຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້
໕. ຍິນດີປະພຶດພົມມະຈັນ

ພິກຂຸທັງຫຼາຍ ສຸກຂອງສະມະນະ ໕ ປະການນີ້ແລ

**ສະມະນະສຸຂະສູດທີ ໗ ຈົບ**

## ໙. ປະຣິກຸບປະສູດ

## ວ່າດ້ວຍບຸກຄົນທີ່ຕ້ອງເດືອດຮ້ອນ

[໑໒໙] ພິກຂຸທັງຫຼາຍ ບຸກຄົນ ໕ ຈຳພວກນີ້ເປັນຜູ້ໄປອະບາຍ ເປັນຜູ້ໄປນະຣົກ ເປັນຜູ້ເດືອດຮ້ອນ ເປັນຜູ້ແກ້ໄຂບໍ່ໄດ້

ບຸກຄົນ ໕ ຈຳພວກໃດແດ່ ຄື

໑. ບຸກຄົນຜູ້ຂ້າມານດາ
໒. ບຸກຄົນຜູ້ຂ້າບິດາ
໓. ບຸກຄົນຜູ້ຂ້າພຣະອະຣະຫັນ
໔. ບຸກຄົນຜູ້ມີຈິດຄິດປະທຸດສະຮ້າຍເຮັດໂລຫິດຂອງຕະຖາຄົດໃຫ້ຫໍ້ຂຶ້ນ
໕. ບຸກຄົນຜູ້ທຳລາຍສົງໃຫ້ແຕກກັນ

ພິກຂຸທັງຫຼາຍ ບຸກຄົນ ໕ ຈຳພວກນີ້ແລ ເປັນຜູ້ໄປອະບາຍ ເປັນຜູ້ໄປນະຣົກ ເປັນຜູ້ເດືອດຮ້ອນ ເປັນຜູ້ແກ້ໄຂບໍ່ໄດ້

**ປະຣິກຸບປະສູດທີ ໙ ຈົບ**

## ໑໐. ພະຍະສະນະສູດ

## ວ່າດ້ວຍຄວາມວິບັດ

[໑໓໐] ພິກຂຸທັງຫຼາຍ ວິບັດ ໕ ປະການນີ້ ວິບັດ ໕ ປະການ ອັນໃດແດ່ ຄື

໑. ວິບັດແຫ່ງຍາດ
໒. ວິບັດແຫ່ງໂພຄະ
໓. ວິບັດຍ້ອນພະຍາດ
໔. ວິບັດແຫ່ງສິນ
໕. ວິບັດແຫ່ງທິດຖິ

ພິກຂຸທັງຫຼາຍ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈະບໍ່ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຍ້ອນຄວາມວິບັດແຫ່ງຍາດເປັນເຫດ ຍ້ອນຄວາມວິບັດແຫ່ງໂພຄະເປັນເຫດ ຍ້ອນຄວາມວິບັດຍ້ອນພະຍາດເປັນເຫດ ແຕ່ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຍ້ອນຄວາມວິບັດແຫ່ງສິນເປັນເຫດ ຫຼື ຍ້ອນຄວາມວິບັດແຫ່ງທິດຖິເປັນເຫດ

ພິກຂຸທັງຫຼາຍ ວິບັດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ສົມບັດ ໕ ປະການນີ້
ສົມບັດ ໕ ປະການ ອັນໃດແດ່ ຄື

໑. ສົມບັດຄືຍາດ
໒. ສົມບັດຄືໂພຄະ
໓. ສົມບັດຄືຄວາມບໍ່ມີພະຍາດ
໔. ສົມບັດຄືສິນ
໕. ສົມບັດຄືທິດຖິ

ພິກຂຸທັງຫຼາຍ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈະບໍ່ໄປເກີດໃນສຸກຄະຕິໂລກສະຫວັນ ຍ້ອນສົມບັດຄືຍາດເປັນເຫດ ຍ້ອນສົມບັດຄືໂພຄະເປັນເຫດ ຍ້ອນສົມບັດຄືຄວາມບໍ່ມີພະຍາດເປັນເຫດ ແຕ່ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ຍ້ອນສົມບັດຄືສິນເປັນເຫດ ຫຼື ຍ້ອນສົມບັດຄືທິດຖິເປັນເຫດ

ພິກຂຸທັງຫຼາຍ ສົມບັດ ໕ ປະການນີ້ແລ

**ພະຍະສະນະສູດທີ ໑໐ ຈົບ**

**ຄິລານະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ຄິລານະສູດ
໒. ສະຕິສຸປັດຖິຕະສູດ
໓. ປະຖົມອຸປັດຖາກະສູດ
໔. ທຸຕິຍະອຸປັດຖາກະສູດ
໕. ປະຖົມອະນາຍຸດສາສູດ
໖. ທຸຕິຍະອະນາຍຸດສາສູດ
໗. ວະປະກາສະສູດ
໘. ສະມະນະສຸຂະສູດ
໙. ປະຣິກຸບປະສູດ
໑໐. ພະຍະສະນະສູດ

# ໔. ຣາຊະວັກ

## ໝວດວ່າດ້ວຍພຣະຣາຊາ

## ໑. ປະຖົມຈັກການຸວັດຕະນະສູດ

### ວ່າດ້ວຍການໃຫ້ກົງຈັກໝຸນໄປສູດທີ ໑

[໑໓໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພຣະເຈົ້າຈັກກະພັດປະກອບດ້ວຍອົງ ໕ ປະການ ຈຶ່ງຊົງໃຫ້ກົງຈັກໝຸນໄປໂດຍທຳ[໑]ທີ່ນັ້ນ ກົງຈັກນັ້ນອັນໃຜ ໆ ທີ່ເປັນມະນຸດ ເປັນຂ້າເສິກ ແລະເປັນສັດມີຊີວິດໃຫ້ໝຸນກັບບໍ່ໄດ້

ອົງ ໕ ປະການ ອັນໃດແດ່ ຄື
ພຣະເຈົ້າຈັກກະພັດໃນໂລກນີ້

໑. ເປັນຜູ້ຮູ້ປະໂຫຍດ[໒]
໒ ເປັນຜູ້ຮູ້ທຳ[໓]
໓. ເປັນຜູ້ຮູ້ປະມານ[໔]
໔. ເປັນຜູ້ຮູ້ການ[໕]
໕. ເປັນຜູ້ຮູ້ບໍລິສັດ[໖]

ພິກຂຸທັງຫຼາຍ ພຣະເຈົ້າຈັກກະພັດປະກອບດ້ວຍອົງ ໕ ປະການນີ້ແລ ຈຶ່ງຊົງໃຫ້ຈັກໝຸນໄປໂດຍທຳທີ່ນັ້ນ ກົງຈັກນັ້ນອັນໃຜ ໆ ທີ່ເປັນມະນຸດ ເປັນຂ້າເສິກ ແລະເປັນສັດມີຊີວິດໃຫ້ໝຸນກັບບໍ່ໄດ້

ພິກຂຸທັງຫຼາຍ ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ປະກອບດ້ວຍທຳ ໕ ປະການ ກໍຄືກັນສັນນັ້ນ ຈຶ່ງຊົງໃຫ້ທຳມະຈັກອັນປະເສີດໝຸນໄປໂດຍທຳທີ່ນັ້ນ ຈັກນັ້ນອັນສະມະນະ ພາມ ເທວະດາ ມານ ພົມ ຫຼືໃຜ ໆ ໃນໂລກໃຫ້ໝຸນກັບບໍ່ໄດ້ ທຳ ໕ ປະການ ອັນໃດແດ່ ຄື

ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າໃນໂລກນີ້

໑. ເປັນຜູ້ຮູ້ປະໂຫຍດ[໑]
໒. ເປັນຜູ້ຮູ້ທຳ[໒]
໓. ເປັນຜູ້ຮູ້ປະມານ[໓]

໔. ເປັນຜູ້ຮູ້ກາລ[໒]
໕. ເປັນຜູ້ຮູ້ບໍລິສັດ

ພິກຂຸທັງຫຼາຍ ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ປະກອບດ້ວຍທຳ ໕ ປະການນີ້ແລ ຈຶ່ງຊົງໃຫ້ທຳມະຈັກອັນປະເສີດໝຸນໄປໂດຍທຳທີ່ນັ້ນ ຈັກນັ້ນອັນ ສະມະນະ ພາມ ເທວະດາ ມານ ພົມ ຫຼືໃຜ ໆ ໃນໂລກ ໃຫ້ໝຸນກັບບໍ່ໄດ້

**ປະຖົມຈັກການຸວັດຕະນະສູດທີ ໑ ຈົບ**

## ໒. ທຸຕິຍະຈັກການຸວັດຕະນະສູດ

## ວ່າດ້ວຍການໃຫ້ກົງຈັກໝຸນໄປສູດທີ ໒

[໑໓໒] ພິກຂຸທັງຫຼາຍ ພຣະຣາດຊະໂອຣົດອົງໃຫຍ່ຂອງພຣະເຈົ້າຈັກກະພັດ ປະກອບດ້ວຍອົງ ໕ ປະການ ຈຶ່ງຊົງໃຫ້ກົງຈັກທີ່ພຣະຣາຊະບິດາໃຫ້ໝຸນໄປແລ້ວ ໃຫ້ໝຸນໄປໂດຍທຳທີ່ນັ້ນ ກົງຈັກນັ້ນອັນໃຜ ໆ ທີ່ເປັນມະນຸດ ເປັນຂ້າເສິກ ແລະເປັນສັດມີຊີວິດໃຫ້ໝຸນກັບບໍ່ໄດ້ ອົງ ໕ ປະການ ອັນໃດແດ່ ຄື

ພຣະຣາດຊະໂອຣົດອົງໃຫຍ່ຂອງພຣະເຈົ້າຈັກກະພັດໃນໂລກນີ້

໑. ເປັນຜູ້ຮູ້ປະໂຫຍດ
໒. ເປັນຜູ້ຮູ້ທຳ
໓. ເປັນຜູ້ຮູ້ປະມານ
໔. ເປັນຜູ້ຮູ້ກາລ
໕. ເປັນຜູ້ຮູ້ບໍລິສັດ

ພິກຂຸທັງຫຼາຍ ພຣະຣາດຊະໂອຣົດອົງໃຫຍ່ຂອງພຣະເຈົ້າຈັກກະພັດ ປະກອບດ້ວຍ ອົງ ໕ ປະການນີ້ແລ ຈຶ່ງຊົງໃຫ້ກົງຈັກທີ່ພຣະຣາຊະບິດາໃຫ້ໝຸນໄປແລ້ວ ໃຫ້ໝຸນໄປໂດຍທຳທີ່ນັ້ນ ກົງຈັກນັ້ນອັນໃຜ ໆ ທີ່ເປັນມະນຸດ ເປັນຂ້າເສິກ ແລະເປັນສັດມີຊີວິດໃຫ້ໝຸນກັບບໍ່ໄດ້

ພິກຂຸທັງຫຼາຍ ສາຣີບຸດປະກອບດ້ວຍທຳ ໕ ປະການ ກໍຄືກັນສັນນັ້ນ ຈຶ່ງໃຫ້ທຳມະຈັກອັນປະເສີດທີ່ຕະຖາຄົດໃຫ້ໝຸນໄປແລ້ວ ໃຫ້ໝຸນໄປໂດຍທຳທີ່ນັ້ນ ຈັກນັ້ນອັນສະມະນະ ພາມ ເທວະດາ ມານ ພົມ ຫຼືໃຜ ໆ ໃນໂລກ ໃຫ້ໝຸນກັບບໍ່ໄດ້ ທຳ ໕ ປະການ ອັນໃດແດ່ ຄື

ສາຣີບຸດໃນທຳວິໄນນີ້

໑. ເປັນຜູ້ຮູ້ປະໂຫຍດ
໔. ເປັນຜູ້ຮູ້ທຳ
໓. ເປັນຜູ້ຮູ້ປະມານ
໔. ເປັນຜູ້ຮູ້ການ
໕. ເປັນຜູ້ຮູ້ບໍລິສັດ

ພິກຂຸທັງຫຼາຍ ສາຣີບຸດປະກອບດ້ວຍທຳ ໕ ປະການນີ້ແລ ຈຶ່ງໃຫ້ທຳມະຈັກ ອັນປະເສີດທີ່ຕະຖາຄົດໃຫ້ໝຸນໄປແລ້ວ ໃຫ້ໝຸນໄປໂດຍທຳທີ່ນັ້ນ ຈັກນັ້ນອັນສະມະນະ ພາມ ເທວະດາ ມານ ພົມ ຫຼືໃຜ ໆ ໃນໂລກ ໃຫ້ໝຸນກັບບໍ່ໄດ້

**ທຸຕິຍະຈັກການຸວັດຕະນະສູດທີ ໔ ຈົບ**

## ໓. ທຳມະຣາຊາສູດ

## ວ່າດ້ວຍທຳມະຣາຊາ

[໑໓໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ພຣະເຈົ້າຈັກກະພັດຜູ້ຊົງທຳ ເປັນທຳມະຣາຊາ ຍ່ອມບໍ່ຊົງໃຫ້ກົງຈັກທີ່ບໍ່ແມ່ນຂອງພຣະຣາຊາໝຸນໄປ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດ ເປັນຣາຊາຂອງພຣະເຈົ້າຈັກກະພັດຜູ້ຊົງທຳເປັນທຳມະຣາຊາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ທຳ[๑] ເປັນຣາຊາຂອງພຣະເຈົ້າຈັກກະພັດຜູ້ຊົງທຳເປັນທຳມະຣາຊາ ແລ້ວຕັດຕໍ່ໄປວ່າ "ພຣະເຈົ້າຈັກກະພັດຜູ້ຊົງທຳ ເປັນທຳມະຣາຊາໃນໂລກນີ້ຊົງອາໄສທຳທີ່ນັ້ນ ສັກກາຣະທຳ ເຄົາລົບທຳ ນອບນ້ອມທຳ ເຊີດຊູທຳ ຍ້ອງຍໍທຳ ມີທຳເປັນໃຫຍ່ ຊົງຈັດການຮັກສາ ປ້ອງກັນແລະຄຸ້ມຄອງຊົນພາຍໃນ[๒]ໂດຍທຳ

ອີກປະການໜຶ່ງ ພຣະເຈົ້າຈັກກະພັດຜູ້ຊົງທຳ ເປັນທຳມະຣາຊາ ຯລຯ ມີທຳເປັນໃຫຍ່ ຊົງຈັດການຮັກສາ ປ້ອງກັນ ແລະຄຸ້ມຄອງພວກກະສັດຜູ້ຕາມສະເດັດ ກຳລັງພົນ ພາມຄະຫະບໍດີ ຊາວນິຄົມ ຊາວຊົນນະບົດ ສະມະນະພາມ ສັດຈຳພວກເນື້ອແລະນົກ ໂດຍທຳ ພຣະເຈົ້າຈັກກະພັດນັ້ນແລຜູ້ຊົງທຳ ເປັນທຳມະຣາຊາ ຯລຯ ມີທຳເປັນໃຫຍ່ ເມື່ອຊົງຈັດການຮັກສາ ປ້ອງກັນ ແລະຄຸ້ມຄອງໂດຍທຳແລ້ວ ຈຶ່ງໃຫ້ກົງຈັກໝຸນໄປໂດຍທຳທີ່ນັ້ນ ກົງຈັກນັ້ນອັນໃຜ ໆ ທີ່ເປັນມະນຸດ ເປັນຂ້າເສິກ ແລະເປັນສັດມີຊີວິດໃຫ້ໝຸນກັບບໍ່ໄດ້

ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກໍຄືກັນສັນນັ້ນ ເປັນຜ຺ູ້ຊົງທຳ ເປັນທຳມະຣາຊາ[໑] ຊົງອາໄສທຳທີ່ນັ້ນ ສັກກາຣະທຳ ເຄົາລົບທຳ ນອບນ້ອມທຳ ເຊີດຊູທຳ ຍ້ອງຍໍທຳ ມີທຳເປັນໃຫຍ່ ຊົງຈັດການຮັກສາ ປ້ອງກັນ ແລະຄຸ້ມຄອງພິກຂຸທັງຫຼາຍໂດຍທຳວ່າ

໑. ກາຍຍະກຳແບບນີ້ຄວນປະພຶດ ກາຍຍະກຳແບບນີ້ບໍ່ຄວນປະພຶດ
໒. ວະຈີກຳແບບນີ້ຄວນປະພຶດ ວະຈີກຳແບບນີ້ບໍ່ຄວນປະພຶດ
໓. ມະໂນກຳແບບນີ້ຄວນປະພຶດ ມະໂນກຳແບບນີ້ບໍ່ຄວນປະພຶດ
໔. ອາຊີບແບບນີ້ຄວນປະກອບ ອາຊີບແບບນີ້ບໍ່ຄວນປະກອບ
໕. ເຮືອນແລະນິຄົມແບບນີ້ຄວນຢູ່ອາໄສ ເຮືອນແລະນິຄົມແບບນີ້ບໍ່ຄວນຢູ່ອາໄສ

ອີກປະການໜຶ່ງ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຜູ້ຊົງທຳ ເປັນທຳຣາຊາ ຯລຯ ມີທຳເປັນໃຫຍ່ ຊົງຈັດການຮັກສາ ປ້ອງກັນ ແລະຄຸ້ມຄອງພິກຂຸນີທັງຫຼາຍໂດຍທຳ ຯລຯ ອຸປາສົກທັງຫຼາຍ ຯລຯ ອຸປາສິກາທັງຫຼາຍໂດຍທຳວ່າ

໑. ກາຍຍະກຳແບບນີ້ຄວນປະພຶດ ກາຍຍະກຳແບບນີ້ບໍ່ຄວນປະພຶດ

ຯລຯ

໕. ເຮືອນແລະນິຄົມແບບນີ້ຄວນຢູ່ອາໄສ ເຮືອນແລະນິຄົມແບບນີ້ບໍ່ຄວນຢູ່ອາໄສ

ພິກຂຸ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ເປັນຜູ້ຊົງທຳ ເປັນທຳມະຣາຊາ ຯລຯ ມີທຳເປັນໃຫຍ່ ເມື່ອຊົງຈັດການຮັກສາ ປ້ອງກັນ ແລະຄຸ້ມຄອງພິກຂຸທັງຫຼາຍໂດຍທຳ ພິກຂຸນີທັງຫຼາຍ ຯລຯ ອຸປາສົກທັງຫຼາຍ ຯລຯ ອຸປາສິກາທັງຫຼາຍໂດຍທຳແລ້ວ ຈຶ່ງຊົງໃຫ້ທຳມະຈັກອັນປະເສີດໝຸນໄປໂດຍທຳທີ່ນັ້ນ ຈັກ[໑]ນັ້ນອັນ ສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກ ໃຫ້ໝຸນກັບບໍ່ໄດ້

**ທຳມະຣາຊາສູດທີ ໓ ຈົບ**

## ໔. ຍັດສັງທິສັງສູດ

## ວ່າດ້ວຍທິດທີ່ກະສັດໃຊ້ປະທັບ

[໑໓໔] ພິກຂຸທັງຫຼາຍ ກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ[໒] ຊົງປະກອບ ດ້ວຍອົງ ໕ ປະການ ຈະປະທັບຢູ່ ທິດໃດ ໆ ກໍຄືກັບປະທັບຢູ່ໃນແຄວ້ນ ຂອງພຣະອົງເອງ ອົງ ໕ ປະການ ອັນໃດແດ່ ຄື

ກະສັດຕາທິຣາດໃນໂລກນີ້

໑. ໄດ້ຮັບມຸດທາພິເສກແລ້ວ ຊົງມີຊາດກຳເນີດດີທັງຝ່າຍພຣະມານດາແລະຝ່າຍພຣະບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ[๑] ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ

໒. ຊົງເປັນຜູ້ຮັ່ງມີ ມີພຣະຣາດຊະຊັບຫຼາຍ ມີພຣະຣາດຊະສົມບັດຫຼາຍ ມີ ພຣະສາງແລະພຣະຄັງ[๒]ບໍລິບູນ

໓. ຊົງມີກຳລັງພົນ ປະກອບດ້ວຍກອງທັບທັງ ໔ ເຫຼົ່າ ເຊື່ອຟັງແລະ ເຮັດຕາມທີ່ຊົງຮັບສັ່ງ

໔. ຊົງເປັນປະຣິນາຍົກ ເປັນບັນດິດ ສະຫຼາດ ມີປັນຍາ ສາມາດຄິດເຫດການໄດ້ທັງອະດີດ ອະນາຄົດ ແລະປັດຈຸບັນ

໕. ຊົງປະກອບດ້ວຍຍົດທີ່ມີທຳ ໔ ປະການ ນີ້ເຮັດໃຫ້ຈະເລີນ

ກະສັດຕາທິຣາດພຣະອົງນັ້ນຈະປະທັບຢູ່ທິດໃດ ໆ ກໍຄືກັບປະທັບຢູ່ໃນແຄວ້ນຂອງພຣະອົງເອງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນພຣະອົງຊົງຊະນະໄດ້ເດັດຂາດແລ້ວ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການກໍຄືກັນສັນນັ້ນ ຈະຢູ່ທິດໃດ ໆ ກໍເປັນຜູ້ມີຈິດລຸດພົ້ນຢູ່ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສິນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ຄື ກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ຊົງສົມບູນດ້ວຍຊາດ

໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ ຄືກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວຊົງຮັ່ງມີ ມີພຣະຣາດຊະຊັບຫຼາຍ ມີພຣະຣາດຊະສົມບັດຫຼາຍ ມີພຣະສາງແລະພຣະຄັງບໍລິບູນ

໓. ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖືເບົາໃນກຸສົນທຳ ທັງຫຼາຍຢູ່ ຄືກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ຊົງສົມບູນ ດ້ວຍກຳລັງ

໔. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນສຸດ

ທຸກໂດຍຖືກຕ້ອງ ຄືກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ຊຶ່ງເປັນປະຣິນາຍົກ

໕. ປະກອບດ້ວຍວິມຸດຕິທີ່ມີທຳ ໔ ປະການນີ້ເຮັດໃຫ້ຈະເລີນ ທ່ານຈະຢູ່ທິດໃດໆ ກໍເປັນຜູ້ມີ ຈິດລຸດພົ້ນຢູ່ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທ່ານມີຈິດລຸດພົ້ນແລ້ວແນວນັ້ນ

**ຍັດສັງທິສັງສູດທີ ໔ ຈົບ**

## ໕. ປະຖົມປັດຖະນາສູດ

## ວ່າດ້ວຍຄວາມປາຖະໜາສູດທີ ໑

[໑໓໕] ພິກຂຸທັງຫຼາຍ ພຣະຣາດຊະໂອຣົດອົງໃຫຍ່ຂອງກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ຊຶ່ງປະກອບດ້ວຍອົງ ໕ ປະການ ຍ່ອມປາຖະໜາຣາດຊະສົມບັດ ອົງ ໕ ປະການອັນໃດແດ່ ຄື

ພຣະຣາດຊະໂອຣົດອົງໃຫຍ່ຂອງກະສັດຕາທິຣາດ ຜູ້ໄດ້ຮັບມຸດທາພິເສກແລ້ວໃນໂລກນີ້

໑. ເປັນຜູ້ມີຊາດກຳເນີດດີທັງຝ່າຍພຣະມານດາ ແລະຝ່າຍພຣະບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ
໒. ເປັນຜູ້ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີສະຫວິວັນຜຸດຜ່ອງຍິ່ງ[១]
໓. ເປັນທີ່ຮັກ ເປັນທີ່ພໍພຣະທະໄທຂອງພຣະມານດາແລະພຣະບິດາ
໔. ເປັນທີ່ຮັກ ເປັນທີ່ພໍໃຈຂອງຊາວນິຄົມແລະຊາວຊົນນະບົດ
໕. ເປັນຜູ້ໄດ້ສຶກສາສຳເລັດດີໃນສິລະປະສາດແຫ່ງກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ເຊັ່ນ ສິລະປະສາດເລື້ອງຊ້າງ ມ້າ ລົດ ທະນູ ຫຼືດາບ

ພຣະຣາດຊະໂອຣົດອົງໃຫຍ່ນັ້ນ ຊົງມີພຣະດຳຣິແນວນີ້ວ່າ "ເຮົາມີຊາດກຳເນີດດີທັງຝ່າຍພຣະມານດາແລະຝ່າຍພຣະບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ເປັນຫຍັງເຮົາຈະບໍ່ປາຖະໜາຣາດຊະສົມບັດນໍ ເຮົາເປັນຜູ້ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີສະຫວິວັນຜຸດຜ່ອງຍິ່ງ ເປັນຫຍັງເຮົາຈະບໍ່ປາຖະໜາຣາດຊະສົມບັດນໍ ເຮົາເປັນທີ່ຮັກ ເປັນທີ່ພໍພຣະທະໄທຂອງພຣະມານດາແລະພຣະບິດາ ເປັນຫຍັງເຮົາຈະບໍ່ປາຖະໜາຣາດຊະສົມບັດນໍ ເຮົາເປັນທີ່ຮັກເປັນທີ່ພໍໃຈຂອງຊາວນິຄົມແລະຊາວ

ຊົນນະບົດ ເປັນຫຍັງເຮົາຈະບໍ່ປາຖະໜາຣາດຊະສົມບັດນໍ ເຮົາເປັນຜູ້ໄດ້ສຶກສາສຳເລັດດີໃນສິລະປະສາດ ຂອງກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ເຊັ່ນສິລະປະສາດເລື້ອງຊ້າງ ມ້າ ລົດ ທະນູ ຫຼື ດາບ ເປັນຫຍັງ ເຮົາຈະບໍ່ປາຖະໜາຣາດຊະສົມບັດນໍ

ພຣະຣາດຊະໂອຣົດອົງໃຫຍ່ຂອງກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ປະກອບດ້ວຍ ອົງ ໕ ປະການນີ້ແລ ຍ່ອມປາຖະໜາຣາດຊະສົມບັດ ສັນໃດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ກໍປາຖະໜາຄວາມໝົດສິ້ນອາສະວະສັນນັ້ນ ຄືກັນ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ ເຊື່ອພຣະປັນຍາເຄື່ອງຕັດສະຣູ້ຂອງຕະຖາຄົດວ່າ “ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ເປັນຜູ້ມີອາພາດໜ້ອຍ ມີພະຍາດເບົາບາງ ປະກອບດ້ວຍໄຟທາດສຳລັບຍ່ອຍອາຫານ ສະໝ່ຳສະເໝີ ບໍ່ເຢັນຫຼາຍ ບໍ່ຮ້ອນຫຼາຍ ປານກາງ ເໝາະແກ່ການພ່ຳເພັງພຽນ
໓. ເປັນຜູ້ບໍ່ໂອ້ອວດ ບໍ່ມີມານຍາ ເຮັດຕົນໃຫ້ເປີດເຜີຍຕາມຄວາມເປັນຈິງໃນສາດສະດາ ຫຼື ໃນເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍ
໔. ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖິ້ມເບົາໃນກຸສົນທຳທັງຫຼາຍຢູ່
໕. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນສຸດທຸກໂດຍຖືກຕ້ອງ

ທ່ານມີຄວາມຄິດແນວນີ້ວ່າ “ເຮົາເປັນຜູ້ມີສັດທາ ເຊື່ອພຣະປັນຍາເຄື່ອງຕັດສະຣູ້ຂອງພຣະຕະຖາຄົດເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເປັນຫຍັງເຮົາຈະບໍ່ປາຖະໜາຄວາມໝົດສິ້ນອາສະວະນໍ ເຮົາເປັນຜູ້ມີອາພາດໜ້ອຍ ມີພະຍາດເບົາບາງ ປະກອບດ້ວຍໄຟທາດສຳລັບຍ່ອຍອາຫານສະໝ່ຳສະເໝີ ບໍ່ເຢັນຫຼາຍ ບໍ່ຮ້ອນຫຼາຍ ປານກາງ ເໝາະແກ່ການພ່ຳເພັງພຽນ ເປັນຫຍັງເຮົາຈະບໍ່ປາຖະໜາຄວາມໝົດສິ້ນອາສະວະນໍ ເຮົາເປັນຜູ້ບໍ່ໂອ້ອວດ ບໍ່ມີມານຍາ ເຮັດຕົນໃຫ້ເປີດເຜີຍຕາມຄວາມເປັນຈິງໃນສາດສະດາ ຫຼືໃນເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍ ເປັນຫຍັງເຮົາຈະບໍ່ປາຖະໜາຄວາມໝົດສິ້ນອາສະວະນໍ ເຮົາເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳ

ເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖິ້ມເປົ່າໃນກຸສົນທຳທັງຫຼາຍຢູ່ ເປັນຫຍັງເຮົາຈະບໍ່ປາຖະໜາຄວາມໝົດສິ້ນອາສະວະນໍ ເຮົາເປັນຜູ້ມີປັນຍາ ຄືປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາ ເຫັນທັງຄວາມເກີດແລະຄວາມດັບ ອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນສຸດທຸກໂດຍຖືກຕ້ອງ ເປັນຫຍັງ ເຮົາຈະບໍ່ປາຖະໜາຄວາມໝົດສິ້ນອາສະວະນໍ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມປາຖະໜາຄວາມໝົດສິ້ນອາສະວະ

**ປະຖົມປັດຖະນາສູດທີ ໕ ຈົບ**

## ໖. ທຸຕິຍະປັດຖະນາສູດ

## ວ່າດ້ວຍຄວາມປາຖະໜາສູດທີ ໒

[໑໓໖] ພິກຂຸທັງຫຼາຍ ພຣະຣາດຊະໂອຣົດອົງໃຫຍ່ຂອງກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ຊົງປະກອບດ້ວຍອົງ ໕ ປະການ ຍ່ອມປາຖະໜາຄວາມເປັນອຸປະຣາດ ອົງ ໕ ປະການ ອັນໃດແດ່ ຄື

ພຣະຣາດຊະໂອຣົດອົງໃຫຍ່ຂອງກະສັດຕາທິຣາດ ຜູ້ໄດ້ຮັບມຸດທາພິເສກແລ້ວໃນໂລກນີ້

໑. ເປັນຜູ້ມີຊາດກຳເນີດດີທັງຝ່າຍພຣະມານດາແລະຝ່າຍພຣະບິດາ ຖືປະຕິສົນທິ ບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ
໒. ເປັນຜູ້ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີສະຫວີວັນຜຸດຜ່ອງຍິ່ງ
໓. ເປັນທີ່ຮັກ ເປັນທີ່ພໍພຣະທະໄທຂອງພຣະມານດາ ແລະພຣະບິດາ
໔. ເປັນທີ່ຮັກ ເປັນທີ່ພໍໃຈຂອງກອງທັບ
໕. ເປັນບັນດິດ ສະຫຼາດ ມີປັນຍາສາມາດຄິດເຫດການທັງອະດີດ ອະນາຄົດ ແລະປັດຈຸບັນໄດ້

ພຣະຣາດຊະໂອຣົດພຣະອົງນັ້ນ ມີດຳຣິແນວນີ້ວ່າ "ເຮົາເປັນຜູ້ມີຊາດດີທັງຝ່າຍພຣະມານດາ ແລະຝ່າຍພຣະບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ເປັນຫຍັງ ເຮົາຈະບໍ່ປາຖະໜາເປັນອຸປະຣາດນໍ ເຮົາເປັນຜູ້ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີສະຫວີວັນຜຸດຜ່ອງຍິ່ງ ເປັນຫຍັງເຮົາຈະບໍ່ປາຖະໜາເປັນອຸປະຣາດນໍ ເຮົາເປັນທີ່ຮັກ ເປັນທີ່ພໍພຣະທະໄທຂອງພຣະມານດາແລະພຣະບິດາ ເປັນ

ຫຍັງເຮົາຈະບໍ່ປາຖະໜາເປັນອຸປະຣາດນໍ ເຮົາເປັນທີ່ຮັກເປັນທີ່ພໍໃຈແຫ່ງກອງທັບ ເປັນຫຍັງເຮົາຈະບໍ່ປາຖະໜາເປັນອຸປະຣາດນໍ ເຮົາເປັນບັນດິດ ສະຫຼາດ ມີປັນຍາ ສາມາດຄິດເຫດການ ທັງອະດີດ ອະນາຄົດ ແລະປັດຈຸບັນໄດ້ ເປັນຫຍັງ ເຮົາຈະບໍ່ປາຖະໜາຄວາມເປັນອຸປະຣາດນໍ

ພິກຂຸທັງຫຼາຍ ພຣະຣາດຊະໂອຣົດອົງໃຫຍ່ຂອງກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ປະກອບດ້ວຍອົງ ໕ ປະການນີ້ແລ ຍ່ອມປາຖະໜາຄວາມເປັນອຸປະຣາດ ສັນໃດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ກໍປາຖະໜາຄວາມໝົດສິ້ນອາສະວະຄືກັນສັນນັ້ນ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສິນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ
໓. ເປັນຜູ້ມີຈິດຕັ້ງໝັ້ນດີໃນສະຕິປັດຖານ ໔
໔. ເປັນຜູ້ພາຮົບຄວາມພຽນ ເພື່ອລະອະກຸສົນທຳ ຯລຯ ບໍ່ຖິ້ມເບົາໃນກຸສົນທຳທັງຫຼາຍຢູ່
໕. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນສຸດທຸກໂດຍຖືກຕ້ອງ

ທ່ານມີຄວາມຄິດແນວນີ້ວ່າ "ເຮົາເປັນຜູ້ມີສິນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ເປັນຫຍັງ ເຮົາຈະບໍ່ປາຖະໜາຄວາມໝົດສິ້ນອາສະວະນໍ ເຮົາເປັນພະຫູສູດ ຊົງສຸຕະສັ່ງສົມສຸຕະ ຯລຯ ແທງຕະຫຼອດດີດ້ວຍທິດຖິ ເປັນຫຍັງ ເຮົາຈະບໍ່ປາຖະໜາຄວາມໝົດສິ້ນອາສະວະນໍ ເຮົາເປັນຜູ້ມີຈິດຕັ້ງໝັ້ນດີແລ້ວໃນສະຕິປັດຖານ ໔ ເປັນຫຍັງ ເຮົາຈະບໍ່ປາຖະໜາຄວາມໝົດສິ້ນອາສະວະນໍ ເຮົາເປັນຜູ້ພາຮົບຄວາມພຽນເພື່ອລະອະກຸສົນທຳ ຯລຯ ບໍ່ຖິ້ມເບົາໃນກຸສົນທຳທັງຫຼາຍຢູ່ ເປັນຫຍັງເຮົາຈະບໍ່ປາຖະ ໜາຄວາມໝົດສິ້ນອາສະວະນໍ ເຮົາເປັນຜູ້ມີປັນຍາ ຯລຯ ໃຫ້ເຖິງຄວາມສິ້ນສຸດທຸກໂດຍຖືກຕ້ອງ ເປັນຫຍັງ ເຮົາຈະບໍ່ປາຖະໜາຄວາມໝົດສິ້ນອາສະວະນໍ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມປາຖະໜາຄວາມໝົດສິ້ນອາສະວະ

**ທຸຕິຍະປັດຖະນາສູດທີ ໖ ຈົບ**

# ໗. ອັບປັງສຸປະຕິສູດ

## ວ່າດ້ວຍຄົນຫຼັບໜ້ອຍ ຕື່ນຫຼາຍ

[໑໙໗] ພິກຂຸທັງຫຼາຍ ບຸກຄົນ ໕ ຈໍາພວກນີ້ ຫຼັບນ້ອຍ ຕື່ນຫຼາຍໃນຣາຕີ

ບຸກຄົນ ໕ ຈໍາພວກໃດແດ່ ຄື

໑. ແມ່ຍິງຫຼັບໜ້ອຍຕື່ນຫຼາຍຍ້ອນປະສົງບຸຣຸດ
໒. ບຸຣຸດຫຼັບໜ້ອຍຕື່ນຫຼາຍຍ້ອນປະສົງແມ່ຍິງ
໓. ໂຈນຫຼັບໜ້ອຍຕື່ນຫຼາຍຍ້ອນປະສົງຈະລັກຊັບ
໔. ພຣະຣາຊາຜູ້ຊົງພໍ່າເພັງພຣະຣາດຊະກິດຊົງຫຼັບໜ້ອຍຕື່ນຫຼາຍ
໕. ພິກຂຸຜູ້ມຸ້ງເຖິງທໍາທີ່ປາສະຈາກສັງໂຍດ°ຫຼັບໜ້ອຍຕື່ນຫຼາຍ

ພິກຂຸທັງຫຼາຍ ບຸກຄົນ ໕ ຈໍາພວກນີ້ແລ ຫຼັບໜ້ອຍ ຕື່ນຫຼາຍໃນຣາຕີ

**ອັບປັງສຸປະຕິສູດທີ ໗ ຈົບ**

# ໘. ພັດຕາທະກະສູດ

## ວ່າດ້ວຍອົງປະກອບຂອງຊ້າງຕົ້ນກິນຫຼາຍ

[໑໙໘] ພິກຂຸທັງຫຼາຍ ຊ້າງຂອງພຣະຣາຊາປະກອບດ້ວຍອົງ ໕ ປະການ ເປັນຊ້າງກິນຫຼາຍ ຂວາງທີ່ ຂີ້ຊະຊາຍທົ່ວ ພໍຖືເປັນເຄື່ອງໝາຍໄດ້ວ່າຊ້າງ ນັບວ່າ ເປັນຊ້າງຕົ້ນ ອົງ ໕ ປະການ ອັນໃດແດ່ ຄື

ຊ້າງຂອງພຣະຣາຊາໃນໂລກນີ້

໑. ເປັນສັດບໍ່ອົດທົນຕໍ່ ຮູບ
໒. ເປັນສັດບໍ່ອົດທົນຕໍ່ ສຽງ
໓. ເປັນສັດບໍ່ອົດທົນຕໍ່ ກິ່ນ
໔. ເປັນສັດບໍ່ອົດທົນຕໍ່ ຣົດ
໕. ເປັນສັດບໍ່ອົດທົນຕໍ່ ໂຜດຖັບພະ

ພິກຂຸທັງຫຼາຍ ຊ້າງຂອງພຣະຣາຊາປະກອບດ້ວຍອົງ ໕ ປະການນີ້ແລ ເປັນຊ້າງກິນຫຼາຍ ຂວາງທີ່ ຂີ້ຊະຊາຍທົ່ວທິບ ພໍຖືເປັນເຄື່ອງໝາຍໄດ້ວ່າຊ້າງ ນັບວ່າເປັນຊ້າງຕົ້ນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ກໍຄືກັນສັນນັ້ນ ເປັນຜູ້ສັນດຸ ຂວາງທີ່ຍໍາຍີຕຽງຕັ່ງ໌ ພໍຖືເປັນເຄື່ອງໝາຍໄດ້ວ່າພິກຂຸ ນັບວ່າເປັນພິກຂຸ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ອົດທົນຕໍ່ ຮູບ
໒. ເປັນຜູ້ບໍ່ອົດທົນຕໍ່ ສຽງ
໓. ເປັນຜູ້ບໍ່ອົດທົນຕໍ່ ກິ່ນ
໔. ເປັນຜູ້ບໍ່ອົດທົນຕໍ່ ຣົດ
໕. ເປັນຜູ້ບໍ່ອົດທົນຕໍ່ ໂຜດຖັບພະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ສັນດຸ ຂວາງທີ່ ຍໍາຍີຕຽງຕັ່ງ ພໍຖືເປັນເຄື່ອງໝາຍໄດ້ວ່າພິກຂຸ ນັບວ່າ ເປັນພິກຂຸ

**ພັດຕາທະກະສູດທີ ໗ ຈົບ**

## ໘. ອັກຂະມະສູດ

## ວ່າດ້ວຍອົງປະກອບຂອງຊ້າງຕົ້ນທີ່ບໍ່ອົດທົນ

[໑໓໘] ພິກຂຸທັງຫຼາຍ ຊ້າງຂອງພຣະຣາຊາປະກອບດ້ວຍອົງ ໕ ປະການ ເປັນຊ້າງບໍ່ຄວນແກ່ພຣະຣາຊາ ບໍ່ຄວນເປັນຊ້າງຕົ້ນ ບໍ່ນັບວ່າ ເປັນຣາດຊະພາຫະນະໂດຍແທ້ ອົງ ໕ ປະການ ອັນໃດແດ່ ຄື

ຊ້າງຂອງພຣະຣາຊາ

໑. ເປັນສັດບໍ່ອົດທົນຕໍ່ ຮູບ
໒. ເປັນສັດບໍ່ອົດທົນຕໍ່ ສຽງ
໓. ເປັນສັດບໍ່ອົດທົນຕໍ່ ກິ່ນ
໔. ເປັນສັດບໍ່ອົດທົນຕໍ່ ຣົດ
໕. ເປັນສັດບໍ່ອົດທົນຕໍ່ ໂຜດຖັບພະ

ຊ້າງຂອງພຣະຣາຊາເປັນສັດບໍ່ອົດທົນຕໍ່ຮູບ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ ເຂົ້າສູ່ສະໜໍລະພູມແລ້ວ ເຫັນກອງທັບຊ້າງ ກອງທັບມ້າ ກອງທັບລົດ ຫຼື ກອງທັບພົນຍ່າງ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດເຂົ້າສູ່ສະໜໍລະພູມໄດ້ ຊ້າງຂອງພຣະຣາຊາເປັນສັດບໍ່ອົດທົນຕໍ່ຮູບ ເປັນແນວນີ້ແລ (໑)

ຊ້າງຂອງພຣະຣາຊາເປັນສັດບໍ່ອົດທົນຕໍ່ສຽງ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ ເຂົ້າສູ່ສະໝໍລະພູມແລ້ວ ໄດ້ຍິນສຽງກອງທັບຊ້າງ ກອງທັບມ້າ ກອງທັບລົດ ກອງທັບພົນຍ່າງ ຫຼື ສຽງກອງ ບັນເດາະ[1] ຫອຍສັງ ມະໂຫຣະທຶກ[2]ທີ່ກະຫຶ່ມ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດເຂົ້າສູ່ສະໝໍລະພູມໄດ້ ຊ້າງຂອງພຣະຣາຊາເປັນສັດບໍ່ອົດທົນຕໍ່ສຽງ ເປັນແນວນີ້ (໒)

ຊ້າງຂອງພຣະຣາຊາເປັນສັດບໍ່ອົດທົນຕໍ່ກິ່ນ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ ເຂົ້າສູ່ສະໝໍລະພູມແລ້ວ ໄດ້ກິ່ນມູດແລະຍູດຂອງຊ້າງພຣະຣາຊາ (ຝ່າຍຂ້າເສິກ) ທີ່ໃຫຍ່ກວ່າເຊິ່ງເຂົ້າມາສູ່ສະໝໍລະພູມ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດເຂົ້າສູ່ສະໝໍລະພູມໄດ້ ຊ້າງຂອງພຣະຣາຊາເປັນສັດບໍ່ອົດທົນຕໍ່ກິ່ນ ເປັນແນວນີ້ແລ (໓)

ຊ້າງຂອງພຣະຣາຊາເປັນສັດບໍ່ອົດທົນຕໍ່ຣົດ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໝໍລະພູມແລ້ວ ບໍ່ໄດ້ກິນອາຫານພຽງ ໑ ຄືນ ໒ ຄືນ ໓ ຄືນ ໔ ຄືນ ຫຼື ໕ ຄືນ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດເຂົ້າສູ່ສະໝໍລະພູມໄດ້ ຊ້າງຂອງພຣະຣາຊາເປັນສັດບໍ່ອົດທົນຕໍ່ຣົດ ເປັນແນວນີ້ແລ (໔)

ຊ້າງຂອງພຣະຣາຊາເປັນສັດບໍ່ອົດທົນຕໍ່ໂຜດຖັບພະ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໝໍລະພູມແລ້ວ ຖືກເຂົາຍິງດ້ວຍລູກສອນ ໑ ຄັ້ງ ໒ ຄັ້ງ ໓ ຄັ້ງ ໔ ຄັ້ງ ຫຼື ໕ ຄັ້ງແລ້ວ ກໍຢຸດນິດ ຫວັ່ນໄຫວ ບໍ່ສາມາດເຂົ້າສູ່ ສະໝໍລະພູມໄດ້ ຊ້າງຂອງພຣະຣາຊາເປັນສັດບໍ່ອົດທົນຕໍ່ໂຜດຖັບພະ ເປັນແນວນີ້ແລ (໕)

ພິກຂຸທັງຫຼາຍ ຊ້າງຂອງພຣະຣາຊາປະກອບດ້ວຍອົງ ໕ ປະການນີ້ ເປັນຊ້າງ ບໍ່ຄວນແກ່ພຣະຣາຊາ ບໍ່ຄວນເປັນຊ້າງຕົ້ນ ບໍ່ນັບວ່າ ເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ກໍຄືກັນສັນນັ້ນ ເປັນຜູ້ບໍ່ຄວນແກ່ຂອງທີ່ເຂົານຳມາຖວາຍ ບໍ່ຄວນແກ່ຂອງຕ້ອນຮັບ ບໍ່ຄວນແກ່ທັກຂິນາ ບໍ່ຄວນແກ່ການກະທຳອັນຊະລີ ບໍ່ເປັນນາບຸນອັນປະເສີດຂອງໂລກ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ອົດທົນຕໍ່ ຮູບ
໒. ເປັນຜູ້ບໍ່ອົດທົນຕໍ່ ສຽງ

໓. ເປັນຜູ້ບໍ່ອົດທົນຕໍ່ ກິ່ນ
໔. ເປັນຜູ້ບໍ່ອົດທົນຕໍ່ ຣົດ
໕. ເປັນຜູ້ບໍ່ອົດທົນຕໍ່ ໂຜດຖັບພະ

ພິກຂຸເປັນຜູ້ບໍ່ອົດທົນຕໍ່ຮູບ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ກຳໜັດໃນຮູບທີ່ເປັນເຫດໃຫ້ກຳໜັດ ບໍ່ສາມາດຕັ້ງຈິດໄວ້ໂດຍຖືກຕ້ອງໄດ້ ພິກຂຸເປັນຜູ້ບໍ່ອົດທົນຕໍ່ຮູບ ເປັນແນວນີ້ແລ (໑)

ພິກຂຸເປັນຜູ້ບໍ່ອົດທົນຕໍ່ສຽງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຟັງສຽງທາງຫູແລ້ວ ກຳໜັດໃນສຽງທີ່ເປັນເຫດໃຫ້ກຳໜັດ ບໍ່ສາມາດຕັ້ງ ຈິດໄວ້ໂດຍຖືກຕ້ອງໄດ້ ພິກຂຸເປັນຜູ້ບໍ່ອົດທົນຕໍ່ສຽງ ເປັນແນວນີ້ແລ (໒)

ພິກຂຸເປັນຜູ້ບໍ່ອົດທົນຕໍ່ກິ່ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ດົມກິ່ນທາງດັງແລ້ວ ກຳໜັດໃນກິ່ນທີ່ເປັນເຫດໃຫ້ກຳໜັດ ບໍ່ສາມາດຕັ້ງ ຈິດໄວ້ໂດຍຖືກຕ້ອງໄດ້ ພິກຂຸເປັນຜູ້ບໍ່ອົດທົນຕໍ່ກິ່ນ ເປັນແນວນີ້ແລ (໓)

ພິກຂຸເປັນຜູ້ບໍ່ອົດທົນຕໍ່ຣົດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຊີມຣົດທາງລີ້ນແລ້ວ ກຳໜັດໃນຣົດທີ່ເປັນເຫດໃຫ້ກຳໜັດ ບໍ່ສາມາດຕັ້ງ ຈິດໄວ້ໂດຍຖືກຕ້ອງໄດ້ ພິກຂຸເປັນຜູ້ບໍ່ອົດທົນຕໍ່ຣົດ ເປັນແນວນີ້ແລ (໔)

ພິກຂຸເປັນຜູ້ບໍ່ອົດທົນຕໍ່ໂຜດຖັບພະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຖືກຕ້ອງໂຜດຖັບພະທາງກາຍແລ້ວ ກຳໜັດໃນໂຜດຖັບພະທີ່ເປັນເຫດໃຫ້ກຳໜັດ ບໍ່ສາມາດຕັ້ງຈິດໄວ້ໂດຍຖືກຕ້ອງໄດ້ ພິກຂຸເປັນຜູ້ບໍ່ອົດທົນຕໍ່ໂຜດຖັບພະ ເປັນແນວນີ້ແລ (໕)

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ບໍ່ຄວນແກ່ຂອງ ທີ່ເຂົານຳມາຖວາຍ ບໍ່ຄວນແກ່ຂອງຕ້ອນຮັບ ບໍ່ຄວນແກ່ທັກຂິນາ ບໍ່ຄວນແກ່ການກະທຳອັນຊະລີ ບໍ່ເປັນນາບຸນອັນປະເສີດຂອງໂລກ

ພິກຂຸທັງຫຼາຍ ຊ້າງຂອງພຣະຣາຊາປະກອບດ້ວຍອົງ ໕ ປະການ ເປັນຊ້າງ ຄວນແກ່ພຣະຣາຊາ ຄວນເປັນຊ້າງຕົ້ນ ນັບວ່າ ເປັນຣາດຊະພາຫະນະໂດຍແທ້ ອົງ ໕ ປະການ ອັນໃດແດ່ ຄື

ຊ້າງຂອງພຣະຣາຊາ

໑. ເປັນສັດອົດທົນຕໍ່ ຮູບ
໒. ເປັນສັດອົດທົນຕໍ່ ສຽງ
໓. ເປັນສັດອົດທົນຕໍ່ ກິ່ນ
໔. ເປັນສັດອົດທົນຕໍ່ ຣົດ
໕. ເປັນສັດອົດທົນຕໍ່ ໂຜດຖັບພະ

ຊ້າງຂອງພຣະຣາຊາເປັນສັດອົດທົນຕໍ່ຮູບ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໜໍລະພູມແລ້ວ ເຫັນກອງທັບຊ້າງ ກອງທັບມ້າ ກອງທັບລົດ ຫຼື ກອງທັບພົນຍ່າງ ກໍບໍ່ຢຸດນິດ ບໍ່ຫວັ່ນໄຫວ ສາມາດເຂົ້າສູ່ສະໜໍລະພູມໄດ້ ຊ້າງຂອງພຣະຣາຊາເປັນສັດອົດທົນຕໍ່ຮູບ ເປັນແນວນີ້ແລ (໑)

ຊ້າງຂອງພຣະຣາຊາເປັນສັດອົດທົນຕໍ່ສຽງ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໜໍລະພູມແລ້ວ ໄດ້ຍິນສຽງກອງທັບຊ້າງ ກອງທັບມ້າ ກອງທັບລົດ ກອງທັບພົນຍ່າງ ຫຼື ສຽງກອງ ບັນເດາະ ຫອຍສັງ ມະໂຫຣະທຶກ ທີ່ກະຫຶ່ມ ກໍບໍ່ຢຸດນິດ ບໍ່ຫວັ່ນໄຫວ ສາມາດເຂົ້າສູ່ສະໜໍລະພູມໄດ້ ຊ້າງຂອງພຣະຣາຊາເປັນສັດອົດທົນຕໍ່ສຽງ ເປັນແນວນີ້ແລ (໒)

ຊ້າງຂອງພຣະຣາຊາເປັນສັດອົດທົນຕໍ່ກິ່ນ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໜໍລະພູມແລ້ວ ໄດ້ກິ່ນມູດແລະຍູດຂອງຊ້າງພຣະຣາຊາ (ຝ່າຍຂ້າເສິກ) ທີ່ໃຫຍ່ກວ່າເຊິ່ງເຂົ້າມາສູ່ສະໜໍລະພູມ ກໍບໍ່ຢຸດນິດ ບໍ່ຫວັ່ນໄຫວ ສາມາດເຂົ້າສູ່ສະໜໍລະພູມໄດ້ ຊ້າງຂອງພຣະຣາຊາເປັນສັດອົດທົນຕໍ່ກິ່ນ ເປັນແນວນີ້ແລ (໓)

ຊ້າງຂອງພຣະຣາຊາເປັນສັດອົດທົນຕໍ່ຣົດ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໜໍລະພູມແລ້ວ ບໍ່ໄດ້ກິນອາຫານແມ່ນພຽງ ໑ ຄືນ ໒ ຄືນ ໓ ຄືນ ໔ ຄືນ ຫຼື ໕ ຄືນ ກໍບໍ່ຢຸດນິດ ບໍ່ຫວັ່ນໄຫວ ສາມາດເຂົ້າ ສູ່ສະໜໍລະພູມໄດ້ ຊ້າງຂອງຣາຊາເປັນສັດອົດທົນຕໍ່ຣົດ ເປັນແນວນີ້ແລ (໔)

ຊ້າງຂອງພຣະຣາຊາເປັນສັດອົດທົນຕໍ່ໂຜດຖັບພະ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໜໍລະພູມແລ້ວ ຖືກເຂົາຍິງດ້ວຍລູກສອນ ໑ ຄັ້ງ ໒ ຄັ້ງ ໓ ຄັ້ງ ໔ ຄັ້ງ ຫຼື ໕ ຄັ້ງ ກໍບໍ່ຢຸດນິດ ບໍ່ຫວັ່ນໄຫວ ສາມາດເຂົ້າສູ່ສະໜໍລະພູມໄດ້ ຊ້າງຂອງພຣະຣາຊາເປັນສັດອົດທົນຕໍ່ໂຜດຖັບພະ ເປັນແນວນີ້ແລ (໕)

ຊ້າງຂອງພຣະຣາຊາປະກອບດ້ວຍອົງ ໕ ປະການນີ້ແລ ເປັນຊ້າງຄວນແກ່ພຣະຣາຊາ ຄວນເປັນຊ້າງຕົ້ນ ນັບວ່າ ເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ກໍຄືກັນສັນນັ້ນ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການເຮັດ ອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ທຳ ໕ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ອົດທົນຕໍ່ ຮູບ
໒. ເປັນຜູ້ອົດທົນຕໍ່ ສຽງ
໓. ເປັນຜູ້ອົດທົນຕໍ່ ກິ່ນ
໔. ເປັນຜູ້ອົດທົນຕໍ່ ຣົດ
໕. ເປັນຜູ້ອົດທົນຕໍ່ ໂຜດຖັບພະ

ພິກຂຸເປັນຜູ້ອົດທົນຕໍ່ຮູບ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ບໍ່ກຳໜັດໃນຮູບທີ່ເປັນເຫດໃຫ້ກຳໜັດ ສາມາດຕັ້ງຈິດໄວ້ໂດຍຖືກຕ້ອງໄດ້ ພິກຂຸເປັນຜູ້ອົດທົນຕໍ່ຮູບ ເປັນແນວນີ້ແລ (໑)

ພິກຂຸເປັນຜູ້ອົດທົນຕໍ່ສຽງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຟັງສຽງທາງຫູແລ້ວ ບໍ່ກຳໜັດໃນສຽງທີ່ເປັນເຫດໃຫ້ກຳໜັດ ສາມາດຕັ້ງຈິດໄວ້ໂດຍຖືກຕ້ອງໄດ້ ພິກຂຸເປັນຜູ້ອົດທົນຕໍ່ສຽງ ເປັນແນວນີ້ແລ (໒)

ພິກຂຸເປັນຜູ້ອົດທົນຕໍ່ກິ່ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ດົມກິ່ນທາງດັງແລ້ວ ບໍ່ກຳໜັດໃນກິ່ນທີ່ເປັນເຫດໃຫ້ກຳໜັດ ສາມາດຕັ້ງຈິດໄວ້ໂດຍຖືກຕ້ອງໄດ້ ພິກຂຸເປັນຜູ້ອົດທົນຕໍ່ກິ່ນ ເປັນແນວນີ້ແລ (໓)

ພິກຂຸເປັນຜູ້ອົດທົນຕໍ່ຣົດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຊິມຣົດທາງລີ້ນແລ້ວ ບໍ່ກຳໜັດໃນຣົດທີ່ເປັນເຫດໃຫ້ກຳໜັດ ສາມາດຕັ້ງ ຈິດໄວ້ໂດຍຖືກຕ້ອງໄດ້ ພິກຂຸເປັນຜູ້ອົດທົນຕໍ່ຣົດ ເປັນແນວນີ້ແລ (໔)

ພິກຂຸເປັນຜູ້ອົດທົນຕໍ່ໂຜດຖັບພະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຖືກຕ້ອງໂຜດຖັບພະທາງກາຍແລ້ວ ບໍ່ກຳໜັດໃນໂຜດຖັບພະທີ່ເປັນເຫດໃຫ້ກຳໜັດ ສາມາດຕັ້ງຈິດໄວ້ໂດຍຖືກຕ້ອງໄດ້ ພິກຂຸເປັນຜູ້ອົດທົນຕໍ່ໂຜດຖັບພະ ເປັນແນວນີ້ແລ (໕)

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

**ອັກຂົມສູດທີ ໙ ຈົບ**

## ໑໐. ໂສຕະສູດ

## ວ່າດ້ວຍອົງປະກອບຂອງຊ້າງຕົ້นທີ່ເຊື່ອຟັງ

[໑໔໐] ພິກຂຸທັງຫຼາຍ ຊ້າງຂອງພຣະຣາຊາປະກອບດ້ວຍອົງ ໕ ປະການ ເປັນຊ້າງຄວນແກ່ພຣະຣາຊາ ຄວນເປັນຊ້າງຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້

ອົງ ໕ ປະການ ອັນໃດແດ່ ຄື
ຊ້າງຂອງພຣະຣາຊາໃນໂລກນີ້

໑. ເປັນສັດເຊື່ອຟັງ
໒. ເປັນສັດຂ້າໄດ້
໓. ເປັນສັດຮັກສາໄດ້
໔. ເປັນສັດອົດທົນໄດ້
໕. ເປັນສັດໄປໄດ້

ຊ້າງຂອງພຣະຣາຊາເປັນສັດເຊື່ອຟັງ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ຕັ້ງໃຈ ໃຝ່ໃຈ ສັງລວມໃຈ ງ່ຽງຫູຟັງເຫດການທີ່ຄວານຊ້າງໃຫ້ເຮັດ ຄື ເຫດການທີ່ເຄີຍເຮັດບໍເຄີຍເຮັດ ຊ້າງຂອງພຣະຣາຊາເປັນສັດເຊື່ອຟັງ ເປັນແນວນີ້ແລ (໑)

ຊ້າງຂອງພຣະຣາຊາເປັນສັດຂ້າໄດ້ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໜໍລະພູມແລ້ວ ຂ້າຊ້າງແດ່ ຂ້າຄວານຊ້າງແດ່ ຂ້າມ້າແດ່ ຂ້າຄົນຂີ່ມ້າແດ່ ທຳລາຍລົດແດ່ ຂ້າພົນລົດແດ່ ຂ້າພົນຍ່າງແດ່ ຊ້າງຂອງພຣະຣາຊາເປັນສັດຂ້າໄດ້ ເປັນແນວນີ້ແລ (໒)

ຊ້າງຂອງພຣະຣາຊາເປັນສັດຮັກສາໄດ້ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໜໍລະພູມແລ້ວ ຮັກສາກາຍສ່ວນໜ້າ ຮັກສາກາຍສ່ວນຫຼັງ ຮັກສາຕີນໜ້າ ຮັກສາຕີນຫຼັງ ຮັກສາຫົວ ຮັກສາຫູ ຮັກສາງາ ຮັກສາງວງ ຮັກສາຫາງ ຮັກສາຄວານຊ້າງ ຊ້າງຂອງພຣະຣາຊາເປັນສັດຮັກສາໄດ້ ເປັນແນວນີ້ແລ (໓)

ຊ້າງຂອງພຣະຣາຊາເປັນສັດອົດທົນໄດ້ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ເຂົ້າສູ່ສະໜໍລະພູມແລ້ວ ອົດທົນຕໍ່ການປະຫານ ດ້ວຍຫອກ ດາບ ລູກສອນ ງ້າວ ສຽງກອງ ບັນເດາະ ຫອຍສັງ ແລະມະໂຫຣະທຶກທີ່ກະຫຶ່ມ ຊ້າງຂອງພຣະຣາຊາເປັນສັດອົດທົນໄດ້ ເປັນແນວນີ້ແລ (໔)

ຊ້າງຂອງພຣະຣາຊາເປັນສັດໄປໄດ້ ເປັນແນວໃດ?

ຄື ຊ້າງຂອງພຣະຣາຊາໃນໂລກນີ້ໄປສູ່ທິດທີ່ຄວານຊ້າງໄສໄປ ຄືທິດທີ່ເຄີຍໄປ ຫຼື ທິດທີ່ຍັງບໍ່ເຄີຍໄປໄດ້ໂດຍທັນທີ ຊ້າງຂອງພຣະຣາຊາເປັນສັດໄປໄດ້ ເປັນແນວນີ້ແລ (໕)

ພິກຂຸທັງຫຼາຍ ຊ້າງຂອງພຣະຣາຊາປະກອບດ້ວຍອົງ ໕ ປະການນີ້ແລ ເປັນຊ້າງຄວນແກ່ພຣະຣາຊາ ຄວນເປັນຊ້າງຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ກໍຄືກັນສັນນັ້ນ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການເຮັດອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ເຊື່ອຟັງ
໒. ເປັນຜູ້ຂ້າໄດ້
໓. ເປັນຜູ້ຮັກສາໄດ້

໔. ເປັນຜູ້ອົດທົນໄດ້
໕. ເປັນຜູ້ໄປໄດ້

ພິກຂຸເປັນຜູ້ເຊື່ອຟັງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຕັ້ງໃຈ ໃຝ່ໃຈ ສັງລວມໃຈ ງ່ຽງໂສດສະດັບທຳໃນເມື່ອຜູ້ອື່ນສະແດງທຳວິໄນທີ່ຕະຖາຄົດປະກາດແລ້ວ ພິກຂຸເປັນຜູ້ເຊື່ອຟັງ ເປັນແນວນີ້ແລ (໑)

ພິກຂຸເປັນຜູ້ຂ້າໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຮັບກາມວິຕົກທີ່ເກີດຂຶ້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ຯລຯ ບໍ່ຮັບພະຍາບາດວິຕົກທີ່ເກີດຂຶ້ນ ຯລຯ ບໍ່ຮັບ ວິຫິງສາວິຕົກທີ່ເກີດຂຶ້ນ ຯລຯ ບໍ່ຮັບບາບອະກຸສົນທຳທີ່ເກີດຂຶ້ນແລ້ວເກີດຂຶ້ນອີກ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ໑ ພິກຂຸເປັນຜູ້ຂ້າໄດ້ ເປັນແນວນີ້ແລ (໒)

ພິກຂຸເປັນຜູ້ຮັກສາໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ບໍ່ໂຮມຖື ບໍ່ແຍກຖື ປະຕິບັດເພື່ອຄວາມສັງລວມໃນຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄືອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ທຳມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ປະຕິບັດເພື່ອສັງລວມໃນມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄືອະພິດຊາແລະ ໂທມະນັດຄອບງຳໄດ້ ຈຶ່ງຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸເປັນຜູ້ຮັກສາໄດ້ ເປັນແນວນີ້ແລ (໓)

ພິກຂຸເປັນຜູ້ອົດທົນໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ອົດທົນຕໍ່ຄວາມໜາວ ຄວາມຮ້ອນ ຄວາມຫິວກະຫາຍ ອົດທົນຕໍ່ການຖືກເຮືອດ ຍຸງ ລົມ ແດດ ແລະສັດເລືອຄານທັງຫຼາຍລົບກວນ ອົດທົນຕໍ່ຄຳເວົ້າຫຍາບຄາຍຮ້າຍແຮງຕ່າງ ໆ ເປັນຜູ້ອົດກັ້ນເວທະນາທັງຫຼາຍອັນມີໃນຮ່າງກາຍທີ່ເກີດຂຶ້ນແລ້ວ ເປັນທຸກກ້າແຂງ ເຈັບປວດ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດ ພິກຂຸເປັນຜູ້ອົດທົນໄດ້ ເປັນແນວນີ້ແລ (໔)

ພິກຂຸເປັນຜູ້ໄປໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ່ອມໄປສູ່ທິດທີ່ບໍ່ເຄີຍໄປຕະຫຼອດໄລຍະເວລາອັນຍາວນານນີ້ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມໝົດສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ ພິກຂຸເປັນຜູ້ໄປໄດ້ ເປັນແນວນີ້ແລ (໕)

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ຄວນແກ່ຂອງ ທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນ ນາບຸນອັນປະເສີດຂອງໂລກ

**ໂສຕະສູດທີ ໑໐ ຈົບ**

**ຣາຊະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໕. ຕິກັນຖະກິວັກ

## ໝວດວ່າດ້ວຍປ່າຕິກັນຖະກີ

## ໑. ອະວະຊານາຕິສູດ

### ວ່າດ້ວຍບຸກຄົນຜູ້ໃຫ້ແລ້ວດູໝິ່ນ

[໑໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນ ໕ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ບຸກຄົນ ໕ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນໃຫ້ແລ້ວດູໝິ່ນ
໒. ບຸກຄົນດູໝິ່ນ ຍ້ອນຢູ່ຮ່ວມກັນ
໓. ບຸກຄົນຜູ້ເຊື່ອງ່າຍ
໔. ບຸກຄົນຜູ້ໂລເລ
໕. ບຸກຄົນຜູ້ຈ້ຳ ຫຼົງງົມງວາຍ

ບຸກຄົນໃຫ້ແລ້ວດູໝິ່ນ ເປັນແນວໃດ?

ຄື ບຸກຄົນໃນໂລກນີ້ໃຫ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ແກ່ບຸກຄົນໃດ ເຂົາຄິດແນວນີ້ວ່າ "ເຮົາໃຫ້ ຜູ້ນີ້ຮັບ ໃຫ້ແລ້ວ ດູໝິ່ນບຸກຄົນນັ້ນ ບຸກຄົນໃຫ້ແລ້ວດູໝິ່ນ ເປັນແນວນີ້ແລ

ບຸກຄົນດູໝິ່ນ ຍ້ອນຢູ່ຮ່ວມກັນ ເປັນແນວໃດ?

ຄື ບຸກຄົນໃນໂລກນີ້ຢູ່ຮ່ວມກັບບຸກຄົນເປັນເວລາ ໒ ປີ ຫຼື ໓ ປີ ດູໝິ່ນຜູ້ນັ້ນ ຍ້ອນຢູ່ຮ່ວມກັນ ບຸກຄົນດູໝິ່ນຍ້ອນຢູ່ຮ່ວມກັນ ເປັນແນວນີ້ແລ

ບຸກຄົນຜູ້ເຊື່ອງ່າຍ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເມື່ອເຂົາກ່າວຄຸນຫຼືໂທດຂອງຜູ້ອື່ນຢູ່ ກໍນ້ອມໃຈເຊື່ອໂດຍທັນທີຢ່າງແນ່ນອນ ບຸກຄົນຜູ້ເຊື່ອງ່າຍ ເປັນແນວນີ້ແລ

ບຸກຄົນຜູ້ໂລເລ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສັດທາໜ້ອຍ ມີຄວາມພັກດີໜ້ອຍ ມີຄວາມຮັກໜ້ອຍ ມີຄວາມເຫຼື້ອມໃສໜ້ອຍ ບຸກຄົນຜູ້ໂລເລ ເປັນແນວນີ້ແລ

ບຸກຄົນຜູ້ຈ້ຳ ຫຼືງົມງວາຍ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ບໍ່ຮູ້ກຸສົນທຳແລະອະກຸສົນທຳ ບໍ່ຮູ້ທຳທີ່ມີໂທດແລະທຳທີ່ບໍ່ມີໂທດ ບໍ່ຮູ້ທຳທີ່ຊົ່ວແລະທຳທີ່ປະນີດ ບໍ່ຮູ້ທຳດຳແລະທຳຂາວ[๑] ບຸກຄົນຜູ້ຈ້ຳຫຼືງົມງວາຍ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນ ໕ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

**ອະວະຊານາຕິສູດທີ ໑ ຈົບ**

## ໘. ອາຣະພະຕິສູດ

## ວ່າດ້ວຍບຸກຄົນຜູ້ຕ້ອງອາບັດ

[໑໔໘] ພິກຂຸທັງຫຼາຍ ບຸກຄົນ ໕ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ບຸກຄົນ ໕ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນທຳວິໄນນີ້ຕ້ອງອາບັດ[๒] ມີວິບປະຕິສານ (ຄວາມຮ້ອນໃຈ) ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ[๓] ປັນຍາວິມຸດຕິອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ

໒. ບຸກຄົນລາງຄົນໃນທຳວິໄນນີ້ຕ້ອງອາບັດ ແຕ່ບໍ່ມີວິບປະຕິສານ ບໍ່ຮູ້ແຈ້ງ ເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ

໓. ບຸກຄົນລາງຄົນໃນທຳວິໄນນີ້ບໍ່ຕ້ອງອາບັດ ແຕ່ມີວິບປະຕິສານ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳ ທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ

໔. ບຸກຄົນລາງຄົນໃນທຳວິໄນນີ້ບໍ່ຕ້ອງອາບັດ ແລະບໍ່ມີວິບປະຕິສານ ແຕ່ບໍ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳ ທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ

໕. ບຸກຄົນລາງຄົນໃນທຳວິໄນນີ້ບໍ່ຕ້ອງອາບັດ ບໍ່ມີວິບປະຕິສານ ແລະຮູ້ແຈ້ງ ເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳ ທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ບັນດາບຸກຄົນ ໕ ຈຳພວກນັ້ນ[໑] ບຸກຄົນໃດຕ້ອງອາບັດ ມີວິບປະຕິສານ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ບຸກຄົນນັ້ນເພິ່ງເປັນຜູ້ຄວນຖືກກ່າວຕັກເຕືອນແນວນີ້ວ່າ "ອາສະວະທີ່ເກີດຍ້ອນຄວາມການຕ້ອງອາບັດຂອງທ່ານຍັງມີຢູ່ ອາສະວະທີ່ເກີດຍ້ອນວິບປະຕິສານຂອງທ່ານຍັງຈະເລີນຢູ່ ຂໍທ່ານຈົ່ງລະອາສະວະທີ່ເກີດຍ້ອນການຕ້ອງອາບັດ[໒] ຈົ່ງບັນເທົາອາສະວະທີ່ເກີດຍ້ອນວິບປະຕິສານແລ້ວຈົ່ງຈະເລີນຈິດແລະປັນຍາ[໓] ຍ້ອນການຈະເລີນ ແນວນີ້ ທ່ານກໍຈັກເປັນຜູ້ທັດທຽມກັບບຸກຄົນຈຳພວກທີ່ ໕[໔] ນັ້ນ (໑)

ບຸກຄົນໃດຕ້ອງອາບັດ ແຕ່ບໍ່ມີວິບປະຕິສານ ບໍ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ບຸກຄົນນັ້ນເພິ່ງເປັນຜູ້ຄວນຖືກກ່າວຕັກເຕືອນແນວນີ້ວ່າ "ອາສະວະທີ່ເກີດຍ້ອນການຕ້ອງອາບັດຂອງທ່ານຍັງມີຢູ່ ອາສະວະທີ່ເກີດຍ້ອນວິບປະຕິສານຂອງທ່ານບໍ່ຈະເລີນ ຂໍທ່ານຈົ່ງລະອາສະວະທີ່ເກີດຍ້ອນການຕ້ອງອາບັດແລ້ວຈົ່ງຈະເລີນ ຈິດແລະປັນຍາ ຍ້ອນການຈະເລີນແນວນີ້ ທ່ານກໍຈັກເປັນຜູ້ທັດທຽມກັບບຸກຄົນຈຳພວກທີ ໕ ນັ້ນ (໒)

ບຸກຄົນໃດບໍ່ຕ້ອງອາບັດ ແຕ່ມີວິບປະຕິສານ ແລະບໍ່ຮູ້ແຈ້ງເຈໂຕວຸມິດຕິ ປັນຍາວິມຸດຕິອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ບຸກຄົນນັ້ນເພິ່ງເປັນຜູ້ຄວນຖືກກ່າວຕັກເຕືອນແນວນີ້ວ່າ "ອາສະວະທີ່ເກີດຍ້ອນການຕ້ອງອາບັດຂອງທ່ານບໍ່ມີ ແຕ່ອາສະວະທີ່ເກີດຍ້ອນວິບປະຕິສານຂອງທ່ານຍັງຈະເລີນຢູ່ ຂໍທ່ານຈົ່ງບັນເທົາອາສະວະທີ່ເກີດຍ້ອນວິບປະຕິສານແລ້ວຈົ່ງຈະເລີນຈິດແລະປັນຍາ ຍ້ອນການຈະເລີນແນວນີ້ ທ່ານກໍຈັກເປັນຜູ້ທັດທຽມກັບບຸກຄົນຈຳພວກທີ ໕ ນັ້ນ (໓)

ບຸກຄົນໃດບໍ່ຕ້ອງອາບັດ ແລະບໍ່ມີວິບປະຕິສານ ແຕ່ບໍ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ບຸກຄົນນັ້ນເພິ່ງເປັນຜູ້ຄວນຖືກກ່າວຕັກເຕືອນແນວນີ້ວ່າ "ອາສະວະທີ່ເກີດຍ້ອນການຕ້ອງອາບັດ ຂອງທ່ານບໍ່ມີອາສະວະທີ່ເກີດຍ້ອນວິບປະຕິສານຂອງທ່ານກໍບໍ່ຈະເລີນ ຂໍທ່ານຈົ່ງຈະເລີນຈິດແລະປັນຍາ ຍ້ອນການຈະເລີນແນວນີ້ ທ່ານກໍຈັກເປັນຜູ້ທັດທຽມກັບບຸກຄົນຈຳພວກທີ ໕ ນັ້ນ (໔)

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລ ຖືກຕັກເຕືອນພໍ່າສອນໂດຍທຽບກັບບຸກຄົນຈຳພວກທີ ໕ ນັ້ນ ແນວນີ້ ຍ່ອມບັນລຸຄວາມໝົດສິ້ນອາສະວະໂດຍລຳດັບ

**ອາຣະພະຕິສູດທີ ໘ ຈົບ**

# ໓. ສາຣັນທະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ສາຣັນທະເຈດີ

[໑໔໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄານສາລາ ປ່າມະຫາວັນ ເຂດນະຄອນເວສາລີ ດັ່ງນັ້ນ ເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນເມືອງເວສາລີ ສະໄໝນັ້ນ ເຈົ້າລິດສະຫວີປະມານ ໕໐໐ ພຣະອົງ ນັ່ງປະຊຸມກັນຢູ່ທີ່ສາຣັນທະເຈດີ ໄດ້ສົນທະນາກັນວ່າ

ຄວາມຜາກົດແຫ່ງແກ້ວ ໕ ປະການ ຫາໄດ້ຍາກໃນໂລກ
ຄວາມຜາກົດແຫ່ງແກ້ວ ໕ ປະການ ອັນໃດແດ່ ຄື

| | | |
|---|---|---|
| ໑. ຄວາມຜາກົດແຫ່ງ | ຊ້າງແກ້ວ | ຫາໄດ້ຍາກໃນໂລກ |
| ໒. ຄວາມຜາກົດແຫ່ງ | ມ້າແກ້ວ | ຫາໄດ້ຍາກໃນໂລກ |
| ໓. ຄວາມຜາກົດແຫ່ງ | ມະນີແກ້ວ | ຫາໄດ້ຍາກໃນໂລກ |
| ໔. ຄວາມຜາກົດແຫ່ງ | ນາງແກ້ວ | ຫາໄດ້ຍາກໃນໂລກ |
| ໕. ຄວາມຜາກົດແຫ່ງ | ຄະຫະບໍດີແກ້ວ | ຫາໄດ້ຍາກໃນໂລກ |

ຄວາມຜາກົດແຫ່ງແກ້ວ ໕ ປະການນີ້ ຫາໄດ້ຍາກໃນໂລກ

ດັ່ງນັ້ນ ເຈົ້າລິດສະຫວີເຫຼົ່ານັ້ນໄດ້ສັ່ງຄົນໄປຖ້າດັກທາງໂດຍຮັບສັ່ງວ່າ "ພໍ່ຜູ້ຈະເລີນ ເມື່ອທ່ານເຫັນພຣະຜູ້ມີພຣະພາກເຈົ້າສະເດັດມາ ເພິ່ງມາບອກແກ່ພວກເຮົາ

ບຸຣຸດນັ້ນໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດມາແຕ່ໄກ ຈຶ່ງເຂົ້າໄປຫາເຈົ້າລິດສະຫວີເຫຼົ່ານັ້ນຮອດບ່ອນຢູ່ ແລ້ວທູນວ່າ "ຂໍເດຊະ ພຣະຜູ້ມີພຣະພາກເຈົ້າອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ກຳລັງສະເດັດມາ ຂ້ານ້ອຍ ຂໍພຣະອົງຈົ່ງຮູ້ກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ

ລຳດັບນັ້ນ ເຈົ້າລິດສະຫວີເຫຼົ່ານັ້ນໄດ້ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ປະທັບຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າຊົງພຣະກະລຸນາ ສະເດັດເຂົ້າໄປສູ່ສາຣັນທະເຈດີເທີ້ນ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບອາຣາດທະນາໂດຍດຸດສະນີພາບແລ້ວໄດ້ສະເດັດເຂົ້າໄປສູ່ສາຣັນທະເຈດີ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ໄດ້ຕັດຖາມເຈົ້າລິດສະຫວີເຫຼົ່ານັ້ນວ່າ

"ເຈົ້າລິດສະຫວີທັງຫຼາຍ ເວລານີ້ ພວກທ່ານນັ່ງສົນທະນາກັນດ້ວຍເລື້ອງອັນໃດ ເວົ້າເລື້ອງອັນໃດຄ້າງໄວ້

ເຈົ້າລິດສະຫວີເຫຼົ່ານັ້ນຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ເມື່ອຂ້າພຣະອົງທັງຫຼາຍນັ່ງປະຊຸມກັນຢູ່ບ່ອນນີ້ ໄດ້ສົນທະນາກັນວ່າ "ຄວາມຜາກົດແຫ່ງແກ້ວ ໕ ປະການ ຫາໄດ້ຍາກໃນໂລກ

ຄວາມຜາກົດແຫ່ງແກ້ວ ໕ ປະການ ອັນໃດແດ່ ຄື

໑. ຄວາມຜາກົດແຫ່ງ ຊ້າງແກ້ວ ຫາໄດ້ຍາກໃນໂລກ
໒. ຄວາມຜາກົດແຫ່ງ ມ້າແກ້ວ ຫາໄດ້ຍາກໃນໂລກ
໓. ຄວາມຜາກົດແຫ່ງ ມະນີແກ້ວ ຫາໄດ້ຍາກໃນໂລກ
໔. ຄວາມຜາກົດແຫ່ງ ນາງແກ້ວ ຫາໄດ້ຍາກໃນໂລກ
໕. ຄວາມຜາກົດແຫ່ງ ຄະຫະບໍດີແກ້ວ ຫາໄດ້ຍາກໃນໂລກ

ຄວາມຜາກົດແຫ່ງແກ້ວ ໕ ປະການນີ້ ຫາໄດ້ຍາກໃນໂລກ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເຈົ້າລິດສະຫວີທັງຫຼາຍເປັນຜູ້ມຸ້ງກາມ[໑]ແທ້ນໍ ສົນທະນາກັນແຕ່ເລື້ອງກາມ ເຈົ້າລິດສະຫວີທັງຫຼາຍ ຄວາມຜາກົດແຫ່ງແກ້ວ ໕ ປະການ ຫາໄດ້ຍາກໃນໂລກ

ຄວາມຜາກົດແຫ່ງແກ້ວ ໕ ປະການ ອັນໃດແດ່ ຄື

໑. ຄວາມຜາກົດແຫ່ງຕະຖາຄົດອະຣະຫັນຕະສໍາມາສໍາພຸດທະເຈົ້າ ຫາໄດ້ຍາກໃນໂລກ
໒. ບຸກຄົນຜູ້ສະແດງທໍາວິໄນທີ່ຕະຖາຄົດປະກາດໄວ້ ຫາໄດ້ຍາກໃນໂລກ
໓. ບຸກຄົນຜູ້ຮູ້ແຈ້ງທໍາວິໄນທີ່ຕະຖາຄົດປະກາດໄວ້ເຊິ່ງຜູ້ອື່ນສະແດງແລ້ວ ຫາໄດ້ຍາກໃນໂລກ
໔. ບຸກຄົນຜູ້ຮູ້ແຈ້ງທໍາວິໄນທີ່ຕະຖາຄົດປະກາດໄວ້ເຊິ່ງຜູ້ອື່ນສະແດງແລ້ວ ເປັນຜູ້ປະຕິບັດທໍາສົມຄວນແກ່ທໍາ[໒]ຫາໄດ້ຍາກໃນໂລກ
໕. ກະຕັນຍູກະຕະເວທີບຸກຄົນ[໓]ຫາໄດ້ຍາກໃນໂລກ

ເຈົ້າລິດສະຫວີທັງຫຼາຍ ຄວາມຜາກົດແຫ່ງແກ້ວ ໕ ປະການນີ້ແລ ຫາໄດ້ຍາກໃນໂລກ

**ສາຣັນທະສູດທີ ໓ ຈົບ**

# ໔. ຕິກັນຖະກີສູດ

## ວ່າດ້ວຍພຣະທຳເທດສະໜາທີ່ປ່າຕິກັນຖະກີວັນ

[໑໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ປ່າຕິກັນຖະກີວັນ ເຂດເມືອງສາເກດ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ

໑. ພິກຂຸເພິ່ງມີສັນຍາວ່າ ປະຕິກູນໃນສິ່ງບໍ່ປະຕິກູນ[໕]ຕາມການອັນຄວນ
໒. ພິກຂຸເພິ່ງມີສັນຍາວ່າ ບໍ່ປະຕິກູນໃນສິ່ງປະຕິກູນ[໖]ຕາມການອັນຄວນ
໓. ພິກຂຸເພິ່ງມີສັນຍາວ່າ ປະຕິກູນໃນສິ່ງບໍ່ປະຕິກູນແລະສິ່ງປະຕິກູນ ຕາມການອັນຄວນ
໔. ພິກຂຸເພິ່ງມີສັນຍາວ່າ ບໍ່ປະຕິກູນໃນສິ່ງປະຕິກູນແລະສິ່ງບໍ່ປະຕິກູນ ຕາມການອັນຄວນ
໕. ພິກຂຸເພິ່ງເວັ້ນສິ່ງທັງສອງນັ້ນ ຄືສິ່ງບໍ່ປະຕິກູນແລະສິ່ງປະຕິກູນແລ້ວ ເປັນຜູ້ມີ ອຸເປກຂາ[໗] ມີສະຕິສຳປະຊັນຍະຢູ່ຕາມການອັນຄວນ

ພິກຂຸເພິ່ງມີສັນຍາວ່າປະຕິກູນໃນສິ່ງບໍ່ປະຕິກູນຢູ່ ຍ້ອນອາໄສອຳນາດປະໂຫຍດອັນໃດ

ພິກຂຸເພິ່ງມີສັນຍາວ່າປະຕິກູນໃນສິ່ງບໍ່ປະຕິກູນຢູ່ ຍ້ອນອາໄສອຳນາດປະໂຫຍດນີ້ວ່າ "ຄວາມກຳໜັດໃນທຳທີ່ເປັນເຫດໃຫ້ກຳໜັດ ຢ່າເກີດຂຶ້ນແກ່ເຮົາ

ພິກຂຸເພິ່ງມີສັນຍາວ່າບໍ່ປະຕິກູນໃນສິ່ງປະຕິກູນຢູ່ ຍ້ອນອາໄສອຳນາດປະໂຫຍດອັນໃດ

ພິກຂຸເພິ່ງມີສັນຍາວ່າບໍ່ປະຕິກູນໃນສິ່ງປະຕິກູນຢູ່ ຍ້ອນອາໄສອຳນາດປະໂຫຍດນີ້ວ່າ "ຄວາມຂັດເຄືອງໃນທຳທີ່ເປັນເຫດໃຫ້ຂັດເຄືອງ ຢ່າເກີດຂຶ້ນແກ່ເຮົາ

ພິກຂຸເພິ່ງມີສັນຍາວ່າປະຕິກູນໃນສິ່ງບໍ່ປະຕິກູນແລະສິ່ງປະຕິກູນຢູ່ຍ້ອນອາໄສອຳນາດປະໂຫຍດອັນໃດ

ພິກຂຸເພິ່ງມີສັນຍາວ່າບໍ່ປະຕິກູນໃນສິ່ງບໍ່ປະຕິກູນແລະສິ່ງປະຕິກູນຢູ່ ຍ້ອນອາໄສອຳນາດປະໂຫຍດນີ້ວ່າ "ຄວາມກຳໜັດໃນທຳທີ່ເປັນເຫດໃຫ້ກຳໜັດຢ່າເກີດຂຶ້ນແກ່ເຮົາ ຄວາມຂັດເຄືອງໃນທຳທີ່ເປັນເຫດໃຫ້ຂັດເຄືອງ ຢ່າເກີດຂຶ້ນແກ່ເຮົາ

ພິກຂຸເພິ່ງມີສັນຍາວ່າບໍ່ປະຕິກູນໃນສິ່ງປະຕິກູນແລະສິ່ງບໍ່ປະຕິກູນຢູ່ ຍ້ອນອາໄສອຳນາດປະໂຫຍດອັນໃດ

ພິກຂຸເພິ່ງມີສັນຍາວ່າບໍ່ປະຕິກູນໃນສິ່ງປະຕິກູນແລະສິ່ງບໍ່ປະຕິກູນຢູ່ ຍ້ອນອາໄສອຳນາດປະໂຫຍດນີ້ວ່າ "ຄວາມຂັດເຄືອງໃນທຳທີ່ເປັນເຫດໃຫ້ຂັດເຄືອງ ຢ່າເກີດຂຶ້ນແກ່ເຮົາ ຄວາມກຳໜັດໃນທຳເປັນເຫດໃຫ້ກຳໜັດ ຢ່າເກີດຂຶ້ນແກ່ເຮົາ

ພິກຂຸເພິ່ງເວັ້ນສິ່ງທັງສອງນັ້ນ ຄື ສິ່ງບໍ່ປະຕິກູນແລະສິ່ງປະຕິກູນແລ້ວ ເປັນຜູ້ມີອຸເປກຂາມີສະຕິສຳປະຊັນຍະຢູ່ ຍ້ອນອາໄສອຳນາດປະໂຫຍດອັນໃດ

ພິກຂຸເພິ່ງເວັ້ນສິ່ງທັງສອງນັ້ນ ຄືສິ່ງບໍ່ປະຕິກູນແລະສິ່ງປະຕິກູນແລ້ວ ເປັນຜູ້ມີອຸເປກຂາມີສະຕິສຳປະຊັນຍະຢູ່ ຍ້ອນອາໄສອຳນາດປະໂຫຍດນີ້ວ່າ "ຄວາມກຳໜັດໃນທຳທີ່ເປັນເຫດໃຫ້ກຳໜັດໃນອາລົມໃດ ໆ ໃນສ່ວນໃດ ໆ ແມ່ນມີປະມານໜ້ອຍ ຢ່າເກີດຂຶ້ນແກ່ເຮົາ ຄວາມຂັດເຄືອງໃນທຳທີ່ເປັນເຫດໃຫ້ຂັດເຄືອງ ໃນອາລົມໃດ ໆ ໃນສ່ວນໃດ ໆ ແມ່ນມີປະມານໜ້ອຍຢ່າເກີດຂຶ້ນແກ່ເຮົາ ຄວາມຫຼົງໃນທຳທີ່ເປັນເຫດໃຫ້ຫຼົງ ໃນອາລົມໃດ ໆ ໃນສ່ວນໃດ ໆ ແມ່ນມີປະມານໜ້ອຍ ຢ່າເກີດຂຶ້ນແກ່ເຮົາ

**ຕິກັນທະກິສູດທີ ໔ ຈົບ**

## ໕. ນິຣະຍະສູດ

### ວ່າດ້ວຍທຳທີ່ເປັນເຫດໃຫ້ຕົກນະຮົກ

[໑໔໕] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ
໒. ເປັນຜູ້ລັກຊັບ
໓. ເປັນຜູ້ປະພຶດຜິດໃນກາມ
໔. ເປັນຜູ້ເວົ້າຕົວະ
໕. ເປັນຜູ້ເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໔. ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໕. ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ນິຣະຍະສູດທີ ໕ ຈົບ**

## ໓. ມິດຕະສູດ

## ວ່າດ້ວຍພິກຂຸຜູ້ຄວນຄົບເປັນມິດ

[໑໔໓] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ບໍ່ຄວນຄົບເປັນມິດ

ທຳ ໕ ປະການ ອັນໃດແດ່ ຄື

໑. ໃຊ້ໃຫ້ເຮັດວຽກງານ[1]
໒. ກໍ່ອະທິກອນ[2]
໓. ໂກດຕໍ່ພິກຂຸຜູ້ເປັນປະທານ
໔. ທ່ຽວຈາຣິກໄປໃນສະຖານທີ່ບໍ່ສົມຄວນຕະຫຼອດການລະນານ
໕. ບໍ່ສາມາດຊີ້ແຈ່ງໃຫ້ພິກຂຸເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮໍາໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາຕາມການອັນຄວນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ບໍ່ຄວນຄົບເປັນມິດ

ພິກຂຸທັງຫຼາຍ ສ່ວນພິກຂຸປະກອບດ້ວຍທຳ ໕ ປະການ ຄວນຄົບເປັນມິດ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ໃຊ້ໃຫ້ເຮັດວຽກງານ
໒. ບໍ່ກໍ່ອະທິກອນ
໓. ບໍ່ໂກດຕໍ່ພິກຂຸຜູ້ເປັນປະທານ
໔. ບໍ່ທ່ຽວຈາຣິກໄປໃນສະຖານທີ່ບໍ່ສົມຄວນຕະຫຼອດການລະນານ
໕. ສາມາດຊີ້ແຈ່ງໃຫ້ພິກຂຸເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍອຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາຕາມການອັນຄວນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຄວນຄົບເປັນມິດ

**ມິດຕະສູດທີ ໖ ຈົບ**

## ໗. ອະສັບປຸຣິສະທານະສູດ

## ວ່າດ້ວຍອະສັບປຸຣິສະທານ

[໑໔໗] ພິກຂຸທັງຫຼາຍ ອະສັບປຸຣິສະທານະ (ທານຂອງອະສັດຕະບຸຣຸດ) ໕ ປະການນີ້

ອະສັບປຸຣິສະທານ ໕ ປະການ ອັນໃດແດ່ ຄື

໑. ໃຫ້ໂດຍບໍ່ເຄົາລົບ[1]
໒. ໃຫ້ໂດຍຄວາມບໍ່ອ່ອນນ້ອມ[2]
໓. ບໍ່ໃຫ້ດ້ວຍມືຕົນເອງ
໔. ໃຫ້ຂອງທີ່ເປັນເດນ
໕. ບໍ່ເຫັນຜົນທີ່ຈະເພິ່ງມາເຖິງກໍໃຫ້

ພິກຂຸທັງຫຼາຍ ອະສັບປຸຣິສະທານ ໕ ປະການນີ້ແລ

ພິກຂຸທັງຫຼາຍ ສັບປຸຣິສະທານ(ທານຂອງສັດຕະບຸຣຸດ) ໕ ປະການນີ້
ສັບປຸຣິສະທານ ໕ ປະການ ອັນໃດແດ່ ຄື

໑. ໃຫ້ໂດຍເຄົາລົບ[1]
໒. ໃຫ້ໂດຍຄວາມອ່ອນນ້ອມ
໓. ໃຫ້ດ້ວຍມືຕົນເອງ

໔. ໃຫ້ຂອງທີ່ບໍ່ເປັນເດນ
໕. ເຫັນຜົນທີ່ຈະເພິ່ງມາເຖິງຈຶ່ງໃຫ້[๔]

ພິກຂຸທັງຫຼາຍ ສັບປຸຣິສະທານະ ໕ ປະການນີ້ແລ

**ອະສັບປຸຣິສະທານະສູດທີ ໗ ຈົບ**

## ๘. ສັບປຸຣິສະທານະສູດ

### ວ່າດ້ວຍສັບປຸຣິສະທາ

[໑໔๘] ພິກຂຸທັງຫຼາຍ ສັບປຸຣິສະທານ ໕ ປະການນີ້

ສັບປຸຣິສະທານະ ໕ ປະການ ອັນໃດແດ່ ຄື

໑. ໃຫ້ທານດ້ວຍສັດທາ
໔. ໃຫ້ທານໂດຍເຄົາລົບ
໓. ໃຫ້ທານຕາມການອັນຄວນ
໔. ເປັນຜູ້ມີຈິດອະນຸເຄາະໃຫ້ທານ
໕. ໃຫ້ທານບໍ່ກະທົບຕົນແລະຜູ້ອື່ນ[๑]

ພິກຂຸທັງຫຼາຍ ສັດຕະບຸຣຸດເມື່ອໃຫ້ທານດ້ວຍສັດທາແລ້ວ ຍ່ອມເປັນຜູ້ຮັ່ງມີ ມີຊັບ ຫຼາຍ ມີໂພຄະຫຼາຍ ແລະເປັນຜູ້ມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີສະຫວີວັນຜຸດຜ່ອງຍິ່ງໃນບ່ອນທີ່ທານນັ້ນອອກຜົນ

ເມື່ອໃຫ້ທານໂດຍເຄົາລົບແລ້ວ ຍ່ອມເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ແລະເປັນຜູ້ທີ່ບຸດ ພັນລະຍາ ຂ້າທາດ ຄົນໃຊ້ ແລະກຳມະກອນຕັ້ງໃຈຟັງດ້ວຍດີ ງ່ຽງໂສດສະດັບ ຕັ້ງໃຈໃຝ່ຮູ້

ເມື່ອໃຫ້ທານຕາມການອັນຄວນແລ້ວ ຍ່ອມເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ແລະເປັນຜູ້ມີຄວາມປາຖະໜາທີ່ເກີດຂຶ້ນຕາມການບໍລິບູນໃນບ່ອນທີ່ທານນັ້ນອອກຜົນ

ເມື່ອເປັນຜູ້ມີຈິດອະນຸເຄາະໃຫ້ທານແລ້ວ ຍ່ອມເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ແລະເປັນຜູ້ມີຈິດນ້ອມໄປເພື່ອບໍຣິໂພກການມະຄຸນ ໕ ສູງຍິ່ງຂຶ້ນໃນບ່ອນທີ່ທານນັ້ນອອກຜົນ

ເມື່ອໃຫ້ທານບໍ່ກະທົບຕົນແລະຜູ້ອື່ນແລ້ວ ຍ່ອມເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ແລະເປັນຜູ້ມີໂພຄະຊັບ ບໍ່ມີພະຍັນຕະຣາຍມາແຕ່ບ່ອນໃດ? ໆ ຄື ຈາກໄຟ ຈາກນ້ຳ ຈາກພຣະຣາຊາ ຈາກໂຈນ ຈາກຄົນບໍ່ເປັນທີ່ຮັກ ຫຼືຈາກທາຍາດໃນບ່ອນທີ່ທານນັ້ນອອກຜົນ

ພິກຂຸທັງຫຼາຍ ສັບປຸຣິສະທານ ໕ ປະການນີ້ແລ

**ສັບປຸຣິສະທານະສູດທີ ๘ ຈົບ**

## ໙. ປະຖົມສະມະຍະວິມຸດຕະສູດ

## ວ່າດ້ວຍພິກຂຸຜູ້ເປັນສະມະຍະວິມຸດ²ສູດທີ ໑

[໑໔໙] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸ ຜູ້ເປັນສະມະຍະວິມຸດ

ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກວຽກງານ³
໒. ຄວາມເປັນຜູ້ມັກການໂອ້ລົມ
໓. ຄວາມເປັນຜູ້ມັກການນອນຫຼັບ
໔. ຄວາມເປັນຜູ້ມັກການຄຸກຄີດ້ວຍໝູ່
໕. ບໍ່ພິຈາລະນາຈິດຕາມທີ່ລຸດພົ້ນແລ້ວ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນ ສະມະຍະວິມຸດ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນ ສະມະຍະວິມຸດ

ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ບໍ່ມັກວຽກງານ
໒. ຄວາມເປັນຜູ້ບໍ່ມັກການໂອ້ລົມ
໓. ຄວາມເປັນຜູ້ບໍ່ມັກການນອນຫຼັບ
໔. ຄວາມເປັນຜູ້ບໍ່ມັກການຄຸກຄີດ້ວຍໝູ່
໕. ພິຈາລະນາຈິດຕາມທີ່ລຸດພົ້ນແລ້ວ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນສະມະຍະວິມຸດ

**ປະຖົມສະມະຍະວິມຸດຕະສູດທີ ໗ ຈົບ**

## ໑໐. ທຸຕິຍະສະມະຍະວິມຸກດຕະສູດ

## ວ່າດ້ວຍພິກຂຸຜູ້ເປັນສະມະຍະວິມຸດສູດທີ ໒

[໑໕໐] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸ ຜູ້ເປັນສະມະຍະວິມຸດ

ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກວຽກງານ
໒. ຄວາມເປັນຜູ້ມັກການໂອ້ລົມ
໓. ຄວາມເປັນຜູ້ມັກການນອນຫຼັບ
໔. ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໕. ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນ ສະມະຍະວິມຸດ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນສະມະຍະວິມຸດທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ບໍ່ມັກວຽກງານ
໒. ຄວາມເປັນຜູ້ບໍ່ມັກການໂອ້ລົມ
໓. ຄວາມເປັນຜູ້ບໍ່ມັກການນອນຫຼັບ
໔. ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໕. ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນສະມະຍະວິມຸດ

**ທຸຕິຍະສະມະຍະວິມຸດຕະສູດທີ ໑໐ ຈົບ**

**ຕິກັນຖະກີວັກທີ ໕ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື



**ຕະຕິຍະປັນນາດ ຈົບ**

# ໔. ຈະຕຸດຖະປັນນາດ

## ໑. ສັດທຳມະວັກ

### ໝວດວ່າດ້ວຍພຣະສັດທຳ

## ໑. ປະຖົມສຳມັດຕະນິຍາມະສູດ

### ວ່າດ້ວຍສຳມັດຕະນິຍາມະ[1]ສູດທີ ໑

[໑໕໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການ ແມ່ນຟັງສັດທຳຢູ່ ກໍບໍ່ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ວິພາກ ວິຈານຄຳເວົ້າ[2]
໒. ວິພາກ ວິຈານຜູ້ເວົ້າ[3]
໓. ວິພາກວິຈານຕົນ[4]
໔. ເປັນຜູ້ມີຈິດຟຸ້ງຊ່ານ ຄືມີຈິດບໍ່ແນ່ວແນ່ຟັງທຳ
໕. ມະນະສິການໂດຍບໍ່ແຍບຄາຍ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການນີ້ແລ ແມ່ນຟັງສັດທຳຢູ່ ກໍບໍ່ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

ພິກຂຸທັງຫຼາຍ ສ່ວນບຸກຄົນປະກອບດ້ວຍທຳ ໕ ປະການ ຟັງສັດທຳຢູ່ ເປັນຜູ້ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ວິພາກວິຈານຄຳເວົ້າ
໒. ບໍ່ວິພາກວິຈານຜູ້ເວົ້າ
໓. ບໍ່ວິພາກວິຈານຕົນ
໔. ເປັນຜູ້ມີຈິດບໍ່ຟຸ້ງຊ່ານ ຄືມີຈິດແນ່ວແນ່ຟັງທຳ
໕. ມະນະສິການໂດຍແຍບຄາຍ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການນີ້ແລ ຟັງສັດທຳຢູ່ ເປັນຜູ້ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

**ປະຖົມສຳມັດຕະນິຍາມະສູດທີ ໑ ຈົບ**

# ໒. ທຸຕິຍະສຳມັດຕະນິຍາມະສູດ

## ວ່າດ້ວຍສຳມັດຕະນິຍາມະສູດທີ ໒

[໑໕໒] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການ ແມ່ນຟັງ ສັດທຳຢູ່ ກໍບໍ່ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ວິພາກວິຈານຄຳເວົ້າ
໒. ວິພາກວິຈານຜູ້ເວົ້າ
໓. ວິພາກວິຈານຕົນ
໔. ມີປັນຍາຊາມ ໂງ່ຈ້ຳ ເປັນຄົນປີກ[1]
໕. ຖືໂຕວ່າຮູ້ໃນສິ່ງທີ່ຕົນຍັງບໍ່ຮູ້

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການນີ້ແລ ແມ່ນຟັງສັດທຳຢູ່ ກໍບໍ່ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການ ຟັງສັດທຳຢູ່ ເປັນຜູ້ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ວິພາກວິຈານຄຳເວົ້າ
໒. ບໍ່ວິພາກວິຈານຜູ້ເວົ້າ
໓. ບໍ່ວິພາກວິຈານຕົນ
໔. ມີປັນຍາ ບໍ່ໂງ່ຈ້ຳ ບໍ່ເປັນຄົນປີກ
໕. ບໍ່ຖືໂຕວ່າຮູ້ໃນສິ່ງທີ່ຕົນຍັງບໍ່ຮູ້

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການນີ້ແລ ຟັງສັດທຳຢູ່ ເປັນຜູ້ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

**ທຸຕິຍະສຳມັດຕະນິຍາມະສູດທີ ໒ ຈົບ**

# ໓. ຕະຕິຍະສຳມັດຕະນິຍາມະສູດ

## ວ່າດ້ວຍສຳມັດຕະນິຍາມະສູດທີ ໓

[໑໕໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການ ແມ່ນຟັງສັດທຳຢູ່ ກໍບໍ່ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ລົບຫຼູ່ຄຸນທ່ານຟັງທຳ ຖືກຄວາມລົບຫຼູ່ຄຸນທ່ານກຸ້ມລຸມຟັງທຳ
໒. ມີຈິດແຂ່ງດີ ຖ້າຈັບຜິດຟັງທຳ
໓. ມີຈິດກະທົບ ມີຈິດກະດ້າງໃນຜູ້ສະແດງທຳ
໔. ມີປັນຍາຊາມ ໂງ່ຈ້ຳ ເປັນຄົນປືກ
໕. ຖືໂຕວ່າຮູ້ໃນສິ່ງທີ່ຕົນຍັງບໍ່ຮູ້

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການນີ້ແລ ແມ່ນຟັງທຳຢູ່ກໍບໍ່ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

ພິກຂຸທັງຫຼາຍ ສ່ວນບຸກຄົນປະກອບດ້ວຍທຳ ໕ ປະການ ຟັງສັດທຳຢູ່ ເປັນຜູ້ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ລົບຫຼູ່ຄຸນທ່ານ ບໍ່ຖືກຄວາມລົບຫຼູ່ຄຸນທ່ານກຸ້ມລຸມຟັງທຳ
໒. ບໍ່ມີຈິດແຂ່ງດີ ບໍ່ຖ້າຈັບຜິດຟັງທຳ
໓. ບໍ່ມີຈິດກະທົບ ບໍ່ມີຈິດກະດ້າງໃນຜູ້ຟັງທຳ
໔. ມີປັນຍາດີ ບໍ່ໂງ່ຈ້ຳ ບໍ່ເປັນຄົນປືກ
໕. ບໍ່ຖືໂຕວ່າຮູ້ໃນສິ່ງທີ່ຕົນຍັງບໍ່ຮູ້

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕ ປະການນີ້ແລ ຟັງທຳຢູ່ ເປັນຜູ້ອາດຢັ່ງລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍ

**ຕະຕິຍະສຳມັດຕະນິຍາມະສູດທີ ໓ ຈົບ**

# ໔. ປະຖົມສັດທຳມະສຳໂມສະສູດ

## ວ່າດ້ວຍເຫດເສື່ອມແຫ່ງພຣະສັດທຳສູດທີ ໑

[໑໕໔] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ ທຳ ໕ ປະການ ອັນໃດແດ່ ຄື ພິກຂຸໃນທຳວິໄນນີ້

໑. ບໍ່ຟັງທຳໂດຍເຄົາລົບ
໒. ບໍ່ຮຽນທຳໂດຍເຄົາລົບ
໓. ບໍ່ຊົງຈຳທຳໂດຍເຄົາລົບ
໔. ບໍ່ພິຈາຣະນາອັດຖະແຫ່ງທຳທີ່ຊົງຈຳໄວ້ແລ້ວໂດຍເຄົາລົບ
໕. ຮູ້ອັດຖະຮູ້ທຳແລ້ວບໍ່ປະຕິບັດທຳສົມຄວນແກ່ທຳໂດຍເຄົາລົບ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ ທຳ ໕ ປະການ ອັນໃດແດ່ ຄື ພິກຂຸໃນທຳວິໄນນີ້

໑. ຟັງທຳໂດຍເຄົາລົບ
໒. ຮຽນທຳໂດຍເຄົາລົບ
໓. ຊົງຈຳທຳໂດຍເຄົາລົບ
໔. ພິຈາຣະນາອັດຖະແຫ່ງທຳທີ່ຊົງຈຳໄວ້ແລ້ວໂດຍເຄົາລົບ
໕. ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳໂດຍເຄົາລົບ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

**ປະຖົມສັດທຳມະສຳໂມສະສູດທີ ໔ ຈົບ**

# ໕. ທຸຕິຍະສັດທຳມະສຳໂມສະສູດ

## ວ່າດ້ວຍເຫດເສື່ອມແຫ່ງພຣະສັດທຳສູດທີ ໒

[໑໕໕] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ ທຳ ໕ ປະການ ອັນໃດແດ່ ຄື ພິກຂຸໃນທຳວິໄນນີ້

໑. ບໍ່ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະຊາຕະ ກະ ອັບພູຕະທຳ ແລະເວທັນລະ ນີ້ເປັນທຳປະການທີ ໑ ຍ່ອມເປັນໄປເພື່ອຄວາມເສື່ອສູນຫາຍໄປແຫ່ງສັດທຳ

໒. ບໍ່ສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ນີ້ເປັນທຳປະການທີ ໒ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

໓. ບໍ່ບອກທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ນີ້ເປັນທຳປະການທີ ໓ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

໔. ບໍ່ທຳການສາທະຍາຍທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ ນີ້ເປັນທຳປະການທີ ໔ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

໕. ບໍ່ນຶກຕາມ ຕອງຕາມ ເພ່ງຕາມດ້ວຍໃຈເຊິ່ງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ນີ້ເປັນທຳປະການທີ ໕ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ ທຳ ໕ ປະການ ອັນໃດແດ່ ຄື ພິກຂຸໃນທຳວິໄນນີ້

໑. ຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ແລະເວທັນລະ ນີ້ເປັນທຳປະການທີ ໑ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

໒. ສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ນີ້ເປັນທຳປະການທີ ໒ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

໓. ບອກທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ນີ້ເປັນທຳປະການທີ ໓ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

໔. ທຳການສາທະຍາຍທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ ນີ້ເປັນທຳປະການທີ ໔ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

໕. ນຶກຕາມ ຕອງຕາມ ເພ່ງຕາມດ້ວຍໃຈເຊິ່ງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ນີ້ເປັນທຳປະການທີ ໕ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

**ທຸຕິຍະສັດທຳມະສຳໂມສະສູດທີ ໕ ຈົບ**

## ໖. ຕະຕິຍະສັດທຳມະສຳໂມສະສູດ

## ວ່າດ້ວຍເຫດເສື່ອມແຫ່ງພຣະສັດທຳສູດທີ ໖

[໑໕໖] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

ທຳ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ຮ່ຳຮຽນພຣະສູດທີ ຮ່ຳຮຽນກັນມາບໍ່ດີ ດ້ວຍບົດພະຍັນຊະນະທີ່ສືບທອດກັນມາບໍ່ດີ[໑] ແມ່ນອັດຖະ[໒] ແຫ່ງບົດພະຍັນຊະນະທີ່ສືບທອດກັນມາບໍ່ດີກໍຊື່ວ່າເປັນການສືບທອດຂະຫຍາຍ ຄວາມບໍ່ດີ ນີ້ເປັນທຳປະການທີ ໑ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

໒. ພິກຂຸໃນທຳວິໄນນີ້ເປັນຜູ້ວ່າຍາກ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າຍາກ ບໍ່ອົດທົນຮັບຟັງຄຳພ່ຳສອນໂດຍເຄົາລົບ ນີ້ເປັນທຳປະການທີ ໒ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

໓. ພິກຂຸໃນທຳວິໄນນີ້ເປັນພະຫູສູດ ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາ[໑] ບໍ່ຖ່າຍທອດສູດແກ່ຜູ້ອື່ນໂດຍເຄົາລົບ ເມື່ອພິກຂຸເຫຼົ່ານັ້ນລ່ວງລັບໄປ ສູດກໍຂາດຮາກຖານ ບໍ່ມີບ່ອນເພິ່ງອາໄສ ນີ້ເປັນທຳປະການທີ ໓ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

໔. ພິກຂຸໃນທຳວິໄນນີ້ເປັນເຖຣະ ຜູ້ມັກຫຼາຍ ທຍ່ອນຍານ[6] ເປັນຜູ້ນຳໃນໂອກາ ກະມະນະທຳ[7] ຖືເບົາໃນປະວິເວກ[8] ບໍ່ພາຮົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໝູ່ຄົນລຸ້ນຫຼັງພາກັນເອົາຢ່າງພິກຂຸເຖຣະເຫຼົ່ານັ້ນ ແມ່ນໝູ່ຄົນລຸ້ນຫຼັງນັ້ນກໍເປັນຜູ້ມັກຫຼາຍ ເປັນຜູ້ທຍ່ອນຍານ ເປັນຜູ້ນຳໃນໂອກກະມະນະທຳຖືເບົາໃນປະວິເວກ ບໍ່ພາຮົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ເປັນທຳປະການທີ ໔ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

໕. ສົງແຕກແຍກກັນ ເມື່ອສົງແຕກແຍກກັນ ຈຶ່ງມີການດ່າກັນ ມີການກ່າວໂທດກັນ ມີການໃສ່ຮ້າຍກັນ ມີການປະຖິ້ມກັນ ໝູ່ຄົນທີ່ຍັງບໍ່ເຫຼື້ອມໃສໃນສົງນັ້ນກໍບໍ່ເຫຼື້ອມໃສ ແລະໝູ່ຄົນທີ່ເຫຼື້ອມໃສແລ້ວກໍກາຍເປັນອື່ນໄປ ນີ້ເປັນທຳປະການທີ ໕ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

ທຳ ໕ ປະການ ອັນໃດແດ່ ຄື

໑. ພິກຂຸຮ່ຳຮຽນພຣະສູດທີ ຮ່ຳຮຽນມາດີ ດ້ວຍບົດພະຍັນຊະນະທີ່ສືບທອດກັນມາດີ ແມ່ນອັດຖະແຫ່ງບົດພະຍັນຊະນະທີ່ສືບທອດກັນມາດີ ກໍຊື່ວ່າເປັນການສືບທອດຂະຫຍາຍຄວາມດີ ນີ້ເປັນທຳປະການທີ ໑ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

໒. ພິກຂຸເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນຮັບຟັງຄຳພ່ຳສອນໂດຍເຄົາລົບ ນີ້ເປັນທຳປະການທີ ໒ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

໓. ພິກຂຸເປັນພະຫູສູດ ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາ ຖ່າຍທອດສູດແກ່ຜູ້ອື່ນໂດຍເຄົາລົບ ເມື່ອພິກຂຸເຫຼົ່ານັ້ນລ່ວງລັບໄປ ສູດບໍ່ຂາດຮາກຖານ ມີບ່ອນເພິ່ງອາໄສ ນີ້ເປັນທຳປະການທີ ໓ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

໔. ພິກຂຸເປັນເຖຣະ ບໍ່ມັກຫຼາຍ ບໍ່ຫຍ່ອນຍານ ໝົດທຸລະໃນໂອກກະມະນະທຳ ເປັນຜູ້ນຳໃນປະວິເວກ ຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໝູ່ຄົນລຸ້ນຫຼັງພາກັນເອົາຢ່າງພິກຂຸເຖຣະເຫຼົ່ານັ້ນ ແມ່ນໝູ່ຄົນລຸ້ນຫຼັງນັ້ນກໍບໍ່ມັກຫຼາຍ ບໍ່ຫຍ່ອນຍານ ໝົດທຸລະໃນໂອກກະມະນະທຳ ເປັນຜູ້ນຳໃນປະວິເວກ ຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ເປັນທຳປະການທີ ໔ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

໕. ສົງພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ມີອຸດເທດທີ່ສູດຮ່ວມກັນ ຢູ່ຜາສຸກ ເມື່ອສົງພ້ອມພຽງກັນ ຈຶ່ງບໍ່ມີການດ່າກັນ ບໍ່ມີການກ່າວໂທດກັນ ບໍ່ມີການໃສ່ຮ້າຍກັນ ບໍ່ມີການປະຖິ້ມກັນ ໝູ່ຄົນທີ່ຍັງບໍ່ເຫຼື້ອມໃສໃນສົງນັ້ນກໍເຫຼື້ອມໃສ ແລະໝູ່ຄົນທີ່ເຫຼື້ອມໃສແລ້ວກໍເຫຼື້ອມໃສຍິ່ງຂຶ້ນ ນີ້ເປັນທຳປະການທີ ໕ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ

**ຕະຕິຍະສັດທຳມະສຳໂມສະສູດທີ ໖ ຈົບ**

## ໗. ທຸກກະຖາສູດ

## ວ່າດ້ວຍການເວົ້າເປັນເລື້ອງບໍ່ດີແລະເລື້ອງດີສຳລັບຜູ້ອື່ນ

[໑໕໗] ພິກຂຸທັງຫຼາຍ ການເວົ້າ ເປັນເລື້ອງບໍ່ດີສຳລັບບຸກຄົນ ໕ ຈຳພວກ ເມື່ອທຽບບຸກຄົນກັບບຸກຄົນ

ການເວົ້າ ເປັນເລື້ອງບໍ່ດີສຳລັບບຸກຄົນ ໕ ຈຳພວກ ພວກໃດແດ່ ຄື

໑. ການເວົ້າເລື້ອງສັດທາ ເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ບໍ່ມີສັດທາ
໒. ການເວົ້າເລື້ອງສິນ ເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ທຸສິນ
໓. ການເວົ້າເລື້ອງພາຫຸສັດຈະ[1] ເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ມີສຸຕະ໒ໜ້ອຍ
໔. ການເວົ້າເລື້ອງຈາຄະ ເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ຂີ້ຖີ່
໕. ການເວົ້າເລື້ອງປັນຍາ ເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ມີປັນຍາຊາມ

ການເວົ້າເລື້ອງສັດທາ ເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ບໍ່ມີສັດທາ ຍ້ອນເຫດໃດ?

ຍ້ອນບຸກຄົນຜູ້ບໍ່ມີສັດທາ ເມື່ອເວົ້າເລື້ອງສັດທາ ກໍຂັດໃຈ ໂກດເຄືອງ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນ ຜູ້ບໍ່ມີສັດທານັ້ນ ບໍ່ພິຈາລະນາເຫັນສັດທາສຳປະທາ(ຄວາມເຖິງພ້ອມດ້ວຍສັດທາ)ໃນຕົນ ແລະບໍ່ໄດ້ປີຕິປາໂມດທີ່ມີສັດທາສຳປະທານັ້ນເປັນເຫດ ດັ່ງນັ້ນ ການເວົ້າເລື້ອງສັດທາ ຈຶ່ງເປັນ ເລື້ອງບໍ່ດີສຳລັບບຸກຄົນຜູ້ບໍ່ມີສັດທາ

ການເວົ້າເລື້ອງສີນ ເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ທຸສີນ ຍ້ອນເຫດໃດ?

ຍ້ອນບຸກຄົນຜູ້ທຸສີນ ເມື່ອເວົ້າເລື້ອງສີນ ກໍຂັດໃຈ ໂກດເຄືອງ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຜູ້ທຸສີນນັ້ນ ບໍ່ເຫັນສີລະສຳປະທາ(ຄວາມເຖິງພ້ອມດ້ວຍສີນ)ໃນຕົນ ແລະບໍ່ໄດ້ປີຕິປາໂມດທີ່ມີສີລະສຳປະທານັ້ນເປັນເຫດ ດັ່ງນັ້ນ ການເວົ້າເລື້ອງສີນຈຶ່ງເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ທຸສີນ

ການເວົ້າເລື້ອງພາຫຸສັດຈະ ເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ມີສຸຕະໜ້ອຍ ຍ້ອນເຫດໃດ

ຍ້ອນບຸກຄົນຜູ້ມີສຸຕະໜ້ອຍ ເມື່ອເວົ້າເລື້ອງພາຫຸສັດຈະ ກໍຂັດໃຈ ໂກດເຄືອງ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນຜູ້ມີສຸຕະໜ້ອຍນັ້ນ ບໍ່ພິຈາລະນາເຫັນສຸຕະສຳປະທາ(ຄວາມເຖິງພ້ອມດ້ວຍສຸຕະ)ໃນຕົນ ແລະບໍ່ໄດ້ປີຕິປາໂມດທີ່ມີສຸຕະສຳປະທານັ້ນເປັນເຫດ ດັ່ງນັ້ນ ການເວົ້າເລື້ອງພາຫຸສັດຈະ ຈຶ່ງເປັນເລື້ອງ ບໍ່ດີສຳລັບບຸກຄົນຜູ້ມີສຸຕະໜ້ອຍ

ການເວົ້າເລື້ອງຈາຄະ ເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ຂີ້ຖີ່ ຍ້ອນເຫດໃດ?

ຍ້ອນບຸກຄົນຜູ້ຂີ້ຖີ່ ເມື່ອເວົ້າເລື້ອງຈາຄະ ກໍຂັດໃຈ ໂກດເຄືອງ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນຜູ້ຂີ້ຖີ່ນັ້ນ ບໍ່ພິຈາລະນາເຫັນ ຈາຄະສຳປະທາ(ຄວາມເຖິງພ້ອມດ້ວຍຈາຄະ)ໃນຕົນ ແລະບໍ່ໄດ້ປີຕິປາໂມດທີ່ມີຈາຄະສຳປະທານັ້ນເປັນເຫດ ດັ່ງນັ້ນ ການເວົ້າເລື້ອງຈາຄະຈຶ່ງເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ຂີ້ຖີ່

ການເວົ້າເລື້ອງປັນຍາ ເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ມີປັນຍາຊາມ ຍ້ອນເຫດໃດ?

ຍ້ອນບຸກຄົນຜູ້ມີປັນຍາຊາມ ເມື່ອເວົ້າເລື້ອງປັນຍາ ກໍຂັດໃຈ ໂກດເຄືອງ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນຜູ້ມີປັນຍາຊາມນັ້ນບໍ່ພິຈາລະນາເຫັນປັນຍາສຳປະທາ(ຄວາມເຖິງພ້ອມດ້ວຍປັນຍາ)ໃນຕົນ ແລະບໍ່ໄດ້ປີ

ຕິປາໂມດທີ່ມີປັນຍາສຳປະທານັ້ນເປັນເຫດ ສັນນັ້ນ ການເວົ້າເລື້ອງປັນຍາ ຈຶ່ງເປັນເລື້ອງບໍ່ດີສຳລັບບຸກຄົນຜູ້ມີປັນຍາຊາມ

ພິກຂຸທັງຫຼາຍ ການເວົ້າ ເປັນເລື້ອງບໍ່ດີສຳລັບບຸກຄົນ ໕ ຈຳພວກນີ້ແລ ເມື່ອທຽບບຸກຄົນກັບບຸກຄົນ

ພິກຂຸທັງຫຼາຍ ການເວົ້າ ເປັນເລື້ອງດີສຳລັບບຸກຄົນ ໕ ຈຳພວກ ເມື່ອທຽບບຸກຄົນກັບບຸກຄົນ ການເວົ້າ ເປັນເລື້ອງດີສຳລັບບຸກຄົນ ໕ ຈຳພວກໃດແດ່ ຄື

໑. ການເວົ້າເລື້ອງສັດທາ ເປັນເລື້ອງດີສຳລັບບຸກຄົນຜູ້ມີສັດທາ
໒. ການເວົ້າເລື້ອງສີນ ເປັນເລື້ອງດີສຳລັບບຸກຄົນຜູ້ມີສີນ
໓. ການເວົ້າເລື້ອງພາຫຸສັດຈະ ເປັນເລື້ອງດີສຳລັບບຸກຄົນຜູ້ເປັນພະຫູສູດ
໔. ການເວົ້າເລື້ອງຈາຄະ ເປັນເລື້ອງດີສຳລັບບຸກຄົນຜູ້ມີຈາຄະ
໕. ການເວົ້າເລື້ອງປັນຍາ ເປັນເລື້ອງດີສຳລັບບຸກຄົນຜູ້ມີປັນຍາ

ການເວົ້າເລື້ອງສັດທາ ເປັນເລື້ອງດີສຳລັບບຸກຄົນຜູ້ມີສັດທາ ຍ້ອນເຫດໃດ?

ຍ້ອນບຸກຄົນຜູ້ມີສັດທາ ເມື່ອເວົ້າເລື້ອງສັດທາ ກໍບໍ່ຂັດໃຈ ບໍ່ໂກດເຄືອງ ບໍ່ພະຍາບາດ ບໍ່ຂຶ້ງຄຽດ ບໍ່ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນຜູ້ມີສັດທານັ້ນ ພິຈາລະນາເຫັນສັດທາສຳປະທາໃນຕົນ ແລະໄດ້ປິຕິປາໂມດທີ່ມີສັດທາສຳປະທານັ້ນເປັນເຫດ ດັ່ງນັ້ນ ການເວົ້າເລື້ອງສັດທາ ຈຶ່ງເປັນເລື້ອງດີສຳລັບບຸກຄົນຜູ້ມີສັດທາ

ການເວົ້າເລື້ອງສີນ ເປັນເລື້ອງດີສຳລັບບຸກຄົນຜູ້ມີສີນ ຍ້ອນເຫດໃດ?

ຍ້ອນບຸກຄົນຜູ້ມີສີນ ເມື່ອເວົ້າເລື້ອງສີນ ກໍບໍ່ຂັດໃຈ ບໍ່ໂກດເຄືອງ ບໍ່ພະຍາບາດ ບໍ່ຂຶ້ງຄຽດ ບໍ່ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນຜູ້ມີສີນນັ້ນ ພິຈາລະນາເຫັນສີລະສຳປະທາໃນຕົນ ແລະໄດ້ປິຕິປາໂມດທີ່ມີສີລະສຳປະທານັ້ນເປັນເຫດ ດັ່ງນັ້ນ ການເວົ້າເລື້ອງສີນ ຈຶ່ງເປັນເລື້ອງດີສຳລັບບຸກຄົນຜູ້ມີສີນ

ການເວົ້າເລື້ອງພາຫຸສັດຈະ ເປັນເລື້ອງດີສຳລັບບຸກຄົນຜູ້ເປັນພະຫູສູດ ຍ້ອນເຫດໃດ?

ຍ້ອນບຸກຄົນຜູ້ເປັນພະຫູສູດ ເມື່ອເວົ້າເລື້ອງພາຫຸສັດຈະ ກໍບໍ່ຂັດໃຈ ບໍ່ໂກດເຄືອງ ບໍ່ພະຍາ ບາດ ບໍ່ຂຶ້ງຄຽດ ບໍ່ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ຂໍ້ນັ້ນຍ້ອນ ເຫດໃດ ຍ້ອນບຸກຄົນຜູ້ເປັນພະຫູສູດນັ້ນ ພິຈາລະນາເຫັນສຸຕະສຳປະທາໃນຕົນ ແລະໄດ້ປິຕິປາໂມດທີ່ມີສຸຕະສຳປະທານັ້ນເປັນເຫດ ດັ່ງນັ້ນ ການເວົ້າເລື້ອງພາຫຸສັດຈະ ຈຶ່ງເປັນເລື້ອງດີສຳລັບບຸກຄົນຜູ້ເປັນພະຫູສູດ

ການເວົ້າເລື້ອງຈາຄະ ເປັນເລື້ອງດີສຳລັບບຸກຄົນຜູ້ມີຈາຄະ ຍ້ອນເຫດໃດ?

ຍ້ອນບຸກຄົນຜູ້ມີຈາຄະ ເມື່ອເວົ້າເລື້ອງຈາຄະ ກໍບໍ່ຂັດໃຈ ບໍ່ໂກດເຄືອງ ບໍ່ພະຍາບາດ ບໍ່ຂຶ້ງຄຽດ ບໍ່ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນຜູ້ມີຈາຄະນັ້ນພິຈາລະນາເຫັນຈາຄະສຳປະທາໃນຕົນ ແລະໄດ້ປີຕິປາໂມດທີ່ມີຈາຄະສຳປະທານັ້ນເປັນເຫດ ດັ່ງນັ້ນ ການເວົ້າເລື້ອງຈາຄະ ຈຶ່ງເປັນເລື້ອງດີສຳລັບບຸກຄົນຜູ້ມີຈາຄະ

ການເວົ້າເລື້ອງປັນຍາ ເປັນເລື້ອງດີສຳລັບບຸກຄົນຜູ້ມີປັນຍາ ຍ້ອນເຫດໃດ?

ຍ້ອນບຸກຄົນຜູ້ມີປັນຍາ ເມື່ອເວົ້າເລື້ອງປັນຍາ ກໍບໍ່ຂັດໃຈ ບໍ່ໂກດເຄືອງ ບໍ່ພະຍາບາດ ບໍ່ຂຶ້ງຄຽດ ບໍ່ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນຜູ້ມີປັນຍານັ້ນພິຈາລະນາເຫັນປັນຍາສຳປະທາໃນຕົນ ແລະໄດ້ປີຕິປາໂມດທີ່ມີປັນຍາສຳປະທານັ້ນເປັນເຫດ ດັ່ງນັ້ນ ການເວົ້າເລື້ອງປັນຍາ ຈຶ່ງເປັນເລື້ອງດີສຳລັບບຸກຄົນຜູ້ມີປັນຍາ

ພິກຂຸທັງຫຼາຍ ການເວົ້າ ເປັນເລື້ອງດີສຳລັບບຸກຄົນ ໕ ຈຳພວກນີ້ແລ ເມື່ອທຽບບຸກຄົນກັບບຸກຄົນ

**ທຸກກະຖາສູດທີ ໆ ຈົບ**

## ໗. ສາຣັດຊະສູດ

## ວ່າດ້ວຍຄວາມເກງກົວແລະຄວາມແກ່ກ້າ

[໑໕໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມເຖິງຄວາມເກງກົວ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ທຸສີນ
໓. ເປັນຜູ້ມີສຸຕະໜ້ອຍ
໔. ເປັນຜູ້ຂີ້ຄ້ານ
໕. ເປັນຜູ້ມີປັນຍາຊາມ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເຖິງຄວາມ ເກງກົວ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ ຍ່ອມເປັນຜູ້ແກ່ກ້າ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີສີນ
໓. ເປັນພະຫູສູດ
໔. ເປັນຜູ້ຜາຣົບຄວາມພຽນ
໕. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນຜູ້ແກ່ກ້າ

**ສາຣັດຊະສູດທີ ໗ ຈົບ**

## ໘. ອຸທາຍີສູດ

## ວ່າດ້ວຍພຣະອຸທາຍີ

[໑໕໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໂຄສິຕາຣາມ ເຂດນະຄອນໂກສຳພີ ສະໄໝນັ້ນແລ ທ່ານພຣະອຸທາຍີມີຄະລືຫັດ ບໍລິສັດໝູ່ໃຫຍ່ຮ້ອມລ້ອມ ນັ່ງສະແດງທຳຢູ່ ທ່ານພຣະອານົນໄດ້ເຫັນທ່ານພຣະອຸທາຍີ ມີຄະລືຫັດບໍລິສັດໝູ່ໃຫຍ່ຮ້ອມລ້ອມ ນັ່ງສະແດງທຳຢູ່ ຈຶ່ງໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ[๑] ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະອຸທາຍີມີຄະລືຫັດບໍລິສັດໝູ່ໃຫຍ່ຮ້ອມລ້ອມນັ່ງສະແດງທຳຢູ່

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ການສະແດງທຳແກ່ຜູ້ອື່ນບໍ່ແມ່ນເຮັດໄດ້ງ່າຍ ພິກຂຸເມື່ອຈະສະແດງທຳແກ່ຜູ້ອື່ນ ເພິ່ງຕັ້ງທຳ ໕ ປະການໄວ້ໃນຕົນແລ້ວຈຶ່ງສະແດງທຳແກ່ຜູ້ອື່ນ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເພິ່ງຕັ້ງໃຈວ່າ

໑. ເຮົາຈັກສະແດງທຳໄປຕາມລຳດັບ[๒]
໒. ເຮົາຈັກສະແດງອ້າງເຫດ

໓. ເຮົາຈັກສະແດງທຳອາໄສຄວາມອີດູ[3]
໔. ເຮົາຈັກເປັນຜູ້ບໍ່ເພ່ງອາມິດ[1]ສະແດງທຳ
໕. ເຮົາຈັກບໍ່ສະແດງທຳກະທົບຕົນແລະຜູ້ອື່ນ[6]

ອານົນ ການສະແດງທຳແກ່ຜູ້ອື່ນບໍ່ແມ່ນເຮັດໄດ້ງ່າຍ ພິກຂຸເມື່ອຈະສະແດງທຳແກ່ຄົນອື່ນ ເພິ່ງຕັ້ງທຳ ໕ ປະການນີ້ໄວ້ໃນຕົນແລ້ວຈຶ່ງສະແດງທຳແກ່ຜູ້ອື່ນ

**ອຸທາຍີສູດທີ ໗ ຈົບ**

## ໑໐. ທຸບປະຕິວິໂນທະຍະສູດ

## ວ່າດ້ວຍທຳທີ່ບັນເທົາໄດ້ຍາກ

[໑໒໐] ພິກຂຸທັງຫຼາຍ ທຳ ໕ ປະການນີ້ ທີ່ເກີດຂຶ້ນແລ້ວ ບັນເທົາໄດ້ຍາກ

ທຳ ໕ ປະການ ອັນໃດແດ່ ຄື

໑. ຣາຄະທີ່ເກີດຂຶ້ນແລ້ວ ບັນເທົາໄດ້ຍາກ
໒. ໂທສະທີ່ເກີດຂຶ້ນແລ້ວ ບັນເທົາໄດ້ຍາກ
໓. ໂມຫະທີ່ເກີດຂຶ້ນແລ້ວ ບັນເທົາໄດ້ຍາກ
໔. ປະຕິພານ[1]ທີ່ເກີດຂຶ້ນແລ້ວ ບັນເທົາໄດ້ຍາກ
໕. ຈິດຄິດຈະໄປທີ່ເກີດຂຶ້ນແລ້ວ ບັນເທົາໄດ້ຍາກ

ພິກຂຸທັງຫຼາຍ ທຳ ໕ ປະການນີ້ແລ ທີ່ເກີດຂຶ້ນແລ້ວ ບັນເທົາໄດ້ຍາກ

**ທຸບປະຕິວິໂນທະຍະສູດທີ ໑໐ ຈົບ**

**ສັດທຳມະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມສຳມັດຕະນິຍາມະສູດ
໒. ທຸຕິຍະສຳມັດຕະນິຍາມະສູດ
໓. ຕະຕິຍະສຳມັດຕະນິຍາມະສູດ
໔. ປະຖົມສັດທຳມະສຳໂມສະສູດ
໕. ທຸຕິຍະສັດທຳມະສຳໂມສະສູດ
໖. ຕະຕິຍະສັດທຳມະສຳໂມສະສູດ
໗. ທຸກກະຖາສູດ
໘. ສາຣັດຊະສູດ
໙. ອຸທາຍີສູດ
໑໐. ທຸບປະຕິວິໂນທະຍະສູດ

# ໔. ອາຄາຕະວັກ

## ໝວດວ່າດ້ວຍອາຄາດ[๑]

## ໑. ປະຖົມອາຄາຕະປະຕິວິນະຍະສູດ

### ວ່າດ້ວຍອຸບາຍກຳຈັດຄວາມອາຄາດສູດທີ ໑

[໑໖໑] ພິກຂຸທັງຫຼາຍ ອຸບາຍກຳຈັດຄວາມອາຄາດ ໕ ປະການນີ້ ເປັນເຄື່ອງກຳຈັດຄວາມອາຄາດທີ່ເກີດຂຶ້ນແກ່ພິກຂຸໄດ້ຢ່າງໝົດສິ້ນ

ອຸບາຍກຳຈັດຄວາມອາຄາດ ໕ ປະການ ອັນໃດແດ່ ຄື

໑. ພິກຂຸເພິ່ງຈະເລີນເມດຕາໃນບຸກຄົນຜູ້ທີ່ຕົນເກີດອາຄາດ[๒] ພິກຂຸເພິ່ງກຳຈັດຄວາມອາຄາດ ໃນບຸກຄົນນັ້ນແນວນີ້

໒. ພິກຂຸເພິ່ງຈະເລີນກະລຸນາໃນບຸກຄົນຜູ້ທີ່ຕົນເກີດອາຄາດ ພິກຂຸເພິ່ງກຳຈັດຄວາມອາຄາດ ໃນບຸກຄົນນັ້ນແນວນີ້

໓. ພິກຂຸເພິ່ງຈະເລີນອຸເປກຂາໃນບຸກຄົນຜູ້ທີ່ຕົນເກີດອາຄາດ ພິກຂຸເພິ່ງກຳຈັດຄວາມອາຄາດ ໃນບຸກຄົນນັ້ນແນວນີ້

໔. ພິກຂຸບໍ່ເພິ່ງຣະນຶກເຖິງ ບໍ່ເພິ່ງມະນະສິການເຖິງບຸກຄົນຜູ້ທີ່ຕົນເກີດອາຄາດ ພິກຂຸເພິ່ງກຳຈັດຄວາມອາຄາດໃນບຸກຄົນນັ້ນແນວນີ້

໕. ພິກຂຸເພິ່ງນຶກເຖິງຄວາມເປັນຜູ້ມີກຳເປັນຂອງຕົນໃຫ້ໝັ້ນໃນບຸກຄົນຜູ້ທີ່ຕົນເກີດອາຄາດນັ້ນ ດັ່ງນີ້ວ່າ "ທ່ານຜູ້ນີ້ເປັນຜູ້ມີກຳເປັນຂອງຕົນ ເປັນຜູ້ຮັບຜົນຂອງກຳ ມີກຳເປັນກຳເນີດ ມີກຳເປັນເຜົ່າພັນ ມີກຳເປັນບ່ອນເພິ່ງອາໄສ ເຮັດກຳໃດໄວ້ ຈະເປັນກຳດີຫຼືກຳຊົ່ວກໍຕາມ ຍ່ອມເປັນຜູ້ຮັບຜົນຂອງກຳນັ້ນ ພິກຂຸເພິ່ງກຳຈັດຄວາມອາຄາດໃນບຸກຄົນນັ້ນແນວນີ້

ພິກຂຸທັງຫຼາຍ ອຸບາຍກຳຈັດຄວາມອາຄາດ ໕ ປະການນີ້ແລ ເປັນເຄື່ອງກຳຈັດຄວາມອາຄາດ ທີ່ເກີດຂຶ້ນແກ່ພິກຂຸໄດ້ຢ່າງໝົດສິ້ນ

**ປະຖົມອາຄາຕະປະຕິວິນະຍະສູດທີ ໑ ຈົບ**

# ໘. ທຸຕິຍະອາຄາຕະປະຕິວິນະຍະສູດ

## ວ່າດ້ວຍອຸບາຍກຳຈັດຄວາມອາຄາດສູດທີ ໘

[໑໖໘] ໃນບ່ອນນັ້ນແລ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນ ຮັບຄຳຂອງທ່ານພຣະສາຣີບຸດແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ອຸບາຍກຳຈັດຄວາມອາຄາດ ໕ ປະການນີ້ ເປັນເຄື່ອງກຳຈັດຄວາມອາຄາດທີ່ເກີດຂຶ້ນແກ່ພິກຂຸໄດ້ຢ່າງໝົດສິ້ນ

ອຸບາຍກຳຈັດຄວາມອາຄາດ ໕ ປະການ ອັນໃດແດ່ ຄື

໑. ພິກຂຸເພິ່ງກຳຈັດຄວາມອາຄາດໃນບຸກຄົນຜູ້ມີຄວາມປະພຶດທາງກາຍບໍ່ບໍລິສຸດ ແຕ່ມີຄວາມປະພຶດທາງວາຈາບໍລິສຸດ

໒. ພິກຂຸເພິ່ງກຳຈັດຄວາມອາຄາດໃນບຸກຄົນຜູ້ມີຄວາມປະພຶດທາງວາຈາບໍ່ບໍລິສຸດ ແຕ່ມີຄວາມປະພຶດທາງກາຍບໍລິສຸດ

໓. ພິກຂຸເພິ່ງກຳຈັດຄວາມອາຄາດໃນບຸກຄົນຜູ້ມີຄວາມປະພຶດທາງກາຍບໍ່ບໍລິສຸດ ມີຄວາມປະພຶດທາງວາຈາບໍ່ບໍລິສຸດ ແຕ່ໄດ້ປ່ອງແຫ່ງໃຈ[໑]ໄດ້ຄວາມເຫຼື້ອມໃສທາງໃຈຕາມການອັນຄວນ

໔. ພິກຂຸເພິ່ງກຳຈັດຄວາມອາຄາດໃນບຸກຄົນຜູ້ມີຄວາມປະພຶດທາງກາຍບໍ່ບໍລິສຸດ ມີຄວາມປະພຶດທາງວາຈາບໍ່ບໍລິສຸດ ແລະບໍ່ໄດ້ປ່ອງແຫ່ງໃຈ ບໍ່ໄດ້ຄວາມເຫຼື້ອມໃສທາງໃຈຕາມການອັນຄວນ

໕. ພິກຂຸເພິ່ງກຳຈັດຄວາມອາຄາດໃນບຸກຄົນຜູ້ມີຄວາມປະພຶດທາງກາຍບໍລິສຸດ ມີຄວາມປະພຶດທາງວາຈາບໍລິສຸດ ແລະໄດ້ປ່ອງແຫ່ງໃຈ ໄດ້ຄວາມເຫຼື້ອມໃສທາງໃຈຕາມການອັນຄວນ

ບັນດາບຸກຄົນ ໕ ຈຳພວກນັ້ນ

ພິກຂຸ ເພິ່ງກຳຈັດຄວາມອາຄາດໃນບຸກຄົນຜູ້ມີຄວາມປະພຶດທາງກາຍບໍ່ບໍລິສຸດ ແຕ່ມີຄວາມປະພຶດທາງວາຈາບໍລິສຸດ ແນວໃດ?

ຄື ບຸກຄົນໃດມີຄວາມປະພຶດທາງກາຍບໍ່ບໍລິສຸດ ແຕ່ມີຄວາມປະພຶດທາງວາຈາບໍລິສຸດ ຄວາມປະພຶດທາງກາຍທີ່ບໍ່ບໍລິສຸດຂອງເຂົາສ່ວນໃດ ພິກຂຸບໍ່ເພິ່ງໃສ່ໃຈສ່ວນນັ້ນໃນເວລານັ້ນ ສ່ວນຄວາມປະພຶດທາງວາຈາທີ່ບໍລິສຸດຂອງເຂົາສ່ວນໃດ ພິກຂຸກໍເພິ່ງໃສ່ໃຈແຕ່ສ່ວນນັ້ນໃນເວລານັ້ນ ປຽບຄືພິກຂຸຜູ້ຖືຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ພົບຜ້າເກົ່າ ທີ່ຖະໜົນ ຢຽບໃຫ້ໝັ້ນດ້ວຍຕີນຊ້າຍ ເຂ່ຍອອກເບິ່ງດ້ວຍຕີນຂວາ ສ່ວນໃດຍັງໃຊ້ໄດ້ກໍເລືອກຖືເອົາສ່ວນນັ້ນແລ້ວຈາກໄປ

ພິກຂຸເພິ່ງກໍາຈັດຄວາມອາຄາດໃນບຸກຄົນນັ້ນແນວນີ້

ພິກຂຸ ເພິ່ງກໍາຈັດຄວາມອາຄາດໃນບຸກຄົນຜູ້ມີຄວາມປະພຶດທາງວາຈາບໍ່ບໍລິສຸດ ແຕ່ມີຄວາມປະພຶດທາງກາຍບໍລິສຸດ ແນວໃດ?

ຄື ບຸກຄົນໃດມີຄວາມປະພຶດທາງວາຈາບໍ່ບໍລິສຸດ ແຕ່ມີຄວາມປະພຶດທາງກາຍບໍລິສຸດ ຄວາມປະພຶດທາງວາຈາທີ່ບໍ່ບໍລິສຸດຂອງເຂົາສ່ວນໃດ ພິກຂຸບໍ່ເພິ່ງໃສ່ໃຈສ່ວນນັ້ນໃນເວລານັ້ນ ສ່ວນຄວາມປະພຶດທາງກາຍທີ່ບໍລິສຸດຂອງເຂົາສ່ວນໃດ ພິກຂຸກໍເພິ່ງໃສ່ໃຈແຕ່ສ່ວນນັ້ນໃນເວລານັ້ນ ປຽບຄືສະນໍ້າທີ່ຖືກສາຫຣ່າຍແລະແໜຄຸມໄວ້ ຄົນເດີນທາງມາຖືກຄວາມຮ້ອນກະທົບ ຮ້ອນອົບເອົ້າ ອ່ອນເພຍ ຫິວນໍ້າ ເຂົາຈຶ່ງລົງສະນໍ້ານັ້ນ ແຫວກສາຫຣ່າຍແລະແໜດ້ວຍມືທັງສອງແລ້ວກອບນໍ້າຂຶ້ນດື່ມແລ້ວຈຶ່ງຈາກໄປ

ພິກຂຸ ເພິ່ງກໍາຈັດຄວາມອາຄາດໃນບຸກຄົນນັ້ນແນວນີ້

ພິກຂຸເພິ່ງກໍາຈັດຄວາມອາຄາດໃນບຸກຄົນຜູ້ມີຄວາມປະພຶດທາງກາຍບໍ່ບໍລິສຸດ ມີຄວາມປະພຶດທາງວາຈາກໍບໍ່ບໍລິສຸດ ແຕ່ໄດ້ປ່ອງແຫ່ງໃຈ ໄດ້ຄວາມເຫຼື້ອມໃສທາງໃຈຕາມການອັນຄວນແນວໃດ

ຄື ບຸກຄົນໃດມີຄວາມປະພຶດທາງກາຍບໍ່ບໍລິສຸດ ມີຄວາມປະພຶດທາງວາຈາບໍ່ບໍລິສຸດ ແຕ່ໄດ້ປ່ອງແຫ່ງໃຈ ໄດ້ຄວາມເຫຼື້ອມໃສທາງໃຈຕາມການອັນຄວນ ຄວາມປະພຶດທາງກາຍທີ່ບໍ່ບໍລິສຸດຂອງເຂົາສ່ວນໃດ ພິກຂຸບໍ່ເພິ່ງໃສ່ໃຈສ່ວນນັ້ນໃນເວລານັ້ນ ແມ່ນຄວາມປະພຶດທາງວາຈາທີ່ບໍ່ບໍລິສຸດຂອງເຂົາສ່ວນໃດ ພິກຂຸກໍບໍ່ເພິ່ງໃສ່ໃຈສ່ວນນັ້ນໃນເວລານັ້ນ ແຕ່ການໄດ້ປ່ອງແຫ່ງໃຈໄດ້ຄວາມເຫຼື້ອມໃສທາງໃຈຕາມການອັນຄວນຂອງເຂົາສ່ວນໃດ ພິກຂຸເພິ່ງໃສ່ໃຈແຕ່ສ່ວນນັ້ນໃນເວລານັ້ນ ປຽບຄືນໍ້າເລັກໜ້ອຍໃນຮອຍຕີນງົວ ຄົນເດີນທາງມາຖືກຄວາມຮ້ອນກະທົບ ຮ້ອນອົບເອົ້າ ອ່ອນເພຍ ຫິວນໍ້າ ເຂົາເກີດຄວາມຄິດ ແນວນີ້ວ່າ "ນໍ້າເລັກໜ້ອຍມີຢູ່ໃນຮອຍຕີນງົວນີ້ ຖ້າເຮົາຈັກກອບຂຶ້ນດື່ມ ຫຼືໃຊ້ພາຊະນະ ຕັກດື່ມ ກໍຈັກເຮັດນໍ້ານັ້ນໃຫ້ໄຫວແດ່ ໃຫ້ຂຸ່ນແດ່ ໃຫ້ບໍ່ຄວນດື່ມແດ່ ທາງທີ່ດີ ເຮົາຄວນຈະຄຸກເຂົ່າກົ້ມລົງດື່ມຄືງົວແລ້ວຈຶ່ງຄ່ອຍໄປເທີ້ນ ເຂົາຈຶ່ງຄຸກເຂົ່າກົ້ມລົງດື່ມຄືງົວແລ້ວຈຶ່ງຈາກໄປ

ພິກຂຸ ເພິ່ງກຳຈັດຄວາມອາຄາດໃນບຸກຄົນນັ້ນແບບນີ້

ພິກຂຸ ເພິ່ງກຳຈັດຄວາມອາຄາດໃນບຸກຄົນຜູ້ມີຄວາມປະພຶດທາງກາຍບໍ່ບໍລິສຸດ ມີຄວາມປະພຶດທາງວາຈາບໍ່ບໍລິສຸດ ແລະບໍ່ໄດ້ປ່ອງແຫ່ງໃຈ ບໍ່ໄດ້ຄວາມເຫຼື້ອມໃສທາງໃຈ ຕາມການອັນຄວນ ແນວໃດ

ຄື ບຸກຄົນໃດມີຄວາມປະພຶດທາງກາຍບໍ່ບໍລິສຸດ ມີຄວາມປະພຶດທາງວາຈາບໍ່ບໍລິສຸດ ແລະບໍ່ໄດ້ປ່ອງແຫ່ງໃຈ ບໍ່ໄດ້ຄວາມເຫຼື້ອມໃສທາງໃຈຕາມການອັນຄວນ ພິກຂຸເພິ່ງເຂົ້າໄປຕັ້ງຄວາມກະລຸນາ ຄວາມອີດູ ຄວາມອະນຸເຄາະໃນບຸກຄົນແມ່ນແນວນີ້ວ່າ “ໂອ ທ່ານຜູ້ນີ້ເພິ່ງລະກາຍທຸດຈະຣິດແລ້ວຈະເລີນກາຍສຸດຈະຣິດ ເພິ່ງລະວະຈີທຸດຈະຣິດແລ້ວຈະເລີນວະຈີສຸດຈະຣິດ ເພິ່ງລະມະໂນທຸດຈະຣິດແລ້ວຈະເລີນມະໂນສຸດຈະຣິດ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທ່ານຜູ້ນີ້ຫຼັງຈາກຕາຍແລ້ວຢ່າໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ປຽບຄືຄົນເຈັບປ່ວຍ ມີທຸກເປັນໄຂ້ໜັກ ເດີນທາງໄກ ແມ່ນທາງໜ້າເຂົາກໍມີເຮືອນຢູ່ຫ່າງໄກ ແມ່ນທາງຫຼັງເຂົາກໍມີເຮືອນຢູ່ຫ່າງໄກ ເຂົາບໍ່ໄດ້ອາຫານທີ່ເປັນສັບປາຍະ ຢາທີ່ກົງກັບພະຍາດ ຄົນປິ່ນປົວທີ່ເໝາະສົມ ແລະຜູ້ທີ່ຈະນຳທາງໄປສູ່ເຮືອນ ຄົນລາງຄົນທີ່ເດີນທາງໄກເພິ່ງເຫັນເຂົາ ຈຶ່ງເຂົ້າໄປຕັ້ງຄວາມກະລຸນາ ຄວາມອີດູ ຄວາມອະນຸເຄາະໃນເຂົາວ່າ “ໂອ ທ່ານຜູ້ນີ້ຄວນຈະໄດ້ອາຫານທີ່ເປັນສັບປາຍະ ຢາທີ່ກົງກັບພະຍາດ ຄົນປິ່ນປົວທີ່ເໝາະສົມ ແລະຜູ້ນຳທາງໄປສູ່ເຮືອນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນວ່າ ທ່ານຜູ້ນີ້ຢ່າເຖິງຄວາມພິນາດເສຍຫາຍ ຢູ່ບ່ອນນີ້ເລີຍ

ພິກຂຸ ເພິ່ງກຳຈັດຄວາມອາຄາດໃນບຸກຄົນນັ້ນແບບນີ້

ພິກຂຸ ເພິ່ງກຳຈັດຄວາມອາຄາດໃນບຸກຄົນຜູ້ມີຄວາມປະພຶດທາງກາຍບໍລິສຸດ ມີຄວາມປະພຶດທາງວາຈາບໍລິສຸດ ແລະໄດ້ປ່ອງແຫ່ງໃຈ ໄດ້ຄວາມເຫຼື້ອມໃສທາງໃຈຕາມການອັນຄວນແນວໃດ

ຄື ບຸກຄົນໃດມີຄວາມປະພຶດທາງກາຍບໍລິສຸດ ມີຄວາມປະພຶດທາງວາຈາ ບໍລິສຸດ ໄດ້ປ່ອງແຫ່ງໃຈແລະໄດ້ຄວາມເຫຼື້ອມໃສທາງໃຈຕາມການອັນຄວນ ແມ່ນຄວາມປະພຶດທາງກາຍທີ່ບໍລິສຸດຂອງເຂົາສ່ວນໃດ ພິກຂຸເພິ່ງໃສໃຈສ່ວນນັ້ນໃນເວລານັ້ນ ແມ່ນຄວາມປະພຶດທາງວາຈາທີ່ບໍລິສຸດຂອງເຂົາສ່ວນໃດ ພິກຂຸກໍເພິ່ງໃສ່ໃຈສ່ວນນັ້ນໃນເວລານັ້ນ ແມ່ນການໄດ້ປ່ອງແຫ່ງໃຈໄດ້ຄວາມເຫຼື້ອມໃສທາງໃຈຕາມການອັນຄວນຂອງເຂົາສ່ວນໃດ ພິກຂຸກໍເພິ່ງໃສ່ໃຈສ່ວນນັ້ນໃນເວລານັ້ນ ປຽບຄືສະນ້ຳທີ່ໃສ ຈືດດີ ເຢັນ ສະອາດ ມີທ່າຫຼຽບ ໜ້າອອນຊອນ ດາດາດໄປນຳຕົ້ນໄມ້ນານາພັນ ຄົນເດີນທາງມາ ຖືກຄວາມຮ້ອນກະທົບ ຮ້ອນອົບເອົ້າ ອ່ອນເພຍ ຫິວນ້ຳ ເຂົາເພິ່ງລົງສະນ້ຳນັ້ນ ອາບແດ່ ດື່ມແດ່ ແລ້ວຂຶ້ນມາ ນັ່ງແດ່ ນອນແດ່ ທີ່ຮົ່ມໄມ້ໃກ້ສະນ້ຳນັ້ນ

ພິກຂຸ ເພິ່ງກຳຈັດຄວາມອາຄາດໃນບຸກຄົນນັ້ນແບບນີ້

ຜູ້ມີອາຍຸທັງຫຼາຍ ຍ້ອນອາໄສບຸກຄົນທີ່ໜ້າເຫຼື້ອມໃສ ຈິດຈຶ່ງເຫຼື້ອມໃສ ອຸບາຍກຳຈັດຄວາມອາຄາດ ໕ ປະການນີ້ແລ ເປັນເຄື່ອງກຳຈັດຄວາມອາຄາດທີ່ເກີດຂຶ້ນແກ່ພິກຂຸໄດ້ຢ່າງໝົດສິ້ນ

**ທຸຕິຍະອາຄາດປະຕິວິນະຍະສູດທີ ໒ ຈົບ**

## ໓. ສາກັດສະສູດ

## ວ່າດ້ວຍພິກຂຸຜູ້ຄວນສົນທະນາດ້ວຍ

[໑໖໓] ໃນບ່ອນນັ້ນ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ ຯລຯ[1] ຈຶ່ງໄດ້ກ່າວເລື້ອງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ຄວນສົນທະນາກັບເພື່ອນພົມມະຈາຣີທັງຫຼາຍ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ແລະຕອບບັນຫາທີ່ມາໃນເລື້ອງສີລະສຳປະທາໄດ້
໒. ຕົນເອງເປັນຜູ້ເຖິງພ້ອມດ້ວຍສະມາທິ ແລະຕອບບັນຫາທີ່ມາໃນເລື້ອງສະມາທິສຳປະທາໄດ້
໓. ຕົນເອງເປັນຜູ້ເຖິງພ້ອມດ້ວຍປັນຍາ ແລະຕອບບັນຫາທີ່ມາໃນເລື້ອງປັນຍາສຳປະທາໄດ້
໔. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິ ແລະຕອບບັນຫາທີ່ມາໃນເລື້ອງວິມຸດຕິສຳປະທາໄດ້
໕. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ແລະຕອບບັນຫາທີ່ມາໃນເລື້ອງວິມຸດຕິຍານທັດສະນະສຳປະທາໄດ້

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ຄວນສົນທະນາກັບເພື່ອນພົມມະຈາຣີທັງຫຼາຍ

**ສາກັດສະສູດທີ ໓ ຈົບ**

# ໔. ອາຊີວະສູດ

## ວ່າດ້ວຍພິກຂຸຜູ້ຄວນແກ່ສາຊີບ[១]

[໑໖໔] ໃນບ່ອນນັ້ນ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ ຯລຯ ຈຶ່ງໄດ້ກ່າວເລື້ອງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ຄວນແກ່ສາຊີບຂອງເພື່ອນພົມມະຈາຣີທັງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ແລະຕອບບັນຫາທີ່ມາໃນເລື້ອງສີລະສຳປະທາໄດ້
໒. ຕົນເອງເປັນຜູ້ເຖິງພ້ອມດ້ວຍສະມາທິ ແລະຕອບບັນຫາທີ່ມາໃນເລື້ອງສະມາທິສຳປະທາໄດ້
໓. ຕົນເອງເປັນຜູ້ເຖິງພ້ອມດ້ວຍປັນຍາ ແລະຕອບບັນຫາທີ່ມາໃນເລື້ອງປັນຍາສຳປະທາໄດ້
໔. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິ ແລະຕອບບັນຫາທີ່ມາໃນເລື້ອງວິມຸດຕິສຳປະທາໄດ້
໕. ຕົນເອງເປັນຜູ້ເຖິງພ້ອມດ້ວຍວິມຸດຕິຍານທັດສະນະ ແລະຕອບບັນຫາທີ່ມາໃນເລື້ອງວິມຸດຕິຍານທັດສະນະສຳປະທາໄດ້

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ຄວນແກ່ສາຊີບຂອງເພື່ອນພົມມະຈາຣີທັງຫຼາຍ

**ອາຊີວະສູດທີ ໔ ຈົບ**

# ໕. ປັນຫາປຸດສາສູດ

## ວ່າດ້ວຍການຖາມບັນຫາ

[໑໖໕] ໃນບ່ອນນັ້ນ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ ຯລຯ ຈຶ່ງໄດ້ກ່າວເລື້ອງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ພິກຂຸລາງອົງຍ່ອມຖາມບັນຫາກັບພິກຂຸອື່ນດ້ວຍເຫດ ໕ ປະການທັງໝົດ ຫຼື ເຫດໃດເຫດໜຶ່ງ

ເຫດ ໕ ປະການ ອັນໃດແດ່ ຄື

໑. ພິກຂຸລາງອົງຖາມບັນຫາກັບພິກຂຸອື່ນ ຍ້ອນໂງ່ຈ້າ ຍ້ອນຫຼົງງົມງວາຍ
໒. ພິກຂຸລາງອົງມີຄວາມປາຖະໜາຊົ່ວ ຖືກຄວາມປາຖະໜາຄອບງຳ ຈຶ່ງຖາມບັນຫາກັບພິກຂຸອື່ນ
໓. ພິກຂຸລາງອົງດູໝິ່ນ ຈຶ່ງຖາມບັນຫາກັບພິກຂຸອື່ນ
໔. ພິກຂຸລາງອົງປະສົງຈະຮູ້ຈຶ່ງຖາມບັນຫາກັບພິກຂຸອື່ນ
໕. ພິກຂຸລາງອົງຄິດແບບນີ້ວ່າ "ພິກຂຸອື່ນຖ້າຖືກເຮົາຖາມບັນຫາກໍຈັກຕອບໃຫ້ຊັດເຈນ ນັ້ນເປັນການດີ ແຕ່ຖ້າຕອບບໍ່ຊັດເຈນ ເຮົາເອງຈັກຕອບໃຫ້ຊັດເຈນແກ່ທ່ານ ຈຶ່ງຖາມບັນຫາກັບພິກຂຸອື່ນ

ຜູ້ມີອາຍຸທັງຫຼາຍ ພິກຂຸລາງອົງຍ່ອມຖາມບັນຫາກັບພິກຂຸອື່ນດ້ວຍເຫດ ໕ ປະການທັງໝົດຫຼືເຫດໃດເຫດໜຶ່ງ

ສ່ວນຂ້າພະເຈົ້າຄິດແບບນີ້ວ່າ "ຖ້າພິກຂຸອື່ນຖືກເຮົາຖາມບັນຫາກໍຈັກຕອບໃຫ້ຊັດເຈນນັ້ນເປັນການດີ ແຕ່ຖ້າຕອບບໍ່ຊັດເຈນ ເຮົາເອງຈັກຕອບໃຫ້ຊັດເຈນແກ່ພິກຂຸນັ້ນ ຈຶ່ງຖາມບັນຫາກັບພິກຂຸອື່ນ

**ປັນຫາປຸດສາສູດທີ ໕ ຈົບ**

## ໖. ນິໂຣທະສູດ

## ວ່າດ້ວຍນິໂຣດ

[໑໖໖] ໃນບ່ອນນັ້ນ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ໆລໆ ຈຶ່ງໄດ້ກ່າວເລື້ອງນີ້ ວ່າ

"ຜູ້ມີອາຍຸທັງຫຼາຍ ເປັນໄປໄດ້ທີ່ພິກຂຸໃນທຳວິໄນນີ້ຜູ້ເຖິງພ້ອມດ້ວຍສີນ ເຖິງພ້ອມດ້ວຍສະມາທິ ເຖິງພ້ອມດ້ວຍປັນຍາ ເຂົ້າສັນຍາເວທະຍິຕະນິໂຣດແດ່ ອອກຈາກສັນຍາເວທະຍິຕະນິໂຣດແດ່ ຫາກທ່ານບໍ່ບັນລຸອະຣະຫັດຕະຜົນໃນປັດຈຸບັນ ກໍເປັນໄປໄດ້ທີ່ທ່ານຈະລ່ວງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຜູ້ມີຄຳເຂົ້າເປັນພັກສາ[໑] ແລ້ວເຂົ້າເຖິງກາຍມະໂນໄມ[໒]ຊັ້ນໃດຊັ້ນໜຶ່ງ ເຂົ້າສັນຍາເວທະຍິຕະນິໂຣດແດ່ ອອກຈາກສັນຍາເວທະຍິຕະນິໂຣດແດ່

ເມື່ອທ່ານພຣະສາຣີບຸດກ່າວແນວນີ້ແລ້ວ ທ່ານພຣະອຸທາຍີຈຶ່ງກ່າວກັບທ່ານພຣະສາຣີບຸດ ດັ່ງນີ້ວ່າ "ທ່ານສາຣີບຸດ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຈະລ່ວງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຜູ້ ມີຄຳເຂົ້າເປັນພັກສາ ແລ້ວເຂົ້າເຖິງກາຍມະໂນໄມຊັ້ນໃດຊັ້ນໜຶ່ງ ເຂົ້າສັນຍາເວທະຍິຕະນິໂຣດ ແດ່ ອອກຈາກສັນຍາເວທະຍິຕະນິໂຣດແດ່ ເປັນໄປບໍ່ໄດ້ແນ່ນອນ

ແມ່ນເທື່ອທີ ໔ ໗ລ໗

ແມ່ນເທື່ອທີ ໓ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ "ຜູ້ມີອາຍຸທັງຫຼາຍ ເປັນໄປໄດ້ທີ່ພິກຂຸໃນທຳວິໄນນີ້ຜູ້ເຖິງພ້ອມດ້ວຍສີນ ເຖິງພ້ອມດ້ວຍສະມາທິ ເຖິງພ້ອມດ້ວຍ ປັນຍາ ເຂົ້າສັນຍາເວທະຍິຕະນິໂຣດແດ່ ອອກຈາກສັນຍາເວທະຍິຕະນິໂຣດແດ່ ຫາກທ່ານບໍ່ ບັນລຸອະຣະຫັດຕະຜົນໃນປັດຈຸບັນ ກໍເປັນໄປໄດ້ທີ່ທ່ານຈະລ່ວງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະ ດາຜູ້ມີຄຳເຂົ້າເປັນພັກສາ ແລ້ວເຂົ້າເຖິງກາຍມະໂນໄມຊັ້ນໃດຊັ້ນໜຶ່ງ ເຂົ້າສັນຍາເວທະຍິຕະ ນິໂຣດແດ່ ອອກຈາກສັນຍາເວທະຍິຕະນິໂຣດແດ່

ແມ່ນເທື່ອທີ ໓ ທ່ານພຣະອຸທາຍີກໍໄດ້ກ່າວກັບທ່ານພຣະສາຣີບຸດດັ່ງນີ້ວ່າ "ທ່ານສາຣີບຸດ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຈະລ່ວງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຜູ້ມີຄຳເຂົ້າເປັນພັກສາແລ້ວ ເຂົ້າເຖິງກາຍມະໂນໄມຊັ້ນໃດຊັ້ນໜຶ່ງ ເຂົ້າສັນຍາເວທະຍິຕະນິໂຣດແດ່ ອອກຈາກ ສັນຍາເວທະ ຍິຕະນິໂຣດແດ່ ເປັນໄປບໍ່ໄດ້ແນ່ນອນ

ລຳດັບນັ້ນ ທ່ານພຣະສາຣີບຸດໄດ້ມີຄວາມຄິດວ່າ "ທ່ານອຸທາຍີຄັດຄ້ານເຮົາເຖິງ ໓ ຄັ້ງ ແລະພິກຂຸລາງອົງກໍບໍ່ອະນຸໂມທະນາເຮົາ ທາງທີ່ດີ ເຮົາຄວນຈະເຂົ້າໄປເຝົ້າພຣະຜູ້ມີພຣະພາກ ເຈົ້າຮອດບ່ອນຢູ່ ແລ້ວຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ຮຽກພິກຂຸທັງຫຼາຍມາກ່າວວ່າ "ຜູ້ມີອາຍຸທັງຫຼາຍ ເປັນໄປໄດ້ທີ່ພິກຂຸໃນທຳ ວິໄນນີ້ຜູ້ເຖິງພ້ອມດ້ວຍສີນ ເຖິງພ້ອມດ້ວຍສະມາທິ ເຖິງພ້ອມດ້ວຍປັນຍາ ເຂົ້າສັນຍາເວທະ ຍິຕະນິໂຣດແດ່ ອອກຈາກສັນຍາເວທະຍິຕະນິໂຣດແດ່ ຫາກທ່ານບໍ່ບັນລຸອະຣະຫັດຕະຜົນໃນ ປັດຈຸບັນ ກໍເປັນໄປໄດ້ທີ່ທ່ານຈະລ່ວງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາ ຜູ້ມີຄຳເຂົ້າເປັນ ພັກສາ ແລ້ວເຂົ້າເຖິງກາຍມະໂນໄມຊັ້ນໃດຊັ້ນໜຶ່ງ ເຂົ້າສັນຍາເວທະຍິຕະນິໂຣດແດ່ ອອກຈາກ ສັນຍາເວທະຍິຕະນິໂຣດແດ່

ເມື່ອທ່ານພຣະສາຣີບຸດກ່າວແນວນີ້ແລ້ວ ທ່ານພຣະອຸທາຍີໄດ້ກ່າວກັບທ່ານພຣະ ສາຣີບຸ ດດັ່ງນີ້ວ່າ "ທ່ານສາຣີບຸດ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຈະລ່ວງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາ ຜູ້ມີຄຳເຂົ້າເປັນພັກສາ ແລ້ວເຂົ້າເຖິງກາຍມະໂນໄມຊັ້ນໃດຊັ້ນໜຶ່ງ ເຂົ້າສັນຍາເວທະຍິຕະນິໂຣດ ແດ່ ອອກຈາກສັນຍາເວທະຍິຕະນິໂຣດແດ່ ເປັນໄປບໍ່ໄດ້ແນ່ນອນ

ແມ່ນເທື່ອທີ ໔ ໗ລ໗

ແມ່ນເທື່ອທີ ໓ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ "ຜູ້ມີອາຍຸທັງຫຼາຍ ເປັນໄປໄດ້ທີ່ພິກຂຸໃນທຳວິໄນນີ້ຜູ້ເຖິງພ້ອມດ້ວຍສີນ ເຖິງພ້ອມດ້ວຍສະມາທິ ເຖິງພ້ອມດ້ວຍ ປັນຍາ ເຂົ້າສັນຍາເວທະຍິຕະນິໂຣດແດ່ ອອກຈາກສັນຍາເວທະຍິຕະນິໂຣດແດ່ ຫາກທ່ານບໍ່ ບັນລຸອະຣະຫັດຕະຜົນໃນປັດຈຸບັນ ກໍເປັນໄປໄດ້ທີ່ທ່ານຈະລ່ວງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະ ດາຜູ້ມີຄຳເຂົ້າເປັນພັກສາ ແລ້ວເຂົ້າເຖິງກາຍມະໂນໄມຊັ້ນໃດຊັ້ນໜຶ່ງ ເຂົ້າສັນຍາເວທະຍິຕະ ນິໂຣດແດ່ ອອກຈາກສັນຍາເວທະຍິຕະນິໂຣດແດ່

ແມ່ນເທື່ອທີ ໓ ທ່ານພຣະອຸທາຍີໄດ້ກ່າວກັບທ່ານພຣະສາຣີບຸດດັ່ງນີ້ວ່າ "ທ່ານສາຣີບຸດ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຈະລ່ວງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຜູ້ມີຄຳເຂົ້າເປັນພັກສາ ແລ້ວເຂົ້າເຖິງກາຍມະໂນໄມຊັ້ນໃດຊັ້ນໜຶ່ງ ເຂົ້າສັນຍາເວທະຍິຕະນິໂຣດແດ່ ອອກຈາກສັນຍາ ເວທະຍິຕະນິໂຣດແດ່ ເປັນໄປບໍ່ໄດ້ແນ່ນອນ

ລຳດັບນັ້ນ ທ່ານພຣະສາຣີບຸດໄດ້ມີຄວາມຄິດວ່າ "ທ່ານອຸທາຍີ ຄັດຄ້ານເຮົາເຖິງ ໓ ຄັ້ງ ຕໍ່ພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ແລະພິກຂຸລາງອົງກໍບໍ່ອະນຸໂມທະນາເຮົາ ທາງທີ່ດີ ເຮົາ ເພິ່ງມິດເສຍ ຈຶ່ງໄດ້ມິດຢູ່

ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານອຸທາຍີວ່າ "ອຸທາຍີ ທ່ານໝາຍເຖິງ ກາຍ-ມະໂນໄມແນວໃດ

ທ່ານພຣະອຸທາຍີຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງໝາຍເຖິງເຫຼົ່າເທບ ຊັ້ນອະຣູບປະພົມທີ່ສຳເລັດດ້ວຍສັນຍາ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸທາຍີ ການເວົ້າຂອງທ່ານຜູ້ຈ໊າ ບໍ່ສະຫຼາດ ຈະມີ ປະໂຫຍດອັນໃດ ທ່ານເຂົ້າໃຈເຖິງສິ່ງທີ່ທ່ານເວົ້າບໍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ອານົນ ເປັນ ໄປໄດ້ບໍທີ່ທ່ານທັງຫຼາຍເພີກເສີຍຕໍ່ພິກຂຸເຖຣະຜູ້ກຳລັງຖືກບຽດບຽນຢູ່ ທ່ານທັງຫຼາຍຄົງຈະບໍ່ມີ ຄວາມກະລຸນາໃນພິກຂຸເຖຣະຜູ້ສະຫຼາດເຊິ່ງກຳລັງຖືກບຽດບຽນຢູ່໌

ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ເປັນໄປໄດ້ ທີ່ພິກຂຸໃນທຳວິໄນນີ້ຜູ້ເຖິງພ້ອມດ້ວຍສີນ ເຖິງພ້ອມດ້ວຍສະມາທິ ເຖິງພ້ອມດ້ວຍປັນຍາ ເຂົ້າ ສັນຍາເວທະຍິຕະນິໂຣດແດ່ ອອກຈາກສັນຍາເວທະຍິຕະນິໂຣດແດ່ ຫາກທ່ານບໍ່ບັນລຸອະຣະຫັດ ຕະຜົນໃນປັດຈຸບັນ ກໍເປັນໄປໄດ້ທີ່ທ່ານຈະລ່ວງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຜູ້ມີຄຳເຂົ້າ

ເປັນພັກສາ ແລ້ວເຂົ້າເຖິງກາຍມະໂນໄມຊັ້ນໃດຊັ້ນໜຶ່ງ ເຂົ້າສັນຍາເວທະຍິຕະນິໂຣດແດ່ ອອກຈາກສັນຍາເວທະຍິຕະນິໂຣດແດ່ ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດເມື່ອຕັດດັ່ງນີ້ແລ້ວກໍສະເດັດລຸກຂຶ້ນຈາກພຸດທະອາດ ສະເດັດເຂົ້າໄປສູ່ພຣະວິຫານ໌

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຫຼີກໄປບໍ່ດົນ ທ່ານພຣະອານົນ ໄດ້ເຂົ້າໄປຫາທ່ານພຣະອຸປະວານະຮອດບ່ອນຢູ່ແລ້ວກ່າວດັ່ງນີ້ວ່າ "ທ່ານອຸປະວານະ ພິກຂຸເຫຼົ່າອື່ນໃນສາດສະໜານີ້ ບງດບງນພຣະເຖຣະ ພວກເຮົາຈະບໍ່ຖາມຫາພິກຂຸເຫຼົ່ານັ້ນ ການທີ່ພຣະຜູ້ມີພຣະພາກເຈົ້າສະເດັດ ອອກຈາກບ່ອນຫຼີບຫຼີກໃນເວລາຄ່ຳ ຈະຜາຣົບເທດນັ້ນ ໆແລ ແລ້ວຍົກຂຶ້ນສະແດງຄືທີ່ຈະເພິ່ງຕັດກັບທ່ານອຸປະວານະໂດຍສະເພາະໃນເທດນັ້ນ ນັ້ນບໍ່ໜ້າອັດສະຈັນ ບັດນີ້ ຄວາມນ້ອຍໃຈໄດ້ເກີດຂຶ້ນແກ່ພວກເຮົາ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກໃນເວລາຄ່ຳແລ້ວສະເດັດເຂົ້າໄປປະທັບນັ່ງທີ່ອຸປັດຖານະສາລາ ໄດ້ຕັດຖາມທ່ານອຸປະວານະ ວ່າ

"ອຸປະວານະ ພິກຂຸເຖຣະປະກອບດ້ວຍທຳທໍ່ໃດຈຶ່ງເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ທ່ານອຸປະວານະຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸເຖຣະປະກອບດ້ວຍ ທຳ ໕ ປະການ ຈຶ່ງເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງ ຂອງເພື່ອນພົມມະຈາຣີທັງຫຼາຍ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຖຣະໃນທຳວິໄນນີ້

໑. ເປັນຜູ້ມີສິນ ຯລຯ ສຶກສາຢູ່ໃນສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ
໓. ມີວາຈາງາມ ເຈຣະຈາຄຳເວົ້າມ່ວນ ປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້
໔. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ໑ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ
໕. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ໌ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ອຸປະວານະ ພິກຂຸເຖຣະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ ຫາກພິກຂຸເຖຣະບໍ່ມີທຳ ໕ ປະການນີ້ ເພື່ອນພົມມະຈາຣີ ທັງຫຼາຍຈະສັກກາຣະ ເຄົາລົບ ນັບຖື ບູຊາທ່ານຍ້ອນຄວາມເປັນຜູ້ມີແຂ້ວຫັກ ມີຜົມຫງອກ ມີໜັງຍານເພື່ອອັນໃດ ແຕ່ຍ້ອນພິກຂຸເຖຣະມີທຳ ໕ ປະການນີ້ ເພື່ອນພົມມະຈາຣີ ທັງຫຼາຍຈຶ່ງສັກກາຣະເຄົາລົບ ນັບຖື ບູຊາທ່ານ

**ນິໂຣທະສູດທີ ໖ ຈົບ**

## ໗. ໂຈທະນາສູດ

## ວ່າດ້ວຍຄຸນສົມບັດຂອງພິກຂຸຜູ້ເປັນໂຈດ[๑]

[໑໖໗] ໃນບ່ອນນັ້ນ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍພິກຂຸຜູ້ເປັນໂຈດປະສົງຈະໂຈດຜູ້ອື່ນ ເພິ່ງຕັ້ງໝັ້ນທຳ ໕ ປະການໄວ້ໃນຕົນແລ້ວຈຶ່ງໂຈດຜູ້ອື່ນ

ທຳ ໕ ປະການ ອັນໃດແດ່ ຄື

໑. ເຮົາຈັກກ່າວໃນການອັນຄວນ ຈັກບໍ່ກ່າວໃນການອັນບໍ່ຄວນ
໒. ເຮົາຈັກກ່າວຄຳເວົ້າຈິງ ຈັກບໍ່ກ່າວຄຳເວົ້າບໍ່ຈິງ
໓. ເຮົາຈັກກ່າວຄຳເວົ້າອ່ອນຫວານ ຈັກບໍ່ກ່າວຖ້ອຍຄຳຫຍາບ
໔. ເຮົາຈັກກ່າວຄຳເວົ້າອັນປະກອບດ້ວຍປະໂຫຍດ ຈັກບໍ່ກ່າວຄຳເວົ້າອັນບໍ່ປະກອບດ້ວຍປະໂຫຍດ
໕. ເຮົາຈັກມີເມດຕາຈິດກ່າວ ຈັກບໍ່ເພ່ງໂທດກ່າວ

ຜູ້ມີອາຍຸທັງຫຼາຍ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງຕັ້ງໝັ້ນທຳ ໕ ປະການນີ້ໄວ້ໃນຕົນແລ້ວຈຶ່ງໂຈດຜູ້ອື່ນ

ຜູ້ມີອາຍຸທັງຫຼາຍ ຂ້າພະເຈົ້າເຫັນບຸກຄົນລາງຄົນໃນທຳວິໄນນີ້ ຖືກຜູ້ອື່ນໂຈດໃນການອັນບໍ່ຄວນ ບໍ່ຖືກໂຈດໃນການອັນຄວນ ກໍໂກດ ຖືກຜູ້ອື່ນໂຈດດ້ວຍຄຳເວົ້າບໍ່ຈິງ ບໍ່ຖືກໂຈດດ້ວຍຄຳເວົ້າຈິງ ກໍໂກດ ຖືກຜູ້ອື່ນໂຈດດ້ວຍຖ້ອຍຄຳຫຍາບ ບໍ່ຖືກໂຈດດ້ວຍຄຳເວົ້າອ່ອນຫວານກໍໂກດ ຖືກຜູ້ອື່ນໂຈດດ້ວຍຄຳເວົ້າອັນບໍ່ປະກອບດ້ວຍປະໂຫຍດ ບໍ່ຖືກໂຈດດ້ວຍຄຳເວົ້າອັນປະກອບດ້ວຍປະໂຫຍດ ກໍໂກດ ຖືກຜູ້ອື່ນໂຈດດ້ວຍການເພ່ງໂທດ ບໍ່ຖືກໂຈດດ້ວຍເມດຕາຈິດ ກໍໂກດ

ພິກຂຸເພິ່ງໃຫ້ອະວິບປະຕິສານ (ຄວາມບໍ່ຮ້ອນໃຈ) ເກີດຂຶ້ນແກ່ພິກຂຸຜູ້ຖືກໂຈດໂດຍບໍ່ເປັນທຳ ໂດຍອາການ ໕ ຄື

໑. ທ່ານຖືກໂຈດໃນການອັນບໍ່ຄວນ ບໍ່ຖືກໂຈດໃນການອັນຄວນ ທ່ານຈຶ່ງຄວນມີ ອະວິບປະຕິສານ
໒. ທ່ານຖືກໂຈດດ້ວຍຄຳເວົ້າບໍ່ຈິງ ບໍ່ຖືກໂຈດດ້ວຍຄຳເວົ້າຈິງ ທ່ານຈຶ່ງຄວນມີອະວິບປະຕິສານ
໓. ທ່ານຖືກໂຈດດ້ວຍຖ້ອຍຄຳຫຍາບ ບໍ່ຖືກໂຈດດ້ວຍຄຳເວົ້າອ່ອນຫວານ ທ່ານຈຶ່ງຄວນມີອະວິບປະຕິສານ
໔. ທ່ານຖືກໂຈດດ້ວຍຄຳເວົ້າອັນບໍ່ປະກອບດ້ວຍປະໂຫຍດ ບໍ່ຖືກໂຈດດ້ວຍຄຳເວົ້າອັນປະກອບດ້ວຍປະໂຫຍດ ທ່ານຈຶ່ງຄວນມີອະວິບປະຕິສານ
໕. ທ່ານຖືກໂຈດດ້ວຍການເພ່ງໂທດ ບໍ່ຖືກໂຈດດ້ວຍເມດຕາຈິດ ທ່ານຈຶ່ງຄວນມີອະວິບປະຕິສານ

ຜູ້ມີອາຍຸທັງຫຼາຍ ພິກຂຸ ເພິ່ງໃຫ້ມີອະວິບປະຕິສານເກີດຂຶ້ນແກ່ພິກຂຸຜູ້ຖືກໂຈດໂດຍບໍ່ເປັນທຳ ໂດຍອາການ ໕ ນີ້

ພິກຂຸເພິ່ງໃຫ້ວິບປະຕິສານ(ຄວາມຮ້ອນໃຈ)ເກີດຂຶ້ນແກ່ພິກຂຸຜູ້ເປັນໂຈດໂດຍບໍ່ເປັນທຳ ໂດຍອາການ ໕ ຄື

໑. ທ່ານໂຈດໃນການອັນບໍ່ຄວນ ບໍ່ໂຈດໃນການອັນຄວນ ທ່ານຈຶ່ງຄວນມີວິບປະຕິສານ
໒. ທ່ານໂຈດດ້ວຍຄຳເວົ້າບໍ່ຈິງ ບໍ່ໂຈດດ້ວຍຄຳເວົ້າຈິງ ທ່ານຈຶ່ງຄວນມີວິບປະຕິສານ
໓. ທ່ານໂຈດດ້ວຍຖ້ອຍຄຳຫຍາບ ບໍ່ໂຈດດ້ວຍຄຳເວົ້າອ່ອນຫວານ ທ່ານຈຶ່ງຄວນມີວິບປະຕິສານ
໔. ທ່ານໂຈດດ້ວຍຄຳເວົ້າອັນບໍ່ປະກອບດ້ວຍປະໂຫຍດ ບໍ່ໂຈດດ້ວຍຄຳເວົ້າ ອັນປະກອບດ້ວຍປະໂຫຍດ ທ່ານຈຶ່ງຄວນມີວິບປະຕິສານ
໕. ທ່ານໂຈດດ້ວຍການເພ່ງໂທດ ບໍ່ໂຈດດ້ວຍເມດຕາຈິດ ທ່ານຈຶ່ງຄວນມີ ວິບປະຕິສານ

ຜູ້ມີອາຍຸທັງຫຼາຍ ພິກຂຸເພິ່ງໃຫ້ວິບປະຕິສານເກີດຂຶ້ນແກ່ພິກຂຸຜູ້ເປັນໂຈດໂດຍບໍ່ເປັນທຳ ໂດຍອາການ ໕ ນີ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພິກຂຸແມ່ນອີງອື່ນ ບໍ່ເພິ່ງເຂົ້າໃຈວ່າ ຄວນໂຈດດ້ວຍຄຳເວົ້າບໍ່ຈິງ

ຂ້າພະເຈົ້າເຫັນບຸກຄົນລາງຄົນໃນທຳວິໄນນີ້ ຖືກໂຈດໃນການອັນຄວນ ບໍ່ຖືກໂຈດໃນການອັນບໍ່ຄວນ ກໍໂກດ ຖືກໂຈດດ້ວຍຄຳເວົ້າຈິງ ບໍ່ຖືກໂຈດດ້ວຍຄຳເວົ້າບໍ່ຈິງ ກໍໂກດ ຖືກໂຈດດ້ວຍຄຳເວົ້າອ່ອນຫວານ ບໍ່ຖືກໂຈດດ້ວຍຖ້ອຍຄຳຫຍາບ ກໍໂກດ ຖືກໂຈດດ້ວຍຄຳເວົ້າອັນປະກອບດ້ວຍປະໂຫຍດ ບໍ່ຖືກໂຈດດ້ວຍຄຳເວົ້າອັນບໍ່ປະກອບດ້ວຍປະໂຫຍດ ກໍໂກດ ຖືກໂຈດດ້ວຍເມດຕາຈິດ ບໍ່ຖືກໂຈດດ້ວຍການເພ່ງໂທດ ກໍໂກດ

ພິກຂຸເພິ່ງໃຫ້ວິບປະຕິສານເກີດຂຶ້ນແກ່ພິກຂຸຜູ້ຖືກໂຈດໂດຍທຳ ໂດຍອາການ ໕ ຄື

໑. ທ່ານຖືກໂຈດໃນການອັນຄວນ ບໍ່ຖືກໂຈດໃນການອັນບໍ່ຄວນ ທ່ານຈຶ່ງຄວນມີວິບປະຕິສານ
໒. ທ່ານຖືກໂຈດດ້ວຍຄຳເວົ້າຈິງ ບໍ່ຖືກໂຈດດ້ວຍຄຳເວົ້າບໍ່ຈິງ ທ່ານຈຶ່ງຄວນມີວິບປະຕິສານ
໓. ທ່ານຖືກໂຈດດ້ວຍຄຳເວົ້າອ່ອນຫວານ ບໍ່ຖືກໂຈດດ້ວຍຖ້ອຍຄຳຫຍາບ ທ່ານຈຶ່ງຄວນມີວິບປະຕິສານ
໔. ທ່ານຖືກໂຈດດ້ວຍຄຳເວົ້າອັນປະກອບດ້ວຍປະໂຫຍດ ບໍ່ຖືກໂຈດດ້ວຍຄຳເວົ້າອັນບໍ່ປະກອບດ້ວຍປະໂຫຍດ ທ່ານຈຶ່ງຄວນມີວິບປະຕິສານ
໕. ທ່ານຖືກໂຈດດ້ວຍເມດຕາຈິດ ບໍ່ຖືກໂຈດດ້ວຍການເພ່ງໂທດ ທ່ານຈຶ່ງຄວນມີວິບປະຕິສານ

ຜູ້ມີອາຍຸທັງຫຼາຍ ພິກຂຸເພິ່ງໃຫ້ວິບປະຕິສານເກີດຂຶ້ນແກ່ພິກຂຸຜູ້ຖືກໂຈດໂດຍທຳ ໂດຍອາການ ໕ ນີ້

ພິກຂຸເພິ່ງໃຫ້ອະວິບປະຕິສານເກີດຂຶ້ນແກ່ພິກຂຸຜູ້ເປັນໂຈດໂດຍທຳ ໂດຍອາການ ໕ ຄື

໑. ທ່ານໂຈດໃນການອັນຄວນ ບໍ່ໂຈດໃນການອັນບໍ່ຄວນ ທ່ານຈຶ່ງຄວນມີອະວິບປະຕິສານ
໒. ທ່ານໂຈດດ້ວຍຄຳເວົ້າຈິງ ບໍ່ໂຈດດ້ວຍຄຳເວົ້າບໍ່ຈິງ ທ່ານຈຶ່ງຄວນມີອະວິບປະຕິສານ
໓. ທ່ານໂຈດດ້ວຍຄຳເວົ້າອ່ອນຫວານ ບໍ່ໂຈດດ້ວຍຖ້ອຍຄຳຫຍາບ ທ່ານຈຶ່ງຄວນມີອະວິບປະຕິສານ
໔. ທ່ານໂຈດດ້ວຍຄຳເວົ້າອັນປະກອບດ້ວຍປະໂຫຍດ ບໍ່ໂຈດດ້ວຍຄຳເວົ້າອັນບໍ່ປະກອບດ້ວຍປະໂຫຍດ ທ່ານຈຶ່ງຄວນມີອະວິບປະຕິສານ
໕. ທ່ານໂຈດດ້ວຍເມດຕາຈິດ ບໍ່ໂຈດດ້ວຍການເພ່ງໂທດ ທ່ານຈຶ່ງຄວນມີອະວິບປະຕິສານ

ຜູ້ມີອາຍຸທັງຫຼາຍ ພິກຂຸ ເພິ່ງໃຫ້ອະວິບປະຕິສານເກີດຂຶ້ນແກ່ພິກຂຸຜູ້ເປັນໂຈດໂດຍທຳ ໂດຍອາການ ໕ ນີ້ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນພິກຂຸແມ່ນອົງອື່ນເພິ່ງເຂົ້າໃຈວ່າຄວນໂຈດດ້ວຍຄຳເວົ້າຈິງ

ບຸກຄົນຜູ້ຖືກໂຈດເພິ່ງຕັ້ງໝັ້ນໃນທຳ ໒ ປະການ ຄື ຄວາມຈິງ ແລະຄວາມບໍ່ ໂກດວ່າ "ຖ້າຜູ້ອື່ນເພິ່ງໂຈດເຮົາ ດ້ວຍທຳ ໕ ປະການ ຄື

໑. ເພິ່ງໂຈດໃນການອັນຄວນຫຼືໃນການອັນບໍ່ຄວນ
໒. ເພິ່ງໂຈດດ້ວຍຄຳເວົ້າແມ່ນຫຼືດ້ວຍຄຳເວົ້າບໍ່ຈິງ
໓. ເພິ່ງໂຈດດ້ວຍຄຳເວົ້າອ່ອນຫວານຫຼືດ້ວຍຖ້ອຍຄຳຫຍາບ
໔. ເພິ່ງໂຈດດ້ວຍຄຳເວົ້າອັນປະກອບດ້ວຍ ປະໂຫຍດຫຼືດ້ວຍຄຳເວົ້າອັນບໍ່ປະກອບດ້ວຍປະໂຫຍດ
໕. ເພິ່ງໂຈດດ້ວຍເມດຕາຈິດຫຼືດ້ວຍການເພ່ງໂທດ

ແມ່ນເຮົາກໍຈະຕັ້ງຢູ່ໃນທຳ ໒ ປະການ ຄື ຄວາມຈິງແລະຄວາມບໍ່ໂກດ ຖ້າເຮົາເພິ່ງຮູ້ວ່າ ທຳນັ້ນມີໃນເຮົາ ກໍຈະເພິ່ງກ່າວວ່າ "ມີຢູ່ ແລະວ່າ "ຜາກົດໃນເຮົາ ຖ້າເພິ່ງຮູ້ວ່າ ທຳນັ້ນບໍ່ມີໃນເຮົາ ກໍຈະເພິ່ງກ່າວວ່າ "ບໍ່ມີ ແລະກ່າວວ່າ "ບໍ່ຜາກົດໃນເຮົາ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ເລື້ອງເພິ່ງເປັນແນວນັ້ນ ແຕ່ໂມຄະບຸຣຸດລາງພວກໃນທຳວິໄນນີ້ ເມື່ອຖືກກ່າວສອນ ຍ່ອມບໍ່ຮັບຟັງຄຳພ່ຳສອນໂດຍເຄົາລົບ

ທ່ານພຣະສາຣີບຸດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເຫຼົ່າໃດບໍ່ມີສັດທາຕ້ອງການລ້ຽງຊີວິດ ບໍ່ແມ່ນມີສັດທາອອກຈາກເຮືອນບວດເປັນບັນພະຊິດ ເປັນຜູ້ໂອ້ອວດ ມີມານຍາ ດື້ດ້ານ ຟຸ້ງຊ່ານ ຖືໂຕ ໂລເລ ປາກຮ້າຍ ເວົ້າພ່ຳເພື້ອ ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍບໍ່ຮູ້ຈັກປະມານໃນການບໍຣິໂພກ ບໍ່ປະກອບຄວາມພຽນເຄື່ອງຕື່ນຢູ່ ບໍ່ມຸ້ງຫວັງຄວາມເປັນສະມະນະ ບໍ່ມີຄວາມເຄົາລົບຢ່າງແຮງກ້າໃນສິກຂາ ເປັນຜູ້ມັກຫຼາຍ ເປັນຜູ້ຫຍ່ອນຍານ ເປັນຜູ້ນຳໃນໂອກກະມະນະທຳ ຖິ້ເບົາໃນປະວິເວກ ຂີ້ຄ້ານ ມີຄວາມພຽນຕ່ຳ ຫຼົງລືມສະຕິ ບໍ່ມີສຳປະຊັນຍະມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ມີປັນຍາຊາມ ເປັນຄົນປືກ໌ ຄົນເຫຼົ່ານັ້ນ ເມື່ອຖືກຂ້າພຣະອົງກ່າວສອນແນວນີ້ ຍ່ອມບໍ່ຮັບຟັງໂອວາດໂດຍເຄົາລົບ

ສ່ວນກຸນລະບຸດເຫຼົ່າໃດມີສັດທາອອກຈາກເຮືອນບວດເປັນບັນພະຊິດ ບໍ່ໂອ້ອວດ ບໍ່ມີມານຍາ ບໍ່ດື້ດ້ານ ບໍ່ຟຸ້ງຊ່ານ ບໍ່ຖືໂຕ ບໍ່ໂລເລ ບໍ່ປາກຮ້າຍ ບໍ່ເວົ້າພ່ຳເພື້ອ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ຮູ້ຈັກປະມານໃນການບໍຣິໂພກ ປະກອບຄວາມພຽນເຄື່ອງຕື່ນຢູ່ ມຸ້ງຫວັງຄວາມເປັນສະມະນະ ມີຄວາມເຄົາລົບຢ່າງແຮງກ້າໃນສິກຂາ ບໍ່ມັກຫຼາຍ ບໍ່ຫຍ່ອນຍານ ໝົດທຸລະໃນ

ໂອກກະມະນະທຳ ເປັນຜູ້ນຳໃນປະວິເວກ ຜາຣົບຄວາມພຽນ ອຸທິດກາຍແລະໃຈ ມີສະຕິຕັ້ງໝັ້ນ ມີສຳປະຊັນຍະ ມີຈິດຕັ້ງໝັ້ນ ມີຈິດແນ່ວແນ່ ມີປັນຍາ ບໍ່ເປັນຄົນປຶກ ກຸນລະບຸດເຫຼົ່ານັ້ນ ເມື່ອຖືກຂ້າພຣະອົງກ່າວສອນແນວນີ້ ຍ່ອມຮັບຟັງໂອວາດໂດຍເຄົາລົບ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ບຸກຄົນເຫຼົ່າໃດ ບໍ່ມີສັດທາ ຕ້ອງການລ້ຽງຊີວິດ ບໍ່ມີ ສັດທາອອກຈາກເຮືອນບວດເປັນບັນພະຊິດ ເປັນຜູ້ໂອ້ອວດ ມີມານຍາ ດື້ດ້ານ ຟຸ້ງຊ່ານ ຖືໂຕ ໂລເລ ປາກຮ້າຍ ເວົ້າພ່ຳເພື້ອ ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ ບໍ່ຮູ້ຈັກປະມານໃນການບໍຣິໂພກ ບໍ່ປະກອບຄວາມພຽນເຄື່ອງຕື່ນຢູ່ ບໍ່ມຸ້ງຫວັງຄວາມເປັນສະມະນະ ບໍ່ມີຄວາມເຄົາລົບຢ່າງແຮງກ້າໃນສິກຂາ ເປັນຜູ້ມັກຫຼາຍ ເປັນຜູ້ຫຍ່ອນຍານ ເປັນຜູ້ນຳໃນໂອກກະມະນະທຳ ຖີ້ມເບົາໃນປະວິເວກ ຂີ້ຄ້ານ ມີຄວາມພຽນຕ່ຳ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ມີປັນຍາຊາມ ເປັນຄົນປຶກ ບຸກຄົນເຫຼົ່ານັ້ນ ຈຶ່ງຍົກໄວ້

ສາຣີບຸດ ສ່ວນກຸນລະບຸດເຫຼົ່າໃດມີສັດທາອອກຈາກເຮືອນບວດເປັນບັນພະຊິດ ບໍ່ໂອ້ອວດ ບໍ່ມີມານຍາ ບໍ່ດື້ດ້ານ ບໍ່ຟຸ້ງຊ້ານ ບໍ່ຖືໂຕ ບໍ່ໂລເລ ບໍ່ປາກຮ້າຍ ບໍ່ເວົ້າພ່ຳເພື້ອ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ຮູ້ຈັກປະມານໃນການບໍຣິໂພກ ປະກອບຄວາມພຽນເຄື່ອງຕື່ນຢູ່ ມຸ້ງຫວັງຄວາມເປັນສະມະນະ ມີຄວາມເຄົາລົບຢ່າງແຮງກ້າໃນສິກຂາ ບໍ່ມັກຫຼາຍ ບໍ່ຫຍ່ອນຍານ ໝົດທຸລະໃນໂອກກະມະນະທຳ ເປັນຜູ້ນຳໃນປະວິເວກ ຜາຣົບຄວາມພຽນ ອຸທິດກາຍແລະໃຈ ມີສະຕິຕັ້ງໝັ້ນ ມີສຳປະຊັນຍະ ມີຈິດຕັ້ງໝັ້ນ ມີຈິດແນ່ວແນ່ ມີປັນຍາ ບໍ່ເປັນຄົນປຶກ ສາຣີບຸດ ທ່ານເພິ່ງວ່າກ່າວກຸນລະບຸດເຫຼົ່ານັ້ນ ຈຶ່ງກ່າວສອນເພື່ອນພົມມະຈາຣີທັງຫຼາຍ ຈຶ່ງພ່ຳສອນເພື່ອນພົມມະຈາຣີທັງຫຼາຍດ້ວຍຫວັງວ່າ "ເຮົາຈັກຍົກເພື່ອນພົມມະຈາຣີທັງຫຼາຍຂຶ້ນຈາກອະສັດທຳ ໃຫ້ຕັ້ງຢູ່ໃນສັດທຳ

ສາຣີບຸດ ທ່ານເພິ່ງຕັ້ງໃຈຮູ້ແນວນີ້ແລ

**ໂຈທະນາສູດທີ ໗ ຈົບ**

## ໘. ສີລະສູດ

### ວ່າດ້ວຍໂທດແຫ່ງຄວາມທຸສີນແລະຄຸນແຫ່ງຄວາມມີສີນ

[໑໖໘] ໃນບ່ອນນັ້ນ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ "ຜູ້ມີອາຍຸທັງຫຼາຍ ສຳມາສະມາທິຂອງບຸກຄົນຜູ້ທຸສີນ ມີສີນວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ມີສຳມາສະມາທິວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານ ທັດສະນະບໍ່ມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ມີຍະຖາພູຕະຍານທັ

ດສະນະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອນິບພິທາແລະວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ

ສຳມາສະມາທິຂອງບຸກຄົນຜູ້ທຸສີນ ມີສີນວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ມີສຳມາສະມາທິວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ມີຍະຖາພູຕະຍານທັດສະນະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອນິບພິທາແລະວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບວິບັດແລ້ວ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມບໍ່ເຖິງຄວາມບໍລິບູນສົມບູນ

ສຳມາສະມາທິຂອງບຸກຄົນຜູ້ມີສີນ ສົມບູນດ້ວຍສີນ ຊື່ວ່າມີເຫດສົມບູນ ເມື່ອສຳມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິ ຊື່ວ່າມີເຫດ ສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ສົມບູນດ້ວຍຍະຖາພູຕະຍານທັດສະນະ ຊື່ວ່າມີເຫດສົມບູນ ເມື່ອນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະວິຣາຄະ ຊື່ວ່າມີເຫດສົມບູນ

ຜູ້ມີອາຍຸທັງຫຼາຍ ສຳມາສະມາທິຂອງບຸກຄົນຜູ້ມີສີນ ສົມບູນດ້ວຍສີນ ຊື່ວ່າມີເຫດສົມບູນ ເມື່ອສຳມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິ ຊື່ວ່າມີເຫດສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາແລະວິຣາຄະຂອງ ບຸກຄົນຜູ້ສົມບູນດ້ວຍດ້ວຍຍະຖາພູຕະຍານທັດສະນະ ຊື່ວ່າມີເຫດສົມບູນ ເມື່ອນິບພິທາ ແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະວິຣາຄະ ຊື່ວ່າ ມີເຫດສົມບູນ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບສົມບູນ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມເຖິງຄວາມບໍລິບູນສົມບູນ

**ສີລະສູດທີ ໗ ຈົບ**

## ໙. ຂິບປະນິສັນຕິສູດ

### ວ່າດ້ວຍເຫດໃຫ້ພິຈາຣະນາໄດ້ໄວ

[໑໖໙] ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນບ່ອນຣະນຶກເຖິງກັນແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ

"ທ່ານສາຣີບຸດ ດ້ວຍເຫດພຽງທໍ່ໃດ ພິກຂຸຈຶ່ງເປັນຜູ້ພິຈາຣະນາໄດ້ໄວ ຮຽນໄດ້ໄວ ຮຽນໄດ້ຫຼາຍໃນກຸສົນທຳທັງຫຼາຍ ແລະສິ່ງທີ່ທ່ານຮຽນແລ້ວຈະບໍ່ເລືອນຫາຍໄປ

ທ່ານພຣະສາຣີບຸດຕອບວ່າ "ທ່ານອານົນເປັນພະຫູສູດ ສະເພາະທ່ານອານົນທໍ່ນັ້ນທີ່ຈະສາມາດອະທິບາຍເນື້ອຄວາມນີ້ໃຫ້ແຈ່ມແຈ້ງໄດ້[໑]

ພຣະອານົນກ່າວວ່າ "ທ່ານສາຣີບຸດ ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້ານ້ອຍຈັກກ່າວ ທ່ານພຣະສາຣີບຸດຮັບຄຳແລ້ວ ທ່ານພຣະອານົນຈຶ່ງໄດ້ກ່າວເລື້ອງນີ້ວ່າ

"ທ່ານສາຣີບຸດ ພິກຂຸໃນທຳວິໄນນີ້

໑. ເປັນຜູ້ສະຫຼາດໃນອັດຖະ
໒. ເປັນຜູ້ສະຫຼາດໃນທຳ
໓. ເປັນຜູ້ສະຫຼາດໃນພະຍັນຊະນະ
໔. ເປັນຜູ້ສະຫຼາດໃນນິຣຸດຕິ
໕. ເປັນຜູ້ສະຫຼາດໃນເບື້ອງຕົ້ນແລະເບື້ອງປາຍ[໒]

ດ້ວຍເຫດພຽງທໍ່ນີ້ແລ ພິກຂຸຈຶ່ງເປັນຜູ້ພິຈາຣະນາໄດ້ໄວ ຮຽນໄດ້ດີ ຮຽນໄດ້ຫຼາຍ ໃນກຸສົນທຳທັງຫຼາຍ ແລະສິ່ງທີ່ທ່ານຮຽນແລ້ວຍ່ອມບໍ່ເລືອນຫາຍໄປ

ພຣະສາຣີບຸດກ່າວວ່າ "ຜູ້ມີອາຍຸ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດຕາມທີ່ທ່ານ ອານົນກ່າວໄວ້ດີແລ້ວນີ້ ເຮົາທັງຫຼາຍຂໍຊົງຈຳໄວ້ວ່າ ທ່ານອານົນມີທຳ ໕ ປະການນີ້ ທ່ານອານົນເປັນຜູ້ສະຫຼາດໃນ ອັດຖະ ສະຫຼາດໃນທຳ ສະຫຼາດໃນພະຍັນຊະນະ ສະຫຼາດໃນນິຣຸດຕິ ແລະສະຫຼາດໃນເບື້ອງຕົ້ນແລະເບື້ອງປາຍ

**ຂິບປະນິສັນຕິສູດທີ ໙ ຈົບ**

## ໑໐. ພັດທະຊິສູດ

## ວ່າດ້ວຍທ່ານພຣະພັດທະຊິ

[໑໗໐] ສະໄໝໜຶ່ງ ທ່ານພຣະອານົນຢູ່ ໂຄສິຕາຣາມ ເຂດນະຄອນໂກສຳພີ ຄັ້ງນັ້ນແລທ່ານພຣະພັດທະຊິໄດ້ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນບ່ອນຣະນຶກເຖິງກັນແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະພັດທະຊິດັ່ງນີ້ ວ່າ

"ທ່ານພັດທະຊິ ບັນດາການເຫັນທັງຫຼາຍ ການເຫັນຊະນິດໃດເປັນເລີດ ບັນດາການໄດ້ຍິນທັງຫຼາຍ ການໄດ້ຍິນຊະນິດໃດເປັນເລີດ ບັນດາສຸກທັງຫຼາຍ ສຸກຊະນິດໃດເປັນເລີດ ບັນດາສັນຍາທັງຫຼາຍ ສັນຍາຊະນິດໃດເປັນເລີດ ບັນດາພົບທັງຫຼາຍ ພົບຊະນິດໃດເປັນເລີດ

ທ່ານພັດທະຊິຕອບວ່າ "ຜູ້ມີອາຍຸ ມີພົມຜູ້ຍິ່ງໃຫຍ່ ບໍ່ມີໃຜຄອບງຳໄດ້ ເຫັນທຸກສິ່ງ ມີອຳນາດ ເໜືອຜູ້ອື່ນ ຜູ້ໃດເຫັນພົມນັ້ນ ການເຫັນຂອງຜູ້ນັ້ນ ນີ້ເລີດກວ່າການເຫັນທັງຫຼາຍ ມີເທວະດາເຫຼົ່າອາພັດສະ ຜູ້ພຽບພ້ອມດ້ວຍຄວາມສຸກ ເທວະດາເຫຼົ່ານັ້ນເປ່ງອຸທານລາງເທື່ອ ບາງແຫ່ງວ່າ "ສຸກນໍ ໆ ຜູ້ໃດໄດ້ຍິນສຽງນັ້ນ ການໄດ້ຍິນຂອງຜູ້ນັ້ນ ນີ້ເລີດກວ່າການໄດ້ຍິນ ທັງຫຼາຍ ມີເທວະດາເຫຼົ່າສຸພະກິນຫະ ເທວະດາເຫຼົ່ານັ້ນຍິນດີສະເພາະສິ່ງທີ່ມີ ສະເຫວີຍສຸກຢູ່ ການສະເຫວີຍສຸກນີ້ເລີດກວ່າຄວາມສຸກທັງຫຼາຍ ມີເຫຼົ່າເທວະດາຜູ້ເຂົ້າເຖິງອາກິນຈັນຍາຍະຕະ ນະພົບ ການເຂົ້າເຖິງນີ້ເລີດກວ່າສັນຍາທັງຫຼາຍ ມີເຫຼົ່າເທວະດາຜູ້ເຂົ້າເຖິງເນວະສັນຍານາສັນຍາ ຍະຕະນະພົບ ການເຂົ້າເຖິງນີ້ເລີດກວ່າພົບທັງຫຼາຍ

ພຣະອານົນກ່າວວ່າ "ຄຳເວົ້າຂອງທ່ານພັດທະຊິ ກໍຄືກັບຄົນຈຳນວນຫຼາຍ

ພຣະພັດທະຊິກລ່າວວ່າ "ທ່ານອານົນເປັນພະຫູສູດ ສະເພາະທ່ານອານົນທໍ່ນັ້ນທີ່ຈະ ສາມາດອະທິບາຍເນື້ອຄວາມນີ້ໃຫ້ແຈ່ມແຈ້ງໄດ້

ພຣະອານົນກ່າວວ່າ "ທ່ານພັດທະຊິ ຖ້າເປັນແນວນັ້ນທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້ານ້ອຍຈັກກ່າວ ທ່ານພຣະພັດທະຊິຮັບຄຳແລ້ວ ທ່ານພຣະອານົນຈຶ່ງໄດ້ກ່າວເລື້ອງນີ້ ວ່າ

"ຜູ້ມີອາຍຸ ຄວາມໝົດສິ້ນອາສະວະຍ່ອມມີໃນລຳດັບແແກ່ບຸກຄົນຜູ້ເຫັນຕາມຄວາມເປັນ ຈິງ ການເຫັນນີ້ເລີດກວ່າການເຫັນທັງຫຼາຍ ຄວາມໝົດສິ້ນອາສະວະຍ່ອມມີໃນລຳດັບແກ່ບຸກຄົນ ຜູ້ໄດ້ຍິນຕາມຄວາມເປັນຈິງ ການໄດ້ຍິນນີ້ເລີດກວ່າການໄດ້ຍິນທັງຫຼາຍ ຄວາມໝົດສິ້ນອາສະວະ ຍ່ອມມີ ໃນລຳດັບແກ່ບຸກຄົນຜູ້ໄດ້ຮັບຄວາມສຸກຕາມຄວາມເປັນຈິງ ຄວາມສຸກນີ້ເລີດກວ່າຄວາມສຸ ກທັງຫຼາຍ ຄວາມໝົດສິ້ນອາສະວະຍ່ອມມີໃນລຳດັບແກ່ບຸກຄົນຜູ້ມີສັນຍາຕາມຄວາມເປັນຈິງ ສັນຍານີ້ເລີດກວ່າສັນຍາທັງຫຼາຍ ຄວາມໝົດສິ້ນອາສະວະຍ່ອມມີໃນລຳດັບແກ່ບຸກຄົນຜູ້ເປັນຢູ່ ຕາມຄວາມເປັນຈິງ ຄວາມເປັນຢູ່ນີ້ເລີດກວ່າພົບທັງຫຼາຍ

**ພັດທະຊິສູດທີ ໑໐ ຈົບ**

**ອາຄາຕະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໓. ອຸປາສະກະວັກ

## ໝວດວ່າດ້ວຍອຸປາສິກາ[១]

## ໑. ສາຣັດຊະສູດ

### ວ່າດ້ວຍທຳທີ່ເປັນເຫດໃຫ້ເກງກົວ

[໑໗໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຣັບສັ່ງຮຽກພິກຂຸທັງຫຼາຍມາ ຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໕ ປະການ ຍ່ອມເຖິງຄວາມເກງກົວ
ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ
໒. ເປັນຜູ້ລັກຊັບ
໓. ເປັນຜູ້ປະພຶດຜິດໃນກາມ
໔. ເປັນຜູ້ເວົ້າຕົວະ
໕. ເປັນຜູ້ເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເຖິງຄວາມ ເກງກົວ
ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໕ ປະການ ຍ່ອມເປັນຜູ້ແກ່ກ້າ
ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໔. ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໕. ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນຜູ້ ແກ່ກ້າ

**ສາຣັດຊະສູດທີ ໑ ຈົບ**

## ໘. ວິສາຣະທະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ແກ່ກ້າ

[໑໗໘] ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໕ ປະການ ເປັນຜູ້ບໍ່ແກ່ກ້າຢູ່ຄອງເຮືອນ ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ

ຯລຯ[1]

໕. ເປັນຜູ້ເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ບໍ່ແກ່ກ້າຢູ່ຄອງເຮືອນ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໕ ປະການ ເປັນຜູ້ແກ່ກ້າຢູ່ ຄອງເຮືອນ ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ

ຯລຯ

໕. ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ແກ່ກ້າ ຢູ່ຄອງເຮືອນ

**ວິສາຣະທະສູດທີ ໘ ຈົບ**

## ໙. ນິຣະຍະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ຕົກນະຣົກ

[໑໗໙] ອຸປາສິກາປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ

ຯລຯ

໕. ເປັນຜູ້ເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ອຸປາສິກປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ອຸປາສິກປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນ ສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ

ຯລຯ

໕. ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ອຸປາສິກປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ນິຣະຍະສູດທີ ໓ ຈົບ**

## ໔. ເວຣະສູດ

## ວ່າດ້ວຍໄພເວນ

[໑໗໔] ຄັ້ງນັ້ນ ອະນາຖະບິນທິກະຄະຫະບໍດີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບອະນາຖະບິນທິກະຄະຫະບໍດີ ດັ່ງນີ້ ວ່າ

ຄະຫະບໍດີ ອຸປາສົກລະໄພ¹ເວນ² ໕ ປະການບໍ່ໄດ້ ເຮົາຮຽກວ່າ "ຜູ້ທຸສິນ ແລະເຂົາຍ່ອມໄປເກີດໃນນະຮົກ

ໄພເວນ ໕ ປະການ ອັນໃດແດ່ ຄື

໑. ການຂ້າສັດ

໒. ການລັກຊັບ
໓. ການປະພຶດຜິດໃນການ
໔. ການເວົ້າຕົວະ
໕. ການເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ຄະຫະບໍດີ ອຸປາສິກລະໄພເວນ ໕ ປະການນີ້ແລບໍ່ໄດ້ ເຮົາຮຽກວ່າ "ຜູ້ທຸສີນ ແລະເຂົາຍ່ອມໄປເກີດໃນນະຮົກ

ອຸປາສິກລະໄພເວນ ໕ ປະການໄດ້ແລ້ວ ເຮົາຮຽກວ່າ "ຜູ້ມີສີນ ແລະເຂົາຍ່ອມໄປເກີດໃນສຸກຄະຕິ

ໄພເວນ ໕ ປະການ ອັນໃດແດ່ ຄື

໑. ການຂ້າສັດ
໒. ການລັກຊັບ
໓. ການປະພຶດຜິດໃນການ
໔. ການເວົ້າຕົວະ
໕. ການເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ຄະຫະບໍດີ ອຸປາສິກລະໄພເວນ ໕ ປະການນີ້ແລໄດ້ແລ້ວ ເຮົາຮຽກວ່າ "ຜູ້ມີສີນ ແລະເຂົາຍ່ອມໄປເກີດໃນສຸກຄະຕິ

ຄະຫະບໍດີ ອຸປາສິກຜູ້ຂ້າສັດຍ່ອມປະສົບໄພເວນໃດທັງໃນພົບນີ້ແລະພົບໜ້າ ສະເຫວີຍທຸກຂະໂທມະນັດ°ທາງໃຈໃດ ຍ້ອນມີການຂ້າສັດເປັນປັດໄຈ ອຸປາສິກຜູ້ເວັ້ນຂາດຈາກການຂ້າສັດ ຍ່ອມບໍ່ປະສົບໄພເວນນັ້ນທັງໃນພົບນີ້ແລະພົບໜ້າ ຍ່ອມບໍ່ສະເຫວີຍທຸກຂະໂທມະນັດທາງໃຈນັ້ນ ໄພເວນນັ້ນຂອງອຸປາສິກຜູ້ເວັ້ນຂາດຈາກການຂ້າສັດ ຍ່ອມສະງົບລະງັບໄປດ້ວຍປະການດັ່ງນີ້

ອຸປາສິກຜູ້ລັກຊັບ ฯลฯ
ອຸປາສິກຜູ້ປະພຶດຜິດໃນການ ฯลฯ
ອຸປາສິກຜູ້ເວົ້າຕົວະ ฯลฯ

ອຸປາສິກຜູ້ເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ຍ່ອມປະສົບໄພເວນໃດທັງໃນພົບນີ້ແລະພົບໜ້າ ສະເຫວີຍທຸກຂະໂທມະນັດທາງໃຈໃດ ຍ້ອນມີການເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດເປັນປັດໄຈ ອຸປາສິກຜູ້ເວັ້ນຂາດ

ຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ຍ່ອມບໍ່ປະສົບໄພເວນນັ້ນທັງໃນພົບນີ້ແລະພົບໜ້າ ຍ່ອມບໍ່ສະເຫວີຍທຸກຂະໂທມະນັດທີ່ເປັນໄປທາງໃຈນັ້ນ ໄພເວນນັ້ນຂອງອຸປາສົກຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດ ຍ່ອມສະງົບລະງັບໄປດ້ວຍປະການດັ່ງນີ້

ນໍຣະຊົນໃດໃນໂລກຂ້າສັດ ລັກຊັບ
ຄົບຊູ້ກັບພັນລະຍາຂອງຜູ້ອື່ນ ເວົ້າຕົວະ
ແລະໝົກມຸ້ນໃນການດື່ມສຸຣາແລະເມໄຣ໌
ນໍຣະຊົນນັ້ນລະເວນ ໕ ປະການບໍ່ໄດ້
ເຮົາຮຽກວ່າ "ຜູ້ທຸສີນ
ເຂົາຜູ້ມີປັນຍາຊາມ ຕາຍໄປແລ້ວຍ່ອມໄປເກີດໃນນະຣົກ
ນໍຣະຊົນໃດໃນໂລກບໍ່ຂ້າສັດ ບໍ່ລັກຊັບ
ບໍ່ຄົບຊູ້ກັບພັນລະຍາຂອງຜູ້ອື່ນ ບໍ່ເວົ້າຕົວະ
ແລະບໍ່ໝົກມຸ້ນໃນການດື່ມສຸຣາແລະເມໄຣ
ນໍຣະຊົນນັ້ນລະເວນ ໕ ປະການໄດ້
ເຮົາຮຽກວ່າ "ຜູ້ມີສີນ
ເຂົາຜູ້ມີປັນຍາ ຕາຍໄປແລ້ວຍ່ອມໄປເກີດໃນສຸກຄະຕິ

**ເວຣະສູດທີ ໔ ຈົບ**

## ໕. ຈັນທາລະສູດ

## ວ່າດ້ວຍອຸປາສົກຈັນທານ

[໑໗໕] ພິກຂຸທັງຫຼາຍ ອຸປາສົກປະກອບດ້ວຍທຳ ໕ ປະການ ເປັນອຸປາສົກຈັນທານ ເປັນອຸປາສົກເສົ້າໝອງ ແລະເປັນອຸປາສົກໜ້າລັງກຽດ[1]

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ທຸສີນ
໓. ເປັນຜູ້ຖືມຸງຄຸນຕື່ນຂ່າວ໌ເຊື່ອມຸງຄຸນ ບໍ່ເຊື່ອກຳ
໔. ສະແຫວງຫາຜູ້ຮັບທັກຂິນານອກກສາດສະໜານີ້
໕. ທຳອຸປະກາຣະ໌ນອກສາດສະໜາກ່ອນ

ພິກຂຸທັງຫຼາຍ ອຸປາສິກປະກອບດ້ວຍທຳ ໕ ປະການນີ້ແລ ເປັນອຸປາສິກຈັນທານ ເປັນອຸປາສິກເສົ້າໝອງ ແລະເປັນອຸປາສິກໜ້າລັງກຽດ

ພິກຂຸທັງຫຼາຍ ອຸປາສິກປະກອບດ້ວຍທຳ ໕ ປະການ ເປັນອຸປາສິກແກ້ວ ເປັນອຸປາສິກປະທຸມແລະເປັນອຸປາສິກປຸນທະຣິກ

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີສີນ
໓. ເປັນຜູ້ບໍ່ຖືມຸງຄຸນຕື່ນຂ່າວ ເຊື່ອກຳ ບໍ່ເຊື່ອມຸງຄຸນ
໔. ບໍ່ສະແຫວງຫາຜູ້ຮັບທັກຂິນານອກສາດສະໜານີ້
໕. ທຳອຸປະກາຣະໃນສາດສະໜານີ້ກ່ອນ

ພິກຂຸທັງຫຼາຍ ອຸປາສິກປະກອບດ້ວຍທຳ ໕ ປະການນີ້ແລ ເປັນອຸປາສິກແກ້ວ ເປັນອຸປາສິກປະທຸມະ ແລະເປັນອຸປາສິກປຸນທະຣິກ

**ຈັນທາລະສູດທີ ໕ ຈົບ**

## ໖. ປີຕິສູດ

## ວ່າດ້ວຍປີຕິ

[໑໗໖] ຄັ້ງນັ້ນ ອະນາຖະບິນທິກະຄະຫະບໍດີ ມີອຸປາສິກປະມານ ໕໐໐ ຄົນຮ້ອມລ້ອມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງນີ້ວ່າ

ຄະຫະບໍດີ ທ່ານທັງຫຼາຍໄດ້ບຳລຸງພິກຂຸສົງດ້ວຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດຊະບໍຣິຂານ ທ່ານທັງຫຼາຍບໍ່ຄວນທຳຄວາມຍິນດີດ້ວຍເຫດພຽງທໍ່ນີ້ວ່າ "ເຮົາໄດ້ບຳລຸງພິກຂຸສົງດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ພວກເຮົາເພິ່ງບັນລຸປີຕິທີ່ເກີດຈາກວິເວກ[໑]ຢູ່ຕາມການອັນຄວນດ້ວຍອຸບາຍແນວໃດ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະສາຣີບຸດໄດ້ຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ຕາມທີ່ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະ

ດຳລັດນີ້ວ່າ "ຄະຫະບໍດີ ທ່ານທັງຫຼາຍໄດ້ບຳລຸງພິກຂຸສົງດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ພວກເຮົາເພິ່ງບັນລຸປີຕິທີ່ເກີດຈາກວິເວກຢູ່ຕາມການອັນຄວນ ດ້ວຍອຸບາຍແນວໃດ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ ຂ້າແດ່ພຣະອົງຜູ້ຈະເລີນ ສະໄໝໃດອະຣິຍະສາວົກບັນລຸປີຕິທີ່ເກີດຈາກວິເວກຢູ່ ສະໄໝນັ້ນ ອະຣິຍະສາວົກນັ້ນຍ່ອມບໍ່ມີຖານະ ໕ ປະການ ຄື

໑. ບໍ່ມີທຸກຂະໂທມະນັດອັນປະກອບດ້ວຍກາມ[໑]
໒. ບໍ່ມີສຸກໂສມະນັດອັນປະກອບດ້ວຍກາມ
໓. ບໍ່ມີທຸກຂະໂທມະນັດອັນປະກອບດ້ວຍອະກຸສົນ[໒]
໔. ບໍ່ມີສຸກໂສມະນັດອັນປະກອບດ້ວຍອະກຸສົນ
໕. ບໍ່ມີທຸກຂະໂທມະນັດອັນປະກອບດ້ວຍກຸສົນ

ຂ້າແດ່ພຣະອົງຜູ້ຈະເລີນ ສະໄໝໃດ ອະຣິຍະສາວົກບັນລຸປີຕິທີ່ເກີດຈາກວິເວກຢູ່ ສະໄໝນັ້ນ ອະຣິຍະສາວົກນັ້ນຍ່ອມບໍ່ມີຖານະ ໕ ປະການນີ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ສາຣີບຸດ ສະໄໝໃດ ອະຣິຍະສາວົກບັນລຸປີຕິທີ່ເກີດຈາກວິເວກຢູ່ ສະໄໝນັ້ນ ອະຣິຍະສາວົກນັ້ນຍ່ອມບໍ່ມີຖານະ ໕ ປະການ ຄື

໑. ບໍ່ມີທຸກຂະໂທມະນັດອັນປະກອບດ້ວຍກາມ
໒. ບໍ່ມີສຸກໂສມະນັດອັນປະກອບດ້ວຍກາມ
໓. ບໍ່ມີທຸກຂະໂທມະນັດອັນປະກອບດ້ວຍອະກຸສົນ
໔. ບໍ່ມີສຸກໂສມະນັດອັນປະກອບດ້ວຍອະກຸສົນ
໕. ບໍ່ມີທຸກຂະໂທມະນັດອັນປະກອບດ້ວຍກຸສົນ

ສາຣີບຸດ ສະໄໝໃດ ອະຣິຍະສາວົກບັນລຸປີຕິທີ່ເກີດແຕ່ວິເວກຢູ່ ສະໄໝນັ້ນ ອະຣິຍະສາວົກນັ້ນຍ່ອມບໍ່ມີຖານະ ໕ ປະການນີ້"

**ປີຕິສູດທີ ໖ ຈົບ**

## ໗. ວະນິດຊາສູດ

### ວ່າດ້ວຍການຄ້າຂາຍທີ່ອຸປາສົກບໍ່ຄວນປະກອບ

[໑໗໗] ພິກຂຸທັງຫຼາຍ ອຸປາສົກບໍ່ຄວນທຳການຄ້າຂາຍ ໕ ປະການນີ້

ການຄ້າຂາຍ ໕ ປະການ ອັນໃດແດ່ ຄື

໑. ການຄ້າຂາຍສັດຕາວຸດ[1]
໒. ການຄ້າຂາຍສັດ[2]
໓. ການຄ້າຂາຍຊີ້ນ[3]
໔. ການຄ້າຂາຍຂອງມຶນເມົາ[4]
໕. ການຄ້າຂາຍຢາພິດ[5]

ພິກຂຸທັງຫຼາຍ ອຸປາສົກບໍ່ຄວນທຳການຄ້າຂາຍ ໕ ປະການນີ້ແລ

**ວະນິດຊາສູດທີ ໗ ຈົບ**

## ໘. ຣາຊະສູດ

### ວ່າດ້ວຍພຣະຣາຊາ

[໑໗໘] "ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ທ່ານທັງຫຼາຍເຄີຍໄດ້ເຫັນເຄີຍໄດ້ຟັງມາແດ່ບໍວ່າ "ຄົນຜູ້ນີ້ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການງົດເວັ້ນຈາກການຂ້າສັດເປັນເຫດ

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຟັງມາແນວນັ້ນເລີຍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ແມ່ນເຮົາກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຟັງມາແນວນັ້ນເລີຍວ່າ "ຄົນຜູ້ນີ້ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການງົດເວັ້ນຈາກການຂ້າສັດເປັນເຫດ ແຕ່ຖ້າ ບາບກຳຂອງເຂົານັ້ນເອງຜາກົດໃຫ້ຮູ້ວ່າ "ຄົນຜູ້ນີ້ຂ້າບຸຣຸດຫຼືແມ່ຍິງ ຕໍ່ມາພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການງົດເວັ້ນຈາກການຂ້າສັດເປັນເຫດ ທ່ານທັງຫຼາຍເຄີຍໄດ້ເຫັນ ເຄີຍໄດ້ຟັງບາບກຳແນວນີ້ແດ່ບໍ?

ພິກຂຸທັງຫຼາຍຂາບທູນວ່າ "ຂ້າພຣະອົງທັງຫຼາຍເຄີຍໄດ້ເຫັນມາແລ້ວ ເຄີຍໄດ້ຟັງມາແລ້ວ ແລະຈັກໄດ້ຟັງຕໍ່ໄປ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ທ່ານທັງຫຼາຍເຄີຍໄດ້ເຫັນເຄີຍໄດ້ຟັງມາແດ່ບໍວ່າ "ຄົນຜູ້ນີ້ເປັນຜູ້ລະເວັ້ນຂາດຈາກການລັກຊັບ

ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການງົດເວັ້ນຈາກການລັກຊັບເປັນເຫດ

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເຄີຍໄດ້ເຫັນບໍ່ເຄີຍໄດ້ຟັງມາແນວນັ້ນເລີຍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ແມ່ນເຮົາກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຟັງມາແນວນັ້ນເລີຍວ່າ "ຄົນຜູ້ນີ້ເປັນຜູ້ລະເວັ້ນຂາດຈາກການລັກຊັບ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການງົດເວັ້ນຈາກການລັກຊັບເປັນເຫດ ແຕ່ຖ້າ ບາບກຳຂອງເຂົານັ້ນເອງ ຜາກົດໃຫ້ຮູ້ວ່າ "ຄົນຜູ້ນີ້ລັກຊັບເຂົາມາຈາກເຮືອນຫຼືຈາກປ່າ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການລັກຊັບເປັນເຫດ ທ່ານທັງຫຼາຍເຄີຍໄດ້ເຫັນ ເຄີຍໄດ້ຟັງບາບກຳແນວນີ້ແດ່ບໍ?

ພິກຂຸທັງຫຼາຍຂາບທູນວ່າ "ຂ້າພຣະອົງທັງຫຼາຍເຄີຍໄດ້ເຫັນມາແລ້ວ ເຄີຍໄດ້ຟັງມາແລ້ວ ແລະຈັກໄດ້ຟັງຕໍ່ໄປ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄືທ່ານທັງຫຼາຍເຄີຍໄດ້ເຫັນ ເຄີຍໄດ້ຟັງມາແດ່ບໍວ່າ "ຄົນຜູ້ນີ້ເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການງົດເວັ້ນຈາກການປະພຶດຜິດໃນກາມເປັນເຫດ

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຟັງມາແນວນັ້ນເລີຍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ແມ່ນເຮົາກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຟັງມາແນວນັ້ນເລີຍວ່າ "ຄົນຜູ້ນີ້ເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການງົດເວັ້ນຈາກການປະພຶດຜິດໃນກາມເປັນເຫດ ແຕ່ຖ້າບາບກຳຂອງເຂົານັ້ນເອງຜາກົດໃຫ້ຮູ້ວ່າ "ຄົນຜູ້ນີ້ປະພຶດລ່ວງໃນຍິງຫຼືລູກສາວຂອງຜູ້ອື່ນ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການປະພຶດຜິດໃນກາມເປັນເຫດ ທ່ານທັງຫຼາຍເຄີຍໄດ້ເຫັນເຄີຍໄດ້ຟັງບາບກຳແນວນີ້ແດ່ບໍ?

ພິກຂຸທັງຫຼາຍຂາບທູນວ່າ "ຂ້າພຣະອົງທັງຫຼາຍເຄີຍໄດ້ເຫັນມາແລ້ວ ເຄີຍໄດ້ຟັງມາແລ້ວ ແລະຈັກໄດ້ຟັງຕໍ່ໄປ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄືທ່ານທັງຫຼາຍເຄີຍໄດ້ເຫັນ ເຄີຍໄດ້ຟັງມາແດ່ບໍວ່າ "ຄົນຜູ້ນີ້ເປັນຜູ້ລະເວັ້ນຂາດ ຈາກການເວົ້າ

ຕົວະ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼື ເຮັດຕາມພຣະຣາດຊະປະສົງ ຍ້ອນການງົດເວັ້ນຈາກການເວົ້າຕົວະເປັນເຫດ

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຟັງມາແນວນັ້ນເລີຍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ແມ່ນເຮົາກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຟັງມາແນວນັ້ນເລີຍວ່າ "ຄົນຜູ້ນີ້ເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼື ເຮັດຕາມພຣະຣາດຊະປະສົງ ຍ້ອນການງົດເວັ້ນຈາກການເວົ້າຕົວະເປັນເຫດ ແຕ່ຖ້າບາບກຳຂອງເຂົານັ້ນເອງຜາກົດໃຫ້ຮູ້ວ່າ "ຄົນຜູ້ນີ້ທຳລາຍປະໂຫຍດຂອງຄະຫະບໍດີ ຫຼື ບຸດຂອງຄະຫະບໍດີດ້ວຍການເວົ້າຕົວະ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການເວົ້າຕົວະເປັນເຫດ ທ່ານທັງຫຼາຍເຄີຍໄດ້ເຫັນ ເຄີຍໄດ້ຟັງບາບກຳແນວນີ້ແດ່ບໍ?

ພິກຂຸທັງຫຼາຍຂາບທູນວ່າ "ຂ້າພຣະອົງທັງຫຼາຍເຄີຍໄດ້ເຫັນມາແລ້ວ ເຄີຍໄດ້ຟັງມາແລ້ວ ແລະຈັກໄດ້ຟັງຕໍ່ໄປ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ທ່ານທັງຫຼາຍເຄີຍໄດ້ເຫັນ ເຄີຍໄດ້ຟັງມາແດ່ບໍວ່າ "ຄົນຜູ້ນີ້ເປັນຜູ້ລະເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການງົດເວັ້ນຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດເປັນເຫດ

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເຄີຍໄດ້ເຫັນບໍ່ເຄີຍໄດ້ຟັງມາແນວນັ້ນເລີຍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ແມ່ນເຮົາກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຟັງມາແນວນັ້ນເລີຍວ່າ "ຄົນຜູ້ນີ້ເປັນຜູ້ລະເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼື ເຮັດຕາມພຣະຣາດຊະປະສົງ ຍ້ອນການງົດເວັ້ນຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດເປັນເຫດ ແຕ່ຖ້າບາບກຳຂອງເຂົານັ້ນເອງຜາກົດໃຫ້ຮູ້ວ່າ "ຄົນຜູ້ນີ້ໝົກມຸ້ນການເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດແລ້ວຂ້າຍິງຫຼືຊາຍ ຄົນຜູ້ນີ້ໝົກມຸ້ນການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດແລ້ວລັກຊັບຈາກເຮືອນຫຼືປ່າ ຄົນຜູ້ນີ້ໝົກມຸ້ນການເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດແລ້ວປະພຶດລ່ວງໃນຍິງຫຼືລູກສາວຂອງຜູ້ອື່ນ ຄົນຜູ້ນີ້ໝົກມຸ້ນການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະ ໝາດແລ້ວທຳລາຍປະໂຫຍດຂອງຄະ

ຫະບໍດີຫຼືບຸດຂອງຄະຫະບໍດີດ້ວຍການເວົ້າຕົວະ ພຣະຣາຊາຈັບເຂົາແລ້ວປະຫານ ຄຸມຂັງ ເນຣະເທດ ຫຼືເຮັດຕາມພຣະຣາດຊະປະສົງ ຍ້ອນການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດເປັນເຫດ ທ່ານທັງຫຼາຍ ເຄີຍໄດ້ເຫັນ ເຄີຍໄດ້ຟັງບາບກຳແນວນີ້ແດ່ບໍ

ພິກຂຸທັງຫຼາຍຂາບທູນວ່າ "ຂ້າພຣະອົງທັງຫຼາຍເຄີຍໄດ້ເຫັນມາແລ້ວ ເຄີຍໄດ້ຟັງມາແລ້ວ ແລະຈັກໄດ້ຟັງຕໍ່ໄປ ຂ້ານ້ອຍ

**ຣາຊະສູດທີ ໗ ຈົບ**

## ໘. ຄິຫິສູດ

## ວ່າດ້ວຍຄະລິຫັດ

[໑໗໘] ຄັ້ງນັ້ນ ອະນາຖະບິນທິກະຄະຫະບໍດີ ມີອຸປາສົກປະມານ ໕໐໐ ຄົນຮ້ອມລ້ອມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກທ່ານພຣະສາຣີບຸດມາຕັດວ່າ ສາຣີບຸດ ທ່ານທັງຫຼາຍເພິ່ງຮູ້ຈັກຄະລິຫັດຄົນໜຶ່ງຜູ້ນຸ່ງຫົ່ມຜ້າຂາວ ມີວຽກງານສັງລວມດີໃນສິກຂາບົດ ໕ ປະການ ແລະເປັນຜູ້ໄດ້ທຳເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ[໑] ອັນມີໃນຈິດຍິ່ງ[໒] ໔ ປະການ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ແລະຄະລິຫັດນັ້ນເມື່ອຫວັງຢູ່ກໍເພິ່ງພະຍາກອນຕົນດ້ວຍຕົນເອງໄດ້ວ່າ "ເຮົາເປັນຜູ້ມີນະຣົກ ໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີເຜດວິໄສໝົດແລ້ວ ມີອະບາຍໝົດແລ້ວ ມີທຸກຄະຕິ ໝົດແລ້ວ ມີວິນິບາດໝົດແລ້ວ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິ[໑]ໃນມື້ທາງໜ້າ

ຄະລິຫັດເປັນຜູ້ມີວຽກງານສັງລວມດີໃນສິກຂາບົດ ໕ ປະການ ອັນໃດແດ່ ຄື

ອະຣິຍະສາວົກໃນທຳວິໄນນີ້

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໔. ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໕. ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງ ຄວາມຜະໝາດ

ຄະລິຫັດເປັນຜູ້ມີວຽກງານສັງລວມດີໃນສິກຂາບົດ ໕ ປະການນີ້

ຄະລືຫັດເປັນຜູ້ໄດ້ທຳເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນອັນມີໃນຈິດຍິ່ງ ໔ ປະການ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ອັນໃດແດ່ ຄື

ອະຣິຍະສາວົກໃນທຳວິໄນນີ້

໑. ເປັນຜູ້ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ "ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນອັນມີໃນຈິດຍິ່ງປະການທີ ໑ ອັນອະຣິຍະສາວົກນັ້ນໄດ້ເຖິງແລ້ວ ເພື່ອຄວາມມົດຈິດແຫ່ງຈິດທີ່ຍັງບໍ່ມົດຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດທີ່ຍັງບໍ່ຜ່ອງແຜ້ວ

໒. ເປັນຜູ້ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ[๑] ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ນີ້ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ອັນມີໃນຈິດຍິ່ງປະການທີ ໒ ອັນອະຣິຍະສາວົກນັ້ນໄດ້ເຖິງແລ້ວ ເພື່ອຄວາມມົດຈິດແຫ່ງ ຈິດທີ່ຍັງບໍ່ມົດຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດທີ່ຍັງບໍ່ຜ່ອງແຜ້ວ

໓. ເປັນຜູ້ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ປະຕິບັດຊື່ ປະຕິບັດຖືກທາງ ປະຕິບັດສົມຄວນໄດ້ແກ່ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນ ນາບຸນອັນປະເສີດຂອງໂລກ ນີ້ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ອັນມີໃນຈິດຍິ່ງປະການທີ ໓ ອັນອະຣິຍະສາວົກນັ້ນໄດ້ເຖິງແລ້ວ ເພື່ອຄວາມມົດຈິດແຫ່ງຈິດທີ່ຍັງບໍ່ມົດຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດທີ່ຍັງບໍ່ຜ່ອງແຜ້ວ

໔. ເປັນຜູ້ປະກອບດ້ວຍສີນທີ່ພຣະອະຣິຍະຕ້ອງການ[๒] ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ນີ້ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ອັນມີໃນຈິດຍິ່ງປະການທີ ໔ ອັນອະຣິຍະສາວົກນັ້ນໄດ້ເຖິງແລ້ວ ເພື່ອຄວາມມົດຈິດແຫ່ງຈິດທີ່ຍັງບໍ່ມົດຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດທີ່ຍັງບໍ່ຜ່ອງແຜ້ວ

ຄະລືຫັດຜູ້ໄດ້ທຳເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນອັນມີໃນຈິດຍິ່ງ ໔ ປະການນີ້ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

ສາຣີບຸດ ພວກທ່ານເພິ່ງຮູ້ຈັກຄະລຶຫັດຄົນໃດຄົນໜຶ່ງຜູ້ນຸ່ງຫົ່ມຜ້າຂາວ ມີວຽກງານສັງລວມດີໃນສິກຂາບົດ ໕ ປະການ ແລະເປັນຜູ້ໄດ້ທຳເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ອັນມີໃນຈິດຍິ່ງ ໔ ປະການນີ້ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ແລະຄະລຶຫັດນັ້ນເມື່ອຫວັງຢູ່ ກໍເພິ່ງພະຍາກອນຕົນດ້ວຍຕົນເອງໄດ້ວ່າ "ເຮົາເປັນຜູ້ມີນະຮົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີເຜດວິໄສໝົດແລ້ວ ມີອະບາຍໝົດແລ້ວ ມີທຸກຄະຕິໝົດແລ້ວ ແລະມີວິນິບາດໝົດແລ້ວ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ບັນດິດເຫັນໄພໃນນະຮົກແລ້ວ ເພິ່ງເວັ້ນບາບສາ
ສະມາທານອະຣິຍະທຳ໑ແລ້ວ ເພິ່ງເວັ້ນບາບສາ
ກໍໃນເມື່ອມີຄວາມພະຍາຍາມຢູ່
ບໍ່ເພິ່ງບຽດບຽນສັດທັງຫຼາຍ
ບໍ່ເພິ່ງເວົ້າຕົວະທັງທີ່ຮູ້
ບໍ່ເພິ່ງຈັບສວຍສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້
ເພິ່ງຍິນດີພະຣິຍາຂອງຕົນ ບໍ່ເພິ່ງຍິນດີພະຣິຍາຜູ້ອື່ນ
ບໍ່ເພິ່ງດື່ມສຸຣາເມໄຣ໒ເຄື່ອງຍັງຈິດໃຫ້ຫຼົງໄຫຼ
ເພິ່ງຣະນຶກເຖິງພຣະສຳມາສຳພຸດທະເຈົ້າ ແລະເພິ່ງນຶກເຖິງພຣະທຳ໓
ເພິ່ງຈະເລີນຈິດອັນປາສະຈາກພະຍາບາດ໔ເພື່ອເກື້ອກູນແກ່ເທວະໂລກ
ທັກຂິນາທີ່ຜູ້ຕ້ອງການບຸນສະແຫວງຫາບຸນຢູ່ໃຫ້ແລ້ວ
ໃນສັດຕະບຸຣຸດ໕ເປັນອັນດັບທຳອິດ
ໃນເມື່ອວັດຖຸທານມີຢູ່ພ້ອມ ຍ່ອມມີຜົນໄພບູນ
ສາຣີບຸດ ເຮົາຈັກບອກສັດຕະບຸຣຸດໃຫ້ ຈົ່ງຟັງຄຳຂອງເຮົາ
ງົວຜູ້ທີ່ເຝິກແລ້ວເປັນງົວໃຊ້ງານທີ່ສົມບູນດ້ວຍກຳລັງ
ມີເຊົາດີ ແລະເປັນສັດທີ່ຊື່ກົງ
ຈະເກີດໃນສີໃດ ໆ ຄື ສີດຳ ສີຂາວ ສີແດງ
ສີຂຽວ ສີດ່າງ ສີຕາມທຳມະຊາດຂອງຕົນ
ສີຄືງົວທຳມະດາ ຫຼືສີຄືນົກກາງແກກໍຕາມ
ຊົນທັງຫຼາຍທຽມມັນເຂົ້າໃນແອກ
ບໍ່ຄຳນຶງເຖິງສີຂອງມັນ ສັນໃດ
ຜູ້ທີ່ເຝິກຕົນດີແລ້ວ ມີຄວາມປະພຶດດີງາມ
ຕັ້ງຢູ່ໃນທຳ ສົມບູນດ້ວຍສິນ ເວົ້າຄຳສັດ
ມີໃຈປະກອບດ້ວຍຫີຣິ ກໍຄືກັນສັນນັ້ນ

ຈະເກີດໃນໝູ່ມະນຸດສະຊາດໃດ ໆ ຄື ກະສັດ
ພາມ ແພດ ສູດ ຄົນຈັນທານ ແລະຄົນຖອກຂີ້ເຫຍື່ອກໍຕາມ
ກໍລະຄວາມເກີດແລະຄວາມຕາຍໄດ້
ມີພົມມະຈັນບໍລິບູນ ປົງພາຣະໄດ້ແລ້ວ
ບໍ່ປະກອບດ້ວຍກິເລດ ເຮັດກິດທີ່ຄວນເຮັດສຳເລັດແລ້ວ
ບໍ່ມີອາສະວະ ຮູ້ຈົບທຳທຸກຢ່າງ[๑]
ດັບເຢັນຍ້ອນບໍ່ຖືໝັ້ນ
ໃນເຂດທີ່ປາສະຈາກທຸລີ[๔]ເຊັ່ນນັ້ນແລ
ທັກຂິນາຍ່ອມມີຜົນຫຼາຍ
ຄົນພານບໍ່ຮູ້ແຈ້ງ[๑] ບໍ່ມີປັນຍາ ບໍ່ໄດ້ສະດັບຮັບຟັງ
ຍ່ອມໃຫ້ທານພາຍນອກ[๔] ບໍ່ເຂົ້າໄປຫາສັດຕະບຸຣຸດ
ສ່ວນເຫຼົ່າຊົນຜູ້ມີສັດທາຢັ່ງລົງຕັ້ງໝັ້ນໃນພຣະສຸຄົດເຈົ້າ
ຍ່ອມເຂົ້າໄປຫາສັດຕະບຸຣຸດຜູ້ມີປັນຍາ
ທີ່ເຂົາຍ້ອງຍໍກັນວ່າເປັນນັກປາດ
ທ່ານເຫຼົ່ານັ້ນຜູ້ເປັນບັນດິດ ຍ່ອມໄປສູ່ເທວະໂລກ
ບໍກໍເກີດໃນຕະກູນດີໃນໂລກນີ້
ແລະບັນລຸນິບພານໄດ້ໂດຍລຳດັບ

**ຄີຫິສູດທີ ໙ ຈົບ**

## ໑໐. ພະເວສີສູດ

## ວ່າດ້ວຍພະເວສີອຸປາສິກ

[໑໘໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ຂະນະທີ່ສະເດັດພຣະດຳເນີນໄປຕາມຫົນທາງໄກ ໄດ້ທອດພຣະເນດເຫັນປ່າສາລະໃຫຍ່ ຢູ່ສະຖານທີ່ແຫ່ງໜຶ່ງ ຈຶ່ງຊົງແວ່ລົງຈາກທາງສະເດັດເຂົ້າໄປສູ່ປ່າສາລະນັ້ນ ເມື່ອສະເດັດເຖິງແລ້ວຈຶ່ງໄດ້ຊົງສະແດງການແຍ້ມ[໓] ໃນສະຖານທີ່ແຫ່ງໜຶ່ງ

ຄັ້ງນັ້ນ ທ່ານພຣະອານົນໄດ້ຄິດວ່າ "ອັນໃດເປັນເຫດເປັນປັດໄຈໃຫ້ພຣະຜູ້ມີພຣະພາກເຈົ້າຊົງສະແດງອາການແຍ້ມ ພຣະຕະຖາຄົດຍ່ອມບໍ່ຊົງສະແດງອາການແຍ້ມໃຫ້ຜາກົດໂດຍບໍ່ມີເຫດ ຈຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດເປັນເຫດເປັນປັ

ດໃຈໃຫ້ພຣະຜູ້ມີພຣະພາກເຈົ້າຊົງສະແດງອາການແຍ້ມ ພຣະຕະຖາຄົດຍ່ອມບໍ່ຊົງສະແດງ ອາການແຍ້ມໂດຍບໍ່ມີເຫດ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ເລື້ອງເຄີຍມີມາແລ້ວ ໃນສະຖານທີ່ນີ້ ໄດ້ມີເມືອງ ຮັ່ງມີ ກວ້າງຂວາງ ມີປະຊາຊົນຫຼວງຫຼາຍ ມີມະນຸດໜາແໜ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມ ວ່າກັດສະປະອະຣະຫັນຕະສຳມາສຳພຸດທະເຈົ້າຊົງອາໄສຢູ່ໃນພຣະນະຄອນນັ້ນ ອຸປາສົກຊື່ວ່າພ ະເວສີຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະອະຣະຫັນຕະສຳມາສຳພຸດທະເຈົ້າ ເປັນ ຜູ້ມີປົກກະຕິບໍ່ເຮັດສິນໃຫ້ບໍລິບູນ[໑] ອຸປາສົກ ໕໐໐ ຄົນ ເປັນຜູ້ອັນພະເວສີອຸປາສົກຊີ້ແຈ່ງຊັກຊວນ ເປັນຜູ້ມີ ປົກກະຕິບໍ່ເຮັດສິນໃຫ້ບໍລິບູນ ຕໍ່ມາ ພະເວສີອຸປາສົກມີຄວາມຄິດວ່າ "ເຮົາເປັນຜູ້ມີອຸປະ ກາຣະຫຼາຍ ເປັນຫົວໜ້າ ເປັນຜູ້ຊັກຊວນອຸປາສົກ ໕໐໐ ຄົນເຫຼົ່ານີ້ ທັງເຮົາແລະອຸປາສົກ ໕໐໐ ຄົນເຫຼົ່ານີ້ຕ່າງກໍເປັນຜູ້ມີປົກກະຕິບໍ່ເຮັດສິນໃຫ້ບໍລິບູນ ຕ່າງຄົນຕ່າງກໍທໍ່ ໆ ກັນ ບໍ່ຍິ່ງຍ່ອນໄປ ກວ່າກັນ ຖ້າຈັ່ງຊັ້ນແລ້ວ ເຮົາຄວນປະຕິບັດໃຫ້ຍິ່ງກວ່າ

ຕໍ່ມາ ພະເວສີອຸປາສົກໄດ້ເຂົ້າໄປຫາອຸປາສົກ ໕໐໐ ຄົນເຫຼົ່ານັ້ນແລ້ວກ່າວດັ່ງນີ້ວ່າ "ທ່ານ ທັງຫຼາຍ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຂໍພວກທ່ານຈົ່ງຈື່ຂ້າພະເຈົ້າໄວ້ວ່າ ເປັນຜູ້ມີປົກກະຕິເຮັດສິນໃຫ້ ບໍລິບູນ

ຄັ້ງນັ້ນ ອຸປາສົກ ໕໐໐ ຄົນເຫຼົ່ານັ້ນມີຄວາມຄິດວ່າ "ພະເວສີອຸປາສົກຜູ້ເປັນນາຍມີອຸປະ ກາຣະຫຼາຍ ເປັນຫົວໜ້າ ເປັນຜູ້ຊັກຊວນພວກເຮົາ ກໍພະເວສີອຸປາສົກຜູ້ເປັນນາຍຈັກເປັນຜູ້ມີ ປົກກະຕິເຮັດສິນໃຫ້ບໍລິບູນ ເປັນຫຍັງພວກເຮົາຈະເປັນເຊັ່ນນັ້ນແດ່ບໍ່ໄດ້ບໍ ຈຶ່ງພາກັນເຂົ້າໄປຫາພ ະເວສີອຸປາສົກແລ້ວກ່າວວ່າ "ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຂໍພະເວສີອຸປາສົກຜູ້ເປັນນາຍຈົ່ງຈື່ອຸປາສົກ ໕໐໐ ຄົນແມ່ນເຫຼົ່ານີ້ວ່າເປັນຜູ້ມີປົກກະຕິເຮັດສິນໃຫ້ບໍລິບູນ

ເມື່ອຕໍ່ມາ ພະເວສີອຸປາສົກມີຄວາມຄິດວ່າ "ເຮົາແລເປັນຜູ້ມີອຸປະກາຣະຫຼາຍ ເປັນຫົວ ໜ້າ ເປັນຜູ້ຊັກຊວນອຸປາສົກປະມານ ໕໐໐ ຄົນເຫຼົ່ານີ້ ທັງເຮົາແລະອຸປາສົກ ໕໐໐ ຄົນ ເຫຼົ່ານີ້ ຕ່າງກໍເປັນຜູ້ມີປົກກະຕິເຮັດສິນໃຫ້ບໍລິບູນ ຕ່າງຄົນຕ່າງກໍທໍ່ ໆ ກັນ ບໍ່ຍິ່ງຍ່ອນໄປກວ່າກັນ ຖ້າ ຈັ່ງຊັ້ນແລ້ວ ເຮົາຄວນປະຕິບັດໃຫ້ຍິ່ງກວ່າ ຈຶ່ງໄດ້ເຂົ້າໄປຫາອຸປາສົກ ໕໐໐ ຄົນເຫຼົ່ານັ້ນ ແລ້ວ ກ່າວວ່າ "ທ່ານທັງຫຼາຍ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຂໍພວກທ່ານຈົ່ງຈື່ຂ້າພະເຈົ້າໄວ້ວ່າ ເປັນຜູ້ປະພຶດ ພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທຳອັນເປັນກິດຂອງຊາວບ້ານ

ອຸປາສົກ ໕໐໐ ຄົນເຫຼົ່ານັ້ນມີຄວາມຄິດວ່າ "ພະເວສີອຸປາສົກຜູ້ເປັນນາຍມີອຸປະກາຣະ ຫຼາຍ ເປັນຫົວໜ້າ ເປັນຜູ້ຊັກຊວນພວກເຮົາ ພະເວສີອຸປາສົກຜູ້ເປັນນາຍຈັກປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທຳອັນເປັນກິດຂອງຊາວບ້ານ ເປັນຫຍັງພວກເຮົາຈະເປັນເຊັ່ນນັ້ນແດ່ ບໍ່ ໄດ້ບໍ ຈຶ່ງໄດ້ເຂົ້າໄປຫາພະເວສີອຸປາສົກແລ້ວກ່າວດັ່ງນີ້ວ່າ "ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຂໍພະເວສີອຸ

ປາສິກຜູ້ເປັນນາຍ ຈົ່ງຈື່ອຸປາສິກ ໕໐໐ ຄົນແມ່ນເຫຼົ່ານີ້ວ່າເປັນຜູ້ປະພຶດ ພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທຳອັນເປັນກິດຂອງຊາວບ້ານ

ເມື່ອຕໍ່ມາ ພະເວສິອຸປາສິກມີຄວາມຄິດວ່າ "ເຮົາເອງເປັນຜູ້ມີອຸປະການະຫຼາຍ ເປັນຫົວໜ້າ ເປັນຜູ້ຊັກຊວນອຸປາສິກ ໕໐໐ ເຫຼົ່ານີ້ ທັງເຮົາແລະອຸປາສິກ ໕໐໐ ຄົນເຫຼົ່ານີ້ຕ່າງກໍເປັນຜູ້ມີປົກກະຕິເຮັດສິນໃຫ້ບໍລິບູນ ເປັນຜູ້ປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທຳອັນເປັນກິດຂອງຊາວບ້ານ ຕ່າງຄົນຕ່າງກໍທໍ່ ໆ ກັນ ບໍ່ຍິ່ງຍ່ອນໄປກວ່າກັນ ຖ້າຈັ່ງຊັ້ນແລ້ວ ເຮົາຄວນປະຕິບັດໃຫ້ຍິ່ງກວ່າ ຈຶ່ງໄດ້ເຂົ້າໄປຫາອຸປາສິກ ໕໐໐ ຄົນເຫຼົ່ານັ້ນແລ້ວກ່າວດັ່ງນີ້ວ່າ "ທ່ານທັງຫຼາຍ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຂໍພວກທ່ານຈົ່ງຈື່ຂ້າພະເຈົ້າໄວ້ວ່າເປັນຜູ້ບໍຣິໂພກຄາບດຽວ ບໍ່ບໍຣິໂພກຕອນກາງຄືນ ງົດເວັ້ນຈາກການບໍຣິໂພກໃນເວລາວິການ

ອຸປາສິກ ໕໐໐ ຄົນເຫຼົ່ານັ້ນມີຄວາມຄິດວ່າ "ພະເວສິອຸປາສິກເປັນນາຍຜູ້ມີອຸປະການະຫຼາຍ ເປັນຫົວໜ້າ ເປັນຜູ້ຊັກຊວນພວກເຮົາ ພະເວສິອຸປາສິກຜູ້ເປັນນາຍຈັກເປັນຜູ້ບໍຣິໂພກຄາບດຽວ ບໍ່ບໍຣິໂພກຕອນກາງຄືນ ງົດເວັ້ນຈາກການບໍຣິໂພກໃນເວລາວິການ ເປັນຫຍັງພວກເຮົາຈະເປັນເຊັ່ນນັ້ນແດ່ບໍ່ໄດ້ບໍ ຈຶ່ງໄດ້ເຂົ້າໄປຫາພະເວສິອຸປາສິກແລ້ວກ່າວດັ່ງນີ້ວ່າ "ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຂໍພະເວສິອຸປາສິກຜູ້ເປັນນາຍຈົ່ງຈື່ອຸປາສິກ ໕໐໐ ຄົນແມ່ນເຫຼົ່ານີ້ວ່າເປັນຜູ້ບໍຣິໂພກຄາບດຽວ ບໍ່ບໍຣິໂພກຕອນກາງຄືນ ງົດເວັ້ນຈາກການບໍຣິໂພກໃນເວລາວິການ

ເມື່ອຕໍ່ມາ ພະເວສິອຸປາສິກມີຄວາມຄິດວ່າ "ເຮົາແລເປັນຜູ້ມີອຸປະການະຫຼາຍ ເປັນຫົວໜ້າ ເປັນຜູ້ຊັກຊວນອຸປາສິກ ໕໐໐ ຄົນເຫຼົ່ານີ້ ທັງເຮົາແລະອຸປາສິກ ໕໐໐ ຄົນເຫຼົ່ານີ້ ຕ່າງກໍເປັນຜູ້ມີປົກກະຕິເຮັດສິນໃຫ້ບໍລິບູນ ເປັນຜູ້ປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທຳ ອັນເປັນກິດຂອງຊາວບ້ານ ເປັນຜູ້ບໍຣິໂພກຄາບດຽວ ບໍ່ບໍຣິໂພກຕອນກາງຄືນ ງົດເວັ້ນຈາກການບໍຣິໂພກໃນເວລາວິການ ຕ່າງຄົນຕ່າງກໍທໍ່ ໆ ກັນ ບໍ່ຍິ່ງຍ່ອນໄປກວ່າກັນ ຖ້າຈັ່ງຊັ້ນແລ້ວ ເຮົາຄວນປະຕິບັດໃຫ້ຍິ່ງກວ່າ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະອະຣະຫັນຕະສຳມາສຳພຸດທະເຈົ້າຮອດບ່ອນຢູ່ ແລ້ວໄດ້ຂາບທູນດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງເພິ່ງໄດ້ບັນພະຊາເພິ່ງໄດ້ອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ພະເວສິອຸປາສິກໄດ້ບັນພະຊາໄດ້ອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະອະຣະຫັນຕະສຳມາສຳພຸດທະເຈົ້າແລ້ວແລ ເມື່ອອຸປະສົມບົດແລ້ວບໍ່ດົນ ຈຶ່ງຫຼີກໄປຢູ່ຜູ້ດຽວ ບໍ່ພະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດ ກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ°ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ກຸນລະບຸດອອກຈາກເຮືອນບວດເປັນບັນຊິດ ໂດຍຖືກຕ້ອງ ຕ້ອງການດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ໄດ້ຮູ້ແຈ້ງວ່າ

"ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ ອີກຕໍ່ໄປ

ອານົນ ພະເວສີພິກຂຸ ໄດ້ເປັນພຣະອະຣະຫັນອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

ອານົນ ເວລານັ້ນ ອຸປາສົກ ໕໐໐ ຄົນເຫຼົ່ານັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ "ພະເວສີ ອຸປາສົກຜູ້ເປັນນາຍມີອຸປະກາຣະຫຼາຍ ເປັນຫົວໜ້າ ເປັນຜູ້ຊັກຊວນພວກເຮົາ ພະເວສີອຸປາສົກຜູ້ເປັນນາຍ ຈັກແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ ເປັນຫຍັງພວກເຮົາຈັກເປັນເຊັ່ນນັ້ນແດ່ບໍ່ໄດ້ ຈຶ່ງໄດ້ພາກັນເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະອະຣະຫັນຕະສຳມາສຳພຸດທະເຈົ້າຮອດບ່ອນຢູ່ແລ້ວຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍ ເພິ່ງໄດ້ບັນພະຊາ ເພິ່ງໄດ້ອຸປະສົມບົດໃນສຳນັກພຣະຜູ້ມີພຣະພາກເຈົ້າ

ອຸປາສົກ ໕໐໐ ຄົນເຫຼົ່ານັ້ນ ໄດ້ບັນພະຊາໄດ້ອຸປະສົມບົດໃນສຳນັກພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະ ອະຣະຫັນຕະ ສຳມາສຳພຸດທະເຈົ້າແລ້ວ ຕໍ່ມາ ພະເວສີພິກຂຸໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາເອງເປັນຜູ້ໄດ້ວິມຸດຕິສຸກອັນປະເສີດນີ້ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ໂອນໍ ພິກຂຸປະມານ ໕໐໐ ອົງ ແມ່ນເຫຼົ່ານີ້ ກໍເພິ່ງເປັນຜູ້ໄດ້ວິມຸດຕິສຸກອັນປະເສີດນີ້ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

ເວລານັ້ນພິກຂຸ ໕໐໐ ອົງເຫຼົ່ານັ້ນ ຕ່າງເປັນຜູ້ຫຼີກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນອຸທິດກາຍແລະໃຈຢູ່ ບໍ່ດົນປານໃດ ກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ໄດ້ຮູ້ແຈ້ງວ່າ "ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ

ພິກຂຸ ໕໐໐ ອົງເຫຼົ່ານັ້ນ ມີພະເວສີພິກຂຸເປັນປະມຸກ ພະຍາຍາມພໍ່າເພັງທຳທີ່ສູງ ໆ ຂຶ້ນໄປ ປະນິດຂຶ້ນໄປ ໄດ້ເຮັດໃຫ້ແຈ້ງເຊິ່ງວິມຸດຕິອັນປະເສີດ ດ້ວຍປະການດັ່ງນີ້

ອານົນ ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແບບນີ້ວ່າ "ເຮົາທັງຫຼາຍເມື່ອພະຍາຍາມພໍ່າເພັງທຳທີ່ສູງ ໆ ຂຶ້ນໄປ ປະນິດຂຶ້ນໄປ ກໍຈັກເຮັດໃຫ້ແຈ້ງເຊິ່ງວິມຸດຕິອັນປະເສີດ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແບບນີ້ແລ

**ພະເວສີສູດທີ ໑໐ ຈົບ**

**ອຸປາສະກະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໔. ອະຣັນຍະວັກ

## ໝວດວ່າດ້ວຍປ່າ

## ໑. ອາຣັນຍິກະສູດ
## ວ່າດ້ວຍພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ

[໑໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້

ພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ໕ ຈຳພວກ ພວກໃດແດ່ ຄື

໑. ພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດຍ້ອນໂງ່ຈ້າ ຍ້ອນຫຼົງງົມງວາຍ[໑]
໒. ພິກຂຸຜູ້ມີຄວາມປາຖະໜາຊົ່ວ ຖືກຄວາມປາຖະໜາຄອບງຳ[໒] ຈຶ່ງຢູ່ປ່າເປັນຂໍ້ວັດປະຕິບັດ
໓. ພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດຍ້ອນເປັນບ້າ ຍ້ອນມີຈິດຟຸ້ງຊ່ານ
໔. ພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ຍ້ອນຮູ້ວ່າ "ເປັນຂໍ້ວັດປະຕິບັດທີ່ພຣະພຸດທະເຈົ້າແລະສາວົກຂອງພຣະພຸດທະເຈົ້າທັງຫຼາຍສັນເສີນ
໕. ພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ຍ້ອນອາໄສຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມສະຫງັດ ຄວາມຕ້ອງການດ້ວຍຂໍ້ປະຕິບັດອັນງາມແນວນີ້

ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້ແລ

ພິກຂຸທັງຫຼາຍ ບັນດາພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້ ພິກຂຸຜູ້ຢູ່ປ່າ ເປັນຂໍ້ວັດປະຕິບັດ ຍ້ອນອາໄສຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມສະຫງັດ ຄວາມຕ້ອງການດ້ວຍຂໍ້ປະຕິບັດອັນງາມແນວນີ້ ເປັນຜູ້ເລີດ ເປັນຜູ້ປະເສີດ ເປັນປະທານ ເປັນຜູ້ສູງສຸດ ແລະເປັນຜູ້ປະເສີດສຸດ

ປຽບຄື ນົມສົດເກີດຈາກແມ່ງົວ ນົມສົ້ມເກີດຈາກນົມສົດ ເນີຍຂຸ້ນເກີດຈາກນົມສົ້ມ ເນີຍໃສເກີດຈາກເນີຍຂຸ້ນ ຫົວເນີຍໃສເກີດຈາກເນີຍໃສ ບັນດາໂຄຣົດ ໕ ຊະນິດນັ້ນ ຫົວເນີຍໃສ ຊາວໂລກກ່າວວ່າເລີດ ແມ່ນສັນໃດ

ບັນດາພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້ ພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ຍ້ອນອາໄສຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມສະຫງັດ ຄວາມຕ້ອງການດ້ວຍຂໍ້ ປະຕິບັດອັນງາມແນວນີ້ ເປັນຜູ້ເລີດ ເປັນຜູ້ປະເສີດ ເປັນປະທານ ເປັນຜູ້ສູງສຸດ ແລະເປັນຜູ້ປະເສີດສຸດ ຄືກັນສັນນັ້ນ

**ອາຣັນຍິກະສູດທີ ໑ ຈົບ**

## ໔. ຈີວອນສູດ

## ວ່າດ້ວຍພິກຂຸຜູ້ຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ

[໑໘໔] ພິກຂຸທັງຫຼາຍ ພິກຂຸຜູ້ຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້

ພິກຂຸຜູ້ຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ໕ ຈຳພວກ ພວກໃດແດ່ ຄື

໑. ພິກຂຸຜູ້ຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ຍ້ອນໂງ່ຈ້າ ຍ້ອນຫຼົງງົມງວາຍ

ฯລฯ

໕. ພິກຂຸຜູ້ຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ຍ້ອນອາໄສຄວາມມັກໜ້ອຍ ຄວາມ ສັນໂດດ ຄວາມຂັດເກົາ ຄວາມສະຫງັດ ຄວາມຕ້ອງການດ້ວຍຂໍ້ປະຕິບັດອັນງາມແນວນີ້

ພິກຂຸທັງຫຼາຍ ພິກຂຸຜູ້ຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້ແລ

**ຈີວະຣະສູດທີ ໔ ຈົບ**

## ໙. ຣຸກຂະມູລິກະສູດ

## ວ່າດ້ວຍພິກຂຸຜູ້ຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ

[໑໘໙] ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້

ພິກຂຸຜູ້ຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ໕ ຈຳພວກ ພວກໃດແດ່ ຄື

໑. ພິກຂຸຜູ້ຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ຍ້ອນໂງ່ຈ້າ ຍ້ອນຫຼົງງົມງວາຍ

ຯລຯ

໕. ພິກຂຸຜູ້ຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ຍ້ອນອາໄສຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມສະຫງັດ ຄວາມຕ້ອງການດ້ວຍຂໍ້ປະຕິບັດອັນງາມແນວນີ້

ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້ແລ

**ຣຸກຂະມູລິກະສູດທີ ໓ ຈົບ**

## ໔. ໂສສານິກະສູດ

## ວ່າດ້ວຍພິກຂຸຜູ້ຢູ່ປ່າຊ້າເປັນຂໍ້ວັດປະຕິບັດ

[໑໗໔] ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ປ່າຊ້າເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້

ພິກຂຸຜູ້ຢູ່ປ່າຊ້າເປັນຂໍ້ວັດປະຕິບັດ ໕ ຈຳພວກ ພວກໃດແດ່ ຄື

໑. ພິກຂຸຜູ້ຢູ່ປ່າຊ້າເປັນຂໍ້ວັດປະຕິບັດ ຍ້ອນໂງ່ຈ້າ ຍ້ອນຫຼົງງົມງວາຍ

ຯລຯ

໕. ພິກຂຸຜູ້ຢູ່ປ່າຊ້າເປັນຂໍ້ວັດປະຕິບັດ ຍ້ອນອາໄສຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມສະຫງັດ ຄວາມຕ້ອງການດ້ວຍຂໍ້ປະຕິບັດອັນງາມແນວນີ້

ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ປ່າຊ້າເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້ແລ

**ໂສສານິກະສູດທີ ໔ ຈົບ**

## ໕. ອັບໂພກາສິກະສູດ

## ວ່າດ້ວຍພິກຂຸຜູ້ຢູ່ກາງແຈ້ງເປັນຂໍ້ວັດປະຕິບັດ

[໑໗໕] ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ກາງແຈ້ງເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້

ຯລຯ

**ອັບໂພກາສິກະສູດທີ ໕ ຈົບ**

## ໖. ເນສັດຊິກະສູດ
## ວ່າດ້ວຍພິກຂຸຜູ້ນັ່ງເປັນຂໍ້ວັດປະຕິບັດ

[໑໗໖] ພິກຂຸທັງຫຼາຍ ພິກຂຸຜູ້ນັ່ງເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້

ຯລຯ

**ເນສັດຊິກະສູດທີ ໖ ຈົບ**

## ໗. ຍະຖາສັນຖະຕິກະສູດ

## ວ່າດ້ວຍພິກຂຸຜູ້ຢູ່ໃນເສນາສະນະຕາມທີ່ຈັດໄວ້ເປັນຂໍ້ວັດປະຕິບັດ

[໑໗໗] ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ໃນເສນາສະນະຕາມທີ່ຈັດໄວ້ເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້

ຯລຯ

**ຍະຖາສັນຖະຕິກະສູດທີ ໗ ຈົບ**

## ໘. ເອກາສະນິກະສູດ

## ວ່າດ້ວຍພິກຂຸຜູ້ນັ່ງສັນອາສະນະດຽວເປັນຂໍ້ວັດປະຕິບັດ

[໑໗໘] ພິກຂຸທັງຫຼາຍ ພິກຂຸຜູ້ນັ່ງສັນອາສະນະດຽວເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້

ຯລຯ

**ເອກາສະນິກະສູດທີ ໘ ຈົບ**

## ໙. ຂະລຸປັດສາພັດຕິກະສູດ
## ວ່າດ້ວຍພິກຂຸຜູ້ຫ້າມພັດທີ່ເຂົານຳມາຖວາຍພາຍຫຼັງເປັນຂໍ້ວັດປະຕິບັດ

[໑໗໙] ພິກຂຸທັງຫຼາຍ ພິກຂຸຜູ້ຫ້າມພັດທີ່ເຂົານຳມາຖວາຍພາຍຫຼັງເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້

ຯລຯ

**ຂະລຸປັດສາພັດຕິກະສູດທີ ໙ ຈົບ**

# ໑໐. ປັດຕະປິນທິກະສູດ

## ວ່າດ້ວຍພິກຂຸຜູ້ສັນໃນບາດເປັນຂໍ້ວັດປະຕິບັດ

[໑໙໐] ພິກຂຸທັງຫຼາຍ ພິກຂຸຜູ້ສັນໃນບາດເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້ ພິກຂຸຜູ້ສັນໃນບາດເປັນຂໍ້ວັດປະຕິບັດ ໕ ຈຳພວກ ພວກໃດແດ່ ຄື

໑. ພິກຂຸຜູ້ສັນໃນບາດເປັນຂໍ້ວັດປະຕິບັດ ຍ້ອນໂງ່ຈ້າ ຍ້ອນຫຼົງງົມງວາຍ
໒. ພິກຂຸຜູ້ມີຄວາມປາຖະໜາຊົ່ວ ຖືກຄວາມປາຖະໜາຄອບງຳ ຈຶ່ງເປັນຜູ້ສັນໃນບາດເປັນຂໍ້ວັດປະຕິບັດ
໓. ພິກຂຸຜູ້ສັນໃນບາດເປັນຂໍ້ວັດປະຕິບັດ ຍ້ອນເປັນບ້າ ຍ້ອນມີຈິດຟຸ້ງຊ່ານ
໔. ພິກຂຸຜູ້ສັນໃນບາດເປັນຂໍ້ວັດປະຕິບັດ ຍ້ອນຮູ້ວ່າ "ເປັນຂໍ້ວັດປະຕິບັດທີ່ພຣະພຸດທະເຈົ້າແລະສາວົກຂອງພຣະພຸດທະເຈົ້າທັງຫຼາຍສັນເສີນ
໕. ພິກຂຸສັນໃນບາດເປັນຂໍ້ວັດປະຕິບັດ ຍ້ອນອາໄສຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມສະຫງັດ ຄວາມຕ້ອງການດ້ວຍຂໍ້ປະຕິບັດອັນງາມແນວນີ້

ພິກຂຸທັງຫຼາຍ ພິກຂຸຜູ້ສັນໃນບາດເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້ແລ

ພິກຂຸທັງຫຼາຍ ບັນດາພິກຂຸຜູ້ສັນໃນບາດເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້ ພິກຂຸຜູ້ສັນໃນບາດເປັນຂໍ້ວັດປະຕິບັດ ຍ້ອນອາໄສຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມສະຫງັດ ຄວາມຕ້ອງການດ້ວຍຂໍ້ປະຕິບັດອັນງາມແນວນີ້ ເປັນຜູ້ເລີດ ເປັນຜູ້ປະເສີດ ເປັນປະທານ ເປັນຜູ້ສູງສຸດ ແລະເປັນຜູ້ປະເສີດສຸດ

ປຽບຄືນົມສົດເກີດຈາກແມ່ງົວ ນົມສົ້ມເກີດຈາກນົມສົດ ເນີຍຂຸ້ນເກີດຈາກນົມສົ້ມ ເນີຍໃສເກີດຈາກເນີຍຂຸ້ນ ຫົວເນີຍໃສເກີດຈາກເນີຍໃສ ບັນດາໂຄຣົດ ໕ ຊະນິດນັ້ນ ຫົວເນີຍໃສ ຊາວໂລກກ່າວວ່າເລີດ ແມ່ນສັນໃດ

ບັນດາພິກຂຸຜູ້ສັນໃນບາດເປັນຂໍ້ວັດປະຕິບັດ ໕ ຈຳພວກນີ້ ພິກຂຸຜູ້ສັນໃນບາດເປັນຂໍ້ວັດປະຕິບັດ ຍ້ອນອາໄສຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມສະຫງັດ ຄວາມຕ້ອງການດ້ວຍຂໍ້ປະຕິບັດອັນງາມແນວນີ້ ເປັນຜູ້ເລີດ ເປັນຜູ້ປະເສີດ ເປັນປະທານ ເປັນຜູ້ສູງສຸດ ແລະເປັນຜູ້ປະເສີດສຸດ

**ປັດຕະປິນທິກະສູດທີ ໑໐ ຈົບ**

**ອະຣັນຍະວັກທີ ໔ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື



# ໓. ພາມມະນະວັກ

## ໝວດວ່າດ້ວຍພາມ

## ໑. ໂສນະສູດ

### ວ່າດ້ວຍທຳຂອງພາມປຽບທຽບກັບໝາ

[໑໙໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳຂອງພາມທີ່ເກົ່າແກ່ ໕ ປະການນີ້ ບັດນີ້ ຜາກົດໃນພວກໝາ ບໍ່ຜາກົດໃນພວກພາມ

ທຳຂອງພາມທີ່ເກົ່າແກ່ ໕ ປະການ ອັນໃດແດ່ ຄື

໑. ຮູ້ວ່າ ແຕ່ກ່ອນ ພວກພາມສົມສູ່ກັບພາມມະນີທໍ່ນັ້ນ ບໍ່ສົມສູ່ກັບຍິງທີ່ບໍ່ແມ່ນພາມມະນີ ແຕ່ບັດນີ້ ພວກພາມສົມສູ່ກັບພາມມະນີແດ່ ສົມສູ່ກັບຍິງທີ່ບໍ່ແມ່ນພາມມະນີແດ່ ບັດນີ້ ພວກໝາສົມສູ່ກັບ ໝາໂຕເມຍທໍ່ນັ້ນ ບໍ່ສົມສູ່ກັບສັດໂຕເມຍທີ່ບໍ່ແມ່ນໝາ ນີ້ເປັນທຳຂອງພາມທີ່ເກົ່າແກ່ປະການທີ ໑ ບັດນີ້ ຜາກົດໃນພວກໝາ ບໍ່ຜາກົດ ໃນພວກພາມ

໒. ຮູ້ວ່າ ແຕ່ກ່ອນ ພວກພາມສົມສູ່ກັບພາມມະນີທີ່ມີຣະດູທໍ່ນັ້ນ ບໍ່ສົມສູ່ກັບພາມມະນີທີ່ບໍ່ມີຣະດູ ແຕ່ບັດນີ້ ພວກພາມສົມສູ່ກັບ ພາມມະນີທີ່ມີຣະດູແດ່ ສົມສູ່ກັບພາມມະນີທີ່ບໍ່ມີຣະດູແດ່ ບັດນີ້ ພວກ ໝາສົມສູ່ກັບໝາໂຕເມຍທີ່ມີຣະດູທໍ່ນັ້ນ ບໍ່ສົມສູ່ກັບໝາໂຕເມຍທີ່ບໍ່ມີຣະດູ ນີ້ເປັນທຳຂອງພາມທີ່ເກົ່າແກ່ປະການທີ ໒ ບັດນີ້ ຜາກົດໃນພວກໝາ ບໍ່ຜາກົດໃນພວກພາມ

໓. ຮູ້ວ່າ ແຕ່ກ່ອນ ພວກພາມບໍ່ຊື້ບໍ່ຂາຍພາມມະນີ ຍັງການຢູ່ຮ່ວມກັນໃຫ້ເປັນໄປດ້ວຍຄວາມຮັກດ້ວຍຄວາມຜູກພັນ ແຕ່ບັດນີ້ ພວກພາມຊື້ແດ່ ຂາຍແດ່ເຊິ່ງພາມມະນີ ຍັງການຢູ່ຮ່ວມກັນໃຫ້ເປັນໄປດ້ວຍຄວາມຮັກດ້ວຍຄວາມຜູກພັນ ບັດນີ້ ພວກໝາບໍ່ຊື້ ບໍ່ຂາຍໝາໂຕເມຍ ຍັງ

ການຢູ່ຮ່ວມກັນໃຫ້ເປັນໄປດ້ວຍຄວາມຮັກດ້ວຍຄວາມຜູກພັນ ນີ້ເປັນທຳຂອງພາມທີ່ເກົ່າແກ່ ປະການທີ ໓ ບັດນີ້ ຜາກົດໃນ ພວກໝາ ບໍ່ຜາກົດໃນພວກພາມ

໔. ຮູ້ວ່າ ແຕ່ກ່ອນ ພວກພາມບໍ່ທຳການສະສົມຊັບແດ່ ເຂົ້າເປືອກແດ່ ເງິນແດ່ ຄຳແດ່ ແຕ່ບັດນີ້ ພວກພາມທຳການສະສົມຊັບແດ່ ເຂົ້າເປືອກແດ່ ເງິນແດ່ ຄຳແດ່ ບັດນີ້ ພວກໝາບໍ່ທຳການສະສົມຊັບແດ່ ເຂົ້າເປືອກແດ່ ເງິນແດ່ ຄຳແດ່ ນີ້ເປັນທຳຂອງພາມທີ່ເກົ່າແກ່ປະການທີ ໔ ບັດນີ້ ຜາກົດໃນພວກໝາ ບໍ່ຜາກົດໃນພວກພາມ

໕. ຮູ້ວ່າ ແຕ່ກ່ອນ ພວກພາມສະແຫວງຫາອາຫານແລງ ເພື່ອກິນໃນເວລາຄ່ຳ ອາຫານເຊົ້າເພື່ອກິນໃນເວລາເຊົ້າ ແຕ່ບັດນີ້ ພວກພາມບໍຣິໂພກອາຫານຕາມຄວາມຕ້ອງການຈົນອີ່ມທ້ອງແລ້ວ ຖືເອົາສ່ວນທີ່ເຫຼືອໄປ ບັດນີ້ ພວກໝາກໍສະແຫວງຫາອາຫານແລງ ເພື່ອກິນໃນເວລາຄ່ຳ ອາຫານເຊົ້າເພື່ອກິນໃນເວລາເຊົ້າ ນີ້ເປັນທຳຂອງພາມທີ່ເກົ່າແກ່ປະການທີ ໕ ບັດນີ້ ຜາກົດໃນພວກໝາ ບໍ່ຜາກົດໃນພວກພາມ

ພິກຂຸທັງຫຼາຍ ທຳຂອງພາມທີ່ເກົ່າແກ່ ໕ ປະການນີ້ແລ ບັດນີ້ ຜາກົດໃນພວກໝາ ບໍ່ຜາກົດໃນພວກພາມ

**ໂສນະສູດທີ ໑ ຈົບ**

## ໘. ໂທນະພາມມະນະສູດ

## ວ່າດ້ວຍໂທນະພາມ

[໑໙໘] ຄັ້ງນັ້ນແລ ໂທນະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນບ່ອນຣະນຶກເຖິງກັນແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ຂ້າພຣະອົງໄດ້ສະດັບມາດັ່ງນີ້ວ່າ "ພຣະສະມະນະໂຄດົມ ບໍ່ໄຫວ້ ບໍ່ລຸກຮັບ ບໍເຊື້ອເຊີນພາມຜູ້ແກ່ເຖົ້າ ຜູ້ເປັນໃຫຍ່ ລ່ວງການຜ່ານໄວມາແລ້ວຕາມລຳດັບດ້ວຍອາສະນະ ພຣະໂຄດົມຜູ້ຈະເລີນ ຂໍ້ນີ້ເຫັນຈະເປັນແນວນັ້ນ ຍ້ອນທ່ານພຣະໂຄດົມບໍ່ໄຫວ້ ບໍ່ລຸກຮັບ ບໍເຊື້ອເຊີນ ພາມຜູ້ແກ່ເຖົ້າ ເປັນຜູ້ໃຫຍ່ ລ່ວງການຜ່ານໄວມາແລ້ວຕາມລຳດັບດ້ວຍອາສະນະ ຂໍ້ນີ້ບໍ່ດີເລີຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂທນະ ແມ່ນທ່ານກໍປະຕິຍານວ່າ ເປັນພາມບໍ່ແມ່ນບໍ?

ໂທນະພາມຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ຜູ້ໃດເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວວ່າເປັນພາມ ຜູ້ມີຊາດກຳເນີດດີທັງຝ່າຍມານດາແລະຝ່າຍບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ[໑] ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ເປັນຜູ້ຄົງແກ່ຮຽນ ຊົງຈຳມົນ ຮູ້ຈົບ ໄຕຣເພດ[໒] ພ້ອມທັງນິກັນທຸສາດ[໓] ເກຕຸພະສາດ[໔] ອັກສອນສາດ[໕] ແລະປະຫວັດສາດ[໖] ເຂົ້າໃຈໂຕບົດແລະໄວຍາກອນ ຊ່ຽວຊານໂລກາຍະຕະສາດ[໗] ແລະລັກສະນະມະຫາບຸຣຸດ[໘] ຜູ້ນັ້ນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງໝາຍເຖິງຂ້າພຣະອົງ ຢ່າງແນ່ນອນ ຍ້ອນຂ້າພຣະອົງເປັນພາມ ເປັນຜູ້ມີຊາດກຳເນີດດີທັງຝ່າຍມານດາແລະຝ່າຍ ບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ເປັນຜູ້ຄົງແກ່ຮຽນ ຊົງຈຳມົນ ຮູ້ຈົບໄຕຣເພດ ພ້ອມທັງນິຄັນຖຸສາດ ເກຕຸພະສາດ ອັກສອນສາດ ແລະປະຫວັດສາດ ເຂົ້າໃຈໂຕບົດແລະໄວຍາກອນ ຊ່ຽວຊານໂລກາຍະຕະສາດ ແລະລັກສະນະມະຫາບຸຣຸດ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂທນະ ບັນດາລືສີຜູ້ເປັນບຸຣະພາຈານຂອງພວກພາມ ຄືຣືສີອັດຖະກະ ລືສີວາມະກະ ລືສີວາມະເທວະ ລືສີເວດສາມິດຕະ ລືສີຍະມະທັກຄິ ລືສີອັງຄີຣະສະ ລືສີພາຣະທະວາຊະ ລືສີວາເສດຖະ ລືສີກັດສະປະ ຣືສີພະຄຸ ເຊິ່ງເປັນຜູ້ຜູກມົນ ບອກມົນພວກພາມໃນປັດຈຸບັນນີ້ຂັບຕາມ ກ່າວຕາມເຊິ່ງບົດມົນທີ່ເກົ່າແກ່ນີ້ທີ່ທ່ານຂັບແລ້ວ ບອກແລ້ວຮິບໂຮມໄວ້ແລ້ວ ກ່າວໄດ້ຖືກຕ້ອງ ສາທະຍາຍໄດ້ຖືກຕ້ອງ ບອກໄດ້ຖືກຕ້ອງ ລືສີເຫຼົ່ານັ້ນບັນຍັດພາມ ໕ ຈຳພວກນີ້ໄວ້ ຄື

໑. ພາມຜູ້ສະເໝີດ້ວຍພົມ
໒. ພາມຜູ້ສະເໝີດ້ວຍເທວະດາ
໓. ພາມຜູ້ປະພຶດດີ
໔. ພາມຜູ້ປະພຶດທັງດີແລະຊົ່ວ
໕. ພາມຜູ້ເປັນຈັນທານ

ໂທນະ ທ່ານເປັນພາມຈຳພວກໃດ ໃນ ໕ ຈຳພວກນັ້ນ

ໂທນະພາມຂາບທູນວ່າ "ຂ້າແດ່ທ່ານພຣະໂຄດົມ ຂ້າພຣະອົງບໍ່ຮູ້ຈັກພາມ ໕ ຈຳພວກນີ້ຮູ້ແຕ່ວ່າເປັນພາມເທົ່ານັ້ນ ຂໍທ່ານພຣະໂຄດົມໂຜດສະແດງທຳແກ່ ຂ້າພຣະອົງ ໂດຍວິທີທີ່ຂ້າພຣະອົງຈະເພິ່ງຮູ້ຈັກພາມ ໕ ຈຳພວກນີ້ໄດ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂທນະ ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີເຮົາຈັກກ່າວໂທນະພາມທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພາມຜູ້ສະເໝີດ້ວຍພົມ ເປັນແນວໃດ?

ຄື ພາມໃນໂລກນີ້ເປັນຜູ້ມີຊາດກຳເນີດດີທັງຝ່າຍມານດາແລະຝ່າຍບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ເຂົາປະພຶດໂກມານພົມມະຈັນ໑ຮຽນມົນຢູ່ຕະຫຼອດ ໔໘ ປີ ສະແຫວງຫາຊັບສຳລັບບູຊາອາຈານເພື່ອອາຈານໂດຍຖືກຕ້ອງຕາມທຳທີ່ນັ້ນ ບໍ່ສະແຫວງຫາໂດຍບໍ່ຖືກຕ້ອງຕາມທຳ

ຄວາມຖືກຕ້ອງຕາມທຳໃນການສະແຫວງຫານັ້ນ ເປັນແນວໃດ?

ຄື ເຂົາບໍ່ສະແຫວງຫາດ້ວຍກະສິກຳ ບໍ່ສະແຫວງຫາດ້ວຍພານິດຊະກຳ(ການຄ້າຂາຍ) ບໍ່ສະແຫວງຫາດ້ວຍໂຄຣັກຂະກຳ(ການລ້ຽງງົວ) ບໍ່ສະແຫວງຫາດ້ວຍການເປັນນັກຮົບ ບໍ່ສະແຫວງຫາ ດ້ວຍການຮັບຣາດຊະການ ບໍ່ສະແຫວງຫາດ້ວຍສິລະປະແນວໃດແນວໜຶ່ງ ເຂົາຖືກະເບື້ອງທ່ຽວຂໍທານແນວດຽວ ມອບຊັບສຳລັບບູຊາອາຈານເພື່ອອາຈານແລ້ວ ແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດແລ້ວ ອອກຈາກເຮືອນບວດເປັນບັນພະຊິດ ເມື່ອບວດແລ້ວແນວນີ້ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ທິດທີ ໓ ທິດທີ ໔ ທິດເບື້ອງເທິງ໔ ທິດເບື້ອງລຸ່ມ໕ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ທິດທີ ໓ ທິດທີ ໔ ທິດ ເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ທ່ານຈະເລີນພົມວິຫານ ໔ ປະການນີ້ແລ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸກຄະຕິພົມມະໂລກ ພາມຜູ້ສະເໝີດ້ວຍພົມ ເປັນແນວນີ້ແລ (໑)

ພາມຜູ້ສະເໝີດ້ວຍເທວະດາ ເປັນແນວໃດ?

ຄື ພາມໃນໂລກນີ້ ເປັນຜູ້ມີຊາດກຳເນີດດີທັງຝ່າຍມານດາແລະຝ່າຍບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ເຂົາປະພຶດໂກມານພົມມະຈັນ ຮຽນມົນຢູ່ຕະຫຼອດ ໔໘ ປີ ສະແຫວງຫາຊັບສຳລັບບູຊາອາຈານເພື່ອອາຈານໂດຍຖືກຕ້ອງຕາມທຳທີ່ນັ້ນ ບໍ່ສະແຫວງຫາໂດຍບໍ່ຖືກຕ້ອງຕາມທຳ

ຄວາມຖືກຕ້ອງຕາມທຳໃນການສະແຫວງຫານັ້ນ ເປັນແນວໃດ?

ຄື ເຂົາບໍ່ສະແຫວງຫາດ້ວຍກະສິກຳ ບໍ່ສະແຫວງຫາດ້ວຍພານິດຊະກຳ ບໍ່ສະແຫວງຫາດ້ວຍໂຄຣັກຂະກຳ ບໍ່ສະແຫວງຫາດ້ວຍການເປັນນັກຮົບ ບໍ່ສະແຫວງຫາດ້ວຍການຮັບຣາດຊະ

ການ ແລະບໍ່ສະແຫວງຫາດ້ວຍສິລະປະແນວໃດແນວໜຶ່ງ ເຂົາຖືກະເບື້ອງທ່ຽວພິກຂາຈານແນວດຽວ ມອບຊັບສຳລັບບູຊາອາຈານເພື່ອອາຈານແລ້ວ ສະແຫວງຫາພັນລະຍາໂດຍຖືກຕ້ອງຕາມທຳ ບໍ່ສະແຫວງຫາໂດຍບໍ່ຖືກຕ້ອງຕາມທຳ

ຄວາມຖືກຕ້ອງຕາມທຳໃນການສະແຫວງຫານັ້ນ ເປັນແນວໃດ?

ຄື ເຂົາບໍ່ສະແຫວງຫາດ້ວຍການຊື້ ບໍ່ສະແຫວງຫາດ້ວຍການຂາຍ ແຕ່ສະແຫວງຫາສະເພາະ ພາມມະນີທີ່ເຂົາຍົກໃຫ້ດ້ວຍການຫຼັ່ງນ້ຳ ເຂົາສົມສູ່ສະເພາະພາມມະນີ ບໍ່ສົມສູ່ກັບແມ່ຍິງຊັ້ນ ກະສັດ ແພດ ສູດ ຈັນທານ ນາຍພານ ຊ່າງສານ ຊ່າງລົດ ຄົນຂົນຂີ້ເຫຍື້ອ ແມ່ຍິງຖືພາ ແມ່ຍິງມີລູກອ່ອນ ແມ່ຍິງໝົດຣະດູ ຍ້ອນເຫດໃດ ພາມຈຶ່ງບໍ່ສົມສູ່ກັບແມ່ຍິງຖືພາ ຍ້ອນຖ້າພາມສົມສູ່ກັບແມ່ຍິງຖືພາ ມາ ນົບຫຼືມານະວົກາ ຊື່ວ່າເປັນຜູ້ເກີດແຕ່ກອງ ອຸດຈາຣະ ສັນນັ້ນ ພາມຈຶ່ງບໍ່ສົມສູ່ກັບແມ່ຍິງຖືພາ ຍ້ອນເຫດໃດ ພາມຈຶ່ງ ບໍ່ສົມສູ່ກັບແມ່ຍິງມີລູກອ່ອນ ຍ້ອນຖ້າພາມສົມສູ່ກັບແມ່ຍິງມີລູກອ່ອນ ມານົບຫຼື ມານະວົກາຊື່ວ່າເປັນຜູ້ດື່ມຂອງບໍ່ສະອາດ ດັ່ງນັ້ນ ພາມຈຶ່ງບໍ່ສົມສູ່ກັບແມ່ຍິງມີລູກອ່ອນ

ພາມມະນີນັ້ນເປັນພາມມະນີຂອງພາມ ບໍ່ແມ່ນຍ້ອນຕ້ອງການຄວາມຕ້ອງການ ບໍ່ແມ່ນຍ້ອນຕ້ອງການຄວາມສະນຸກ ບໍ່ແມ່ນຍ້ອນຕ້ອງການຄວາມຍິນດີ ແຕ່ເປັນພາມມະນີຂອງພາມຍ້ອນຕ້ອງການບຸດທີ່ນັ້ນ ພາມນັ້ນມີບຸດຫຼືທິດາແລ້ວ ຈຶ່ງແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດແລ້ວອອກບວດເປັນບັນພະຊິດ ເຂົາບວດແລ້ວແນວນີ້ ກໍສະຫງັດຈາກການ ໗ລ໗ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນ ອຸເປກຂາຢູ່ ທ່ານຈະເລີນຊານທັງ ໔ ປະການນີ້ແລ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ພາມຜູ້ສະເໝີດ້ວຍເທວະດາ ເປັນແນວນີ້ແລ (໔)

ພາມຜູ້ມີຄວາມປະພຶດດີ ເປັນແນວໃດ?

ຄື ພາມໃນໂລກນີ້ ເປັນຜູ້ມີຊາດກຳເນີດດີທັງຝ່າຍມານດາແລະຝ່າຍບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ເຂົາປະພຶດໂກມານພົມມະຈັນ ຮຽນມົນຢູ່ ໔໘ ປີ ສະແຫວງຫາຊັບສຳລັບບູຊາອາຈານເພື່ອອາຈານໂດຍຖືກຕ້ອງຕາມທຳທີ່ນັ້ນ ບໍ່ສະແຫວງຫາໂດຍບໍ່ຖືກຕ້ອງຕາມທຳ

ຄວາມຖືກຕ້ອງຕາມທຳໃນການສະແຫວງຫານັ້ນ ເປັນແນວໃດ?

ຄື ເຂົາບໍ່ສະແຫວງຫາດ້ວຍກະສິກຳ ບໍ່ສະແຫວງຫາດ້ວຍພານິດຊະກຳ ບໍ່ສະແຫວງຫາດ້ວຍໂຄຣັກຂະກຳ ບໍ່ສະແຫວງຫາດ້ວຍການເປັນນັກຮົບ ບໍ່ສະແຫວງຫາດ້ວຍການຮັບຣາດຊະ

ການ ແລະບໍ່ສະແຫວງຫາດ້ວຍສິລະປະແນວໃດແນວໜຶ່ງ ເຂົາຖືກະເບື້ອງທ່ຽວພິກຂາຈານແນວດຽວ ມອບຊັບສຳລັບບູຊາອາຈານເພື່ອອາຈານແລ້ວ ສະແຫວງຫາພັນລະຍາໂດຍຖືກຕ້ອງຕາມທຳ ທີ່ນັ້ນ ບໍ່ສະແຫວງຫາໂດຍບໍ່ຖືກຕ້ອງຕາມທຳ

ຄວາມຖືກຕ້ອງຕາມທຳໃນການສະແຫວງຫານັ້ນ ເປັນແນວໃດ?

ຄື ເຂົາບໍ່ສະແຫວງຫາດ້ວຍການຊື້ ບໍ່ສະແຫວງຫາດ້ວຍການຂາຍ ແຕ່ສະແຫວງຫາສະເພາະ ພາມມະນີທີ່ເຂົາຍົກໃຫ້ດ້ວຍການຫຼັ່ງນ້ຳ ເຂົາສົມສູ່ສະເພາະພາມມະນີ ບໍ່ສົມສູ່ກັບແມ່ຍິງຊັ້ນ ກະສັດ ແພດ ສູດ ຈັນທານ ນາຍພານ ຊ່າງສານ ຊ່າງລົດ ຄົນຂົນຂີ້ເຫຍື້ອ ແມ່ຍິງຖືພາ ແມ່ຍິງມີລູກອ່ອນ ແມ່ຍິງໝົດຣະດູ ຍ້ອນເຫດໃດ ພາມຈຶ່ງບໍ່ສົມສູ່ກັບແມ່ຍິງຖືພາ ຍ້ອນຖ້າພາມສົມສູ່ກັບແມ່ຍິງຖືພາ ມາ ນົບຫຼືມານະວົກາຊື່ວ່າເປັນຜູ້ເກີດແຕ່ກອງອຸດຈາຣະ ດັ່ງນັ້ນ ພາມຈຶ່ງບໍ່ສົມສູ່ກັບແມ່ຍິງຖືພາ ຍ້ອນເຫດໃດ ພາມຈຶ່ງບໍ່ສົມສູ່ກັບແມ່ຍິງມີລູກອ່ອນ ຍ້ອນຖ້າພາມສົມສູ່ກັບແມ່ຍິງມີລູກອ່ອນ ມານົບຫຼື ມານະວົກາຊື່ວ່າເປັນຜູ້ດື່ມຂອງບໍ່ສະອາດ ດັ່ງນັ້ນ ພາມຈຶ່ງບໍ່ສົມສູ່ກັບແມ່ຍິງມີລູກອ່ອນ

ພາມມະນີນັ້ນເປັນພາມມະນີຂອງພາມ ບໍ່ແມ່ນຍ້ອນຕ້ອງການຄວາມຕ້ອງການ ບໍ່ແມ່ນຍ້ອນຕ້ອງການຄວາມສະນຸກ ບໍ່ແມ່ນຍ້ອນຕ້ອງການຄວາມຍິນດີ ແຕ່ເປັນພາມມະນີຂອງພາມນັ້ນຍ້ອນຕ້ອງການບຸດທີ່ນັ້ນ ພາມນັ້ນມີບຸດຫຼືທິດາແລ້ວ ປາຖະໜາຄວາມຍິນດີໃນບຸດຫຼືທິດານັ້ນແລຄອບຄອງຊັບສົມບັດ ບໍ່ອອກຈາກເຮືອນບວດເປັນບັນພະຊິດ ດຳລົງຢູ່ໃນຄວາມປະພຶດດີຂອງພາມແຕ່ປາງກ່ອນ ບໍ່ລ່ວງລະເມີດຄວາມປະພຶດດີນັ້ນ ຍ້ອນເຫດດັ່ງນີ້ແລ ຊາວໂລກຈຶ່ງຮຽກວ່າ ພາມຜູ້ມີຄວາມປະພຶດດີ ພາມຜູ້ມີຄວາມປະພຶດດີ ເປັນແນວນີ້ແລ (໓)

ພາມຜູ້ປະພຶດທັງດີແລະຊົ່ວ ເປັນແນວໃດ?

ຄື ພາມໃນໂລກນີ້ ເປັນຜູ້ມີຊາດກຳເນີດດີທັງຝ່າຍມານດາແລະຝ່າຍບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ເຂົາປະພຶດໂກມານພົມມະຈັນ ຮຽນມົນຢູ່ຕະຫຼອດ ໔໘ ປີ ສະແຫວງຫາຊັບສຳລັບບູຊາອາຈານເພື່ອອາຈານໂດຍຖືກຕ້ອງຕາມທຳທີ່ນັ້ນ ບໍ່ສະແຫວງຫາໂດຍບໍ່ຖືກຕ້ອງຕາມທຳ

ຄວາມຖືກຕ້ອງຕາມທຳໃນການສະແຫວງຫານັ້ນ ເປັນແນວໃດ?

ຄື ເຂົາບໍ່ສະແຫວງຫາດ້ວຍກະສິກຳ ບໍ່ສະແຫວງຫາດ້ວຍພານິດຊະກຳ ບໍ່ສະແຫວງຫາດ້ວຍໂຄຣັກຂະກຳ ບໍ່ສະແຫວງຫາດ້ວຍການເປັນນັກຮົບ ບໍ່ສະແຫວງຫາດ້ວຍການຮັບຣາດຊະການ ບໍ່ສະແຫວງຫາດ້ວຍສິລະປະແນວໃດແນວໜຶ່ງ ເຂົາຖືກະເບື້ອງທ່ຽວພິກຂາຈານແນວດຽວ

ມອບຊັບສໍາລັບບູຊາອາຈານເພື່ອອາຈານແລ້ວ ສະແຫວງຫາພັນລະຍາໂດຍຖືກຕ້ອງຕາມທໍາແດ່ ບໍ່ຖືກຕ້ອງຕາມທໍາແດ່ ສະແຫວງຫາດ້ວຍການຊື້ແດ່ ສະແຫວງຫາດ້ວຍການຂາຍແດ່ ສະແຫວງຫາພາມມະນີທີ່ເຂົາຍົກໃຫ້ດ້ວຍການຫຼັ່ງນໍ້າແດ່ ສົມສູ່ກັບພາມມະນີແດ່ ແມ່ຍິງຊັ້ນກະສັດແດ່ ແພດແດ່ ສູດແດ່ ຈັນທານແດ່ ນາຍພານແດ່ ຊ່າງສານແດ່ ຊ່າງລົດແດ່ ຄົນຂົນຂີ້ເຫຍື້ອແດ່ ແມ່ຍິງຖືພາແດ່ ແມ່ຍິງມີລູກອ່ອນແດ່ ແມ່ຍິງມີຣະດູແດ່ ແມ່ຍິງໝົດລະດູແດ່ ພາມມະນີນັ້ນເປັນພາມມະນີຂອງພາມຍ້ອນຕ້ອງການຄວາມຕ້ອງການແດ່ ຍ້ອນຕ້ອງການຄວາມສະນຸກແດ່ ຍ້ອນຕ້ອງການຄວາມຍິນດີແດ່ ຍ້ອນຕ້ອງການບຸດແດ່ ພາມບໍ່ດໍາລົງຢູ່ໃນຄວາມປະພຶດດີຂອງພາມແຕ່ປາງກ່ອນ ລ່ວງລະເມີດຄວາມປະພຶດນັ້ນ ຍ້ອນເຫດດັ່ງນີ້ແລ ຊາວໂລກຈຶ່ງຮຽກວ່າ ພາມຜູ້ມີຄວາມປະພຶດ ທັງດີແລະຊົ່ວ ພາມຜູ້ປະພຶດທັງດີແລະຊົ່ວ ເປັນແນວນີ້ແລ (໔)

ພາມຜູ້ເປັນຈັນທານ ເປັນແນວໃດ?

ຄື ພາມໃນໂລກນີ້ ເປັນຜູ້ມີຊາດກໍາເນີດດີທັງຝ່າຍມານດາແລະຝ່າຍບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕໍາໜິໄດ້ຍ້ອນອ້າງເຖິງຊາດຕະກູນເຂົາປະພຶດໂກມານພົມມະຈັນ ຮຽນມົນຢູ່ ໔໘ ປີ ສະແຫວງຫາຊັບສໍາລັບບູຊາອາຈານເພື່ອອາຈານໂດຍຖືກຕ້ອງຕາມທໍາແດ່ ບໍ່ຖືກຕ້ອງຕາມທໍາແດ່ ສະແຫວງຫາດ້ວຍກະສິກໍາແດ່ ສະແຫວງຫາດ້ວຍພານິດຊະກໍາແດ່ ສະແຫວງຫາດ້ວຍໂຄຣັກຂະກໍາແດ່ ສະແຫວງຫາດ້ວຍການເປັນນັກຮົບແດ່ ສະແຫວງຫາດ້ວຍການຮັບຣາດຊະການແດ່ ສະແຫວງຫາດ້ວຍສິລະປະແນວໃດແນວໜຶ່ງແດ່ ຖືກະເບື້ອງທ່ຽວພິກຂາຈານແດ່ ເຂົາມອບຊັບສໍາລັບບູຊາອາຈານເພື່ອອາຈານແລ້ວສະແຫວງຫາພັນລະຍາໂດຍຖືກຕ້ອງຕາມທໍາແດ່ ບໍ່ຖືກຕ້ອງຕາມທໍາແດ່ ສະແຫວງຫາດ້ວຍການຊື້ແດ່ ສະແຫວງຫາດ້ວຍການຂາຍແດ່ ສະແຫວງຫາພາມມະນີທີ່ເຂົາຍົກໃຫ້ດ້ວຍການຫຼັ່ງນໍ້າແດ່ ສົມສູ່ກັບພາມມະນີແດ່ ແມ່ຍິງຊັ້ນກະສັດແດ່ ແພດແດ່ ສູດແດ່ ຈັນທານແດ່ ນາຍພານແດ່ ຊ່າງສານແດ່ ຊ່າງລົດແດ່ ຄົນຂົນຂີ້ເຫຍື້ອແດ່ ແມ່ຍິງຖືພາແດ່ ແມ່ຍິງມີລູກອ່ອນແດ່ ແມ່ຍິງມີຣະດູແດ່ ແມ່ຍິງໝົດຣະດູແດ່ ພາມມະນີນັ້ນເປັນພາມມະນີຂອງພາມຍ້ອນຕ້ອງການຄວາມຕ້ອງການແດ່ ຍ້ອນຕ້ອງການຄວາມສະນຸກແດ່ ຍ້ອນຕ້ອງການຄວາມຍິນດີແດ່ ຍ້ອນຕ້ອງການບຸດແດ່ ເຂົາລ້ຽງຊີບດ້ວຍວຽກງານທຸກຢ່າງ ພວກພາມໄດ້ກ່າວກັບເຂົາແນວນີ້ວ່າ "ທ່ານປະຕິຍານວ່າເປັນພາມ ຜູ້ຈະເລີນ ຍ້ອນເຫດໃດ ຈຶ່ງລ້ຽງຊີບດ້ວຍວຽກງານທຸກຢ່າງ ເຂົາຕອບແນວນີ້ວ່າ "ທ່ານຜູ້ຈະເລີນ ປຽບເຫມືອນໄຟໄໝ້ຂອງສະອາດແດ່ ບໍ່ສະອາດແດ່ ແຕ່ໄຟບໍ່ຢຶດຕິດກັບສິ່ງນັ້ນ ແມ່ນສັນໃດ ເຖິງແມ່ນພາມລ້ຽງຊີບດ້ວຍວຽກງານທຸກຢ່າງກໍຈິງ ແຕ່ພາມກໍບໍ່ຢຶດຕິດກັບວຽກງານນັ້ນຄືກັນສັນນັ້ນ ພາມຈຶ່ງລ້ຽງຊີບດ້ວຍວຽກງານທຸກຢ່າງ ຍ້ອນເຫດດັ່ງນີ້ແລ ຊາວໂລກຈຶ່ງຮຽກວ່າ ພາມຜູ້ເປັນຈັນທານ ພາມຜູ້ເປັນຈັນທານ ເປັນແນວນີ້ແລ (໕)

ໂທນະ ບັນດາລືສີຜູ້ເປັນບຸຣະພາຈານຂອງພວກພາມ ຄື ຣືສີອັດຖະກະ ລືສີວາມະກະ ລື

ສີວາມະເທວະ ລືສີເວດສາມິດຕະ ລືສີຍະມະທັກຄີ ລິສີອັງຄີຣະສະ ລືສີພາຣະທະວາຊະ ລືສີວາເສດຖະ ລືສີກັດສະປະ ຣືສີພະຄຸ ເຊິ່ງເປັນຜູ້ຜູກມົນ ບອກມົນ ພວກພາມໃນປັດຈຸບັນນີ້ຂັບຕາມກ່າວຕາມເຊິ່ງບົດມົນທີ່ເກົ່າແກ່ນີ້ ທີ່ທ່ານຂັບແລ້ວ ບອກແລ້ວ ຮີບໂຮມໄວ້ແລ້ວ ກ່າວໄດ້ຖືກຕ້ອງສາທະຍາຍໄດ້ຖືກຕ້ອງ ບອກໄດ້ຖືກຕ້ອງ ລືສີເຫຼົ່ານັ້ນບັນຍັດ ພາມ ໕ ຈຳພວກນີ້ໄວ້ ຄື

໑. ພາມຜູ້ສະເໝີດ້ວຍພົມ
໒. ພາມຜູ້ສະເໝີດ້ວຍເທວະດາ
໓. ພາມຜູ້ປະພຶດດີ
໔. ພາມຜູ້ປະພຶດທັງດີແລະຊົ່ວ
໕. ພາມຜູ້ເປັນຈັນທານ

ໂທນະ ບັນດາພາມ ໕ ຈຳພວກນັ້ນ ທ່ານເປັນພາມຈຳພວກໃດ

ໂທນະພາມຂາບທູນວ່າ "ຂ້າແດ່ທ່ານພຣະໂຄດົມ ເມື່ອເປັນແນວນີ້ ແມ່ນແຕ່ພາມ ຜູ້ເປັນຈັນ ທານ ຂ້າພຣະອົງຍັງໃຫ້ບໍລິບູນບໍ່ໄດ້ເລີຍ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດເທີ້ນ

**ໂທນະພາມມະນະສູດທີ ໒ ຈົບ**

## ໓. ສັງຄາຣະວະສູດ

## ວ່າດ້ວຍສັງຄາຣະວະພາມ

[໑໙໓] ຄັ້ງນັ້ນແລ ສັງຄາຣະວະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນບ່ອນຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍ ເປັນເຫດປັດໄຈ ໃຫ້ມົນແມ່ນທີ່ສາທະຍາຍມາເປັນເວລາດົນ ກໍບໍ່ແຈ່ມແຈ້ງໄດ້ໃນການບາງເວລາ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ ແລະ ອັນໃດ ເປັນເຫດປັດໄຈໃຫ້ມົນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນ ກໍແຈ່ມແຈ້ງໄດ້ໃນການບາງເວລາ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ໄດ້ສາທະຍາຍເລີຍ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

໑. ສະໄໝໃດ ບຸກຄົນມີໃຈຖືກກາມຣາຄະກຸ້ມລຸມ ຖືກກາມຣາຄະຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດ'ກາມຣາຄະທີ່ເກີດຂຶ້ນແລ້ວ ສະໄໝນັ້ນ ບຸກຄົນຍ່ອມບໍ່ຮູ້

ຍ່ອມບໍ່ເຫັນຕາມຄວາມເປັນຈິງເຊິ່ງປະໂຫຍດຕົນ໌ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງ ໔ ຝ່າຍ ມົນແມ່ນທີ່ສາທະຍາຍມາເປັນເວລາດົນ ກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ

ປຽບຄື ພາຊະນະທີ່ເຕັມດ້ວຍນ້ຳເຊິ່ງຜະສົມດ້ວຍຄັ່ງ ຂີ້ມິ້ນ ສີຂຽວ ຫຼືສີເຫຼືອງອ່ອນ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະທີ່ເຕັມດ້ວຍນ້ຳນັ້ນ ບໍ່ເພິ່ງຮູ້ ບໍ່ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດຖືກກາມຣາຄະກຸ້ມລຸມ ຖືກກາມຣາຄະຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດກາມຣາຄະທີ່ເກີດຂື້ນແລ້ວ ສະໄໝນັ້ນ ບຸກຄົນຍ່ອມບໍ່ຮູ້ຍ່ອມບໍ່ເຫັນຕາມຄວາມເປັນຈິງແມ່ນເຊິ່ງປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງ ໔ ຝ່າຍ ມົນແມ່ນທີ່ສາທະຍາຍມາເປັນເວລາດົນ ກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ ຄືກັນສັນນັ້ນ

໔. ສະໄໝໃດ ບຸກຄົນມີຈິດຖືກພະຍາບາດກຸ້ມລຸມ ຖືກພະຍາບາດຄອບງຳຢູ່ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດພະຍາບາດທີ່ເກີດຂື້ນແລ້ວ ຯລຯ ມົນແມ່ນທີ່ສາທະຍາຍມາເປັນເວລາດົນ ກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນ ຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ

ປຽບຄື ພາຊະນະທີ່ເຕັມດ້ວຍນ້ຳຮ້ອນຍ້ອນໄຟ ເດືອດຟົດເປັນອາຍ ຄົນມີຕາດີ ແນມເບິ່ງເງົາ ໜ້າຂອງຕົນໃນພາຊະນະທີ່ເຕັມດ້ວຍນ້ຳນັ້ນ ບໍ່ເພິ່ງຮູ້ບໍ່ເພິ່ງເຫັນຕາມຄວາມເປັນຈິງແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດຖືກພະຍາບາດກຸ້ມລຸມ ຖືກພະຍາບາດຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດພະຍາບາດທີ່ເກີດຂື້ນແລ້ວ ຯລຯ ມົນແມ່ນທີ່ສາທະຍາຍມາເປັນເວລາດົນ ກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ ຄືກັນສັນນັ້ນ

໕. ສະໄໝໃດ ບຸກຄົນມີຈິດຖືກຖີນະມິດທະກຸ້ມລຸມ ຖືກຖີນະມິດທະຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດຖີນະມິດທະທີ່ເກີດຂື້ນແລ້ວ ຯລຯ ມົນແມ່ນທີ່ສາທະຍາຍມາເປັນເວລາດົນ ກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ

ປຽບຄື ພາຊະນະທີ່ເຕັມດ້ວຍນ້ຳຖືກສາຫຣ່າຍແລະແໜປົກຄຸມ ໄວ້ແລ້ວ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະທີ່ເຕັມດ້ວຍນ້ຳນັ້ນ ບໍ່ເພິ່ງຮູ້ ບໍ່ເພິ່ງເຫັນຕາມຄວາມເປັນຈິງແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດຖືກຖີນະມິດທະກຸ້ມລຸມ ຖືກຖີນະມິດທະຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດຖີນະມິດທະທີ່ເກີດຂື້ນແລ້ວ ຯລຯ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ ຄືກັນສັນນັ້ນ

໔. ສະໄໝໃດ ບຸກຄົນມີຈິດຖືກອຸດທັດຈະກຸກກຸດຈະກຸ້ມລຸມ ຖືກອຸດທັດຈະກຸກກຸດຈະຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດອຸດທັດຈະກຸກກຸດຈະທີ່ເກີດຂື້ນແລ້ວ ໗ລ໗ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ

ປຽບຄື ພາຊະນະທີ່ເຕັມດ້ວຍນ້ຳ ຖືກລົມພັດ ໄຫວອົນເປັນຄື້ນ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະທີ່ເຕັມດ້ວຍນ້ຳນັ້ນ ບໍ່ເພິ່ງຮູ້ ບໍ່ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີໃຈຖືກອຸດທັດຈະກຸກກຸດຈະກຸ້ມລຸມ ຖືກອຸດທັດຈະກຸກກຸດຈະຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດອຸດທັດຈະກຸກກຸດຈະທີ່ເກີດຂື້ນແລ້ວ ໗ລ໗ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ ສາທະຍາຍເລີຍ ຄືກັນສັນນັ້ນ

໕. ສະໄໝໃດ ບຸກຄົນມີຈິດຖືກວິຈິກິດສາກຸ້ມລຸມ ຖືກວິຈິກິດສາຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດວິຈິກິດສາທີ່ເກີດຂື້ນແລ້ວ ໗ລ໗ ມົນແມ່ນທີ່ສາທະຍາຍມາເປັນເວລາດົນ ກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ

ປຽບຄື ພາຊະນະທີ່ເຕັມດ້ວຍນ້ຳຂຸ່ນມົວ ເປັນຕົມ ທີ່ເຂົາວາງໄວ້ໃນບ່ອນມືດ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະທີ່ເຕັມດ້ວຍນ້ຳນັ້ນ ບໍ່ເພິ່ງຮູ້ ບໍ່ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດຖືກວິຈິກິດສາກຸ້ມລຸມ ຖືກວິຈິກິດສາຄອບງຳຢູ່ ແລະບໍ່ຮູ້ແຈ້ງຕາມເປັນຈິງເຊິ່ງທຳທີ່ກຳຈັດວິຈິກິດສາທີ່ເກີດຂື້ນແລ້ວ ໗ລ໗ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ສາທະຍາຍເລີຍ ຄືກັນສັນນັ້ນ

ພາມ ແຕ່

໑. ສະໄໝໃດ ບຸກຄົນມີຈິດບໍ່ຖືກກາມຣາຄະກຸ້ມລຸມ ບໍ່ຖືກກາມຣາຄະຄອບງຳຢູ່ ແລະຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດກາມຣາຄະທີ່ເກີດຂື້ນແລ້ວ ສະໄໝນັ້ນ ບຸກຄົນຍ່ອມຮູ້ຍ່ອມເຫັນຕາມຄວາມເປັນຈິງແມ່ນເຊິ່ງປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງ ໒ ຝ່າຍ ມົນແມ່ນທີ່ບໍ່ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ

ປຽບຄື ພາຊະນະທີ່ເຕັມດ້ວຍນ້ຳເຊິ່ງບໍ່ຜະສົມດ້ວຍຄັ່ງ ຂີ້ມິ້ນ ສີຂຽວຫຼືສີເຫຼືອງອ່ອນ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະທີ່ເຕັມດ້ວຍນ້ຳນັ້ນ ເພິ່ງຮູ້ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດບໍ່ຖືກການຣາຄະກຸ້ມລຸມ ບໍ່ຖືກການຣາຄະຄອບງຳຢູ່ ແລະຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດການຣາຄະທີ່ເກີດຂຶ້ນແລ້ວ ສະໄໝນັ້ນ ບຸກຄົນຍ່ອມຮູ້ ຍ່ອມເຫັນຕາມຄວາມເປັນຈິງ ແມ່ນເຊິ່ງປະໂຫຍດຕົນ ປະໂຫຍດຜູ້ອື່ນແລະປະໂຫຍດທັງ ໒ ຝ່າຍ ມົນແມ່ນທີ່ບໍ່ສາທະຍາຍມາເປັນເວລາດົນ ກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງ ເວົ້າເຖິງ ມົນທີ່ສາທະຍາຍເລີຍ ຄືກັນສັນນັ້ນ

໒. ສະໄໝໃດ ບຸກຄົນມີຈິດບໍ່ຖືກພະຍາບາດກຸ້ມລຸມ ບໍ່ຖືກພະຍາບາດຄອບງຳຢູ່ ແລະຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດພະຍາບາດທີ່ເກີດຂຶ້ນແລ້ວ ຯລຯ ມົນແມ່ນທີ່ບໍ່ສາທະຍາຍມາເປັນເວລາດົນ ກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ

ປຽບຄື ພາຊະນະທີ່ເຕັມດ້ວຍນ້ຳ ບໍ່ຮ້ອນຍ້ອນໄຟ ບໍ່ເດືອດພົດ ບໍ່ເປັນອາຍ ຄົນຜູ້ມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະທີ່ເຕັມດ້ວຍນ້ຳນັ້ນ ເພິ່ງຮູ້ ເພິ່ງເຫັນຕາມຄວາມເປັນຈິງແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດບໍ່ຖືກພະຍາບາດກຸ້ມລຸມ ບໍ່ຖືກພະຍາບາດຄອບງຳຢູ່ ແລະຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດພະຍາບາດທີ່ເກີດ ຂຶ້ນແລ້ວ ຯລຯ ມົນແມ່ນທີ່ບໍ່ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ ສັນນັ້ນ ຄືກັນ

໓. ສະໄໝໃດ ບຸກຄົນມີຈິດບໍ່ຖືກຖີນະມິດທະກຸ້ມລຸມ ບໍ່ຖືກຖີນະມິດທະຄອບງຳຢູ່ ແລະຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດຖີນະມິດທະທີ່ເກີດຂຶ້ນແລ້ວ ຯລຯ ມົນແມ່ນທີ່ບໍ່ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ

ປຽບຄື ພາຊະນະທີ່ເຕັມດ້ວຍນ້ຳ ບໍ່ຖືກສາຫຣ່າຍແລະແຫນປົກຄຸມແລ້ວ ຄົນຜູ້ມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະທີ່ເຕັມດ້ວຍນ້ຳນັ້ນ ເພິ່ງຮູ້ ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດບໍ່ຖືກຖີນະມິດທະກຸ້ມລຸມ ບໍ່ຖືກຖີນະມິດທະຄອບງຳຢູ່ ແລະຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດຖີນະມິດທະ ທີ່ເກີດຂຶ້ນແລ້ວ ຯລຯ ມົນແມ່ນທີ່ບໍ່ສາທະຍາຍມາເປັນເວລາດົນ ກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ ສັນນັ້ນ ຄືກັນ

໔. ສະໄໝໃດ ບຸກຄົນມີຈິດບໍ່ຖືກອຸດທັດຈະກຸກກຸດຈະກຸ້ມລຸມ ບໍ່ຖືກອຸດທັດຈະກຸກກຸດຈະຄອບງຳຢູ່ ແລະຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວ

ໆລໆ ມົນແມ່ນທີ່ບໍ່ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ

ປຽບຄື ພາຊະນະທີ່ເຕັມດ້ວຍນ້ຳ ບໍ່ຖືກລົມພັດ ກໍບໍ່ໄຫວ ບໍ່ວົນ ບໍ່ເປັນຄື້ນ ຄົນຜູ້ມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະທີ່ເຕັມດ້ວຍນ້ຳນັ້ນ ເພິ່ງຮູ້ ເພິ່ງເຫັນຕາມຄວາມເປັນຈິງແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດບໍ່ຖືກອຸດທັດຈະກຸກກຸດຈະກຸ້ມລຸມ ບໍ່ຖືກອຸດທັດຈະກຸກກຸດຈະຄອບງຳຢູ່ ແລະຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດອຸດທັດຈະກຸກກຸດຈະທີ່ເກີດຂື້ນແລ້ວ ໆລໆ ມົນແມ່ນທີ່ບໍ່ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ ຄືກັນສັນນັ້ນ

໕. ສະໄໝໃດ ບຸກຄົນມີຈິດບໍ່ຖືກວິຈິກິດສາກຸ້ມລຸມ ບໍ່ຖືກວິຈິກິດສາຄອບງຳຢູ່ ແລະຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດວິຈິກິດສາທີ່ເກີດຂື້ນແລ້ວ ໆລໆ ມົນແມ່ນທີ່ບໍ່ສາທະຍາຍມາເປັນເວລາດົນ ກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າ ເຖິງມົນທີ່ສາທະຍາຍເລີຍ

ປຽບຄື ພາຊະນະທີ່ເຕັມດ້ວຍນ້ຳໃສ ບໍ່ຂຸ່ນມົວ ທີ່ເຂົາວາງໄວ້ໃນກາງແຈ້ງ ຄົນຜູ້ມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະທີ່ເຕັມດ້ວຍນ້ຳນັ້ນ ເພິ່ງຮູ້ ເພິ່ງເຫັນຕາມຄວາມເປັນຈິງແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດບໍ່ຖືກວິຈິກິດສາກຸ້ມລຸມ ບໍ່ຖືກວິຈິກິດສາຄອບງຳຢູ່ ແລະຮູ້ແຈ້ງຕາມຄວາມເປັນຈິງເຊິ່ງທຳທີ່ກຳຈັດວິຈິກິດສາທີ່ເກີດຂື້ນແລ້ວ ໆລໆ ມົນແມ່ນທີ່ບໍ່ສາທະຍາຍມາເປັນເວລາດົນ ກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ ສັນນັ້ນ ຄືກັນ

ພາມ ນີ້ແລ ເປັນເຫດປັດໃຈໃຫ້ມົນແມ່ນທີ່ສາທະຍາຍມາເປັນເວລາດົນ ກໍບໍ່ແຈ່ມແຈ້ງໄດ້ໃນການບາງເວລາ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ ແລະນີ້ແລເປັນເຫດປັດໃຈໃຫ້ມົນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນ ກໍແຈ່ມແຈ້ງໄດ້ໃນການບາງເວລາ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ໄດ້ສາທະຍາຍເລີຍ

ສັງຄາຣະວະພາມຂາບທູນວ່າ "ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນ ມ່ວນຫຼາຍ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດເທີ້ນ

**ສັງຄາຣະວະສູດທີ ໑ ຈົບ**

# ໔. ກາຣະນະປາລິບຸດ

## ວ່າດ້ວຍພາມຊື່ກາຣະນະປາລິ

[໑໘໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄານສາລາ ປ່າມະຫາວັນ ເຂດນະຄອນເວສາລີ ສະໄໝນັ້ນ ກາຣະນະປາລິພາມໃຊ້ຄົນໃຫ້ເຮັດວຽກງານ[໑]ຂອງເຈົ້າລິດສະຫວີຢູ່ ໄດ້ເຫັນປີງຄິຍານີພາມ[໒]ຍ່າງມາແຕ່ໄກ ຈຶ່ງຖາມວ່າ "ທ່ານປີງຄິຍານີພາມມາຈາກໄສແຕ່ຍັງເວັນ[໓]

ປີງຄິຍານີພາມຕອບວ່າ "ຂ້າພະເຈົ້າມາຈາກສຳນັກພຣະສະມະນະໂຄດົມ"

ກາຣະນະປາລິພາມຖາມວ່າ "ທ່ານປີງຄິຍານີເຂົ້າໃຈເລື້ອງນັ້ນແນວໃດ ຄື ເຂົ້າໃຈຄວາມແຈ່ມແຈ້ງແຫ່ງປັນຍາຂອງພຣະສະມະນະໂຄດົມວ່າ "ເປັນບັນດິດ ໄດ້ບໍ?"

ປີງຄິຍານີພາມຕອບວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າເປັນໃຜ ຈັກຮູ້ຄວາມແຈ່ມແຈ້ງແຫ່ງປັນຍາຂອງພຣະສະມະນະໂຄດົມຍ້ອນເຫດໃດ ຜູ້ທີ່ເປັນເຊັ່ນດຽວກັບພຣະສະມະນະໂຄດົມທໍ່ນັ້ນຈຶ່ງຈະຮູ້ຄວາມແຈ່ມແຈ້ງແຫ່ງປັນຍາຂອງພຣະສະມະນະໂຄດົມ"

ກາຣະນະປາລິກ່າວວ່າ "ທ່ານປີງຄິຍານີຊ່າງສັນເສີນພຣະສະມະນະໂຄດົມຍິ່ງ"

ປີງຄິຍານີພາມກ່າວວ່າ "ຂ້າພະເຈົ້າເປັນໃຜ ແລະຈັກສັນເສີນພຣະສະມະນະໂຄດົມຍ້ອນຫຕຸໃດ ແລະທ່ານພຣະສະມະນະໂຄດົມພຣະອົງນັ້ນເປັນຜູ້ອັນຊາວໂລກ ສັນເສີນເປັນຜູ້ປະເສີດທີ່ສຸດກວ່າ ເທວະດາ ແລະມະນຸດທັງຫຼາຍ"

ກາຣະນະປາລິພາມຖາມວ່າ "ທ່ານປີງຄິຍານີເຫັນອຳນາດປະໂຫຍດອັນໃດ ຈຶ່ງເຫຼື້ອມໃສຍິ່ງໃນພຣະສະມະນະໂຄດົມແນວນີ້"

ປີງຄິຍານີພາມຕອບ ວ່າ ທ່ານຜູ້ຈະເລີນ

໑. ບຸກຄົນຟັງທຳຂອງທ່ານພຣະສະມະນະໂຄດົມພຣະອົງນັ້ນ ໂດຍລັກສະນະໃດ ໆ ຄື ໂດຍສຸດຕະ ເຄີຍຍະ ເວີຍຍາກະຣະນະ ຫຼືອັບພູຕະທຳຍ່ອມບໍ່ປາຖະໜາ ປະວາທະ[໑]ຂອງສະມະນະຫຼວງຫຼາຍເຫຼົ່າອື່ນໂດຍລັກສະນະນັ້ນ ໆ ປຽບຄືບຸຣຸດຜູ້ອີ່ມໃນຣົດອັນເລີດແລ້ວ ບໍ່ປາຖະໜາຣົດທີ່ຊົ່ວເຫຼົ່າອື່ນ

໔. ບຸກຄົນຟັງທຳຂອງທ່ານພຣະສະມະນະໂຄດົມພຣະອົງນັ້ນໂດຍລັກສະນະໃດ ໆ ຄື ໂດຍ ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຫຼືອັບພູຕະທຳ ຍ່ອມໄດ້ຄວາມພໍໃຈ ຄວາມເຫຼື້ອມໃສ

ແຫ່ງໃຈໂດຍລັກສະນະນັ້ນ ໆ ປຽບຄືບຸຣຸດຜູ້ຖືກຄວາມຫິວແລະຄວາມອ່ອນເພຍຄອບງຳ ໄດ້ຮັງເຜິ້ງ ເຂົາເພິ່ງໄດ້ຊີມຣົດຈາກສ່ວນໃດ ໆ ຍ່ອມໄດ້ຣົດດີອັນບໍ່ມີສິ່ງໃສ່ປົນຈາກສ່ວນນັ້ນ ໆ

໓. ບຸກຄົນຟັງທຳຂອງທ່ານພຣະສະມະນະໂຄດົມພຣະອົງນັ້ນໂດຍລັກສະນະໃດ ໆ ຄືໂດຍ ສຸດຕະ ເຄັຍຍະ ເວັຍຍາກະຣະນະຫຼືອັບພູຕະທຳ ຍ່ອມໄດ້ຄວາມປາໂມດ ໂສມະນັດໂດຍລັກສະນະນັ້ນ ໆ ປຽບຄືບຸຣຸດໄດ້ໄມ້ຈັນ ຈະເປັນຈັນເຫຼືອງ ຫຼືຈັນແດງກໍຕາມ ເພິ່ງສູດກິ່ນຈາກສ່ວນໃດ ໆ ເຊັ່ນ ຈາກຮາກ ຈາກລຳຕົ້ນ ຫຼືຈາກຍອດ ຍ່ອມໄດ້ກິ່ນຫອມດີ ກິ່ນແທ້ຈາກສ່ວນນັ້ນ ໆ

໔. ບຸກຄົນຟັງທຳຂອງທ່ານພຣະສະມະນະໂຄດົມພຣະອົງນັ້ນໂດຍລັກສະນະໃດ ໆ ຄືໂດຍ ສຸດຕະ ເຄັຍຍະ ເວັຍຍາກະຣະນະ ຫຼືອັບພູຕະທຳ ໂສກະ (ຄວາມໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ອຸປາຍາດ (ຄວາມຄັບແຄ້ນໃຈ)ຂອງເຂົາ ຍ່ອມໝົດໄປໂດຍລັກສະນະນັ້ນ ໆ ປຽບຄືບຸຣຸດຜູ້ອາພາດ ມີທຸກ ເປັນໄຂ້ໜັກນາຍແພດຜູ້ສະຫຼາດເພິ່ງບຳບັດອາພາດຂອງເຂົາໂດຍໄວ

໕. ບຸກຄົນຟັງທຳຂອງທ່ານພຣະສະມະນະໂຄດົມພຣະອົງນັ້ນໂດຍລັກສະນະໃດ ໆ ຄືໂດຍ ສຸດຕະ ເຄັຍຍະ ເວັຍຍາກະຣະນະ ຫຼືອັບພູຕະທຳ ຄວາມກະວົນກະວາຍ ຄວາມອິດເມື່ອຍ ແລະຄວາມຮ້ອນຮົນທັງປວງຂອງເຂົາ ຍ່ອມລະງັບໄປໂດຍລັກສະນະນັ້ນ ໆ ປຽບຄືສະນ້ຳທີ່ມີນ້ຳໃສ ຈືດສະນິດ ສະອາດ ມີທ່າຫຼຽບ ໜ້າອອນຊອນ ບຸຣຸດຖືກຄວາມຮ້ອນແຜດເຜົາຖືກຄວາມຮ້ອນກະທົບ ອິດເມື່ອຍ ຫິວ ກະຫາຍ ຍ່າງມາເຖິງ ເຂົາລົງໄປໃນສະນັ້ນ ອາບ ແລະດື່ມ ເພິ່ງລະງັບຄວາມກະວົນກະວາຍ ຄວາມອິດເມື່ອຍ ແລະຄວາມຮ້ອນຮົນທັງປວງ

ເມື່ອປິງຄິຍານີພາມກ່າວແນວນີ້ແລ້ວ ກາຣະນະປາລີພາມລຸກຈາກບ່ອນນັ່ງ ຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ຄຸກເຂົ່າຂ້າງຂວາລົງເທິງແຜ່ນດິນ ປະຄອງອັນຊະລີໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເປັ່ງອຸທານ[๑] ໓ ຄັ້ງວ່າ

> "ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ
> ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ
> ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ

ແລ້ວກ່າວຕໍ່ໄປວ່າ "ທ່ານປິງຄິຍານີ ພາສິດຂອງທ່ານປິງຄິຍານີຊັດເຈນມ່ວນຫຼາຍ ທ່ານປິງຄິຍານີ ພາສິດຂອງທ່ານປິງຄິຍານີຊັດເຈນມ່ວນຫຼາຍ ທ່ານປິງຄິຍານີປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງຫຼືເຍືອງໄຟໃນບ່ອນມືດໂດຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້ ຂ້າພະເຈົ້ານີ້ຂໍເຖິງທ່ານພຣະ

ສະມະນະໂຄດົມພຣະອົງນັ້ນ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍທ່ານປິງຄິຍານີ ຈົ່ງຈື່ຂ້າພະເຈົ້າວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ກາຣະນະປາລິສູດທີ ໔ ຈົບ**

# ៥. ປິງຄິຍານີສູດ

## ວ່າດ້ວຍປິງຄິຍານີພາມ

[໑໘໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ກູຕາຄານສາລາ ປ່າມະຫາວັນ ເຂດນະຄອນເວສາລີ ສະໄໝນັ້ນ ເຈົ້າລິດສະຫວີປະມານ ໕໐໐ ຄົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຈົ້າລິດສະຫວີລາງພວກມີໂຕຂຽວ[1] ມີສະຫວີວັນຂຽວ ມີຜ້າຂຽວ ມີເຄື່ອງປະດັບຂຽວ[2] ລາງພວກມີໂຕເຫຼືອງ ມີສະຫວີວັນເຫຼືອງ ມີຜ້າເຫຼືອງ ມີເຄື່ອງປະດັບເຫຼືອງ ລາງພວກມີໂຕແດງ ມີສະຫວີວັນແດງ ມີຜ້າແດງ ມີເຄື່ອງປະດັບແດງ ລາງພວກມີໂຕຂາວ ມີສະຫວີວັນຂາວ ມີຜ້າຂາວ ມີເຄື່ອງປະດັບຂາວ ພຣະຜູ້ມີພຣະພາກເຈົ້າຊົງຮຸ່ງເຮືອງກວ່າເຈົ້າລິດສະຫວີເຫຼົ່ານັ້ນ ໂດຍພຣະສະຫວີວັນແລະພຣະຍົດ

ຄັ້ງນັ້ນ ປິງຄິຍານີພາມລຸກຈາກບ່ອນນັ່ງ ຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ປະຄອງອັນຊະລີໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ແລ້ວຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເນື້ອຄວາມແຈ່ມແຈ້ງແກ່ຂ້າພຣະອົງ ຂ້າແດ່ ພຣະສຸຄົດເຈົ້າ ເນື້ອຄວາມແຈ່ມແຈ້ງແກ່ຂ້າພຣະອົງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ປິງຄິຍານີ ເນື້ອຄວາມຈົ່ງແຈ່ມແຈ້ງແກ່ທ່ານເທີ້ນ"

ລຳດັບນັ້ນ ປິງຄິຍານີພາມໄດ້ຊົມເຊີຍ ພຣະຜູ້ມີພຣະພາກເຈົ້າ ຕໍ່ພຣະພັກດ້ວຍຄາຖາໂດຍຫຍໍ້ ວ່າ

"ເຊີນທ່ານເບິ່ງພຣະອັງຄີຣົດ[3] ຜູ້ຊົງຮຸ່ງເຮືອງຢູ່
ຄືດອກບົວຊື່ໂກກະນຸດ ມີກິ່ນຫອມ
ບໍ່ປາສະຈາກກິ່ນ ບານຢູ່ໃນເວລາເຊົ້າ
ແລະຄືພຣະອາທິດເປ່ງຣັດສະໝີຢູ່ເທິງທ້ອງຟ້າ ສັນນັ້ນ"

ຄັ້ງນັ້ນ ເຈົ້າລິດສະຫວີເຫຼົ່ານັ້ນໄດ້ໃຫ້ປິງຄິຍານີພາມຫົ່ມຜ້າອຸດຕະຣາສົງ ໕໐໐ ຜືນ ປິງຄິຍານີໄດ້ທູນຖວາຍໃຫ້ພຣະຜູ້ມີພຣະພາກເຈົ້າຄອງຜ້າອຸດຕະຣາສົງ ໕໐໐ ຜືນເຫຼົ່ານັ້ນ ພຣະຜູ້ມີພຣະພາກເຈົ້າຕັດກັບເຈົ້າລິດສະຫວີເຫຼົ່ານັ້ນວ່າ

"ເຈົ້າລິດສະຫວີທັງຫຼາຍ ຄວາມຜາກົດແຫ່ງແກ້ວ ໕ ປະການ ຫາໄດ້ຍາກໃນໂລກ"

ຄວາມຜາກົດແຫ່ງແກ້ວ ໕ ປະການ ອັນໃດແດ່ ຄື

໑. ຄວາມຜາກົດແຫ່ງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຫາໄດ້ຍາກໃນໂລກ
໒. ບຸກຄົນຜູ້ສະແດງທຳວິໄນທີ່ຕະຖາຄົດປະກາດໄວ້ ຫາໄດ້ຍາກໃນໂລກ
໓. ບຸກຄົນຜູ້ຮູ້ແຈ້ງທຳວິໄນທີ່ຕະຖາຄົດປະກາດໄວ້ເຊິ່ງຜູ້ອື່ນສະແດງແລ້ວ ຫາໄດ້ຍາກໃນໂລກ
໔. ບຸກຄົນຜູ້ຮູ້ແຈ້ງທຳວິໄນທີ່ຕະຖາຄົດປະກາດໄວ້ ເຊິ່ງຜູ້ອື່ນສະແດງແລ້ວ ເປັນປະຕິບັດທຳສົມຄວນແກ່ທຳ ຫາໄດ້ຍາກໃນໂລກ
໕. ກະຕັນຍູກະຕະເວທີບຸກຄົນ໑ ຫາໄດ້ຍາກໃນໂລກ

ເຈົ້າລິດສະຫວີທັງຫຼາຍ ຄວາມຜາກົດແຫ່ງແກ້ວ ໕ ປະການນີ້ແລ ຫາໄດ້ຍາກໃນໂລກ

**ປິງຄິຍານີສູດທີ ໕ ຈົບ**

## ໖. ມະຫາສຸປິນະສູດ

## ວ່າດ້ວຍມະຫາສຸບິນ

[໑໙໖] ພິກຂຸທັງຫຼາຍ ມະຫາສຸບິນ[໑] ໕ ປະການ ຜາກົດແກ່ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັດຢູ່

ມະຫາສຸບິນ ໕ ປະການ ອັນໃດແດ່ ຄື

໑. ແຜ່ນດິນໃຫຍ່ນີ້ ເປັນບ່ອນນອນໃຫຍ່ ຂຸນເຂົາຫິມະວັນ ເປັນໝອນ ມືຊ້າຍຢ່ອນລົງໃນສະມຸດດ້ານທິດຕາເວັນອອກ ມືຂວາຢ່ອນລົງໃນສະມຸດ ດ້ານທິດຕາເວັນຕົກ ຕີນທັງສອງຢ່ອນລົງໃນສະມຸດດ້ານທິດໃຕ້ ນີ້ເປັນມະຫາສຸບິນປະການທີ ໑ ຜາກົດແກ່ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັດຢູ່

໒. ຫຍ້າແຝກໄດ້ງອກຂຶ້ນຈາກນາພີຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັດຢູ່ ຕັ້ງຮອດທ້ອງຟ້າ ນີ້ເປັນມະຫາສຸບິນປະການທີ ໒ ຜາກົດແກ່ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັດຢູ່

๓. ໝູ່ໜອນສີຂາວ ມີຫົວດຳ ໄດ້ໄຕ່ຂຶ້ນມາຈາກຕີນຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະ ໂພທິສັດຢູ່ ປົກປິດຕັ້ງແຕ່ປາຍເລັບຈົນເຖິງບໍລິເວນພຣະຊານຸ ນີ້ເປັນມະຫາສຸບິນປະການທີ ๓ ຜາກົດແກ່ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັດຢູ່

໔. ນົກ ໔ ເຫຼົ່າມີສີຕ່າງ ໆ ກັນ໌ ບິນມາຈາກທິດທັງ ໔ ຕົກລົງແທບຕີນ ຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັດຢູ່ ແລ້ວກັບກາຍເປັນສີຂາວທຸກໂຕ ນີ້ເປັນມະຫາສຸບິນປະການທີ ໔ ຜາກົດແກ່ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັດຢູ່

໕. ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັດຢູ່ ຍ່າງໄປມາບົນພູຄູຖລູກໃຫຍ່໑ (ແຕ່) ບໍ່ເປິເປື້ອນ ດ້ວຍຄູດ ນີ້ເປັນມະຫາສຸບິນປະການທີ ໕ ຜາກົດແກ່ຕະຖາຄົດອະຣະຫັນຕະ-ສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະ ໂພທິສັດຢູ່

ພິກຂຸທັງຫຼາຍ ການທີ່ແຜ່ນດິນໃຫຍ່ນີ້ເປັນບ່ອນນອນໃຫຍ່ຂອງຕະຖາຄົດອະຣະຫັນຕະສຳມາ-ສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັດຢູ່ ຂຸນເຂົາຫິມະວັນ ເປັນ ໝອນ ມືຊ້າຍຢ່ອນລົງໃນສະມຸດດ້ານທິດຕາເວັນອອກ ມືຂວາຢ່ອນລົງໃນສະມຸດດ້ານທິດຕາເວັນຕົກ ຕີນທັງສອງຢ່ອນລົງໃນສະມຸດດ້ານທິດໃຕ້ ນີ້ເປັນມະຫາສຸບິນປະການທີ ໑ ຜາກົດເປັນນິມິດໃຫ້ຮູ້ວ່າ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ໄດ້ຕັດສະຣູ້ພຣະສຳໂພທິຍານ ອັນປະເສີດ

ການທີ່ຫຍ້າແຝກໄດ້ງອກຂຶ້ນຈາກນາພີຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັດຢູ່ ຕັ້ງຮອດທ້ອງຟ້າ ນີ້ເປັນມະຫາສຸບິນປະການທີ ໒ ຜາກົດເປັນນິມິດໃຫ້ຮູ້ວ່າ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າໄດ້ຕັດສະຣູ້ອະຣິຍະມັກມີອົງ ໘ ປະກາດດີແລ້ວ ຈົນເຖິງເທວະດາແລະມະນຸດທັງຫຼາຍ

ການທີ່ໝູ່ໜອນສີຂາວ ມີຫົວດຳ ໄດ້ໄຕ່ຂຶ້ນຈາກຕີນຂອງຕະຖາຄົດອະຣະຫັນສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັດຢູ່ ປົກປິດຕະຫຼອດເຖິງບໍລິເວນພຣະຊານຸ ນີ້ເປັນມະຫາສຸບິນປະການທີ ๓ ຜາກົດເປັນນິມິດໃຫ້ຮູ້ວ່າ ຄະລືຫັດ ຜູ້ນຸ່ງຫົ່ມຜ້າຂາວຈຳນວນຫຼາຍໄດ້ເຖິງຕະຖາຄົດເປັນສະຣະນະຕະຫຼອດຊີວິດ

ການທີ່ນົກ ໔ ເຫຼົ່າມີສີຕ່າງ ໆ ກັນບິນມາຈາກທິດທັງ ໔ ຕົກລົງແທບຕີນຂອງ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຣູ້ ຍັງບໍ່ໄດ້ຕັດສະຣູ້ ຍັງເປັນພຣະໂພທິສັ

ດຢູ່ ແລ້ວກັບກາຍເປັນສີຂາວທຸກໂຕ ນີ້ເປັນມະຫາສຸບິນປະການທີ ໔ ຜາກົດເປັນນິມິດໃຫ້ຮູ້ວ່າ ວັນນະທັງ ໔ ນີ້ ຄື ກະສັດ ພາມ ແພດ ສູດ ອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ ຕະຖາຄົດປະກາດແລ້ວ ເຮັດໃຫ້ແຈ້ງເຊິ່ງວິມຸດຕິອັນປະເສີດ

ການທີ່ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ກ່ອນຈະຕັດສະຮູ້ ຍັງບໍ່ໄດ້ຕັດສະຮູ້ ຍັງເປັນພຣະໂພທິສັດຢູ່ ຍ່າງໄປມາເທິງພູອາຈົມໜ່ວຍໃຫຍ່ (ແຕ່) ບໍ່ເປິເປື້ອນອາຈົມ ນີ້ເປັນ ມະຫາສຸບິນປະການທີ ໕ ຜາກົດເປັນນິມິດໃຫ້ຮູ້ວ່າ ຕະຖາຄົດໄດ້ຈີວອນ ບິນທະບາດ ເສນາສະ ນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ແລ້ວບໍ່ລຸ້ມຫຼົງ ບໍ່ມົກມຸ້ນ ບໍ່ພົວພັນ ມີປົກກະຕິເຫັນ ໂທດ ມີປັນຍາເປັນເຄື່ອງກຳຈັດອອກ ບໍຣິໂພກຢູ່

ພິກຂຸທັງຫຼາຍ ມະຫາສຸບິນ ໕ ປະການນີ້ ຜາກົດແກ່ຕະຖາຄົດອະຣະຫັນຕະສຳມາສຳ ພຸດທະເຈົ້າ ກ່ອນຈະຕັດສະຮູ້ ຍັງບໍ່ໄດ້ຕັດສະຮູ້ ຍັງເປັນພຣະໂພທິສັດຢູ່

**ມະຫາສຸປິນະສູດທີ ໖ ຈົບ**

## ໗. ວັດສະສູດ
## ວ່າດ້ວຍອັນຕະລາຍຂອງຝົນ

[໑໙໗] ພິກຂຸທັງຫຼາຍ ອັນຕະລາຍຂອງຝົນ ໕ ປະການນີ້ ເຊິ່ງພວກໝໍດູຮູ້ບໍ່ໄດ້ ສາຍຕາ ຂອງພວກໝໍດູຢັ່ງບໍ່ເຖິງ

ອັນຕະລາຍ ໕ ປະການ ອັນໃດແດ່ ຄື

໑. ເຕໂຊທາດ[1]ກຳເຣິບເທິງອາກາດ ກ້ອນເພື້ອທີ່ເກີດຂຶ້ນຍ່ອມກະຈາຍໄປ ຍ້ອນ ເຕໂຊທາດທີ່ກຳເຣິບນັ້ນ ນີ້ເປັນອັນຕະລາຍຂອງຝົນປະການທີ ໑ ເຊິ່ງພວກ ໝໍດູຮູ້ບໍ່ໄດ້ ສາຍຕາຂອງພວກໝໍດູຢັ່ງບໍ່ເຖິງ

໒. ວາໂຍທາດກຳເຣິບເທິງອາກາດ ກ້ອນເພື້ອທີ່ເກີດຂຶ້ນຍ່ອມກະຈາຍໄປ ຍ້ອນ ວາໂຍທາດທີ່ກຳເຣິບນັ້ນ ນີ້ເປັນອັນຕະລາຍຂອງຝົນປະການທີ ໒ ເຊິ່ງພວກ ໝໍດູຮູ້ບໍ່ໄດ້ ສາຍຕາຂອງພວກໝໍດູຢັ່ງບໍ່ເຖິງ

໓. ອະສຸລິນທະຣາຫູໃຊ້ຝາມືຮັບນ້ຳແລ້ວ ຖິ້ມລົງໃນມະຫາສະມຸດ ນີ້ເປັນອັນຕະ ລາຍຂອງຝົນປະການທີ ໓ ເຊິ່ງພວກໝໍດູຮູ້ບໍ່ໄດ້ສາຍຕາຂອງພວກໝໍດູຢັ່ງບໍ່ເຖິງ

໔. ວັດສະວະລາຫະກະເທບພະບຸດເປັນຜູ້ຜະໝາດ[2] ນີ້ເປັນອັນຕະລາຍຂອງຝົນ ປະການທີ ໔ ເຊິ່ງພວກໝໍດູຮູ້ບໍ່ໄດ້ ສາຍຕາຂອງພວກໝໍດູຢັ່ງບໍ່ເຖິງ

໕. ພວກມະນຸດເປັນຜູ້ບໍ່ດຳລົງຢູ່ໃນທຳ ນີ້ເປັນອັນຕະລາຍຂອງຝົນປະການ ທີ່ ໕ ເຊິ່ງພວກໝໍດູຮູ້ບໍ່ໄດ້ ສາຍຕາຂອງພວກໝໍດູຢັ່ງບໍ່ເຖິງ

ພິກຂຸທັງຫຼາຍ ອັນຕະລາຍຂອງຝົນ ໕ ປະການນີ້ແລ ເຊິ່ງພວກໝໍດູຮູ້ບໍ່ໄດ້ ສາຍຕາຂອງພວກໝໍດູຢັ່ງບໍ່ເຖິງ

**ວັດສະສູດທີ ໗ ຈົບ**

## ໘. ວາຈາສູດ

## ວ່າດ້ວຍອົງແຫ່ງວາຈາສຸພາສິດ

[໑໙໘] ພິກຂຸທັງຫຼາຍ ວາຈາປະກອບດ້ວຍອົງ ໕ ປະການ ເປັນວາຈາສຸພາສິດ ບໍ່ເປັນວາຈາທຸບພາສິດ ເປັນວາຈາບໍ່ມີໂທດ ແລະທ່ານຜູ້ຮູ້ບໍ່ຕິຕຽນ

ວາຈາປະກອບດ້ວຍອົງ ໕ ປະການ ອັນໃດແດ່ ຄື

໑. ເວົ້າຖືກການ
໒. ເວົ້າຄຳຈິງ
໓. ເວົ້າຄຳອ່ອນຫວານ
໔. ເວົ້າຄຳປະກອບດ້ວຍປະໂຫຍດ
໕. ເວົ້າດ້ວຍເມດຕາຈິດ

ພິກຂຸທັງຫຼາຍ ວາຈາປະກອບດ້ວຍອົງ ໕ ປະການນີ້ແລ ເປັນວາຈາສຸພາສິດ ບໍ່ເປັນວາຈາທຸບພາສິດ ເປັນວາຈາບໍ່ມີໂທດ ແລະທ່ານຜູ້ຮູ້ບໍ່ຕິຕຽນ

**ວາຈາສູດທີ ໘ ຈົບ**

## ໙. ກຸລະສູດ

## ວ່າດ້ວຍເຫດໃຫ້ຕະກູນປະສົບບຸນ

[໑໙໙] ພິກຂຸທັງຫຼາຍ ບັນພະຊິດຜູ້ມີສີນທັງຫຼາຍ ເຂົ້າໄປສູ່ຕະກູນໃດ ພວກມະນຸດໃນຕະກູນນັ້ນຍ່ອມປະສົບບຸນຫຼວງຫຼາຍໂດຍຖານະ ໕ ປະການ

ຖານະ ໕ ປະການ ອັນໃດແດ່ ຄື

໑. ສະໄໝໃດ ເມື່ອບັນພະຊິດຜູ້ມີສີນເຂົ້າໄປສູ່ຕະກູນ ພວກມະນຸດເຫັນແລ້ວມີຈິດເຫຼື້ອມໃສ ສະໄໝນັ້ນ ຕະກູນນັ້ນຊື່ວ່າປະຕິບັດປະຕິປະທາທີ່ຍັງສັດໃຫ້ເປັນໄປເພື່ອເກີດໃນສະຫວັນ

໒. ສະໄໝໃດ ເມື່ອບັນພະຊິດຜູ້ມີສີນເຂົ້າໄປສູ່ຕະກູນ ພວກມະນຸດລຸກຮັບ ອະພິວາດ ຖວາຍອາສະນະ ສະໄໝນັ້ນ ຕະກູນນັ້ນຊື່ວ່າປະຕິບັດປະຕິປະທາ ທີ່ຍັງສັດໃຫ້ເປັນໄປເພື່ອເກີດໃນຕະກູນສູງ

໓. ສະໄໝໃດ ເມື່ອບັນພະຊິດຜູ້ມີສີນເຂົ້າໄປສູ່ຕະກູນ ພວກມະນຸດກຳຈັດມົນທິນຄືຄວາມຂີ້ຖີ່ໄດ້ ສະໄໝນັ້ນ ຕະກູນນັ້ນຊື່ວ່າປະຕິບັດປະຕິປະທາທີ່ຍັງສັດ ໃຫ້ເປັນໄປເພື່ອຄວາມເປັນຜູ້ມີສັກໃຫຍ່

໔. ສະໄໝໃດ ເມື່ອບັນພະຊິດຜູ້ມີສີນເຂົ້າໄປສູ່ຕະກູນ ພວກມະນຸດຈັດຂອງຖວາຍ ຕາມຄວາມສາມາດ ຕາມກຳລັງ ສະໄໝນັ້ນ ຕະກູນນັ້ນຊື່ວ່າປະຕິບັດປະຕິປະທາທີ່ຍັງສັດໃຫ້ເປັນໄປເພື່ອຄວາມເປັນຜູ້ມີໂພຄະຊັບຫຼາຍ

໕. ສະໄໝໃດ ເມື່ອບັນພະຊິດຜູ້ມີສີນເຂົ້າໄປສູ່ຕະກູນ ພວກມະນຸດໄຕ່ຖາມສອບຖາມຟັງທຳ ສະໄໝນັ້ນ ຕະກູນນັ້ນຊື່ວ່າປະຕິບັດປະຕິປະທາທີ່ຍັງສັດໃຫ້ເປັນໄປເພື່ອຄວາມເປັນຜູ້ມີປັນຍາຫຼາຍ

ພິກຂຸທັງຫຼາຍ ບັນພະຊິດຜູ້ມີສີນເຂົ້າໄປສູ່ຕະກູນໃດ ພວກມະນຸດໃນຕະກູນນັ້ນ ຍ່ອມປະສົບບຸນຫຼວງຫຼາຍໂດຍຖານະ ໕ ປະການນີ້ແລ

**ກຸລະສູດທີ ໙ ຈົບ**

## ໑໐. ນິດສາຣະນີຍະສູດ

## ວ່າດ້ວຍທາດທີ່ກຳຈັດ

[໒໐໐] ພິກຂຸທັງຫຼາຍ ທາດ[໑]ທີ່ກຳຈັດ ໕ ປະການນີ້

ທາດທີ່ກຳຈັດ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ ເມື່ອມະນະສິການກາມທັງຫຼາຍ[໒] ຈິດຂອງທ່ານຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນກາມທັງຫຼາຍ ແຕ່ເມື່ອທ່ານມະນະສິການເນກຂຳມະ[໓] ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງຢູ່ ນ້ອມໄປໃນເນກຂຳມະ ຈິດ[໔]ນັ້ນຂອງທ່ານຊື່ວ່າເປັນຈິດດຳເນີນໄປດີແລ້ວ ຈະເລີນດີແລ້ວ ຕັ້ງຢູ່ດີແລ້ວ ລຸດພົ້ນດີແລ້ວ ພາກອອກດີແລ້ວຈາກກາມທັງຫຼາຍ ທ່ານລຸດພົ້ນແລ້ວຈາກອາສະວະ[໕] ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ[໖] ເຊິ່ງເກີດ

ຂຶ້ນຍ້ອນກາມເປັນປັດໄຈ ທ່ານຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ເຮົາກ່າວວ່າທາດທີ່ກຳຈັດການ ທັງຫຼາຍ

໔. ພິກຂຸໃນທຳວິໄນນີ້ ເມື່ອມະນະສິການພະຍາບາດ ຈິດຂອງທ່ານຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນພະຍາບາດ ແຕ່ເມື່ອທ່ານ ມະນະສິການຄວາມບໍ່ພະຍາບາດ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງຢູ່ ນ້ອມໄປໃນຄວາມບໍ່ພະຍາບາດ ຈິດນັ້ນຂອງທ່ານຊື່ວ່າເປັນຈິດດຳເນີນໄປດີແລ້ວ ຈະເລີນດີແລ້ວ ຕັ້ງຢູ່ດີແລ້ວ ລຸດພົ້ນດີແລ້ວ ພາກອອກດີແລ້ວ ຈາກພະຍາບາດ ທ່ານລຸດພົ້ນແລ້ວຈາກອາສະວະ ແລະຄວາມຮ້ອນຮົນທີ່ກໍ່ ຄວາມຄັບແຄ້ນເຊິ່ງເກີດຂຶ້ນຍ້ອນພະຍາບາດເປັນປັດໄຈ ທ່ານຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ເຮົາກ່າວວ່າທາດທີ່ກຳຈັດພະຍາບາດ

໓. ພິກຂຸໃນທຳວິໄນນີ້ ເມື່ອມະນະສິການວິຫິງສາ ຈິດຂອງທ່ານຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນວິຫິງສາ ແຕ່ເມື່ອທ່ານມະນະສິການ ອະວິຫິງສາ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງຢູ່ ນ້ອມໄປໃນອະວິຫິງສາ ຈິດນັ້ນຂອງທ່ານຊື່ວ່າເປັນຈິດດຳເນີນໄປດີແລ້ວ ຈະເລີນດີແລ້ວ ຕັ້ງຢູ່ດີແລ້ວ ລຸດພົ້ນດີແລ້ວ ພາກອອກດີແລ້ວຈາກວິຫິງສາ ທ່ານລຸດພົ້ນແລ້ວຈາກອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນເຊິ່ງເກີດຂຶ້ນຍ້ອນວິຫິງສາເປັນປັດໄຈ ທ່ານຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ເຮົາກ່າວວ່າທາດທີ່ກຳຈັດ ວິຫິງສາ

໔. ພິກຂຸໃນທຳວິໄນນີ້ ເມື່ອມະນະສິການຮູບທັງຫຼາຍ ຈິດຂອງທ່ານຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນຮູບທັງຫຼາຍ ແຕ່ເມື່ອທ່ານມະນະສິການອະຮູບ ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງຢູ່ ນ້ອມໄປໃນອະຮູບ ຈິດນັ້ນຂອງທ່ານຊື່ວ່າເປັນຈິດດຳເນີນໄປດີແລ້ວ ຈະເລີນດີແລ້ວ ຕັ້ງຢູ່ດີແລ້ວ ລຸດພົ້ນດີແລ້ວ ພາກອອກດີແລ້ວຈາກຮູບທັງຫຼາຍ ທ່ານລຸດພົ້ນແລ້ວຈາກອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນເຊິ່ງເກີດຂຶ້ນຍ້ອນຮູບເປັນປັດໄຈ ທ່ານຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ເຮົາກ່າວວ່າທາດທີ່ກຳຈັດຮູບທັງຫຼາຍ

໕. ພິກຂຸໃນທຳວິໄນນີ້ ເມື່ອມະນະສິການສັກກາຍະ[໑] ຈິດຂອງທ່ານຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນສັກກາຍະ ແຕ່ເມື່ອມະນະສິການເຖິງສັກກາຍະນິໂຣດ(ຄວາມດັບສັກກາຍະ) ຈິດຂອງທ່ານຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງຢູ່ ນ້ອມໄປໃນສັກກາຍະນິໂຣດ ຈິດນັ້ນຂອງທ່ານຊື່ວ່າເປັນຈິດດຳເນີນໄປດີແລ້ວ ຈະເລີນດີແລ້ວ ຕັ້ງຢູ່ດີແລ້ວ ລຸດພົ້ນດີແລ້ວ ພາກອອກດີແລ້ວ ຈາກສັກກາຍະ ທ່ານລຸດພົ້ນແລ້ວຈາກອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນເຊິ່ງເກີດຂຶ້ນຍ້ອນສັກກາຍະເປັນ ປັດໄຈ ທ່ານຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ເຮົາກ່າວວ່າທາດທີ່ກຳຈັດສັກກາຍະ

ຄວາມເພີດເພີນໃນກາມຍ່ອມບໍ່ເກີດແກ່ທ່ານ ຄວາມເພີດເພີນໃນພະຍາບາດກໍ ບໍ່ເກີດ ຄວາມເພີດເພີນໃນວິຫິງສາກໍບໍ່ເກີດ ຄວາມເພີດເພີນໃນຮູບກໍບໍ່ເກີດ ຄວາມເພີດເພີນໃນຈັກກາຍະກໍບໍ່ເກີດ

ຍ້ອນຄວາມເພີດເພີນໃນກາມບໍ່ເກີດ ຍ້ອນຄວາມເພີດເພີນໃນພະຍາບາດບໍ່ເກີດ ຍ້ອນຄວາມເພີດເພີນໃນວິຫິງສາບໍ່ເກີດ ຍ້ອນຄວາມເພີດເພີນໃນຮູບບໍ່ເກີດ ແລະຍ້ອນຄວາມເພີດເພີນໃນຈັກກາຍະບໍ່ເກີດແກ່ທ່ານ ພິກຂຸນີ້ເຮົາຈຶ່ງຮຽກວ່າ ເປັນຜູ້ບໍ່ມີອາໄລ ຕັດຕັນຫາໄດ້ແລ້ວ ຄາຍສັງໂຍດໄດ້ແລ້ວ ເຮັດບ່ອນສຸດທຸກໄດ້ແລ້ວ ຍ້ອນລະມານະໄດ້ໂດຍຖືກຕ້ອງ

ພິກຂຸທັງຫຼາຍ ທາດທີ່ກຳຈັດ ໕ ປະການນີ້ແລ

**ນິດສາຣະນີຍະສູດທີ ໑໐ ຈົບ**

**ພາມມະນະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ໂສນະສູດ
໒. ສັງຄາຣະວະສູດ
໓. ປິງຄິຍານີສູດ
໗. ວັດສະສູດ
໙. ກຸລະສູດ

໔. ໂທນະພາມມະນະສູດ
໕. ກາຣະນະປາລີສູດ
໖. ມະຫາສຸປິນະສູດ
໗. ວາຈາສູດ
໑໐. ນິດສາຣະນີຍະສູດ

**ຈະຕຸດຖະປັນນາດ ຈົບ**

# ໕. ປັນຈະມະປັນນາດ

## ໑. ກິມິລະວັກ

### ໝວດວ່າດ້ວຍພຣະກິມິລະ

## ໑. ກິມິລະສູດ

### ວ່າດ້ວຍທ່ານພຣະກິມິລະ

[໔໐໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ປ່າໄຜ່ ເຂດເມືອງກິມິລາ ຄັ້ງນັ້ນ ທ່ານພຣະກິມິລະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍເປັນເຫດປັດໄຈໃຫ້ພຣະສັດທຳບໍ່ດຳລົງຢູ່ໄດ້ດົນ ໃນເມື່ອພຣະຕະຖາຄົດປະຣິນິບພານແລ້ວ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກິມິລະ ເມື່ອຕະຖາຄົດປະຣິນິບພານແລ້ວ ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາໃນທຳວິໄນນີ້

໑. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສາດສະດາ[໑]
໒. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນທຳ[໒]
໓. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສົງ[໓]
໔. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສິກຂາ[໔]
໕. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງກັນແລະກັນ[໕]

ກິມິລະ ນີ້ແລເຫດປັດໄຈໃຫ້ສັດທຳບໍ່ດຳລົງຢູ່ໄດ້ດົນ ໃນເມື່ອຕະຖາຄົດ ປະຣິນິບພານແລ້ວ ພຣະກິມິລະທູນຖາມວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດເປັນເຫດປັດໄຈໃຫ້ພຣະສັດທຳດຳລົງຢູ່ໄດ້ດົນ ໃນເມື່ອພຣະຕະຖາຄົດປະຣິນິບພານແລ້ວ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກິມິລະ ເມື່ອຕະຖາຄົດປະຣິນິບພານແລ້ວ ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາໃນທຳວິໄນນີ້

໑. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນສາດສະດາ
໒. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນທຳ
໓. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນສົງ
໔. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນສິກຂາ
໕. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງກັນແລະກັນ

ກິມິລະ ນີ້ແລ ເປັນເຫດປັດໄຈໃຫ້ສັດທຳດຳລົງຢູ່ໄດ້ດົນ ໃນເມື່ອຕະຖາຄົດປະຣິນິບພານແລ້ວ

**ກິມິລະສູດທີ ໑ ຈົບ**

## ໒. ທຳມັດສະວະນະສູດ

## ວ່າດ້ວຍການຟັງທຳ

[໒໐໒] ພິກຂຸທັງຫຼາຍ ການຟັງທຳມີອານິສົງ ໕ ປະການນີ້

ອານິສົງ ໕ ປະການ ອັນໃດແດ່ ຄື

໑. ໄດ້ຟັງສິ່ງທີ່ຍັງບໍ່ເຄີຍຟັງ
໒. ເຂົ້າໃຈຊັດສິ່ງທີ່ໄດ້ຟັງແລ້ວ
໓. ບັນເທົາຄວາມສົງໄສໄດ້
໔. ທຳຄວາມເຫັນໄດ້ກົງ
໕. ຈິດຂອງຜູ້ຟັງທຳຍ່ອມເຫຼື້ອມໃສ

ພິກຂຸທັງຫຼາຍ ການຟັງທຳມີອານິສົງ ໕ ປະການນີ້ແລ

**ທຳມັດສະວະນະສູດທີ ໒ ຈົບ**

## ໓. ອັດສາຊານີຍະສູດ

## ວ່າດ້ວຍອົງປະກອບຂອງມ້າອາຊາໄນ[໑]

[໒໐໓] ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາ ປະກອບດ້ວຍອົງ ໕ ປະການ ຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະ ໂດຍແທ້

ອົງ ໕ ປະການ ອັນໃດແດ່ ຄື

໑. ຄວາມຊື່ກົງ
໒. ຄວາມມີເຊົາ
໓. ຄວາມອ່ອນ
໔. ຄວາມອົດທົນ
໕. ຄວາມສະງ່ຽມ

ມ້າອາຊາໄນພັນດີຂອງພຣະຣາຊາປະກອບດ້ວຍອົງ ໕ ປະການນີ້ແລ ຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸກໍຄືກັນສັນນັ້ນແລ ປະກອບດ້ວຍທຳ ໕ ປະການ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມຊື່ກົງ[໒]
໒. ຄວາມມີເຊົາ[໓]
໓. ຄວາມອ່ອນ[໔]
໔. ຄວາມອົດທົນ[໑]
໕. ຄວາມສະງ່ຽມ[໒]

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

**ອັດສາຊານີຍະສູດທີ ໓ ຈົບ**

## ໔. ພະລະສູດ
## ວ່າດ້ວຍພະລະ

[໒໐໔] ພິກຂຸທັງຫຼາຍ ພະລະ ໕ ປະການນີ້
ພະລະ ໕ ປະການ ອັນໃດແດ່ ຄື

໑. ສັດທາພະລະ (ກຳລັງຄືສັດທາ)
໒. ຫິຣິພະລະ (ກຳລັງຄືຫິຣິ)
໓. ໂອດຕັບປະພະລະ (ກຳລັງຄືໂອດຕັບປະ)
໔. ວິຣິຍະພະລະ (ກຳລັງຄືວິຣິຍະ)
໕. ປັນຍາພະລະ (ກຳລັງຄືປັນຍາ)

ພິກຂຸທັງຫຼາຍ ພະລະ ໕ ປະການນີ້ແລ

**ພະລະສູດທີ ໔ ຈົບ**

# ໕. ເຈໂຕຂິລະສູດ[1]

## ວ່າດ້ວຍກິເລດເຄື່ອງຕຶງຈິດຄືຕະປູ

[໔໐໕] ພິກຂຸທັງຫຼາຍ ກິເລດເຄື່ອງຕຶງຈິດຄືຕະປູ[2] ໕ ປະການນີ້

ກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສາດສະດາ[3] ຈິດຂອງພິກຂຸຜູ້ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສາດສະດານັ້ນ ຍ່ອມ ບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໑ ຂອງ ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ

໒. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນທຳ[4] ຯລຯ
໓. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສົງ[5] ຯລຯ
໔. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສິກຂາ ຯລຯ

໕. ເປັນຜູ້ໂກດ ບໍ່ພໍໃຈ ມີຈິດຖືກໂທສະ(ຄວາມຄິດປະທຸດສະຮ້າຍ)ກະທົບ ມີຈິດແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍ ຈິດຂອງພິກຂຸຜູ້ໂກດ ບໍ່ພໍໃຈມີຈິດຖືກໂທສະກະທົບ ມີຈິດແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍນັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິ ເລດເຄື່ອງຕຶງຈິດຄືຕະປູປະການທີ ໕ ຂອງພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ

ພິກຂຸທັງຫຼາຍ ກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການນີ້ແລ

**ເຈໂຕຂິລະສູດທີ ໕ ຈົບ**

## ໙. ວິນິພັນທະສູດ
## ວ່າດ້ວຍກິເລດເຄື່ອງມັດໃຈ[1]

[໔໐໙] ພິກຂຸທັງຫຼາຍ ກິເລດເຄື່ອງມັດໃຈ ໕ ປະການນີ້
ກິເລດເຄື່ອງມັດໃຈ ໕ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມຢາກໃນກາມທັງຫຼາຍ[໒] ຈິດຂອງພິກຂຸຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມຢາກໃນກາມທັງຫຼາຍນັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໑ ຂອງພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ

໒. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນກາຍ[໓] ຯລຯ
໓. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນຮູບ[໔] ຯລຯ
໔. ສັນອາຫານຕາມຄວາມຕ້ອງການຈົນອີ່ມເກີນໄປ ປະກອບຄວາມສຸກໃນການນອນ ຄວາມສຸກໃນການເອນຫຼັງ ຄວາມສຸກໃນການຫຼັບຢູ່ ຯລຯ
໕. ປະພຶດພົມມະຈັນດ້ວຍຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງ ວ່າ "ດ້ວຍສີນ ຂໍ້ວັດປະຕິບັດ ຕະບະ ຫຼືພົມມະຈັນ[໕]ນີ້ ເຮົາຈັກເປັນເທບພະເຈົ້າ[໖] ຫຼືເທບຕົນໃດຕົນໜຶ່ງ ຈິດຂອງພິກຂຸຜູ້ປະພຶດພົມມະຈັນດ້ວຍ ຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງວ່າ "ດ້ວຍສີນ ຂໍ້ວັດປະຕິບັດ ຕະບະ ຫຼືພົມມະຈັນນີ້ ເຮົາຈັກເປັນເທບພະເຈົ້າ ຫຼືເທບຕົນໃດຕົນໜຶ່ງ ນັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໕ ຂອງພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ

ພິກຂຸທັງຫຼາຍ ກິເລດເຄື່ອງມັດໃຈ ໕ ປະການນີ້ແລ

**ວິນິພັນທະສູດທີ ໙ ຈົບ**

## ໗. ຍາຄຸສູດ

## ວ່າດ້ວຍອານິສົງຂອງຍາຄູ

[໔໐໗] ພິກຂຸທັງຫຼາຍ ອານິສົງຂອງຍາຄູ (ເຂົ້າຕົ້ມ) ໕ ປະການນີ້ ອານິສົງຂອງາຄູ ໕ ປະການ ອັນໃດແດ່ ຄື

໑. ບັນເທົາຄວາມຫິວ
໒. ລະງັບຄວາມຢາກ
໓. ໃຫ້ລົມແລນດີ
໔. ຊໍາຣະລໍາໄສ້
໕. ເຜົາອາຫານທີ່ຍັງບໍ່ຍ່ອຍໃຫ້ຍ່ອຍ

ພິກຂຸທັງຫຼາຍ ອານິສົງຂອງຍາຄູ ໕ ປະການນີ້ແລ

**ຍາຄຸສູດທີ ໗ ຈົບ**

## ໘. ທັນຕະກັດຖະສູດ

## ວ່າດ້ວຍໄມ້ສີແຂ້ວ

[໔໐໘] ພິກຂຸທັງຫຼາຍ ໂທດຂອງການບໍ່ຫຍໍ້າໄມ້ສີແຂ້ວ ໕ ປະການນີ້ ໂທດ ໕ ປະການ ອັນໃດແດ່ ຄື

໑. ຕາຝ້າຟາງ
໒. ປາກເໝັນ
໓. ປະສາດທີ່ນໍາຣົດອາຫານ ບໍ່ມີດຈິດດີ
໔. ບີແລະເສມຫະຫຸ້ມຫໍ່ອາຫານ
໕. ອາຫານບໍ່ແຊບແກ່ເຂົາ

ພິກຂຸທັງຫຼາຍ ໂທດຂອງການບໍ່ຫຍໍ້າໄມ້ສີແຂ້ວ ໕ ປະການນີ້ແລ
ພິກຂຸທັງຫຼາຍ ອານິສົງຂອງການຫຍໍ້າໄມ້ສີແຂ້ວ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ຕາສະຫວ່າງ
໒. ປາກບໍ່ເໝັນ

໓. ປະສາດທີ່ນຳຣົດອາຫານ ມົດຈົດດີ
໔. ປີແລະເສມຫະບໍ່ຫຸ້ມຫໍ່ອາຫານ
໕. ອາຫານແຊບແກ່ເຂົາ

ພິກຂຸທັງຫຼາຍ ອານິສົງຂອງການຫຍ້ຳໄມ້ສີແຂ້ວ ໕ ປະການນີ້ແລ

**ທັນຕະກັດຖະສູດທີ ໘ ຈົບ**

## ໗. ຄີຕັດສະຣະສູດ

## ວ່າດ້ວຍໂທດຂອງການສະແດງທຳດ້ວຍສຽງຂັບຍາວ

[໔໐໗] ພິກຂຸທັງຫຼາຍ ພິກຂຸຜູ້ກ່າວທຳດ້ວຍສຽງຂັບຍາວ[9] ມີໂທດ ໕ ປະການນີ້ ໂທດ ໕ ປະການ ອັນໃດແດ່ ຄື

໑. ແມ່ນຕົນເອງກໍກຳໜັດໃນສຽງນັ້ນ
໒. ແມ່ນຜູ້ອື່ນກໍກຳໜັດໃນສຽງນັ້ນ
໓. ແມ່ນພວກຄະຫະບໍດີກໍຕຳໜິວ່າ "ພວກສະມະນະສາກະຍະບຸດເຫຼົ່ານີ້ ຍ່ອມຂັບຄືພວກເຮົາ
໔. ເມື່ອພິກຂຸພໍໃຈການເຮັດສຽງ ຄວາມເສື່ອມແຫ່ງສະມາທິ໌ຍ່ອມມີ
໕. ໝູ່ຄົນລຸ້ນຫຼັງພາກັນເອົາຢ່າງ

ພິກຂຸທັງຫຼາຍ ພິກຂຸຜູ້ກ່າວທຳດ້ວຍສຽງຂັບຍາວມີໂທດ ໕ ປະການນີ້ແລ

**ຄີຕັດສະຣະສູດທີ ໗ ຈົບ**

## ໑໐. ມຸດຖັດສະຕິສູດ

## ວ່າດ້ວຍພິກຂຸຜູ້ຫຼົງລືມສະຕິ

[໔໑໐] ພິກຂຸທັງຫຼາຍ ພິກຂຸຜູ້ຫຼົງລືມສະຕິ ບໍ່ມີສຳປະຊັນຍະນອນຫຼັບ ມີໂທດ ໕ ປະການນີ້ ໂທດ ໕ ປະການ ອັນໃດແດ່ ຄື

໑. ຫຼັບເປັນທຸກ
໒. ຕື່ນເປັນທຸກ
໓. ຝັນລາມົກ
໔. ເທວະດາບໍ່ຮັກສາ
໕. ນ້ຳອະສຸຈິເຄື່ອນ

ພິກຂຸທັງຫຼາຍ ພິກຂຸຜ຺ູ້ຫຼົງລືມສະຕິ ບໍ່ມີສຳປະຊັນຍະນອນຫຼັບ ມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ພິກຂຸຜູ້ມີສະຕິຕັ້ງໝັ້ນ ມີສຳປະຊັນຍະນອນຫຼັບ ມີອານິສົງ ໕ ປະການນີ້

ອານິສົງ ໕ ປະການ ອັນໃດແດ່ ຄື

໑. ຫຼັບເປັນສຸກ
໒. ບໍ່ຝັນລາມົກ
໓. ນ້ຳອະສຸຈິບໍ່ເຄື່ອນ
໔. ຕື່ນເປັນສຸກ
໕. ເທວະດາຮັກສາ

ພິກຂຸທັງຫຼາຍ ພິກຂຸຜູ້ມີສະຕິຕັ້ງໝັ້ນ ມີສຳປະຊັນຍະນອນຫຼັບ ມີອານິສົງ ໕ ປະການນີ້ແລ

**ມຸດທັດສະຕິສູດທີ ໑໐ ຈົບ**

**ກິມິລະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ກິມິລະສູດ
໒. ທັດສາຊານີຍະສູດ
໓. ເຈໂຕຂິລະສູດ
໔. ຍາຄຸສູດ
໕. ຄິຕັດສະຣະສູດ
໖. ທຳມັດສະວະນະສູດ
໗. ພະລະສູດ
໘. ວິນິພັນທະສູດ
໙. ທັນຕະກັດຖະສູດ
໑໐. ມຸດຖັດສະຕິສູດ

# ໓. ອັກໂກສະກະວັກ

## ໝວດວ່າດ້ວຍໂທດຂອງການດ່າ

## ໑. ອັກໂກສະກະສູດ

## ວ່າດ້ວຍໂທດຂອງການດ່າ

[໒໑໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຜູ້ດ່າກ່າວໂທດເພື່ອນພົມມະຈາຣີ ວ່າຮ້າຍພຣະອະຣິຍະ ເພິ່ງຫວັງໄດ້ໂທດ ໕ ປະການ

ໂທດ ໕ ປະການ ອັນໃດແດ່ ຄື

໑. ຕ້ອງອາບັດປາຣາຊິກ ຫຼືຕັດທຳເປັນເຄື່ອງອັດກັ້ນ[1]
໒. ຕ້ອງອາບັດເສົ້າໝອງກອງໃດກອງໜຶ່ງ
໓. ເປັນໂຣກຮ້າຍແຮງ
໔. ຫຼົງລືມສະຕິມໍຣະນະພາບ
໕. ຫຼັງຈາກມໍຣະນະພາບແລ້ວຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ພິກຂຸທັງຫຼາຍ ພິກຂຸຜູ້ດ່າກ່າວໂທດເພື່ອນພົມມະຈາຣີ ວ່າຮ້າຍພຣະອະຣິຍະ ເພິ່ງຫວັງໄດ້ໂທດ ໕ ປະການນີ້ແລ

**ອັກໂກສະກະສູດທີ ໑ ຈົບ**

## ໒. ພັນທະນະກາຣະກະສູດ

## ວ່າດ້ວຍໂທດແຫ່ງການທຳຄວາມບາດໝາງ

[໒໑໒] ພິກຂຸທັງຫຼາຍ ພິກຂຸຜູ້ເຮັດຄວາມໝາງໃຈ ຜິດກັນ ຖຽງກັນ ເຮັດຄວາມອື້ສາວ ກໍ່ອະທິກອນໃນສົງ ເພິ່ງຫວັງໄດ້ໂທດ ໕ ປະການ

ໂທດ ໕ ປະການ ອັນໃດແດ່ ຄື

໑. ບໍ່ບັນລຸທຳ໒ທີ່ຍັງບໍ່ໄດ້ບັນລຸ
໒. ເສື່ອມຈາກທຳທີ່ໄດ້ບັນລຸແລ້ວ
໓. ກິດຕິສັບອັນຊົ່ວຍ່ອມຊ່າລືໄປ
໔. ຫຼົງລືມສະຕິມໍຣະນະພາບ
໕. ຫຼັງຈາກມໍຣະນະພາບແລ້ວຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ພິກຂຸທັງຫຼາຍ ພິກຂຸຜູ້ເຮັດຄວາມໝາງໃຈ ຜິດກັນ ຖຽງກັນ ເຮັດຄວາມອື້ສາວ ກໍ່ອະທິກອນໃນສົງ ເພິ່ງຫວັງໄດ້ໂທດ ໕ ປະການນີ້ແລ

**ພັນທະນະກາຣະກະສູດທີ ໒ ຈົບ**

## ໓. ສີລະສູດ

## ວ່າດ້ວຍສີນ

[໒໑໓] ພິກຂຸທັງຫຼາຍ ບຸກຄົນຜູ້ທຸສີນຍ້ອນສີນວິບັດ ມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ທຸສີນ ມີສີນວິບັດໃນທຳວິໄນນີ້ ຍ່ອມເຖິງຄວາມເສື່ອມໂພຄະຊັບຫຼວງຫຼາຍ ເຊິ່ງມີຄວາມຜະໝາດເປັນເຫດ ນີ້ເປັນໂທດປະການທີ ໑ ຂອງບຸກຄົນຜູ້ທຸສີນຍ້ອນສີນວິບັດ

໒. ກິດຕິສັບອັນຊົ່ວຂອງບຸກຄົນຜູ້ທຸສີນຍ່ອມກະຈາຍໄປ ນີ້ເປັນໂທດປະການທີ ໒ ຂອງບຸກຄົນຜູ້ທຸສີນຍ້ອນສີນວິບັດ

໓. ບຸກຄົນຜູ້ທຸສີນ ມີສີນວິບັດຈະເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ຍ່ອມບໍ່ແກ່ກ້າ ເກີ້ເຂີນເຂົ້າໄປ ນີ້ເປັນໂທດປະການທີ ໓ ຂອງບຸກຄົນຜູ້ທຸສີນຍ້ອນສີນວິບັດ

໔. ບຸກຄົນຜູ້ທຸສີນ ມີສີນວິບັດ ຍ່ອມຫຼົງລືມສະຕິຕາຍ ນີ້ເປັນໂທດປະການທີ ໔ ຂອງບຸກຄົນຜູ້ທຸສີນຍ້ອນສີນວິບັດ

໕. ບຸກຄົນຜູ້ທຸສີນ ມີສີນວິບັດ ຫຼັງຈາກຕາຍແລ້ວຍ່ອມໄປເກີດໃນອະບາຍທຸກຄະຕິ ວິນິບາດ ນະຣົກ ນີ້ເປັນໂທດປະການທີ ໕ ຂອງບຸກຄົນຜູ້ທຸສີນຍ້ອນສີນວິບັດ

ພິກຂຸທັງຫຼາຍ ບຸກຄົນຜູ້ທຸສີນຍ້ອນສີນວິບັດ ມີໂທດ ໕ ປະການນີ້ແລ
ພິກຂຸທັງຫຼາຍ ບຸກຄົນຜູ້ມີສີນຍ້ອນສົມບູນດ້ວຍສີນ ມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ມີສີນ ສົມບູນດ້ວຍສີນໃນທຳວິໄນນີ້ ຍ່ອມມີໂພຄະຊັບຫຼວງຫຼາຍ ເຊິ່ງມີຄວາມບໍ່ຜະໝາດເປັນເຫດ ນີ້ເປັນອານິສົງປະການທີ ໑ ຂອງບຸກຄົນຜູ້ມີສີນຍ້ອນສົມບູນດ້ວຍສີນ

໒. ກິດຕິສັບອັນງາມຂອງບຸກຄົນຜູ້ມີສີນ ສົມບູນດ້ວຍສີນຍ່ອມຂ່າລືໄປ ນີ້ເປັນອານິສົງປະການທີ ໒ ຂອງບຸກຄົນຜູ້ມີສີນຍ້ອນສົມບູນດ້ວຍສີນ

໓. ບຸກຄົນຜູ້ມີສີນ ສົມບູນດ້ວຍສີນ ຈະເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະ

ບໍລິສັດກໍຕາມ ຍ່ອມແກ່ກ້າ ບໍ່ເກີ້ເຂີນເຂົ້າໄປ ນີ້ເປັນອານິສົງປະການທີ ໓ ຂອງບຸກຄົນຜູ້ມີສີນຍ້ອນສົມບູນດ້ວຍສີນ

໔. ບຸກຄົນຜູ້ມີສີນ ສົມບູນດ້ວຍສີນ ຍ່ອມບໍ່ຫຼົງລືມສະຕິຕາຍ ນີ້ເປັນອານິສົງປະການທີ ໔ ຂອງບຸກຄົນຜູ້ມີສີນຍ້ອນສົມບູນດ້ວຍສີນ

໕. ບຸກຄົນຜູ້ມີສີນ ສົມບູນດ້ວຍສີນ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນສຸກຄະຕິໂລກສະຫວັນ ນີ້ເປັນອານິສົງປະການທີ ໕ ຂອງບຸກຄົນຜູ້ມີສີນຍ້ອນສົມບູນດ້ວຍສີນ

ພິກຂຸທັງຫຼາຍ ບຸກຄົນຜູ້ມີສີນຍ້ອນສົມບູນດ້ວຍສີນມີອານິສົງ ໕ ປະການນີ້ແລ

**ສີລະສູດທີ ໓ ຈົບ**

## ໔. ພະຫຸພານີສູດ
## ວ່າດ້ວຍບຸກຄົນຜູ້ເວົ້າຫຼາຍ

[໔໑໔] ພິກຂຸທັງຫຼາຍ ບຸກຄົນຜູ້ເວົ້າຫຼາຍ໑ ມີໂທດ ໕ ປະການນີ້
ໂທດ ໕ ປະການ ອັນໃດແດ່ ຄື

໑. ເວົ້າຕົວະ ໔. ເວົ້າສັບສົ່ນ
໒. ເວົ້າຄຳຫຍາບ ໔. ເວົ້າບໍ່ມີສາຣະ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ບຸກຄົນຜູ້ເວົ້າຫຼາຍ ມີໂທດ ໕ ປະການນີ້ແລ
ພິກຂຸທັງຫຼາຍ ບຸກຄົນຜູ້ເວົ້າດ້ວຍມັນຕາ໒ ມີອານິສົງ ໕ ປະການນີ້

ອານິສົງ ໕ ປະການ ອັນໃດແດ່ ຄື

໑. ບໍ່ເວົ້າຕົວະ ໔. ບໍ່ເວົ້າສັບສົ່ນ
໒. ບໍ່ເວົ້າຄຳຫຍາບ ໔. ບໍ່ເວົ້າບໍ່ມີສາຣະ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ບຸກຄົນຜູ້ເວົ້າດ້ວຍມັນຕາ ມີອານິສົງ ໕ ປະການນີ້ແລ

**ພະຫຸພານີສູດທີ ໔ ຈົບ**

# ໕. ປະຖົມອັກຂັນຕິສູດ

## ວ່າດ້ວຍຄວາມບໍ່ອົດທົນສູດທີ ໑

[໒໑໕] ພິກຂຸທັງຫຼາຍ ຄວາມບໍ່ອົດທົນມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນທັງຫຼາຍ
໒. ເປັນຜູ້ຫຼາຍດ້ວຍເວນ[໓]
໓. ເປັນຜູ້ຫຼາຍດ້ວຍໂທດ
໔. ເປັນຜູ້ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ຄວາມບໍ່ອົດທົນມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ຄວາມອົດທົນມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ເປັນທີ່ຮັກເປັນທີ່ພໍໃຈຂອງຄົນທັງຫຼາຍ
໒. ເປັນຜູ້ບໍ່ຫຼາຍດ້ວຍເວນ
໓. ເປັນຜູ້ບໍ່ຫຼາຍດ້ວຍໂທດ
໔. ເປັນຜູ້ບໍ່ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ຄວາມອົດທົນມີອານິສົງ ໕ ປະການນີ້ແລ

**ປະຖົມອັກຂັນຕິສູດທີ ໕ ຈົບ**

# ໖. ທຸຕິຍະອັກຂັນຕິສູດ

## ວ່າດ້ວຍຄວາມບໍ່ອົດທົນສູດທີ ໒

[໒໑໖] ພິກຂຸທັງຫຼາຍ ຄວາມບໍ່ອົດທົນມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ບໍ່ເປັນທີ່ຮັກເປັນທີ່ພໍໃຈຂອງຄົນທັງຫຼາຍ
໒. ເປັນຜູ້ດຸຮ້າຍ
໓. ເປັນຜູ້ມີວິບປະຕິສານ
໔. ເປັນຜູ້ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ຄວາມບໍ່ອົດທົນມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ຄວາມອົດທົນມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ເປັນທີ່ຮັກເປັນທີ່ພໍໃຈຂອງຄົນທັງຫຼາຍ
໒. ເປັນຜູ້ບໍ່ດຸຮ້າຍ
໓. ເປັນຜູ້ບໍ່ມີວິບປະຕິສານ
໔. ເປັນຜູ້ບໍ່ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ຄວາມອົດທົນມີອານິສົງ ໕ ປະການນີ້ແລ

**ທຸຕິຍະອັກຂັນຕິສູດທີ່ ໖ ຈົບ**

## ໗. ປະຖົມອະປາສາທິກະສູດ

## ວ່າດ້ວຍບຸກຄົນຜູ້ບໍ່ໜ້າເຫຼື້ອມໃສ ສູດທີ່ ໑

[໔໑໗] ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໜ້າເຫຼື້ອມໃສ ມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ແມ່ນຕົນກໍຕິຕຽນຕົນເອງໄດ້
໒. ຜູ້ຮູ້ພິຈາຣະນາແລ້ວຍ່ອມຕິຕຽນໄດ້
໓. ກິດຕິສັບອັນຊົ່ວຍ່ອມຂະຈາຍໄປ
໔. ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໜ້າເຫຼື້ອມໃສ ມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ບຸກຄົນຜູ້ໜ້າເຫຼື້ອມໃສ໌ ມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ແມ່ນຕົນກໍຕິຕຽນຕົນເອງບໍ່ໄດ້
໒. ຜູ້ຮູ້ພິຈາຣະນາແລ້ວຍ່ອມສັນເສີນ
໓. ກິດຕິສັບອັນງາມຍ່ອມຂ່າລືໄປ
໔. ບໍ່ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ບຸກຄົນຜູ້ໜ້າເຫຼື້ອມໃສ ມີອານິສົງ ໕ ປະການນີ້ແລ

**ປະຖົມອະປາສາທິກະສູດທີ ໗ ຈົບ**

## ໘. ທຸຕິຍະອະປາສາທິກະສູດ

## ວ່າດ້ວຍບຸກຄົນຜູ້ບໍ່ໜ້າເຫຼື້ອມໃສສູດທີ ໒

[໔໑໘] ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໜ້າເຫຼື້ອມໃສ ມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ຄົນທີ່ຍັງບໍ່ເຫຼື້ອມໃສ ຍ່ອມບໍ່ເຫຼື້ອມໃສ
໒. ຄົນທີ່ເຫຼື້ອມໃສແລ້ວຍ່ອມກາຍເປັນອື່ນ
໓. ບໍ່ປະຕິບັດຕົນຕາມຄໍາສອນຂອງສາດສະດາ
໔. ໝູ່ຄົນລຸ້ນຫຼັງ໑ພາກັນເອົາຢ່າງ
໕. ຈິດຂອງທ່ານຍ່ອມບໍ່ເຫຼື້ອມໃສ

ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໜ້າເຫຼື້ອມໃສ ມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ບຸກຄົນຜູ້ໜ້າເຫຼື້ອມໃສ ມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ຄົນທີ່ຍັງບໍ່ເຫຼື້ອມໃສ ຍ່ອມເຫຼື້ອມໃສ
໒. ຄົນທີ່ເຫຼື້ອມໃສແລ້ວ ຍ່ອມເຫຼື້ອມໃສຍິ່ງຂຶ້ນ
໓. ປະຕິບັດຕົນຕາມຄໍາສອນຂອງສາດສະດາ
໔. ໝູ່ຄົນລຸ້ນຫຼັງພາກັນເອົາຢ່າງ

໕. ຈິດຂອງທ່ານຍ່ອມເຫຼື້ອມໃສ

ພິກຂຸທັງຫຼາຍ ບຸກຄົນຜູ້ໜ້າເຫຼື້ອມໃສ ມີອານິສົງ ໕ ປະການນີ້ແລ

**ທຸຕິຍະອະປາສາທິກະສູດທີ ໘ ຈົບ**

## ໙. ອັກຄິສູດ

## ວ່າດ້ວຍໂທດຂອງໄຟ

[໔໑໙] ພິກຂຸທັງຫຼາຍ ໄຟມີໂທດ ໕ ປະການ

ໂທດ ໕ ປະການ ອັນໃດແດ່ ຄື

໑. ເຮັດໃຫ້ຕາຝ້າຟາງ
໒. ເຮັດໃຫ້ຜິວຫຍາບກ້ານ
໓. ເຮັດໃຫ້ອ່ອນກຳລັງ
໔. ເພີ່ມພູນການຄຸກຄີດ້ວຍໝູ່
໕. ເປັນເຫດໃຫ້ສົນທະນາຕິຣັດສານກະຖາ[໑]

ພິກຂຸທັງຫຼາຍ ໄຟມີໂທດ ໕ ປະການນີ້ແລ

**ອັກຄິສູດທີ ໙ ຈົບ**

## ໑໐. ມະທຸຣາສູດ

## ວ່າດ້ວຍນະຄອນມະທຸຣາ[໒]

[໔໒໐] ພິກຂຸທັງຫຼາຍ ນະຄອນມະທຸຣາ ມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ມີພື້ນດິນບໍ່ຮາບພຽງ
໒. ມີຝຸ່ນລະອອງຫຼາຍ
໓. ມີໝາດຸ
໔. ມີຍັກຮ້າຍ

໕. ຫາອາຫານໄດ້ຍາກ

ພິກຂຸທັງຫຼາຍ ນະຄອນມະທຸຣາ ມີໂທດ ໕ ປະການນີ້ແລ

**ມະທຸຣາສູດທີ ໑໐ ຈົບ**

**ອັກໂກສະກະວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໓. ທີຄະຈາຣິກະວັກ

## ໝວດວ່າດ້ວຍການຈາຣິກໄປດົນ

## ໑. ປະຖົມທີຄະຈາຣິກະສູດ

### ວ່າດ້ວຍການຈາຣິກໄປດົນສູດທີ ໑

[໒໒໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຜູ້ຈາຣິກໄປດົນ ຈາຣິກໄປບໍ່ມີກຳນົດ ມີໂທດ ໕ ປະການ

ໂທດ ໕ ປະການ ອັນໃດແດ່ ຄື

໑. ບໍ່ໄດ້ຟັງສິ່ງທີ່ຍັງບໍ່ເຄີຍຟັງ
໒. ບໍ່ເຂົ້າໃຈແຈ້ງສິ່ງທີ່ໄດ້ຟັງແລ້ວ
໓. ບໍ່ແກ່ກ້າໃນເລື້ອງທີ່ໄດ້ຟັງແລ້ວ[១]
໔. ເປັນໂຣກຮ້າຍແຮງ
໕. ເປັນຜູ້ບໍ່ມີມິດ

ພິກຂຸທັງຫຼາຍ ພິກຂຸຜູ້ຈາຣິກໄປດົນ ຈາຣິກໄປບໍ່ມີກຳນົດ ມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ການຈາຣິກໄປມີກຳນົດພໍດີ ມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ໄດ້ຟັງສິ່ງທີ່ຍັງບໍ່ເຄີຍຟັງ
໒. ເຂົ້າໃຈແຈ້ງສິ່ງທີ່ໄດ້ຟັງແລ້ວ
໓. ແກ່ກ້າໃນເລື້ອງທີ່ໄດ້ຟັງແລ້ວ
໔. ບໍ່ເປັນໂຣກຮ້າຍແຮງ
໕. ເປັນຜູ້ມີມິດ

ພິກຂຸທັງຫຼາຍ ການຈາຣິກໄປມີກຳນົດພໍດີ ມີອານິສົງ ໕ ປະການນີ້ແລ

**ປະຖົມທີຄະຈາຣິກະສູດທີ ໑ ຈົບ**

## ໒. ທຸຕິຍະທີຄະຈາຣິກະສູດ

## ວ່າດ້ວຍການຈາຣິກໄປດົນສູດທີ ໒

[໒໒໒] ພິກຂຸທັງຫຼາຍ ພິກຂຸຜູ້ຈາຣິກໄປດົນ ຈາຣິກໄປບໍ່ມີກຳນົດ ມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ບໍ່ບັນລຸທຳທີ່ຍັງບໍ່ໄດ້ບັນລຸ
໒. ເສື່ອມຈາກທຳທີ່ໄດ້ບັນລຸແລ້ວ
໓. ບໍ່ແກ່ກ້າໃນທຳທີ່ໄດ້ບັນລຸແລ້ວ
໔. ເປັນໂຣກຮ້າຍແຮງ
໕. ເປັນຜູ້ບໍ່ມີມິດ

ພິກຂຸທັງຫຼາຍ ພິກຂຸຜູ້ຈາຣິກໄປດົນ ຈາຣິກໄປບໍ່ມີກຳນົດ ມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ການຈາຣິກໄປມີກຳນົດພໍດີ ມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ໄດ້ບັນລຸທຳທີ່ຍັງບໍ່ບັນລຸ
໒. ບໍ່ເສື່ອມຈາກທຳທີ່ໄດ້ບັນລຸແລ້ວ

໓. ແກ່ກ້າໃນທຳທີ່ໄດ້ບັນລຸແລ້ວ
໔. ບໍ່ເປັນໂຣກຮ້າຍແຮງ
໕. ເປັນຜູ້ມີມິດ

ພິກຂຸທັງຫຼາຍ ການຈາຣິກໄປມີກຳນົດພໍດີ ມີອານິສົງ ໕ ປະການນີ້ແລ

**ທຸຕິຍະທີຄະຈາຣິກະສູດທີ ໒ ຈົບ**

## ໓. ອະຕິນິວາສະສູດ

## ວ່າດ້ວຍການຢູ່ປະຈຳທີ່ດົນ

[໒໒໓] ພິກຂຸທັງຫຼາຍ ການຢູ່ປະຈຳທີ່ດົນ ມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ມີສິ່ງຂອງຫຼາຍ ສະສົມສິ່ງຂອງຫຼາຍ
໒. ມີເພສັດຫຼາຍ ສະສົມເພສັດຫຼາຍ
໓. ມີກິດຫຼາຍ ມີໜ້າທີ່ທີ່ຈະຕ້ອງເຮັດຫຼາຍ ຍຶດຕິດໃນວຽກງານທີ່ຈະເພິ່ງເຮັດ
໔. ຢູ່ຄຸກຄີກັບຄະລືຫັດແລະບັນພະຊິດດ້ວຍການຄຸກຄີຢ່າງຄະລືຫັດອັນບໍ່ສົມຄວນ
໕. ເມື່ອຈາກອາວາດນັ້ນໄປ ກໍຈາກໄປທັງທີ່ຍັງມີຄວາມຫ່ວງໃຍ

ພິກຂຸທັງຫຼາຍ ການຢູ່ປະຈຳທີ່ດົນ ມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ການຢູ່ມີກຳນົດພໍດີ ມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ບໍ່ມີສິ່ງຂອງຫຼາຍ ບໍ່ສະສົມສິ່ງຂອງຫຼາຍ
໒. ບໍ່ມີເພສັດຫຼາຍ ບໍ່ສະສົມເພສັດຫຼາຍ
໓. ບໍ່ມີກິດຫຼາຍ ບໍ່ມີໜ້າທີ່ທີ່ຈະຕ້ອງເຮັດຫຼາຍ ບໍ່ຕິດໃນວຽກງານທີ່ຈະເພິ່ງເຮັດ
໔. ບໍ່ຢູ່ຄຸກຄີກັບຄະລືຫັດແລະບັນພະຊິດດ້ວຍການຄຸກຄີອັນບໍ່ສົມຄວນ
໕. ເມື່ອຈາກອາວາດນັ້ນໄປ ກໍຈາກໄປໂດຍບໍ່ມີຄວາມຫ່ວງໃຍ

ພິກຂຸທັງຫຼາຍ ການຢູ່ມີກຳນົດພໍດີ ມີອານິສົງ ໕ ປະການນີ້ແລ

**ອະຕິນິວາສະສູດທີ ໓ ຈົບ**

# ໔. ມັດສະຣີສູດ

## ວ່າດ້ວຍຄວາມຂີ້ຖີ່

[໒໒໔] ພິກຂຸທັງຫຼາຍ ການຢູ່ປະຈຳທີ່ດົນ ມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂີ້ຖີ່ອາວາດ
໒. ເປັນຜູ້ຂີ້ຖີ່ຕະກູນ
໓. ເປັນຜູ້ຂີ້ຖີ່ລາບ
໔. ເປັນຜູ້ຂີ້ຖີ່ວັນນະ[๑]
໕. ເປັນຜູ້ຂີ້ຖີ່ທຳ[๒]

ພິກຂຸທັງຫຼາຍ ການຢູ່ປະຈຳທີ່ດົນ ມີໂທດ ໕ ປະການນີ້ແລ
ພິກຂຸທັງຫຼາຍ ການຢູ່ມີກຳນົດພໍດີ ມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ບໍ່ຂີ້ຖີ່ອາວາດ
໒. ເປັນຜູ້ບໍ່ຂີ້ຖີ່ຕະກູນ
໓. ເປັນຜູ້ບໍ່ຂີ້ຖີ່ລາບ
໔. ເປັນຜູ້ບໍ່ຂີ້ຖີ່ວັນນະ
໕. ເປັນຜູ້ບໍ່ຂີ້ຖີ່ທຳ

ພິກຂຸທັງຫຼາຍ ການຢູ່ມີກຳນົດພໍດີ ມີອານິສົງ ໕ ປະການນີ້ແລ

**ມັດສະຣີສູດທີ ໔ ຈົບ**

# ໕. ປະຖົມກຸລຸປະກະສູດ

## ວ່າດ້ວຍພິກຂຸຜູ້ເຂົ້າໄປສູ່ຕະກູນສູດທີ ໑

[໒໒໕] ພິກຂຸທັງຫຼາຍ ພິກຂຸຜູ້ເຂົ້າໄປສູ່ຕະກູນ ມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ຕ້ອງອາບັດຍ້ອນທ່ຽວໄປບໍ່ບອກລາ[3]
໒. ຕ້ອງອາບັດຍ້ອນນັ່ງໃນບ່ອນລັບ[4]
໓. ຕ້ອງອາບັດຍ້ອນນັ່ງເທິງອາສະນະທີ່ກຳບັງ[5]
໔. ຕ້ອງອາບັດຍ້ອນສະແດງທຳແກ່ມາຕຸຄາມເກີນກວ່າ ໕-໖ ຄຳ[6]
໕. ເປັນຜູ້ຫຼາຍໄປດ້ວຍຄວາມດຳຣິໃນກາມຢູ່

ພິກຂຸທັງຫຼາຍ ພິກຂຸຜູ້ເຂົ້າໄປສູ່ຕະກູນ ມີໂທດ ໕ ປະການນີ້ແລ

**ປະຖົມກຸລຸປະກະສູດທີ ໕ ຈົບ**

## ໖. ທຸຕິຍະກຸລຸປະກະສູດ

## ວ່າດ້ວຍພິກຂຸຜູ້ເຂົ້າໄປສູ່ຕະກູນສູດທີ ໒

[໒໔໖] ພິກຂຸທັງຫຼາຍ ພິກຂຸຜູ້ເຂົ້າໄປສູ່ຕະກູນ ຢູ່ຄຸກຄີໃນຕະກູນດົນເກີນເວລາ ມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ເຮັດໃຫ້ເຫັນມາຕຸຄາມເປັນປະຈຳ
໒. ເມື່ອມີການເຫັນ ຍ່ອມມີການຄຸກຄີ
໓. ເມື່ອມີການຄຸກຄີ ຍ່ອມມີຄວາມຄຸ້ນເຄີຍ
໔. ເມື່ອມີຄວາມຄຸ້ນເຄີຍ ຍ່ອມມີຈິດຈົດຈໍ່
໕. ເມື່ອມີຈິດຈົດຈໍ່ ເພິ່ງຫວັງໄດ້ວ່າ ທ່ານຈັກບໍ່ຍິນດີປະພຶດພົມມະຈັນ ຈັກຕ້ອງອາບັດເສົ້າໝອງກອງໃດກອງໜຶ່ງ ຫຼືຈັກບອກຄືນສິກຂາ ກັບມາເປັນຄະລິຫັດ

ພິກຂຸທັງຫຼາຍ ພິກຂຸຜູ້ເຂົ້າໄປສູ່ຕະກູນ ຢູ່ຄຸກຄີໃນຕະກູນດົນເກີນເວລາ ມີໂທດ ໕ ປະການນີ້ແລ

**ທຸຕິຍະກຸລຸປະກະສູດທີ ໖ ຈົບ**

## ໗. ໂພຄະສູດ

## ວ່າດ້ວຍໂພຄະຊັບ

[໒໔໗] ພິກຂຸທັງຫຼາຍ ໂພຄະຊັບມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ໂພຄະຊັບເປັນສິ່ງທົ່ວໄປແກ່ໄຟ
໒. ໂພຄະຊັບເປັນສິ່ງທົ່ວໄປແກ່ນໍ້າ
໓. ໂພຄະຊັບເປັນສິ່ງທົ່ວໄປແກ່ພຣະຣາຊາ
໔. ໂພຄະຊັບເປັນສິ່ງທົ່ວໄປແກ່ໂຈນ
໕. ໂພຄະຊັບເປັນສິ່ງທົ່ວໄປແກ່ທາຍາດຜູ້ບໍ່ເປັນທີ່ຮັກ

ພິກຂຸທັງຫຼາຍ ໂພຄະຊັບມີໂທດ ໕ ປະການນີ້ແລ
ພິກຂຸທັງຫຼາຍ ໂພຄະຊັບມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ບຸກຄົນອາໄສໂພຄະຊັບຈຶ່ງບຳລຸງຕົນ ບໍລິຫານໃຫ້ເປັນສຸກໂດຍຖືກຕ້ອງ
໒. ບຸກຄົນອາໄສໂພຄະຊັບຈຶ່ງບຳລຸງບິດາມານດາ ບໍລິຫານໃຫ້ເປັນສຸກໂດຍຖືກຕ້ອງ
໓. ບຸກຄົນອາໄສໂພຄະຊັບຈຶ່ງບຳລຸງບຸດ ພັນລະຍາ ຂ້າທາດ ກຳມະກອນ ແລະຄົນໃຊ້ ບໍລິຫານໃຫ້ເປັນສຸກໂດຍຖືກຕ້ອງ
໔. ບຸກຄົນອາໄສໂພຄະຊັບຈຶ່ງບຳລຸງມິດອຳມາດ[1] ບໍລິຫານໃຫ້ເປັນສຸກ ໂດຍຖືກຕ້ອງ
໕. ບຸກຄົນອາໄສໂພຄະຊັບຈຶ່ງພ່ຳເພັງທັກຂິນາໃນສະມະນະພາມເຊິ່ງມີຜົນຫຼາຍເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນໃຫ້ເກີດໃນສະຫວັນ

ພິກຂຸທັງຫຼາຍ ໂພຄະຊັບມີອານິສົງ ໕ ປະການນີ້ແລ

**ໂພຄະສູດທີ ໗ ຈົບ**

## ໘. ອຸດສູຣະພັດຕະສູດ

## ວ່າດ້ວຍພັດທຸງຕົ້ມໃນເວລາສາຍ

[໒໒໘] ພິກຂຸທັງຫຼາຍ ຕະກູນມີພັດທີ່ຫຸງຕົ້ມໃນເວລາສາຍ ມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ບໍ່ໄດ້ຕ້ອນຮັບແຂກທີ່ຄວນຕ້ອນຮັບຕາມເວລາ

໒. ບໍ່ໄດ້ເຊັ່ນໄຫວ້ເທວະດາຜູ້ຮັບການບູຊາຕາມເວລາ
໓. ບໍ່ໄດ້ຖວາຍສະມະນະພາມຜູ້ສັນຄາບດຽວ ບໍ່ສັນຕອນກາງຄືນ ງົດເວັ້ນການສັນໃນເວລາວິການຕາມເວລາ
໔. ຂ້າທາດ ກຳມະກອນ ແລະຄົນໃຊ້ ຫຼົບໜ້າເຮັດວຽກງານ
໕. ອາຫານທີ່ບໍຣິໂພກໃນເວລາບໍ່ຄວນເຊັ່ນນັ້ນບໍ່ມີໂອຊາ

ພິກຂຸທັງຫຼາຍ ຕະກູນມີພັດທີ່ຫຸງຕົ້ມໃນເວລາສາຍ ມີໂທດ ໕ ປະການນີ້ແລ
ພິກຂຸທັງຫຼາຍ ຕະກູນມີພັດທີ່ຫຸງຕົ້ມຕາມເວລາ ມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ໄດ້ຕ້ອນຮັບແຂກທີ່ຄວນຕ້ອນຮັບຕາມເວລາ
໒. ໄດ້ເຊັ່ນໄຫວ້ເທວະດາຜູ້ຮັບການບູຊາຕາມເວລາ
໓. ໄດ້ຖວາຍສະມະນະພາມຜູ້ສັນຄາບດຽວ ບໍ່ສັນຕອນກາງຄືນ ງົດເວັ້ນ ການສັນໃນເວລາວິການຕາມເວລາ
໔. ຂ້າທາດ ກຳມະກອນ ແລະຄົນໃຊ້ ບໍ່ຫຼົບໜ້າເຮັດວຽກງານ
໕. ອາຫານທີ່ບໍຣິໂພກໃນເວລາທີ່ຄວນເຊັ່ນນັ້ນມີໂອຊາ

ພິກຂຸທັງຫຼາຍ ຕະກູນມີພັດທີ່ຫຸງຕົ້ມຕາມເວລາ ມີອານິສົງ ໕ ປະການນີ້ແລ

**ອຸດສູຣະພັດຕະສູດທີ ໗ ຈົບ**

## ໙. ປະຖົມກັນທະສັບປະສູດ

## ວ່າດ້ວຍງູເຫົ່າສູດທີ ໑

[໒໔໙] ພິກຂຸທັງຫຼາຍ ງູເຫົ່າມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ເປັນສັດບໍ່ສະອາດ
໒. ເປັນສັດມີກິ່ນເໝັນ
໓. ເປັນສັດເປັນຕາຢ້ານ
໔. ເປັນສັດມີໄພ
໕. ເປັນສັດມັກທຳຮ້າຍມິດ

ພິກຂຸທັງຫຼາຍ ງູເຫົ່າມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ມາຕຸຄາມມີໂທດ ໕ ປະການນີ້
ໂທດ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ບໍ່ສະອາດ
໒. ເປັນຜູ້ມີກິ່ນເໝັນ
໓. ເປັນຜູ້ເປັນຕາຢ້ານຫຼາຍ
໔. ເປັນຜູ້ມີໄພ
໕. ເປັນຜູ້ມັກທຳຮ້າຍມິດ[១]

ພິກຂຸທັງຫຼາຍ ມາຕຸຄາມມີໂທດ ໕ ປະການນີ້ແລ

**ປະຖົມກັນທະສັບປະສູດທີ ໙ ຈົບ**

## ໑໐. ທຸຕິຍະກັນທະສັບປະສູດ

## ວ່າດ້ວຍງູເຫົ່າສູດທີ ໒

[໒໓໐] ພິກຂຸທັງຫຼາຍ ງູເຫົ່າມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ເປັນສັດມັກໂກດ
໒. ເປັນສັດມັກຜູກໂກດ
໓. ເປັນສັດມີພິດຮ້າຍ
໔. ເປັນສັດມີລີ້ນສອງແຊກ
໕. ເປັນສັດມັກທຳຮ້າຍມິດ

ພິກຂຸທັງຫຼາຍ ງູເຫົ່າມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ມາຕຸຄາມມີໂທດ ໕ ປະການນີ້
ໂທດ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ມັກໂກດ
໒. ເປັນຜູ້ມັກຜູກໂກດ

໓. ເປັນຜູ້ມີພິດຮ້າຍ
໔. ເປັນຜູ້ມີລີ້ນສອງແຊກ
໕. ເປັນຜູ້ມັກທຳຮ້າຍມິດ

ພິກຂຸທັງຫຼາຍ ບັນດາໂທດ ໕ ປະການນັ້ນ ການທີ່ມາຕຸຄາມມີພິດຮ້າຍ ໝາຍເຖິງ ສ່ວນຫຼາຍມາຕຸຄາມມີຣາຄະຈັດ ການທີ່ມາຕຸຄາມມີລີ້ນສອງແຊກ ໝາຍເຖິງສ່ວນຫຼາຍ ມາຕຸຄາມມັກເວົ້າສັບສໍ່ ການທີ່ມາຕຸຄາມມັກທຳຮ້າຍມິດ ໝາຍເຖິງສ່ວນຫຼາຍມາຕຸຄາມມັກນອກໃຈ

ພິກຂຸທັງຫຼາຍ ມາຕຸຄາມມີໂທດ ໕ ປະການນີ້ແລ

**ທຸຕິຍະກັນທະສັບປະສູດທີ ໑໐ ຈົບ**

**ທີຄະຈາຣິກະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໔. ອາວາສິກະວັກ

## ໝວດວ່າດ້ວຍພິກຂຸຜູ້ເປັນເຈົ້າອາວາດ

## ໑. ອາວາສິກະສູດ

### ວ່າດ້ວຍທຳຂອງເຈົ້າອາວາດ

[໔໓໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ເປັນຜູ້ບໍ່ຄວນຍ້ອງຍໍ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ເປັນຜູ້ບໍ່ພຽບພ້ອມດ້ວຍມາຣະຍາດ[១] ບໍ່ພຽບພ້ອມດ້ວຍຂໍ້ວັດປະຕິບັດ
໒. ບໍ່ເປັນພະຫູສູດ ບໍ່ຊົງສຸຕະ
໓. ເປັນຜູ້ບໍ່ປະພຶດຂັດເກົາ ບໍ່ຍິນດີການຫຼີບຫຼີກ
໔. ເປັນຜູ້ບໍ່ຍິນດີໃນກັນລະຍານະທຳ ບໍ່ມີວາຈາງາມ ບໍ່ເຈຣະຈາຄຳເວົ້າມ່ວນ
໕. ມີປັນຍາຊາມ ໂງ່ຈ້າ ເປັນຄົນປຶກ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ບໍ່ຄວນຍ້ອງຍໍ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ເປັນຜູ້ຄວນຍ້ອງຍໍ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ເປັນຜູ້ພຽບພ້ອມດ້ວຍມາຣະຍາດ ພຽບພ້ອມດ້ວຍຂໍ້ວັດປະຕິບັດ
໒. ເປັນພະຫູສູດ ຊົງສຸຕະ
໓. ເປັນຜູ້ປະພຶດຂັດເກົາ ຍິນດີໃນການຫຼີບຫຼີກ
໔. ເປັນຜູ້ຍິນດີໃນກັນລະຍານະທຳ ມີວາຈາງາມ ເຈຣະຈາຄຳເວົ້າມ່ວນ
໕. ມີປັນຍາ ບໍ່ໂງ່ຈ້າ ບໍ່ເປັນຄົນປຶກ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ຄວນຍ້ອງຍໍ

**ອາວາສິກະສູດທີ ໑ ຈົບ**

## ໒. ປິຍະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ເປັນທີ່ຮັກ

[໒໓໒] ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສິກສາ ຢູ່ໃນສິກຂາບົດທັງຫຼາຍ

໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງທຳທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນແລ້ວ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ

໓. ເປັນຜູ້ມີວາຈາງາມ ເຈຣະຈາຄຳເວົ້າມ່ວນອັນປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້

໔. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໕. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນທີ່ຮັກເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ປິຍສູດທີ ໒ ຈົບ**

## ໓. ໂສພະນະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ອາວາດງົດງາມ

[໒໓໓] ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມເຮັດອາວາດໃຫ້ງົດງາມ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ເປັນຜູ້ມີສີນ ສັງລວມ ຯລຯ[1] ສຶກສາຢູ່ໃນສິກຂາບົດທັງຫຼາຍ

໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ

໓. ເປັນຜູ້ມີວາຈາງາມ ເຈຣະຈາຄຳເວົ້າມ່ວນອັນປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້

໔. ເປັນຜູ້ສາມາດຊີ້ແຈ່ງບຸກຄົນຜູ້ເຂົ້າໄປຫາໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

໕. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເຮັດ ອາວາດໃຫ້ງົດງາມ

**ໂສພະນະສູດທີ ໓ ຈົບ**

## ໔. ພາຫູປະກາຣະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ມີອຸປະກາຣະຫຼາຍແກ່ອາວາດ

[໒໓໔] ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ ຍ່ອມເປັນຜູ້ມີອຸປະກາຣະຫຼາຍແກ່ອາວາດ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ເປັນຜູ້ມີສິນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ

໓. ປະຕິສັງຂອນເສນາສະນະທີ່ເປ່ເພ

໔. ເມື່ອພິກຂຸສົງຈຳນວນຫຼາຍເຂົ້າມາເຖິງ ຫຼືພິກຂຸຈາກຕ່າງແຄວ້ນເຂົ້າມາເຖິງ ທ່ານເຂົ້າໄປບອກ°ພວກຄະລືຫັດວ່າ “ຜູ້ມີອາຍຸທັງຫຼາຍ ພິກຂຸສົງຈຳນວນຫຼາຍເຂົ້າມາເຖິງແລ້ວ ພິກຂຸຈາກຕ່າງແຄວ້ນເຂົ້າມາເຖິງແລ້ວ ຂໍເຊີນພວກທ່ານທຳບຸນເທີ້ນ ນີ້ເປັນການສະ ໄໝທີ່ຈະທຳບຸນ

໕. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນຜູ້ມີອຸປະກາຣະຫຼາຍແກ່ອາວາດ

**ພາຫູປະກາຣະສູດທີ ໔ ຈົບ**

# ๕. ອະນຸກຳປະສູດ

## ວ່າດ້ວຍທຳທີ່ເປັນເຫດອະນຸເຄາະຄະລືຫັດ

[໔໓໕] ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມອະນຸເຄາະຄະລືຫັດໄດ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ໃຫ້ຄະລືຫັດສະມາທານອະທິສີນ[๑]
໔. ໃຫ້ຄະລືຫັດຕັ້ງຢູ່ໃນການເຫັນທຳ[๒]
໓. ເຂົ້າໄປຫາຄະລືຫັດຜູ້ເປັນໄຂ້ໃຫ້ສະຕິວ່າ "ທ່ານທັງຫຼາຍ ຈົ່ງຕັ້ງສະຕິໄວ້ຕໍ່ພຣະຣັດຕະນະໄຕຣທີ່ຄວນແກ່ສັກກາຣະ ແລະເມື່ອພິກຂຸສົງຈຳນວນຫຼາຍເຂົ້າມາເຖິງ ຫຼືພິກຂຸຈາກຕ່າງແຄວ້ນເຂົ້າມາເຖິງ ທ່ານເຂົ້າໄປບອກພວກຄະລືຫັດວ່າ "ຜູ້ມີອາຍຸທັງຫຼາຍ ພິກຂຸສົງຈຳນວນຫຼາຍເຂົ້າມາເຖິງແລ້ວ ພິກຂຸຈາກຕ່າງແຄວ້ນເຂົ້າມາເຖິງແລ້ວ ຂໍເຊີນພວກທ່ານທຳບຸນເທີ້ນ ນີ້ເປັນການສະໄໝທີ່ຈະທຳບຸນ
໔. ສັນໂພຊະນະທີ່ພວກຄະລືຫັດນຳມາຖວາຍ ຈະຊົ່ວ ຫຼື ປະນີດກໍຕາມດ້ວຍຕົນເອງ
໕. ບໍ່ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມອະນຸເຄາະຄະລືຫັດໄດ້

**ອະນຸກຳປະສູດທີ ໕ ຈົບ**

# ໖. ປະຖົມອະວັນນາຣະຫະສູດ

## ວ່າດ້ວຍຄົນທີ່ຄວນຕິຕຽນສູດທີ ໑

[໔໓໖] ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ບໍ່ພິຈາລະນາ ບໍ່ຮີ່ນຕອງ ສັນເສີນຄົນທີ່ຄວນຕິຕຽນ
໒. ບໍ່ພິຈາລະນາ ບໍ່ຮີ່ນຕອງ ຕິຕຽນຄົນທີ່ຄວນສັນເສີນ
໓. ບໍ່ພິຈາລະນາ ບໍ່ຮີ່ນຕອງ ປຸກຄວາມເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ
໔. ບໍ່ພິຈາລະນາ ບໍ່ຮີ່ນຕອງ ປຸກຄວາມບໍ່ເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ
໕. ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ພິຈາລະນາ ຮີ່ນຕອງແລ້ວ ຕິຕຽນຄົນທີ່ຄວນຕິຕຽນ
໒. ພິຈາລະນາ ຮີ່ນຕອງແລ້ວ ສັນເສີນຄົນທີ່ຄວນສັນເສີນ
໓. ພິຈາລະນາ ຮີ່ນຕອງແລ້ວ ປຸກຄວາມບໍ່ເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ
໔. ພິຈາລະນາ ຮີ່ນຕອງແລ້ວ ປຸກຄວາມເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ
໕. ບໍ່ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ປະຖົມອະວັນນາຣະຫະສູດທີ ໗ ຈົບ**

## ໘. ທຸຕິຍະອະວັນນາຣະຫະສູດ

## ວ່າດ້ວຍຄົນທີ່ຄວນຕິຕຽນສູດທີ ໘

[໒໓໘] ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ບໍ່ພິຈາລະນາ ບໍ່ຮິ່ນຕອງ ສັນເສີນຄົນທີ່ຄວນຕິຕຽນ
໒. ບໍ່ພິຈາລະນາ ບໍ່ຮິ່ນຕອງ ຕິຕຽນຄົນທີ່ຄວນສັນເສີນ
໓. ເປັນຜູ້ຂີ້ຖີ່ອາວາດ ຫວງແຫນອາວາດ
໔. ເປັນຜູ້ຂີ້ຖີ່ຕະກູນ ຫວງແຫນຕະກູນ
໕. ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ພິຈາລະນາ ຮິ່ນຕອງແລ້ວ ຕິຕຽນຄົນທີ່ຄວນຕິຕຽນ
໒. ພິຈາລະນາ ຮິ່ນຕອງແລ້ວ ສັນເສີນຄົນທີ່ຄວນສັນເສີນ
໓. ເປັນຜູ້ບໍ່ຂີ້ຖີ່ອາວາດ ບໍ່ຫວງແຫນອາວາດ
໔. ເປັນຜູ້ບໍ່ຂີ້ຖີ່ຕະກູນ ບໍ່ຫວງແຫນຕະກູນ
໕. ບໍ່ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ທຸຕິຍະອະວັນນາຣະຫະສູດທີ ໆ ຈົບ**

## ໗. ຕະຕິຍະອະວັນນາຣະຫະສູດ

## ວ່າດ້ວຍຄົນທີ່ຄວນຕິຕຽນສູດທີ ໓

[໒໓໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ບໍ່ພິຈາລະນາ ບໍ່ຮິ່ນຕອງ ສັນເສີນຄົນທີ່ຄວນຕິຕຽນ
໒. ບໍ່ພິຈາລະນາ ບໍ່ຮິ່ນຕອງ ຕິຕຽນຄົນທີ່ຄວນສັນເສີນ

໓. ເປັນຜູ້ຂີ້ຖີ່ອາວາດ
໔. ເປັນຜູ້ຂີ້ຖີ່ຕະກູນ
໕. ເປັນຜູ້ຂີ້ຖີ່ລາບ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ພິຈາລະນາ ຮິ່ນຕອງແລ້ວ ຕິຕຽນຄົນທີ່ຄວນຕິຕຽນ
໒. ພິຈາລະນາ ຮິ່ນຕອງແລ້ວ ສັນເສີນຄົນທີ່ຄວນສັນເສີນ
໓. ເປັນຜູ້ບໍ່ຂີ້ຖີ່ອາວາດ
໔. ເປັນຜູ້ບໍ່ຂີ້ຖີ່ຕະກູນ
໕. ເປັນຜູ້ບໍ່ຂີ້ຖີ່ລາບ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ຕະຕິຍະອະວັນນາຣະຫະສູດທີ ໗ ຈົບ**

## ໘. ປະຖົມມັດສະຣິຍະສູດ

## ວ່າດ້ວຍຄວາມຂີ້ຖີ່ສູດທີ ໑

[໒໓໘] ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ເປັນຜູ້ຂີ້ຖີ່ອາວາດ
໒. ເປັນຜູ້ຂີ້ຖີ່ຕະກູນ
໓. ເປັນຜູ້ຂີ້ຖີ່ລາບ
໔. ເປັນຜູ້ຂີ້ຖີ່ວັນນະ

໕. ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ເປັນຜູ້ບໍ່ຂີ້ຖີ່ອາວາດ
໒. ເປັນຜູ້ບໍ່ຂີ້ຖີ່ຕະກູນ
໓. ເປັນຜູ້ບໍ່ຂີ້ຖີ່ລາບ
໔. ເປັນຜູ້ບໍ່ຂີ້ຖີ່ວັນນະ
໕. ບໍ່ເຮັດເຄື່ອງທີ່ເຂົາຖວາຍດ້ວຍສັດທາໃຫ້ຕົກໄປ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ປະຖົມມັດສະຣິຍະສູດທີ ໙ ຈົບ**

## ໑໐. ທຸຕິຍະມັດສະຣິຍະສູດ

## ວ່າດ້ວຍຄວາມຂີ້ຖີ່ສູດທີ ໒

[໒໕໐] ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ເປັນຜູ້ຂີ້ຖີ່ອາວາດ
໒. ເປັນຜູ້ຂີ້ຖີ່ຕະກູນ
໓. ເປັນຜູ້ຂີ້ຖີ່ລາບ
໔. ເປັນຜູ້ຂີ້ຖີ່ວັນນະ
໕. ເປັນຜູ້ຂີ້ຖີ່ທຳ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸເຈົ້າອາວາດ

໑. ເປັນຜູ້ບໍ່ຂີ້ຖີ່ອາວາດ
໒. ເປັນຜູ້ບໍ່ຂີ້ຖີ່ຕະກູນ
໓. ເປັນຜູ້ບໍ່ຂີ້ຖີ່ລາບ
໔. ເປັນຜູ້ບໍ່ຂີ້ຖີ່ວັນນະ
໕. ເປັນຜູ້ບໍ່ຂີ້ຖີ່ທຳ

ພິກຂຸທັງຫຼາຍ ພິກຂຸເຈົ້າອາວາດປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ທຸຕິຍະມັດສະຣິຍະສູດທີ ໑໐ ຈົບ**

**ອາວາສິກະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອາວາສິກະສູດ
໒. ປິຍະສູດ
໓. ໂສພະນະສູດ
໔. ພາຫູປະກາຣະສູດ
໕. ອະນຸກຳປະສູດ
໖. ປະຖົມອະວັນນາຣະຫະສູດ
໗. ທຸຕິຍະອະວັນນາຣະຫະສູດ
໘. ຕະຕິຍະອະວັນນາຣະຫະສູດ
໙. ປະຖົມມັດສະຣິຍະສູດ
໑໐. ທຸຕິຍະມັດສະຣິຍະສູດ

# ໕. ທຸດຈະຣິຕະວັກ

## ໝວດວ່າດ້ວຍທຸດຈະຣິດ

## ໑. ປະຖົມທຸດຈະຣິຕະສູດ

## ວ່າດ້ວຍທຸດຈະຣິດສູດທີ ໑

[໔໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຸດຈະຣິດມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ແມ່ນຕົນກໍຕິຕຽນຕົນເອງໄດ້
໒. ຜູ້ຮູ້ພິຈາຣະນາແລ້ວຍ່ອມຕິຕຽນໄດ້
໓. ກິດຕິສັບອັນຊົ່ວຍ່ອມຂະຈາຍໄປ
໔. ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ພິກຂຸທັງຫຼາຍ ທຸດຈະຣິດມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ສຸດຈະຣິດມີອານິສົງ ໕ ປະການນີ້

ອານິສົງ ໕ ປະການ ອັນໃດແດ່ ຄື

໑. ແມ່ນຕົນກໍຕິຕຽນຕົນເອງບໍ່ໄດ້
໒. ຜູ້ຮູ້ພິຈາຣະນາແລ້ວຍ່ອມສັນເສີນ
໓. ກິດຕິສັບອັນງາມຍ່ອມຂະຈາຍໄປ
໔. ບໍ່ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ສຸດຈະຣິດມີອານິສົງ ໕ ປະການນີ້ແລ

**ປະຖົມທຸດຈະຣິຕະສູດທີ ໑ ຈົບ**

# ໒. ປະຖົມກາຍທຸດຈະຣິຕະສູດ

## ວ່າດ້ວຍກາຍທຸດຈະຣິດສູດທີ ໑

[໒໒໒] ພິກຂຸທັງຫຼາຍ ກາຍທຸດຈະຣິດມີໂທດ ໕ ປະການນີ້

ຯລຯ

ພິກຂຸທັງຫຼາຍ ກາຍສຸດຈະຣິດມີອານິສົງ ໕ ປະການນີ້

ຯລຯ

**ປະຖົມກາຍທຸດຈະຣິຕະທີ ໒ ຈົບ**

# ໓. ປະຖົມວະຈີທຸດຈະຣິຕະສູດ

## ວ່າດ້ວຍວະຈີທຸດຈະຣິດສູດທີ ໑

[໒໒໓] ພິກຂຸທັງຫຼາຍ ວະຈີທຸດຈະຣິດ ມີໂທດ ໕ ປະການນີ້

ຯລຯ

ພິກຂຸທັງຫຼາຍ ວະຈີສຸດຈະຣິດມີອານິສົງ ໕ ປະການນີ້

ຯລຯ

**ປະຖົມວະຈີທຸດຈະຣິຕະທີ ໓ ຈົບ**

# ໔. ປະຖົມມະໂນທຸດຈະຣິຕະສູດ

## ວ່າດ້ວຍມະໂນທຸດຈະຣິດສູດທີ ໑

[໒໒໔] ພິກຂຸທັງຫຼາຍ ມະໂນທຸດຈະຣິດມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ແມ່ນຕົນກໍຕິຕຽນຕົນເອງໄດ້
໒. ຜູ້ຮູ້ພິຈາຣະນາແລ້ວຍ່ອມຕິຕຽນ
໓. ກິດຕິສັບອັນຊົ່ວຍ່ອມຊ່າລືໄປ
໔. ຫຼົງລືມສະຕິຕາຍ

໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ພິກຂຸທັງຫຼາຍ ມະໂນທຸດຈະຣິດມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ມະໂນສຸດຈະຣິດມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ແມ່ນຕົນກໍຕິຕຽນຕົນເອງບໍ່ໄດ້
໒. ຜູ້ຮູ້ພິຈາຣະນາແລ້ວຍ່ອມສັນເສີນ
໓. ກິດຕິສັບອັນງາມຍ່ອມຂ່າລືໄປ
໔. ບໍ່ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍແລ້ວຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ພິກຂຸທັງຫຼາຍ ມະໂນສຸດຈະຣິດມີອານິສົງ ໕ ປະການນີ້ແລ

**ປະຖົມມະໂນທຸດຈະຣິຕະສູດທີ ໔ ຈົບ**

## ໕. ທຸຕິຍະທຸດຈະຣິຕະສູດ

## ວ່າດ້ວຍທຸດຈະຣິດສູດທີ ໒

[໒໔໕] ພິກຂຸທັງຫຼາຍ ທຸດຈະຣິດມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ແມ່ນຕົນກໍຕິຕຽນຕົນເອງໄດ້
໒. ຜູ້ຮູ້ພິຈາຣະນາແລ້ວຍ່ອມຕິຕຽນ
໓. ກິດຕິສັບອັນຊົ່ວຍ່ອມຂ່າລືໄປ
໔. ເສື່ອມຈາກສັດທຳ
໕. ຕັ້ງຢູ່ໃນອະສັດທຳ[1]

ພິກຂຸທັງຫຼາຍ ທຸດຈະຣິດມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ສຸດຈະຣິດມີອານິສົງ ໕ ປະການນີ້

ອານິສົງ ໕ ປະການ ອັນໃດແດ່ ຄື

໑. ແມ່ນຕົນກໍຕິຕຽນຕົນເອງບໍ່ໄດ້
໔. ຜູ້ຮູ້ພິຈາຣະນາແລ້ວຍ່ອມສັນເສີນ
໓. ກິດຕິສັບອັນງາມຍ່ອມຂະຈາຍໄປ
໔. ເສື່ອມຈາກອະສັດທຳ
໕. ຕັ້ງຢູ່ໃນສັດທຳ

ພິກຂຸທັງຫຼາຍ ສຸດຈະຣິດມີອານິສົງ ໕ ປະການນີ້ແລ

**ທຸຕິຍະທຸດຈະຣິຕະສູດທີ ໕ ຈົບ**

## ໖. ທຸຕິຍະກາຍທຸດຈະຣິຕະສູດ
## ວ່າດ້ວຍກາຍທຸດຈະຣິດສູດທີ ໔

[໔໔໖] ພິກຂຸທັງຫຼາຍ ກາຍທຸດຈະຣິດມີໂທດ ໕ ປະການນີ້
ຯລຯ
ພິກຂຸທັງຫຼາຍ ກາຍສຸດຈະຣິດມີອານິສົງ ໕ ປະການນີ້
ຯລຯ

**ທຸຕິຍະກາຍທຸດຈະຣິຕະສູດທີ ໖ ຈົບ**

## ໗. ທຸຕິຍະວະຈີທຸດຈະຣິຕະສູດ
## ວ່າດ້ວຍວະຈີທຸດຈະຣິດສູດທີ ໔

[໔໔໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ວະຈີທຸດຈະຣິດມີໂທດ ໕ ປະການນີ້
ຯລຯ
ພິກຂຸທັງຫຼາຍ ວະຈີສຸດຈະຣິດມີອານິສົງ ໕ ປະການນີ້
ຯລຯ

**ທຸຕິຍະວະຈີທຸດຈະຣິຕະສູດທີ ໗ ຈົບ**

## ໘. ທຸຕິຍະມະໂນທຸດຈະຣິຕະສູດ

## ວ່າດ້ວຍມະໂນທຸດຈະຣິດສູດທີ ໔

[໔໔໘] ພິກຂຸທັງຫຼາຍ ມະໂນທຸດຈະຣິດມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ແມ່ນຕົນກໍຕິຕຽນຕົນເອງໄດ້
໒. ຜູ້ຮູ້ພິຈາຣະນາແລ້ວຍ່ອມຕິຕຽນ
໓. ກິດຕິສັບອັນຊົ່ວຍ່ອມຂ່າລືໄປ
໔. ເສື່ອມຈາກສັດທຳ
໕. ຕັ້ງຢູ່ໃນອະສັດທຳ

ພິກຂຸທັງຫຼາຍ ມະໂນທຸດຈະຣິດມີໂທດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ມະໂນສຸດຈະຣິດມີອານິສົງ ໕ ປະການນີ້
ອານິສົງ ໕ ປະການ ອັນໃດແດ່ ຄື

໑. ແມ່ນຕົນກໍຕິຕຽນຕົນເອງບໍ່ໄດ້
໒. ຜູ້ຮູ້ພິຈາຣະນາແລ້ວຍ່ອມສັນເສີນ
໓. ກິດຕິສັບອັນງາມຍ່ອມຂ່າລືໄປ
໔. ເສື່ອມຈາກອະສັດທຳ
໕. ຕັ້ງຢູ່ໃນສັດທຳ

ພິກຂຸທັງຫຼາຍ ມະໂນສຸດຈະຣິດມີອານິສົງ ໕ ປະການນີ້ແລ

**ທຸຕິຍະມະໂນທຸດຈະຣິຕະສູດທີ ໗ ຈົບ**

## ໘. ສີວະຖິກະສູດ

## ວ່າດ້ວຍປ່າຊ້າ

[໒໔໘] ພິກຂຸທັງຫຼາຍ ປ່າຊ້າມີໂທດ ໕ ປະການ

ໂທດ ໕ ປະການ ອັນໃດແດ່ ຄື

໑. ບໍ່ສະອາດ
໒. ມີກິ່ນເໝັນ
໓. ມີໄພ
໔. ເປັນບ່ອນຢູ່ຂອງອະມະນຸດດຸຮ້າຍ
໕. ເປັນທີ່ຮ່ຳໄຮຂອງຄົນຈຳນວນຫຼາຍ

ພິກຂຸທັງຫຼາຍ ປ່າຊ້າມີໂທດ ໕ ປະການນີ້ແລ ສັນໃດ

ພິກຂຸທັງຫຼາຍ ບຸກຄົນຜູ້ປຽບດ້ວຍປ່າຊ້າກໍມີໂທດ ໕ ປະການນີ້ ຄືກັນສັນນັ້ນ ໂທດ ໕ ປະການ ອັນໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ປະກອບກາຍຍະກຳທີ່ບໍ່ສະອາດ ປະກອບວະຈີກຳທີ່ບໍ່ສະອາດ ປະກອບມະໂນກຳທີ່ບໍ່ສະອາດ ເຮົາກ່າວແນວນີ້ ຍ້ອນເຂົາເປັນຄົນບໍ່ສະອາດ ເຮົາກ່າວວ່າບຸກຄົນນີ້ເປັນຄືປ່າຊ້າທີ່ບໍ່ສະອາດ

໒. ກິດຕິສັບອັນຊົ່ວຂອງເຂົາຜູ້ປະກອບກາຍຍະກຳທີ່ບໍ່ສະອາດ ປະກອບວະຈີກຳທີ່ບໍ່ສະອາດ ປະກອບມະໂນກຳທີ່ບໍ່ສະອາດ ຍ່ອມກະຈາຍໄປ ເຮົາກ່າວແນວນີ້ຍ້ອນເຂົາເປັນຄົນມີກິ່ນເໝັນ ເຮົາກ່າວວ່າບຸກຄົນນີ້ເປັນຄືປ່າຊ້າທີ່ມີກິ່ນເໝັນ

໓. ເພື່ອນພົມມະຈາຣີທັງຫຼາຍຜູ້ມີສິນເປັນທີ່ຮັກຍ່ອມເວັ້ນຫ່າງໄກບຸກຄົນຜູ້ປະກອບກາຍຍະກຳທີ່ບໍ່ສະອາດ ປະກອບວະຈີກຳທີ່ບໍ່ສະອາດ ປະກອບມະໂນກຳທີ່ບໍ່ສະອາດ ເຮົາກ່າວແນວນີ້ຍ້ອນເຂົາມີໄພ ເຮົາກ່າວວ່າບຸກຄົນນີ້ເປັນຄືປ່າຊ້າທີ່ມີໄພ

໔. ເຂົາປະກອບກາຍຍະກຳທີ່ບໍ່ສະອາດ ປະກອບວະຈີກຳທີ່ບໍ່ສະອາດ ປະກອບມະໂນກຳທີ່ບໍ່ສະອາດ ຍ່ອມຢູ່ຮ່ວມກັນກັບບຸກຄົນທີ່ຄືກັນ ເຮົາກ່າວແນວນີ້ຍ້ອນເຂົາເປັນບ່ອນຢູ່ທີ່ດຸຮ້າຍ ເຮົາກ່າວວ່າບຸກຄົນນີ້ເປັນຄືທີ່ຢູ່ຂອງອະມະນຸດດຸຮ້າຍ

໕. ເພື່ອນພົມມະຈາຣີທັງຫຼາຍຜູ້ມີສິນເປັນທີ່ຮັກເຫັນເຂົາປະກອບກາຍຍະກຳທີ່ບໍ່ສະອາດ ປະກອບວະຈີກຳທີ່ບໍ່ສະອາດ ປະກອບມະໂນກຳທີ່ບໍ່ສະອາດແລ້ວຍ່ອມເຖິງກັບວ່າ ໝົດອາໄລເປັນທຳມະດາວ່າ "ໂອ ເປັນທຸກແທ້ນໍສຳລັບເຮົາຜູ້ຈຳຕ້ອງຢູ່ຮ່ວມກັບບຸກຄົນແນວນີ້ ເຮົາກ່າວແນວນີ້ ຍ້ອນເຂົາເປັນທີ່ຮ່ຳໄຮ ເຮົາກ່າວວ່າບຸກຄົນນີ້ເປັນຄືປ່າຊ້າເປັນ ທີ່ຮ່ຳໄຮຂອງຄົນຈຳນວນຫຼາຍ

ພິກຂຸທັງຫຼາຍ ບຸກຄົນຜູ້ປຽບດ້ວຍປ່າຊ້າມີໂທດ ໕ ປະການນີ້ແລ

**ສີວະຖິກະສູດທີ ໗ ຈົບ**

# ໑໐. ປຸກຄະລັບປະສາທະສູດ

## ວ່າດ້ວຍຄວາມເຫຼື້ອມໃສສະເພາະບຸກຄົນ

[໔໕໐] ພິກຂຸທັງຫຼາຍ ຄວາມເຫຼື້ອມໃສທີ່ເກີດຂຶ້ນສະເພາະບຸກຄົນ ມີໂທດ ໕ ປະການນີ້

ໂທດ ໕ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ເຫຼື້ອມໃສໃນບຸກຄົນທີ່ຕ້ອງອາບັດເປັນເຫດໃຫ້ສົງຍົກວັດ ມີຄວາມຄິດແນວນີ້ວ່າ "ບຸກຄົນຜູ້ເປັນທີ່ຮັກ ເປັນທີ່ພໍໃຈຂອງເຮົານີ້ຖືກສົງຍົກວັດສາແລ້ວ ຈຶ່ງບໍ່ເຫຼື້ອມໃສໃນພິກຂຸທັງຫຼາຍ ເມື່ອບໍ່ເຫຼື້ອມໃສໃນພິກຂຸທັງຫຼາຍ ຈຶ່ງບໍ່ຄົບພິກຂຸເຫຼົ່າອື່ນ ເມື່ອບໍ່ຄົບພິກຂຸເຫຼົ່າອື່ນ ຈຶ່ງບໍ່ຟັງສັດທຳ ເມື່ອບໍ່ຟັງສັດທຳ ຈຶ່ງເສື່ອມຈາກສັດທຳ ນີ້ເປັນໂທດຂອງຄວາມເຫຼື້ອມໃສທີ່ເກີດຂຶ້ນສະເພາະບຸກຄົນປະການທີ ໑

໒. ບຸກຄົນຜູ້ເຫຼື້ອມໃສໃນບຸກຄົນທີ່ຕ້ອງອາບັດເປັນເຫດໃຫ້ສົງສັ່ງໃຫ້ເຂົ້ານັ່ງທ້າຍ ໆ ມີຄວາມຄິດແນວນີ້ວ່າ "ບຸກຄົນຜູ້ເປັນທີ່ຮັກ ເປັນທີ່ພໍໃຈຂອງເຮົານີ້ຖືກສົງສັ່ງໃຫ້ນັ່ງທ້າຍສາແລ້ວຈຶ່ງບໍ່ເຫຼື້ອມໃສໃນພິກຂຸທັງຫຼາຍ ເມື່ອບໍ່ເຫຼື້ອມໃສໃນພິກຂຸທັງຫຼາຍ ຈຶ່ງບໍ່ຄົບພິກຂຸເຫຼົ່າອື່ນ ເມື່ອບໍ່ຄົບພິກຂຸເຫຼົ່າອື່ນ ຈຶ່ງບໍ່ຟັງສັດທຳ ເມື່ອບໍ່ຟັງສັດທຳ ຈຶ່ງເສື່ອມຈາກສັດທຳ ນີ້ເປັນໂທດຂອງຄວາມເຫຼື້ອມໃສທີ່ເກີດຂຶ້ນສະເພາະບຸກຄົນປະການທີ ໒

໓. ບຸກຄົນຜູ້ເຫຼື້ອມໃສໃນບຸກຄົນທີ່ຫຼີກໄປສູ່ທິດ ມີຄວາມຄິດແນວນີ້ວ່າ "ບຸກຄົນຜູ້ເປັນທີ່ຮັກ ເປັນທີ່ພໍໃຈຂອງເຮົານີ້ຫຼີກໄປສູ່ທິດສາແລ້ວ ຈຶ່ງບໍ່ຄົບພິກຂຸເຫຼົ່າອື່ນ ເມື່ອບໍ່ຄົບພິກຂຸເຫຼົ່າອື່ນ ຈຶ່ງບໍ່ຟັງສັດທຳ ເມື່ອບໍ່ຟັງສັດທຳ ຈຶ່ງເສື່ອມຈາກສັດທຳ ນີ້ເປັນໂທດຂອງຄວາມເຫຼື້ອມໃສທີ່ເກີດຂຶ້ນສະເພາະບຸກຄົນປະການທີ ໓

໔. ບຸກຄົນຜູ້ເຫຼື້ອມໃສໃນບຸກຄົນທີ່ລາສິກຂາ ມີຄວາມຄິດແນວນີ້ວ່າ "ບຸກຄົນຜູ້ເປັນທີ່ຮັກ ເປັນທີ່ພໍໃຈຂອງເຮົານີ້ໄດ້ລາສິກຂາໄປແລ້ວ ຈຶ່ງບໍ່ຄົບພິກຂຸເຫຼົ່າອື່ນ ເມື່ອບໍ່ຄົບພິກຂຸເຫຼົ່າອື່ນ ຈຶ່ງບໍ່ຟັງສັດທຳ ເມື່ອບໍ່ຟັງສັດທຳ ຈຶ່ງເສື່ອມຈາກສັດທຳ ນີ້ເປັນໂທດຂອງຄວາມເຫຼື້ອມໃສທີ່ເກີດຂຶ້ນສະເພາະບຸກຄົນປະການທີ ໔

໕. ບຸກຄົນຜູ້ເຫຼື້ອມໃສໃນບຸກຄົນທີ່ຕາຍແລ້ວ ມີຄວາມຄິດແນວນີ້ວ່າ "ບຸກຄົນຜູ້ເປັນທີ່ຮັກ ເປັນທີ່ພໍໃຈຂອງເຮົານີ້ໄດ້ຕາຍສາແລ້ວ ຈຶ່ງບໍ່ຄົບພິກຂຸເຫຼົ່າອື່ນ

ເມື່ອບໍ່ຄົບພິກຂຸເຫຼົ່າອື່ນ ຈຶ່ງບໍ່ຟັງສັດທຳ ເມື່ອບໍ່ຟັງສັດທຳ ຈຶ່ງເສື່ອມຈາກສັດທຳ ນີ້ເປັນໂທດຂອງຄວາມເຫຼື້ອມໃສທີ່ເກີດຂື້ນສະເພາະບຸກຄົນປະການທີ ໕

ພິກຂຸທັງຫຼາຍ ຄວາມເຫຼື້ອມໃສທີ່ເກີດຂື້ນສະເພາະບຸກຄົນ ມີໂທດ ໕ ປະການນີ້ແລ

**ປຸກຄະລັບປະສາທະສູດທີ ໑໐ ຈົບ**

**ທຸດຈະຣິຕະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



**ປັນຈະມະປັນນາດ ຈົບ**

# ໒. ອຸປະສຳປະທາວັກ

## ໝວດວ່າດ້ວຍການອຸປະສົມບົດ

## ໑. ອຸປະສຳປາເທຕັບພະສູດ[1]

## ວ່າດ້ວຍຄຸນສົມບັດຂອງພິກຂຸຜູ້ໃຫ້ອຸປະສົມບົດ

[໔໕໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເພິ່ງໃຫ້ກຸນລະບຸດອຸປະສົມບົດໄດ້

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ປະກອບດ້ວຍ ສີນຂັນ ທີ່ເປັນອະເສຂະ[໔]
໒. ເປັນຜູ້ປະກອບດ້ວຍ ສະມາທິຂັນ ທີ່ເປັນອະເສຂະ

໓. ເປັນຜູ້ປະກອບດ້ວຍ ປັນຍາຂັນ ທີ່ເປັນອະເສຂະ
໔. ເປັນຜູ້ປະກອບດ້ວຍ ວິມຸດຕິຂັນ ທີ່ເປັນອະເສຂະ
໕. ເປັນຜູ້ປະກອບດ້ວຍ ວິມຸດຕິຍານທັດສະນະຂັນ[๑] ທີ່ເປັນອະເສຂະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເພິ່ງໃຫ້ກຸນລະບຸດ ອຸປະສົມບົດໄດ້

**ອຸປະສຳປາເທຕັບພະສູດທີ ໑ ຈົບ**

## ໔. ນິດສະຍະສູດ

## ວ່າດ້ວຍຄຸນສົມບັດຂອງພິກຂຸຜູ້ໃຫ້ນິດໄສ

[໔໕໔] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເພິ່ງໃຫ້ນິດໄສໄດ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ປະກອບດ້ວຍສີນຂັນທີ່ເປັນອະເສຂະ
ຯລຯ
໕. ເປັນຜູ້ປະກອບດ້ວຍວິມຸດຕິຍານທັດສະນະຂັນທີ່ເປັນອະເສຂະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເພິ່ງໃຫ້ນິດໄສໄດ້

**ນິດສະຍະສູດທີ ໔ ຈົບ**

## ໓. ສາມະເນຣະສູດ

## ວ່າດ້ວຍຄຸນສົມບັດຂອງພິກຂຸຜູ້ໃຫ້ສາມະເນນອຸປັດຖາກ

[໔໕໓] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ປະກອບດ້ວຍສີນຂັນທີ່ເປັນອະເສຂະ
ຯລຯ
໕. ເປັນຜູ້ປະກອບດ້ວຍວິມຸດຕິຍານທັດສະນະຂັນທີ່ເປັນອະເສຂະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເພິ່ງໃຫ້ສາມະເນນອຸປັດຖາກໄດ້

**ສາມະເນຣະສູດທີ ๓ ຈົບ**

## ๔. ປັນຈະມັດສະຣິຍະສູດ

## ວ່າດ້ວຍຄວາມຂີ້ຖີ່ ໕ ປະການ

[๔໕๔] ພິກຂຸທັງຫຼາຍ ຄວາມຂີ້ຖີ່ ໕ ປະການນີ້

ຄວາມຂີ້ຖີ່ ໕ ປະການ ອັນໃດແດ່ ຄື

໑. ຄວາມຂີ້ຖີ່ ອາວາດ
໒. ຄວາມຂີ້ຖີ່ ຕະກູນ
๓. ຄວາມຂີ້ຖີ່ ລາບ
๔. ຄວາມຂີ້ຖີ່ ວັນນະ
໕. ຄວາມຂີ້ຖີ່ ທຳ

ພິກຂຸທັງຫຼາຍ ຄວາມຂີ້ຖີ່ ໕ ປະການນີ້ແລ ບັນດາຄວາມຂີ້ຖີ່ ໕ ປະການນີ້ ຄວາມຂີ້ຖີ່ທຳໜ້າກຽດຊັງທີ່ສຸດ

**ປັນຈະມັດສະຣິຍະສູດທີ ๔ ຈົບ**

## ໕. ມັດສະຣິຍະປະຫານະສູດ

## ວ່າດ້ວຍການລະຄວາມຂີ້ຖີ່

[๔໕໕] ພິກຂຸທັງຫຼາຍ ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດຂາດເຊິ່ງຄວາມຂີ້ຖີ່ ໕ ປະການ ຄວາມຂີ້ຖີ່ ໕ ປະການ ອັນໃດແດ່ ຄື

໑. ຄວາມຂີ້ຖີ່ ອາວາດ
໒. ຄວາມຂີ້ຖີ່ ຕະກູນ
๓. ຄວາມຂີ້ຖີ່ ລາບ
๔. ຄວາມຂີ້ຖີ່ ວັນນະ
໕. ຄວາມຂີ້ຖີ່ ທຳ

ພິກຂຸທັງຫຼາຍ ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດຂາດເຊິ່ງຄວາມຂີ້ຖີ່ ໕ ປະການນີ້ແລ

**ມັດສະຣິຍະປະຫານະສູດທີ ໕ ຈົບ**

# ໖. ປະຖົມມະຊານະສູດ

## ວ່າດ້ວຍປະຖົມຊານ

[໔໕໖] ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໕ ປະການບໍ່ໄດ້ ກໍບໍ່ອາດບັນລຸປະຖົມຊານຢູ່ໄດ້

ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມຂີ້ຖີ່ ອາວາດ
໒. ຄວາມຂີ້ຖີ່ ຕະກູນ
໓. ຄວາມຂີ້ຖີ່ ລາບ
໔. ຄວາມຂີ້ຖີ່ ວັນນະ
໕. ຄວາມຂີ້ຖີ່ ທຳ

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໕ ປະການນີ້ແລບໍ່ໄດ້ ກໍບໍ່ອາດບັນລຸປະຖົມຊານຢູ່ໄດ້

ພິກຂຸທັງຫຼາຍ ພິກຂຸລະທຳ ໕ ປະການໄດ້ແລ້ວ ຈຶ່ງອາດບັນລຸປະຖົມຊານຢູ່ໄດ້
ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມຂີ້ຖີ່ ອາວາດ
໒. ຄວາມຂີ້ຖີ່ ຕະກູນ
໓. ຄວາມຂີ້ຖີ່ ລາບ
໔. ຄວາມຂີ້ຖີ່ ວັນນະ
໕. ຄວາມຂີ້ຖີ່ ທຳ

ພິກຂຸທັງຫຼາຍ ພິກຂຸລະທຳ ໕ ປະການນີ້ແລໄດ້ແລ້ວ ຈຶ່ງອາດບັນລຸປະຖົມຊານ ຢູ່ໄດ້

**ປະຖົມຊານສູດທີ ໖ ຈົບ**

## ໑-໑໓. ທຸຕິຍະຊານສຸດຕາທິສັດຕະກະ

## ວ່າດ້ວຍສູດ ໗ ສູດ ມີທຸຕິຍະຊານສູດເປັນຕົ້ນ

[໔໕໗ - ໔໖໓] ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໕ ປະການບໍ່ໄດ້ ກໍບໍ່ອາດບັນລຸທຸຕິຍະຊານຢູ່ໄດ້ ฯลฯ ຕະຕິຍະຊານ ฯลฯ ຈະຕຸດຖະຊານ ฯลฯ ກໍບໍ່ອາດເຮັດໃຫ້ແຈ້ງ ໂສດາປັດຕິຜົນໄດ້ ฯลฯ ສະກະທາຄາມິຜົນ ฯลฯ ອະນາຄາມິຜົນ ฯลฯ ກໍບໍ່ອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມຂີ້ຖີ່ ອາວາດ
໒. ຄວາມຂີ້ຖີ່ ຕະກູນ
໓. ຄວາມຂີ້ຖີ່ ລາບ
໔. ຄວາມຂີ້ຖີ່ ວັນນະ
໕. ຄວາມຂີ້ຖີ່ ທຳ

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໕ ປະການບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ພິກຂຸທັງຫຼາຍ ພິກຂຸລະທຳ ໕ ປະການນີ້ໄດ້ແລ້ວ ຈຶ່ງອາດບັນລຸທຸຕິຍະຊານ ຢູ່ໄດ້ ฯลฯ ຕະຕິຍະຊານ ฯลฯ ຈະຕຸດຖະຊານ ฯลฯ ຈຶ່ງອາດເຮັດໃຫ້ແຈ້ງໂສດາປັດຕິຜົນ ฯลฯ ສະກະທາຄາມິຜົນ ฯลฯ ອະນາຄາມິຜົນ ฯลฯ ຈຶ່ງອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມຂີ້ຖີ່ ອາວາດ
໒. ຄວາມຂີ້ຖີ່ ຕະກູນ
໓. ຄວາມຂີ້ຖີ່ ລາບ
໔. ຄວາມຂີ້ຖີ່ ວັນນະ
໕. ຄວາມຂີ້ຖີ່ ທຳ

ພິກຂຸທັງຫຼາຍ ພິກຂຸລະທຳ ໕ ປະການນີ້ແລໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງອະຣະຫັດຕະ-ຜົນໄດ້

**ທຸຕິຍະຊານສຸດຕາທິສັດຕະກະທີ ໑-໑໓ ຈົບ**

## ๑๔. ອະປະຣະປະຖົມມະຊານະສູດ

## ວ່າດ້ວຍປະຖົມຊານ ອີກໄນໜຶ່ງ

[໔໗໔] ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໕ ປະການບໍ່ໄດ້ ກໍບໍ່ອາດບັນລຸ ປະຖົມຊານຢູ່ໄດ້

ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມຂີ້ຖີ່ ອາວາດ
໒. ຄວາມຂີ້ຖີ່ ຕະກູນ
໓. ຄວາມຂີ້ຖີ່ ລາບ
໔. ຄວາມຂີ້ຖີ່ ວັນນະ
໕. ຄວາມບໍ່ຮູ້ບຸນຄຸນ ຄວາມອະກະຕະເວທີ

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໕ ປະການນີ້ແລບໍ່ໄດ້ ກໍບໍ່ອາດບັນລຸປະຖົມຊານຢູ່ໄດ້
ພິກຂຸທັງຫຼາຍ ພິກຂຸລະທຳ ໕ ປະການໄດ້ແລ້ວ ຈຶ່ງອາດບັນລຸປະຖົມຊານຢູ່ໄດ້
ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມຂີ້ຖີ່ ອາວາດ
໒. ຄວາມຂີ້ຖີ່ ຕະກູນ
໓. ຄວາມຂີ້ຖີ່ ລາບ
໔. ຄວາມຂີ້ຖີ່ ວັນນະ
໕. ຄວາມບໍ່ຮູ້ບຸນຄຸນ ຄວາມອະກະຕະເວທີ

ພິກຂຸທັງຫຼາຍ ພິກຂຸລະທຳ ໕ ປະການນີ້ແລໄດ້ແລ້ວ ຈຶ່ງອາດບັນລຸປະຖົມຊານຢູ່ໄດ້

**ອະປະຣະປະຖົມຊານສູດທີ ໑໔ ຈົບ**

## ໑໕-໒໑. ອະປະຣະທຸຕິຍະຊານສຸດຕາທີ

## ວ່າດ້ວຍທຸຕິຍະຊານສູດເປັນຕົ້ນ ອີກໄນໜຶ່ງ

[໔໗໕-໔໘໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໕ ປະການບໍ່ໄດ້ ກໍບໍ່ອາດບັນລຸທຸຕິຍະຊານຢູ່ໄດ້ ฯລฯ ຕະຕິຍະຊານ ฯລฯ ຈະຕຸດຖະຊານ ฯລฯ ກໍບໍ່ອາດ

ເຮັດໃຫ້ຮູ້ແຈ້ງໂສດາປັດຕິຜົນໄດ້ ຯລຯ ສະກະທາຄາມິຜົນ ຯລຯ ອະນາຄາມິຜົນ ຯລຯ ກໍບໍ່ອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມຂີ້ຖີ່ ອາວາດ
໒. ຄວາມຂີ້ຖີ່ ຕະກູນ
໓. ຄວາມຂີ້ຖີ່ ລາບ
໔. ຄວາມຂີ້ຖີ່ ວັນນະ
໕. ຄວາມບໍ່ຮູ້ບຸນຄຸນ ຄວາມອະກະຕະເວທີ

ພິກຂຸທັງຫຼາຍ ພິກຂຸລະທຳ ໕ ປະການນີ້ແລບໍ່ໄດ້ ກໍບໍ່ອາດບັນລຸປະຖົມຊານ ຢູ່ໄດ້

ພິກຂຸທັງຫຼາຍ ພິກຂຸລະທຳ ໕ ປະການໄດ້ແລ້ວ ຈຶ່ງອາດບັນລຸທຸຕິຍະຊານຢູ່ໄດ້ ຯລຯ ຈຶ່ງອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ທຳ ໕ ປະການ ອັນໃດແດ່ ຄື

໑. ຄວາມຂີ້ຖີ່ ອາວາດ
໒. ຄວາມຂີ້ຖີ່ ຕະກູນ
໓. ຄວາມຂີ້ຖີ່ ລາບ
໔. ຄວາມຂີ້ຖີ່ ວັນນະ
໕. ຄວາມບໍ່ຮູ້ບຸນຄຸນ ຄວາມອະກະຕະເວທີ

ພິກຂຸທັງຫຼາຍ ພິກຂຸລະທຳ ໕ ປະການນີ້ແລໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງ ອະຣະຫັດຕະຜົນໄດ້

**ອະປະຣະທຸຕິຍະຊານສຸດຕາທິທີ ໑໕-໒໑ ຈົບ**

**ອຸປະສຳປະທາວັກທີ ໒ ຈົບ**

# ໑. ສໍາມຸຕິເປີຍຍາລະ

## ໑. ພັດຕຸດເທສະກະສູດ

### ວ່າດ້ວຍພິກຂຸພັດຕຸດເທສະກະ[๑]

[໔໗໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທໍາ ໕ ປະການ ສົງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນພັດຕຸດເທສະກະ ທໍາ ໕ ປະການ ອັນໃດແດ່ ຄື

໑. ລໍາອຽງຍ້ອນ ຮັກ
໒. ລໍາອຽງຍ້ອນ ຊັງ
໓. ລໍາອຽງຍ້ອນ ຫຼົງ
໔. ລໍາອຽງຍ້ອນ ຢ້ານ
໕. ບໍ່ຮູ້ຈັກພັດຕາຫານທີ່ແຈກແລ້ວແລະພັດຕາຫານທີ່ຍັງບໍ່ໄດ້ແຈກ[๒]

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທໍາ ໕ ປະການນີ້ແລ ສົງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນພັດຕຸດເທສະກະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທໍາ ໕ ປະການ ສົງເພິ່ງແຕ່ງຕັ້ງໃຫ້ເປັນ ພັດຕຸດເທສະກະ ທໍາ ໕ ປະການ ອັນໃດແດ່ ຄື

໑. ບໍ່ລໍາອຽງຍ້ອນ ຮັກ
໒. ບໍ່ລໍາອຽງຍ້ອນ ຊັງ
໓. ບໍ່ລໍາອຽງຍ້ອນ ຫຼົງ
໔. ບໍ່ລໍາອຽງຍ້ອນ ຢ້ານ
໕. ຮູ້ຈັກພັດຕາຫານທີ່ແຈກແລ້ວແລະພັດຕາຫານທີ່ຍັງບໍ່ໄດ້ແຈກ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທໍາ ໕ ປະການນີ້ແລ ສົງເພິ່ງແຕ່ງຕັ້ງໃຫ້ເປັນພັດຕຸດເທສະກະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທໍາ ໕ ປະການ ສົງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນ ພັດຕຸດເທສະກະ ເຖິງແຕ່ງຕັ້ງແລ້ວ ກໍບໍ່ເພິ່ງສົ່ງໄປ[๑] ຯລຯ ສົງແຕ່ງຕັ້ງແລ້ວ ເພິ່ງສົ່ງໄປ ຯລຯ ເພິ່ງຮູ້ວ່າເປັນພານ ຯລຯ ເພິ່ງຮູ້ວ່າເປັນບັນດິດ ຯລຯ ບໍລິຫານຕົນໃຫ້ຖືກກໍາຈັດ ຖືກທໍາລາຍ ຯລຯ

ບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ຯລຯ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້ ຯລຯ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ລຳອຽງຍ້ອນ ຮັກ
໒. ບໍ່ລຳອຽງຍ້ອນ ຊັງ
໓. ບໍ່ລຳອຽງຍ້ອນ ຫຼົງ
໔. ບໍ່ລຳອຽງຍ້ອນ ຢ້ານ
໕. ຮູ້ຈັກພັດຕາຫານທີ່ແຈກແລ້ວແລະພັດຕາຫານທີ່ຍັງບໍ່ໄດ້ແຈກ

ພິກຂຸທັງຫຼາຍ ພິກຂຸຜູ້ເປັນພັດຕຸດເທສະກະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ພັດຕຸດເທສະກະສູດທີ ໑ ຈົບ**

## ໒-໑໔. ເສນາສະນະປັນຍາປະກະສຸດຕາທິ

## ວ່າດ້ວຍພິກຂຸເສນາສະນະປັນຍາປະກະ[1]ເປັນຕົ້ນ

[໒໗໓-໒໘໕] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ສົງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນເສນາສະນະປັນຍາປະກະ ຯລຯ ບໍ່ຮູ້ຈັກເສນາສະນະທີ່ຈັດແຈງແລ້ວແລະເສນາສະນະທີ່ຍັງບໍ່ໄດ້ຈັດແຈງ ຯລຯ ສົງເພິ່ງແຕ່ງຕັ້ງໃຫ້ເປັນເສນາສະນະປັນຍາປະກະ ຯລຯ ຮູ້ຈັກເສນາສະນະທີ່ຈັດແຈງແລ້ວແລະເສນາສະນະທີ່ຍັງບໍ່ໄດ້ຈັດແຈງ ຯລຯ

ສົງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນເສນາສະນະຄາຫາປະກະ[2] ຯລຯ ບໍ່ຮູ້ຈັກເສນາສະນະທີ່ຈັດແຈງແລ້ວ ແລະເສນາສະນະທີ່ຍັງບໍ່ໄດ້ຈັດແຈງ ຯລຯ ສົງເພິ່ງແຕ່ງຕັ້ງໃຫ້ເປັນເສນາສະນະຄາຫາປະກະ ຯລຯ ຮູ້ຈັກເສນາສະນະທີ່ຈັດແຈງແລ້ວແລະເສນາສະນະທີ່ຍັງບໍ່ໄດ້ຈັດແຈງ ຯລຯ

ສົງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນພັນທາຄາຣິກະ[3] ຯລຯ ບໍ່ຮູ້ຈັກເຄື່ອງຂອງທີ່ເກັບແລ້ວແລະເຄື່ອງຂອງ ທີ່ຍັງບໍ່ໄດ້ເກັບ ຯລຯ ສົງເພິ່ງແຕ່ງຕັ້ງໃຫ້ເປັນພັນທາຄາຣິກະ ຯລຯ ຮູ້ຈັກເຄື່ອງຂອງທີ່ເກັບແລ້ວແລະເຄື່ອງຂອງທີ່ຍັງບໍ່ໄດ້ເກັບ ຯລຯ

ສິງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນຈີວອນປະຕິກຄາຫະກະ[6] ໆລໆ ບໍ່ຮູ້ຈັກຈີວອນທີ່ຮັບໄວ້ແລ້ວແລະຈີວອນທີ່ຍັງບໍ່ໄດ້ຮັບໄວ້ ໆລໆ ສິງເພິ່ງແຕ່ງຕັ້ງໃຫ້ເປັນຈີວອນປະຕິກຄາຫະກະ ໆລໆ ຮູ້ຈັກຈີວອນທີ່ໄດ້ຮັບແລ້ວແລະຈີວອນທີ່ຍັງບໍ່ໄດ້ຮັບ ໆລໆ

ສິງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນຈີວອນພາຊະກະ[6] ໆລໆ ບໍ່ຮູ້ຈັກຈີວອນທີ່ແຈກແລ້ວແລະຈີວອນທີ່ຍັງບໍ່ໄດ້ແຈກ ໆລໆ ສິງເພິ່ງແຕ່ງຕັ້ງໃຫ້ເປັນຈີວອນພາຊະກະ ໆລໆ ຮູ້ຈັກຈີວອນທີ່ແຈກແລ້ວແລະຈີວອນທີ່ຍັງບໍ່ໄດ້ແຈກ ໆລໆ

ສິງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນຍາຄຸພາຊະກະ (ຜູ້ແຈກເຂົ້າຕົ້ມ) ໆລໆ ສິງເພິ່ງແຕ່ງຕັ້ງໃຫ້ເປັນຍາຄຸພາຊະກະ ໆລໆ

ສິງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນຜະລະພາຊະກະ (ຜູ້ແຈກໝາກໄມ້) ໆລໆ ສິງເພິ່ງແຕ່ງຕັ້ງໃຫ້ເປັນຜະລະພາຊະກະ ໆລໆ

ສິງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນຂັດຊະກະພາຊະກະ (ຜູ້ແຈກຂອງຂົບສັນ) ໆລໆ ບໍ່ຮູ້ຈັກຂອງຂົບສັນທີ່ແຈກແລ້ວ ແລະຂອງຂົບສັນທີ່ຍັງບໍ່ໄດ້ແຈກ ໆລໆ ສິງເພິ່ງແຕ່ງຕັ້ງໃຫ້ເປັນຂັດຊະກະພາຊະກະ ໆລໆ ຮູ້ຈັກຂອງຂົບສັນທີ່ແຈກແລ້ວແລະຂອງຂົບສັນທີ່ຍັງບໍ່ໄດ້ແຈກ ໆລໆ

ສິງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນອັບປະມັດຕະກະວິສັດຊະກະ (ຜູ້ແຈກຂອງເລັກໜ້ອຍ) ໆລໆ ບໍ່ຮູ້ຈັກຂອງເລັກໜ້ອຍທີ່ແຈກແລ້ວ ແລະຂອງເລັກໜ້ອຍທີ່ຍັງບໍ່ໄດ້ແຈກ ໆລໆ ສິງເພິ່ງແຕ່ງຕັ້ງໃຫ້ເປັນ ອັບປະມັດຕະກະວິສັດຊະກະ ໆລໆ ຮູ້ຈັກຂອງເລັກໜ້ອຍທີ່ແຈກແລ້ວແລະຂອງເລັກໜ້ອຍທີ່ຍັງບໍ່ໄດ້ແຈກ ໆລໆ

ສິງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນສາຕິຍະຄາຫາປະກະ (ຜູ້ໃຫ້ຮັບຜ້າສາດົກ) ໆລໆ ບໍ່ຮູ້ຈັກຜ້າສາດົກທີ່ຮັບແລ້ວ ແລະຜ້າສາດົກທີ່ຍັງບໍ່ໄດ້ຮັບ ໆລໆ ສິງເພິ່ງແຕ່ງຕັ້ງໃຫ້ເປັນສາຕິຍະຄາຫາປະກະ ໆລໆ ຮູ້ຈັກຜ້າສາດົກທີ່ຮັບແລ້ວ ແລະຜ້າສາດົກທີ່ຍັງບໍ່ໄດ້ຮັບ ໆລໆ

ສິງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນປັດຕະຄາຫາປະກະ (ຜູ້ໃຫ້ຮັບບາດ) ໆລໆ ບໍ່ຮູ້ຈັກບາດທີ່ຮັບແລ້ວແລະບາດທີ່ຍັງບໍ່ໄດ້ຮັບ ໆລໆ ສິງເພິ່ງແຕ່ງຕັ້ງໃຫ້ເປັນປັດຕະຄາຫາປະກະ ໆລໆ ຮູ້ຈັກບາດທີ່ຮັບແລ້ວແລະບາດທີ່ຍັງບໍ່ໄດ້ຮັບ ໆລໆ

ສິງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນອາຣາມເປສະກະ (ຜູ້ໃຊ້ຄົນວັດ) ໆລໆ ບໍ່ຮູ້ຈັກຄົນວັດທີ່ໃຊ້ແລ້ວແລະຄົນວັດທີ່ຍັງບໍ່ໄດ້ໃຊ້ ໆລໆ ສິງເພິ່ງແຕ່ງຕັ້ງໃຫ້ເປັນອາຣາມເປສະກະ ໆລໆ ຮູ້ຈັກຄົນວັດທີ່ໃຊ້ແລ້ວແລະຄົນວັດທີ່ຍັງບໍ່ໄດ້ໃຊ້ ໆລໆ

ສິງບໍ່ເພິ່ງແຕ່ງຕັ້ງໃຫ້ເປັນສາມະເນນເປສະກະ (ຜູ້ໃຊ້ສາມະເນນ) ๆລๆ ສິງເພິ່ງແຕ່ງຕັ້ງໃຫ້ເປັນສາມະເນນເປສະກະ ๆລๆ ເຖິງແຕ່ງຕັ້ງແລ້ວກໍບໍ່ເພິ່ງສົ່ງໄປ ๆລๆ ສິງແຕ່ງຕັ້ງແລ້ວເພິ່ງສົ່ງໄປ ເພິ່ງຮູ້ວ່າເປັນພານ ๆລๆ ເພິ່ງຮູ້ວ່າເປັນບັນດິດ ๆລๆ ບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ๆລๆ ບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ๆລๆ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້ ๆລๆ ບໍ່ຮູ້ຈັກສາມະເນນທີ່ໃຊ້ແລ້ວແລະສາມະເນນທີ່ຍັງບໍ່ໄດ້ໃຊ້ ๆລๆ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ລຳອຽງຍ້ອນ ຮັກ
໒. ບໍ່ລຳອຽງຍ້ອນ ຊັງ
໓. ບໍ່ລຳອຽງຍ້ອນ ຫຼົງ
໔. ບໍ່ລຳອຽງຍ້ອນ ຢ້ານ
໕. ຮູ້ຈັກພັດຕາຫານທີ່ແຈກແລ້ວແລະພັດຕາຫານທີ່ຍັງບໍ່ໄດ້ແຈກ

ພິກຂຸຜູ້ເປັນສາມະເນນເປສະກະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ເສນາສະນະປັນຍາປະກະສຸດຕາທິທີ ໒-໑໔ ຈົບ**

**ສຳມຸຕິເປີຍຍາລະ ຈົບ**

# ໒. ສິກຂາປະທະເປີຍຍາລະ

## ໑. ພິກຂຸສູດ

## ວ່າດ້ວຍພິກຂຸ

[໒໘໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ

໒. ເປັນຜູ້ລັກຊັບ
໓. ເປັນຜູ້ປະພຶດຜິດພົມມະຈັນ
໔. ເປັນຜູ້ເວົ້າຕົວະ
໕. ເປັນຜູ້ເສບຂອງມຶນເມົາຄືສຸຣາ ແລະ ເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການປະພຶດຜິດພົມມະຈັນ
໔. ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໕. ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາ ແລະ ເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ພິກຂຸສູດທີ ໑ ຈົບ**

## ໒-ກ. ພິກຂຸນີສຸດຕາທິ

## ວ່າດ້ວຍພິກຂຸນີເປັນຕົ້ນ

[໒໗ກ-໒໗໒] ພິກຂຸທັງຫຼາຍ ພິກຂຸນີປະກອບດ້ວຍທຳ ໕ ປະການ ฯລฯ ສິກຂະມານາ ฯລฯ ສາມະເນນ ฯລฯ ສາມະເນຣີ ฯລฯ ອຸປາສົກ ฯລฯ ອຸປາສິກາປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ

໒. ເປັນຜູ້ລັກຊັບ
໓. ເປັນຜູ້ປະພຶດຜິດໃນກາມ
໔. ເປັນຜູ້ເວົ້າຕົວະ
໕. ເປັນຜູ້ເສບຂອງມຶນເມົາຄືສຸຣາ ແລະ ເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໔. ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໕. ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ພິກຂຸນີສຸດຕາທີ່ທີ ໒-໗ ຈົບ**

## ໙. ອາຊີວະກະສູດ

## ວ່າດ້ວຍອາຊີວົກ

[໒໙໓] ພິກຂຸທັງຫຼາຍ ອາຊີວົກ[໑]ປະກອບດ້ວຍທຳ ໕ ປະການ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ
໒. ເປັນຜູ້ລັກຊັບ

໓. ເປັນຜູ້ປະພຶດຜິດພົມມະຈັນ
໔. ເປັນຜູ້ເວົ້າຕົວະ
໕. ເປັນຜູ້ເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ອາຊີວົກປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

**ອາຊີວະກະສູດທີ ໗ ຈົບ**

## ໙-໑໗. ນິຄັນຖະສຸດຕາທິ

## ວ່າດ້ວຍນິຄົນເປັນຕົ້ນ

[໒໙໔-໓໐໒] ພິກຂຸທັງຫຼາຍ ນິຄົນ[1]ປະກອບດ້ວຍທຳ ໕ ປະການ ຯລຯ ມຸນທະສາວົກ[2] ຯລຯ ຊະຕິລະກະ[3] ຯລຯ ປະຣິພາຊະກະ[4] ຯລຯ ມາຄັນຖິກະ[5] ຯລຯ ເຕຄັນຖິກະ ຯລຯ ອາຣຸດທະກະ ຯລຯ ໂຄຕະມະກະ ຯລຯ ເທວະທຳມິກະ ຯລຯ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ທຳ ໕ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ
໒. ເປັນຜູ້ລັກຊັບ
໓. ເປັນຜູ້ປະພຶດຜິດພົມມະຈັນ
໔. ເປັນຜູ້ເວົ້າຕົວະ
໕. ເປັນຜູ້ເສບຂອງມຶນເມົາຄືສຸຣາ ແລະ ເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ເທວະທຳມິກະປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

**ນິຄັນຖະສຸດຕາທິທີ ໙-໑໗ ຈົບ**

**ສິກຂາປະທະເປີຍຍາລະ ຈົບ**

# ໓. ຣາຄະເປີຍຍາລະ

[໓໐໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໕ ປະການ ເພື່ອຮູ້ຍິ່ງຣາຄະ (ຄວາມກຳໜັດ)

ທຳ ໕ ປະການ ອັນໃດແດ່ ຄື

໑. ອະສຸພະສັນຍາ
໒. ມໍຣະນະສັນຍາ
໓. ອາທີນະວະສັນຍາ
໔. ອາຫາເຣ ປະຕິກູນສັນຍາ
໕. ສັບພະໂລເກ ອະນະພິຣະຕະສັນຍາ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໕ ປະການນີ້ ເພື່ອຮູ້ຍິ່ງຣາຄະ

[໓໐໔] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໕ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ໕ ປະການ ອັນໃດແດ່ ຄື

໑. ອະນິດຈະສັນຍາ
໒. ອະນັດຕະສັນຍາ
໓. ມໍຣະນະສັນຍາ
໔. ອາຫາເຣ ປະຕິກູນສັນຍາ
໕. ສັບພະໂລເກ ອະນະພິຣະຕະສັນຍາ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໕ ປະການນີ້ ເພື່ອຮູ້ຍິ່ງຣາຄະ

[໓໐໕] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໕ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ໕ ປະການ ອັນໃດແດ່ ຄື

໑. ອະນິດຈະສັນຍາ
໒. ອະນິດເຈ ທຸກຂະສັນຍາ
໓. ທຸກເຂ ອະນັດຕະສັນຍາ
໔. ປະຫານະສັນຍາ
໕. ວິຣາຄະສັນຍາ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ๕ ປະການນີ້ ເພື່ອຮູ້ຍິ່ງຣາຄະ

[๓๐๗] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ๕ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ๕ ປະການ ອັນໃດແດ່ ຄື

໑. ສັດທິນຊີ
໒. ວິຣິຍິນຊີ
໓. ສະຕິນຊີ
໔. ສະມາທິນຊີ
໕. ປັນຍິນຊີ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ๕ ປະການນີ້ ເພື່ອຮູ້ຍິ່ງຣາຄະ

[๓๐๘] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ๕ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ๕ ປະການ ອັນໃດແດ່ ຄື

໑. ສັດທາພະລະ
໒. ວິຣິຍະພະລະ
໓. ສະຕິພະລະ
໔. ສະມາທິພະລະ
໕. ປັນຍາພະລະ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ๕ ປະການນີ້ ເພື່ອຮູ້ຍິ່ງຣາຄະ

[๓๐๙-໑໑๕໑] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ๕ ປະການນີ້ ເພື່ອກຳນົດຮູ້ຣາຄະ

ຯລຯ ເພື່ອຄວາມສິ້ນຣາຄະ
ຯລຯ ເພື່ອລະຣາຄະ
ຯລຯ ເພື່ອຄວາມສິ້ນໄປແຫ່ງຣາຄະ
ຯລຯ ເພື່ອຄວາມເສື່ອມໄປແຫ່ງຣາຄະ
ຯລຯ ເພື່ອຄວາມຄາຍອອກແຫ່ງຣາຄະ
ຯລຯ ເພື່ອຄວາມດັບໄປແຫ່ງຣາຄະ
ຯລຯ ເພື່ອຄວາມສະລະຣາຄະ
ຯລຯ ເພື່ອຄວາມສະລະຄືນຣາຄະ

ຯລຯ ໂທສະ (ຄວາມຄິດປະທຸດສະຮ້າຍ) ຯລຯ ໂມຫະ (ຄວາມຫຼົງ) ຯລຯ ໂກທະ (ຄວາມໂກດ) ຯລຯ ອຸປະນາຫະ (ຄວາມຜູກໂກດ) ຯລຯ ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ຯລຯ ປະລາສະ (ຄວາມຕີສະເໝີ) ຯລຯ ອິດສາ (ຄວາມຣິດສະຫຍາ) ຯລຯ ມັດສະຣິຍະ (ຄວາມຂີ້ຖີ່) ຯລຯ ມາຍາ (ມານຍາ) ຯລຯ ສາເຖັຍຍະ (ຄວາມໂອ້ອວດ) ຯລຯ ຖຳພະ (ຄວາມຫົວດື້) ສາຣຳພະ (ຄວາມແຂ່ງດີ) ຯລຯ ມານະ (ຄວາມຖືໂຕ) ຯລຯ ອະຕິມານະ (ຄວາມດູໝິ່ນ) ຯລຯ ມະທະ (ຄວາມມົວເມົາ) ຯລຯ ປະມາທະ (ຄວາມຜະໝາດ) ຯລຯ

ທຳ ໕ ປະການ ອັນໃດແດ່ ຄື

໑. ສັດທາພະລະ
໒. ວິຣິຍະພະລະ
໓. ສະຕິພະລະ
໔. ສະມາທິພະລະ
໕. ປັນຍາພະລະ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໕ ປະການນີ້ ເພື່ອຄວາມສະລະຄືນປະມາທະ

**ຣາຄະເປັຍຍາລະ ຈົບ**

## ລວມທຳທີ່ມີໃນເປັຍຍາລະນີ້ ຄື

### ທຳ ໑໐ ປະການນີ້ ຄື

| | | | |
|---|---|---|---|
| ໑. ອະພິນຍາ | (ຄວາມຮູ້ຍິ່ງ) | ໒. ປະຣິນຍາ | (ການກຳນົດຮູ້) |
| ໓. ປະຣິກະຂະຍາ | (ຄວາມສິ້ນ) | ໔. ປະຫານະ | (ການລະ) |
| ໕. ຂະຍະ | (ຄວາມສິ້ນໄປ) | ໖. ວະຍະ | (ຄວາມເສື່ອມໄປ) |
| ໗. ວິຣາຄະ | (ຄວາມຄາຍອອກ) | ໘. ນິໂຣທະ | (ຄວາມດັບໄປ) |
| ໙. ຈາຄະ | (ຄວາມສະລະ) | ໑໐. ປະຕິນິສະສັກຄະ | (ຄວາມສະລະຄືນ) |

**ປັນຈະກະນິບາດ ຈົບບໍລິບູນ**

## ລວມວັກທີ ມີໃນປັນຈະກະນິບາດນີ້ ຄື

໑. ເສຂະພະລະວັກ
໒. ພະລະວັກ
໓. ປັນຈັງຄິກະວັກ
໔. ສຸມະນະວັກ

໕. ມຸນທະຣາຊະວັກ

໖. ນິວະຣະນະວັກ

໗. ສັນຍາວັກ

໘. ໂຍທາຊີວະວັກ

໙. ເຖຣະວັກ

໑໐. ກະກຸທະວັກ

໑໑. ຜາສຸວິຫາຣະວັກ

໑໒. ອັນທະກະວິນທະວັກ

໑໓. ຄິລານະວັກ

໑໔. ຣາຊະວັກ

໑໕. ຕິກັນທະກີວັກ

໑໖. ສັດທຳມະວັກ

໑໗. ອາຄາຕະວັກ

໑໘. ອຸປາສະກະວັກ

໑໙. ອະຣັນຍະວັກ

໒໐. ພາມມະນະວັກ

໒໑. ກິມິລະວັກ

໒໒. ອັກໂກສະກະວັກ

໒໓. ທີຄະຈາຣິກະວັກ

໒໔. ອາວາສິກະວັກ

໒໕. ທຸດຈະຣິຕະວັກ

໒໖. ອຸປະສຳປະທາວັກ

# พระสูดตันตะปิดົກ

## อັງຄຸດຕະຣະນິກາຍ ສັກກະນິບາດ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ

## ໑. ປະຖົມປັນນາດ

### ໑. ອາຫຸເນີຍຍະວັກ

### ໝວດວ່າດ້ວຍພຣະອາຫຸໄນຍະບຸກຄົນ

### ໑. ປະຖົມອາຫຸເນີຍຍະສູດ

### ວ່າດ້ວຍພຣະອາຫຸໄນຍະບຸກຄົນສູດທີ ໑

[໑] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາ ຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ ທຳ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເຫັນຮູບທາງຕາແລ້ວ ບໍ່ດີໃຈ ບໍ່ເສຍໃຈ໌ ມີອຸເປກຂາ ມີສະຕິສຳປະຊັນຍະຢູ່
໒. ຟັງສຽງທາງຫູ ຯລຯ
໓. ດົມກິ່ນທາງດັງ ຯລຯ

๔. ຊີມຣົດທາງລີ້ນ ฯລฯ
๕. ຖືກຕ້ອງໂຜດຖັບພະທາງກາຍ ฯລฯ
๖. ຮູ້ແຈ້ງທຳມາຣົມທາງໃຈແລ້ວ ບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາ ມີສະຕິ-ສຳປະຊັນຍະຢູ່

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ๖ ປະການນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂີນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບບນີ້ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພາສິດຂອງພຣະຜູ້ມີພຣະພາກເຈົ້າ

**ປະຖົມອາຫຸເນີຍຍະສູດທີ ๑ ຈົບ**

## ๒. ທຸຕິຍະອາຫຸເນີຍຍະສູດ[๒]

## ວ່າດ້ວຍພຣະອາຫຸໄນຍະບຸກຄົນສູດທີ ๒

[๒] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ๖ ປະການ ເປັນຜູ້ຄວນແກ່ຂອງ ທີ່ເຂົານຳມາຖວາຍ ฯລฯ ເປັນນາບຸນອັນປະເສີດຂອງໂລກ ທຳ ๖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

๑. ສະແດງລິດໄດ້ຫຼາຍແບບ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດຫຼືໃຫ້ຫາຍໄປກໍໄດ້ ຊອດຝາກຳແພງ ແລະພູໄປໄດ້ບໍ່ຕິດຂັດຄືໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນ ຫຼືມຸດລົງໃນແຜ່ນດິນຄືໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນແລະດວງອາທິດອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

๒. ໄດ້ຍິນສຽງ ๒ ຊະນິດ ຄື ສຽງທິບ ແລະສຽງມະນຸດ ທັງທີ່ຢູ່ໄກ ແລະຢູ່ໃກ້ດ້ວຍຫູທິບອັນບໍລິສຸດເໜືອມະນຸດ

๓. ກຳນົດຮູ້ຈິດຂອງສັດແລະບຸກຄົນອື່ນໄດ້ດ້ວຍຈິດຂອງຕົນ ຄື ຈິດມີຣາຄະກໍຮູ້ວ່າມີຣາຄະ ຫຼືປາສະຈາກຣາຄະກໍຮູ້ວ່າປາສະຈາກຣາຄະ ຈິດມີໂທສະກໍຮູ້ວ່າມີໂທສະ ຫຼືປາສະຈາກໂທສະກໍຮູ້ວ່າ

ປາສະຈາກໂທສະ ຈິດມີໂມຫະກໍຮູ້ວ່າມີໂມຫະ ຫຼືປາສະຈາກໂມຫະກໍຮູ້ວ່າປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ວ່າ ຫົດຫູ່ ຫຼືຟຸ້ງຊ່ານກໍຮູ້ວ່າຟຸ້ງຊ່ານ ຈິດເປັນມະຫັກຄະຕະ[១]ກໍຮູ້ວ່າເປັນມະຫັກຄະຕະ ບໍເປັນມະ ຫັກຄະຕະກໍຮູ້ວ່າບໍ່ເປັນມະຫັກຄະຕະ ຈິດມີຈິດອື່ນຍິ່ງກວ່າກໍຮູ້ວ່າມີ ຈິດອື່ນຍິ່ງກວ່າ ບໍ່ມີຈິດອື່ນຍິ່ງກວ່າກໍຮູ້ວ່າບໍ່ມີຈິດອື່ນຍິ່ງກວ່າ ຈິດເປັນສະມາທິກໍຮູ້ວ່າເປັນສະມາທິ ບໍເປັນສະມາທິກໍຮູ້ວ່າບໍ່ເປັນສະມາທິ ຈິດລຸດພົ້ນກໍຮູ້ວ່າລຸດພົ້ນ ບໍ່ລຸດພົ້ນກໍຮູ້ວ່າບໍ່ລຸດພົ້ນ

໔. ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບຫຼວງຫຼາຍແດ່ ຕະຫຼອດວິວັດຕະກັບຫຼວງຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບຫຼວງຫຼາຍແດ່ວ່າ "ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້" ຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້

໕. ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະ ບໍ່ງາມ[២] ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ຊັກຊວນ ຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ວ່າຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ" ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດທັງຊັ້ນຕ່ຳ ແລະ ຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ

໖. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະ ສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ຄວນແກ່ຂອງ ທີ່ເຂົານຳມາຖວາຍ ໆລໆ ເປັນນາບຸນອັນປະເສີດຂອງໂລກ

**ທຸຕິຍະອາຫຸເນີຍຍະສູດທີ ໒ ຈົບ**

# ໓. ອິນທະຣິຍະສູດ

## ວ່າດ້ວຍອິນຊີ

[໓] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ຄວນແກ່ຂອງ ທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ທຳ ໖ ປະການ ອັນໃດແດ່ ຄື

໑. ສັດທິນຊີ (ອິນຊີຄືສັດທາ)
໒. ວິຣິຍິນຊີ (ອິນຊີຄືວິຣິຍະ)
໓. ສະຕິນຊີ (ອິນຊີຄືສະຕິ)
໔. ສະມາທິນຊີ (ອິນຊີຄືສະມາທິ)
໕. ປັນຍິນຊີ (ອິນຊີຄືປັນຍາ)
໖. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

**ອິນທະຣິຍະສູດທີ ໓ ຈົບ**

# ໔. ພະລະສູດ

## ວ່າດ້ວຍພະລະ

[໔] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ທຳ ໖ ປະການ ອັນໃດແດ່ ຄື

໑. ສັດທາພະລະ (ກຳລັງຄືສັດທາ)
໒. ວິຣິຍະພະລະ (ກຳລັງຄືວິຣິຍະ)
໓. ສະຕິພະລະ (ກຳລັງຄືສະຕິ)

໔. ສະມາທິພະລະ (ກຳລັງຄືສະມາທິ)

໕. ປັນຍາພະລະ (ກຳລັງຄືປັນຍາ)

໖. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ ເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ພະລະສູດທີ ໔ ຈົບ**

## ໕. ປະຖົມອາຊານີຍະສູດ

## ວ່າດ້ວຍອົງປະກອບຂອງມ້າອາຊາໄນສູດທີ ໑

[໕] ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາ ປະກອບດ້ວຍອົງ[੧] ໖ ປະການເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ອົງ ໖ ປະການ ອັນໃດແດ່ ຄື

ມ້າອາຊາໄນພັນດີຂອງພຣະຣາຊາໃນໂລກນີ້

໑. ເປັນສັດອົດທົນຕໍ່ ຮູບ
໒. ເປັນສັດອົດທົນຕໍ່ ສຽງ
໓. ເປັນສັດອົດທົນຕໍ່ ກິ່ນ
໔. ເປັນສັດອົດທົນຕໍ່ ຣົດ
໕. ເປັນສັດອົດທົນຕໍ່ ໂຜດຖັບພະ
໖. ເປັນສັດສົມບູນດ້ວຍສີ

ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາ ປະກອບດ້ວຍອົງ ໖ ປະການນີ້ແລເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ ກໍຄືກັນສັນນັ້ນ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ອົດທົນຕໍ່ ຮູບ
໒. ເປັນຜູ້ອົດທົນຕໍ່ ສຽງ
໓. ເປັນຜູ້ອົດທົນຕໍ່ ກິ່ນ
໔. ເປັນຜູ້ອົດທົນຕໍ່ ຣົດ
໕. ເປັນຜູ້ອົດທົນຕໍ່ ໂຜດຖັບພະ
໖. ເປັນຜູ້ອົດທົນຕໍ່ ທຳມາຣົມ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ໆລໆ ເປັນນາບຸນອັນປະເສີດຂອງໂລກ

**ປະຖົມອາຊານີຍະສູດທີ ໕ ຈົບ**

## ໖. ທຸຕິຍະອາຊານີຍະສູດ

## ວ່າດ້ວຍອົງປະກອບຂອງມ້າອາຊາໄນສູດທີ ໒

[໖] ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາ ປະກອບດ້ວຍອົງ ໖ ປະການ ເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້

ອົງ ໖ ປະການ ອັນໃດແດ່ ຄື

ມ້າອາຊາໄນພັນດີຂອງພຣະຣາຊາໃນໂລກນີ້

໑. ເປັນສັດອົດທົນຕໍ່ ຮູບ
໒. ເປັນສັດອົດທົນຕໍ່ ສຽງ
໓. ເປັນສັດອົດທົນຕໍ່ ກິ່ນ
໔. ເປັນສັດອົດທົນຕໍ່ ຣົດ
໕. ເປັນສັດອົດທົນຕໍ່ ໂຜດຖັບພະ
໖. ເປັນສັດສົມບູນດ້ວຍກຳລັງ

ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາ ປະກອບດ້ວຍອົງ ໖ ປະການ ນີ້ແລ ເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ ກໍຄືກັນສັນນັ້ນ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ໆລໆ ເປັນນາບຸນອັນປະເສີດຂອງໂລກ

ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ອົດທົນຕໍ່ ຮູບ
໒. ເປັນຜູ້ອົດທົນຕໍ່ ສຽງ
໓. ເປັນຜູ້ອົດທົນຕໍ່ ກິ່ນ
໔. ເປັນຜູ້ອົດທົນຕໍ່ ຣົດ
໕. ເປັນຜູ້ອົດທົນຕໍ່ ໂຜດຖັບພະ
໖. ເປັນຜູ້ອົດທົນຕໍ່ ທຳມາຣົມ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ທຸຕິຍະອາຊານີຍະສູດທີ ໖ ຈົບ**

## ໗. ຕະຕິຍະອາຊານີຍະສູດ

## ວ່າດ້ວຍອົງປະກອບຂອງມ້າອາຊາໄນສູດທີ ໓

[໗] ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາ ປະກອບດ້ວຍອົງ ໖ ປະການ ເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້

ອົງ ໖ ປະການ ອັນໃດແດ່ ຄື

ມ້າອາຊາໄນພັນດີຂອງພຣະຣາຊາໃນໂລກນີ້

໑. ເປັນສັດອົດທົນຕໍ່ ຮູບ
໒. ເປັນສັດອົດທົນຕໍ່ ສຽງ
໓. ເປັນສັດອົດທົນຕໍ່ ກິ່ນ
໔. ເປັນສັດອົດທົນຕໍ່ ຣົດ
໕. ເປັນສັດອົດທົນຕໍ່ໂຜດຖັບພະ
໖. ເປັນສັດສົມບູນດ້ວຍເຊົາ (ການແລ່ນໄວ)

ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາປະກອບດ້ວຍອົງ ໖ ປະການນີ້ ເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໒ ປະການນີ້ ເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາ ຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ ທຳ ໒ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ອົດທົນຕໍ່ຮູບ

ຯລຯ

໒. ເປັນຜູ້ອົດທົນຕໍ່ທຳມາຣົມ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໒ ປະການນີ້ ເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາ ຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ຕະຕິຍະອາຊານີຍະສູດທີ ໗ ຈົບ**

## ໘. ອະນຸດຕະຣິຍະສູດ

## ວ່າດ້ວຍອະນຸດຕະຣິຍະ[1]

[໘] ພິກຂຸທັງຫຼາຍ ອະນຸດຕະຣິຍະ(ພາວະອັນຍອດຢ້ຽມ) ໒ ປະການນີ້
ອະນຸດຕະຣິຍະ ໒ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ທັດສະນານຸດຕະຣິຍະ | (ການເຫັນອັນຍອດຢ້ຽມ) |
| ໒. ສະວະນານຸດຕະຣິຍະ | (ການຟັງອັນຍອດຢ້ຽມ) |
| ໓. ລາພານຸດຕະຣິຍະ | (ການໄດ້ອັນຍອດຢ້ຽມ) |
| ໔. ສິກຂານຸດຕະຣິຍະ | (ການສຶກສາອັນຍອດຢ້ຽມ) |
| ໕. ປາຣິຈະຣິຍານຸດຕະຣິຍະ | (ການບຳລຸງອັນຍອດຢ້ຽມ) |
| ໒. ອະນຸດສະຕານຸດຕະຣິຍະ[1] | (ການຣະນຶກອັນຍອດຢ້ຽມ) |

ພິກຂຸທັງຫຼາຍ ອະນຸດຕະຣິຍະ ໒ ປະການນີ້ແລ

**ອະນຸດຕະຣິຍະສູດທີ ໘ ຈົບ**

## ໙. ອະນຸດສະຕິດຖານະສູດ

## ວ່າດ້ວຍອະນຸດສະຕິດຖານ[໒]

[໙] ພິກຂຸທັງຫຼາຍ ອະນຸດສະຕິດຖານ ໒ ປະການນີ້

ອະນຸດສະຕິດຖານ ໖ ປະການ ອັນໃດແດ່ ຄື

໑. ພຸດທານຸດສະຕິ (ການຣະນຶກເຖິງພຣະພຸດທະເຈົ້າ)
໒. ທຳມານຸດສະຕິ (ການຣະນຶກເຖິງພຣະທຳ)
໓. ສັງຄານຸດສະຕິ (ການຣະນຶກເຖິງພຣະສົງ)
໔. ສີລານຸດສະຕິ (ການຣະນຶກເຖິງສີນ)
໕. ຈາຄານຸດສະຕິ (ການຣະນຶກເຖິງການບໍລິຈາກ)
໖. ເທວະຕານຸດສະຕິ (ຣະນຶກເຖິງເທວະດາ)

ພິກຂຸທັງຫຼາຍ ອະນຸດສະຕິດຖານ ໖ ປະການນີ້ແລ

**ອະນຸດສະຕິດຖານສູດທີ ໙ ຈົບ**

## ໑໐. ມະຫານາມະສູດ

## ວ່າດ້ວຍເຈົ້າສາກະຍະມະຫານາມ

[໑໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ຄັ້ງນັ້ນແລ ເຈົ້າສາກະຍະພຣະນາມວ່າມະຫານາມ[๑] ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

“ຂ້າແດ່ ພຣະອົງຜູ້ຈະເລີນ ອະຣິຍະສາວົກຜູ້ໄດ້ບັນລຸຜົນແລ້ວ[๒] ຮູ້ແຈ້ງສາດສະໜາແລ້ວ ສ່ວນຫຼາຍຍ່ອມຢູ່ດ້ວຍວິຫານທຳຊະນິດໃດ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ມະຫານາມ ອະຣິຍະສາວົກຜູ້ໄດ້ບັນລຸຜົນແລ້ວ ຮູ້ແຈ້ງສາດສະໜາແລ້ວ ສ່ວນຫຼາຍຍ່ອມຢູ່ດ້ວຍວິຫານທຳນີ້ ຄື

໑. ອະຣິຍະສາວົກໃນທຳວິໄນນີ້ ຣະນຶກເຖິງຕະຖາຄົດວ່າ “ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍ ວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີ ເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ” ມະຫານາມ ສະໄໝໃດ ອະຣິຍະສາວົກຣະນຶກເຖິງຕະຖາຄົດ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມຜາຣົບຕະຖາຄົດດຳເນີນໄປຊື່ ຢ່າງແນ່ນອນ ມະຫາ

ນາມ ກໍອະຣິຍະສາວິກາຜູ້ມີຈິດດຳເນີນໄປຊື່ແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ ຍ່ອມໄດ້ຄວາມຍິນດີອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມ ຕັ້ງໝັ້ນ ມະຫານາມ ຕະຖາຄົດກ່າວວ່າ ອະຣິຍະສາວິການີ້ເປັນຜູ້ເຖິງຄວາມສະງົບຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ ເປັນຜູ້ບໍ່ມີພະຍາບາດຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳ ຈະເລີນພຸດທານຸດສະຕິຢູ່

໘. ອະຣິຍະສາວິກາຣະນຶກເຖິງທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ໑ ຄວນເອີ້ນໃຫ້ເບິ່ງຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ" ມະຫານາມ ສະໄໝໃດ ອະຣິຍະສາວິກາຣະນຶກເຖິງທຳ ສະໄໝນັ້ນ ຈິດຂອງ ອະຣິຍະສາວິການັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະ ກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວິການັ້ນຍ່ອມຜາຣົບທຳດຳເນີນໄປກົງຢ່າງແນ່ນອນ ມະຫານາມ ກໍອະຣິຍະສາວິກາຜູ້ມີຈິດດຳເນີນໄປຊື່ແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ ຍ່ອມໄດ້ຄວາມຍິນດີອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ຕະຖາຄົດກ່າວວ່າ ອະຣິຍະສາວິການີ້ເປັນຜູ້ເຖິງຄວາມສະງົບຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ ເປັນຜູ້ບໍ່ມີພະຍາບາດຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳ ຈະເລີນທຳມານຸດສະຕິຢູ່

໙. ອະຣິຍະສາວິກາຣະນຶກເຖິງພຣະສົງວ່າ "ພຣະສົງສາວິກາຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ປະຕິບັດຊື່ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ຄື ໘ ບຸກຄົນ໑ ພຣະສົງສາວິກາຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ" ມະຫານາມ ສະໄໝໃດ ອະຣິຍະສາວິກາຣະນຶກເຖິງພຣະສົງ ສະໄໝນັ້ນ ຈິດຂອງອະຣິຍະສາວິການັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວິການັ້ນຍ່ອມຜາຣົບພຣະສົງດຳເນີນໄປຊື່ ຢ່າງແນ່ນອນ ມະຫານາມ ກໍອະຣິຍະສາວິກາຜູ້ມີຈິດດຳເນີນໄປຊື່ແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ ຍ່ອມໄດ້ຄວາມຍິນດີອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ຕະຖາຄົດກ່າວວ່າ ອະຣິຍະສາວິການີ້ເປັນຜູ້ເຖິງຄວາມສະງົບຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ ເປັນຜູ້ບໍ່ມີພະຍາບາດຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳ ຈະເລີນສັງຄານຸດສະຕິຢູ່

໔. ອະຣິຍະສາວິກາຣະນຶກເຖິງສີນຂອງຕົນ ທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ສະໄໝໃດອະຣິຍະສາວິກາ ຣະນຶກເຖິງສີນ ສະໄໝນັ້ນ ຈິດຂອງອະຣິຍະສາວິການັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນຈິດຂອງອະຣິຍະສາວິການັ້ນຍ່ອມຜາຣົບສີນດຳເນີນໄປຊື່ຍ່າງແນ່ນອນ ມະຫານາມ ກໍອະຣິຍະສາວິກາຜູ້ມີຈິດດຳເນີນໄປຊື່ແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ ຍ່ອມໄດ້ຄວາມຍິນດີອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ຕະຖາຄົດກ່າວວ່າ ອະຣິຍະສາວິການີ້ເປັນຜູ້ເຖິງຄວາມສະງົບຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ ເປັນຜູ້ບໍ່ມີພະຍາບາດຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳ ຈະເລີນສີລານຸດສະຕິຢູ່

໕. ອະຣິຍະສາວິກາຣະນຶກເຖິງຈາຄະ(ການສະລະ) ຂອງຕົນວ່າ "ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ເມື່ອໝູ່ສັດຖືກຄວາມຂີ້ຖີ່ອັນເປັນມົນທິນກຸ້ມລຸມ ເຮົາມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການແຈກທານຢູ່ຄອງເຮືອນ" ມະຫານາມ ສະໄໝໃດ ອະຣິຍະສາວິກາຣະນຶກເຖິງຈາຄະ ສະໄໝນັ້ນ ຈິດຂອງອະຣິຍະສາວິການັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວິການັ້ນຍ່ອມຜາຣົບຈາຄະດຳເນີນໄປຊື່ແທ້ ມະຫານາມ ກໍອະຣິຍະສາວິກາຜູ້ມີຈິດດຳເນີນໄປຊື່ແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ ຍ່ອມໄດ້ຄວາມຍິນດີອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ຕະຖາຄົດກ່າວວ່າ ອະຣິຍະສາວິການີ້ເປັນຜູ້ເຖິງຄວາມສະງົບຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ ເປັນຜູ້ບໍ່ມີພະຍາບາດຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳ ຈະເລີນຈາຄານຸດສະຕິຢູ່

໖. ອະຣິຍະສາວິກາຈະເລີນເທວະຕານຸດສະຕິວ່າ "ມີເທວະດາຊັ້ນຈາຕຸມະຫາຣາດ ເທວະດາ ຊັ້ນຕາວະຕິງສາ ເທວະດາຊັ້ນຍາມາ ເທວະດາຊັ້ນດຸສິດ ເທວະດາຊັ້ນນິມມານະຣະດີ ເທວະດາຊັ້ນປະຣະນິມມິຕະວະສະວັດດີ ເທວະດາຊັ້ນພົມກາຍ ເທວະດາຊັ້ນສູງຂຶ້ນໄປກວ່ານັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍສັດທາເຊັ່ນໃດ ຈຸຕິຈາກໂລກນີ້ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີສັດທາເຊັ່ນນັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍສີນເຊັ່ນໃດ ຈຸຕິຈາກໂລກນີ້ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີສີນເຊັ່ນນັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍສຸຕະເຊັ່ນໃດ ຈຸຕິຈາກໂລກນີ້ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີສຸຕະ ເຊັ່ນນັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍຈາຄະເຊັ່ນໃດ ຈຸຕິຈາກໂລກນີ້ແລ້ວ ໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີຈາຄະເຊັ່ນນັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍປັນຍາເຊັ່ນໃດ ຈຸຕິຈາກໂລກນີ້ແລ້ວ

ໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີປັນຍາເຊັ່ນນັ້ນ" ມະຫານາມ ສະໄໝໃດ ອະຣິຍະສາວິກາຣະນຶກເຖິງສັດທາ ສິນ ສຸຕະ ຈາຄະ ແລະປັນຍາຂອງຕົນແລະຂອງເທວະດາເຫຼົ່ານັ້ນ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນຈິດຂອງອະຣິຍະສາວົກນັ້ນຍ່ອມຜາຣົບເທວະດາທັງຫຼາຍດຳເນີນໄປຊື່ຢ່າງແນ່ນອນ ມະຫານາມ ກໍອະຣິຍະສາວົກຜູ້ມີຈິດດຳເນີນໄປຊື່ແລ້ວ ຍ່ອມໄດ້ຄວາມຍິນດີອິງອັດຖະ ຍ່ອມໄດ້ຄວາມຍິນດີ ອິງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ຕະຖາຄົດກ່າວວ່າ ອະຣິຍະສາວົກນີ້ເປັນຜູ້ເຖິງຄວາມສະງົບຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ ເປັນຜູ້ບໍ່ມີພະຍາບາດ ຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳຈະເລີນເທວະຕານຸດສະຕິຢູ່

ມະຫານາມ ອະຣິຍະສາວົກຜູ້ໄດ້ບັນລຸຜົນແລ້ວ ຮູ້ແຈ້ງສາດສະໜາແລ້ວ ສ່ວນຫຼາຍຍ່ອມຢູ່ດ້ວຍວິຫານທຳນີ້"

**ມະຫານາມະສູດທີ ໑໐ ຈົບ**

**ອາຫຸເນີຍຍະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປະຖົມອາຫຸເນີຍຍະສູດ | ໒. ທຸຕິຍະອາຫຸເນີຍຍະສູດ |
| ໓. ອິນທະຣິຍະສູດ | ໔. ພະລະສູດ |
| ໕. ປະຖົມອາຊານີຍະສູດ | ໖. ທຸຕິຍະອາຊານີຍະສູດ |
| ໗. ຕະຕິຍະອາຊານີຍະສູດ | ໘. ອະນຸດຕະຣິຍະສູດ |
| ໙. ອະນຸດສະຕິດຖານະສູດ | ໑໐. ມະຫານາມະສູດ |

# ໘. ສາຣະນີຍະວັກ

## ໝວດວ່າດ້ວຍສາຣະນີຍະທຳ

## ໑. ປະຖົມສາຣະນີຍະສູດ

### ວ່າດ້ວຍສາຣະນີຍະທຳສູດທີ ໑

[໑໑] ພິກຂຸທັງຫຼາຍ ສາຣະນີຍະທຳ (ທຳເປັນເຫດໃຫ້ຣະນຶກເຖິງກັນ) ໖ ປະການນີ້ ສາຣະນີຍະທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຕັ້ງໝັ້ນເມດຕາກາຍຍະກຳ[໑] ໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣະນີຍະທຳ

໒. ຕັ້ງໝັ້ນເມດຕາວະຈີກຳໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣະນີຍະທຳ

໓. ຕັ້ງໝັ້ນເມດຕາມະໂນກຳໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣະນີຍະທຳ

໔. ບໍຣິໂພກໂດຍບໍ່ແບ່ງແຍກ[໒]ລາບທັງຫຼາຍທີ່ປະກອບດ້ວຍທຳ ໄດ້ມາໂດຍທຳ ໂດຍທີ່ສຸດແມ່ນພຽງບິນທະບາດ ບໍຣິໂພກຮ່ວມກັບເພື່ອນພົມມະຈາຣີທັງຫຼາຍຜູ້ມີສີນ ແມ່ນນີ້ກໍເປັນສາຣະນີຍະທຳ

໕. ມີສີນທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣະນີຍະທຳ

໖. ມີອະຣິຍະທິດຖິ[໓] ອັນເປັນທຳເຄື່ອງນຳອອກ[໔]ເພື່ອຄວາມສິ້ນສຸດທຸກໂດຍຖືກຕ້ອງແກ່ຜູ້ເຮັດຕາມ ສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣະນີຍະທຳ

ພິກຂຸທັງຫຼາຍ ສາຣະນີຍະທຳ ໖ ປະການນີ້ແລ

**ປະຖົມສາຣະນີຍະສູດທີ ໑ ຈົບ**

# ๘. ທຸຕິຍະສາຣະນີຍະສູດ

## ວ່າດ້ວຍສາຣະນີຍະທຳສູດທີ່ ໒

[໑໘] ພິກຂຸທັງຫຼາຍ ສາຣະນີຍະທຳ ໖ ປະການນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ ສາຣະນີຍະທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຕັ້ງໝັ້ນເມດຕາກາຍຍະກຳໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໒. ຕັ້ງໝັ້ນເມດຕາວະຈີກຳ ຯລຯ

໓. ຕັ້ງໝັ້ນເມດຕາມະໂນກຳໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໔. ບໍຣິໂພກໂດຍບໍ່ແບ່ງແຍກລາບທັງຫຼາຍທີ່ປະກອບດ້ວຍທຳ ໄດ້ມາໂດຍທຳ ໂດຍທີ່ສຸດແມ່ນພຽງບິນທະບາດ ບໍຣິໂພກຮ່ວມກັບເພື່ອນພົມມະຈາຣີທັງຫຼາຍຜູ້ມີສິນ ແມ່ນນີ້ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໕. ມີສິນທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

๖. มีอะริยะทิดถิ อันเป็นทำเถื่องนำออกเพื่อถวามสิ้นสุดทุกโดยถືກต้องแก่ผู้เร็ดนำ สะเໝີກັນກັບເພື່ອນພົມມະຈາຣີທັງຫຼາຍທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສັງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

ພິກຂຸທັງຫຼາຍ ສາຣະນີຍະທຳ ๖ ປະການນີ້ແລ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

**ທຸຕິຍະສາຣະນີຍະສູດທີ່ ๘ ຈົບ**

## ๓. ນິດສາຣະນີຍະສູດ

## ວ່າດ້ວຍທາດທີ່ກຳຈັດ

[໑໓] ພິກຂຸທັງຫຼາຍ ທາດທີ່ກຳຈັດ ๖ ປະການນີ້

ທາດ[๑]ທີ່ກຳຈັດ ๖ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ເພິ່ງກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ຈະເລີນເມດຕາ ເຈໂຕວິມຸດຕິແລ້ວ[๒] ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣິບດີແລ້ວ ແຕ່ພະຍາບາດກໍຍັງຄອບງຳຈິດຂອງຂ້າພະເຈົ້າຢູ່" ພິກຂຸທັງຫຼາຍເພິ່ງກ່າວຕັກເຕືອນທ່ານວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ທ່ານຢ່າໄດ້ກ່າວແນວນີ້ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ຕັດແນວນີ້ເລີຍ ຜູ້ມີອາຍຸ ເປັນໄປບໍ່ໄດ້ເລີຍທີ່ພິກຂຸໄດ້ຈະເລີນເມດຕາໂຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣິບດີແລ້ວ ແຕ່ພະຍາບາດກໍຍັງຄອບງຳຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນເປັນໄປບໍ່ໄດ້ເລີຍ ຍ້ອນເມດຕາເຈໂຕວິມຸດຕິນີ້ເປັນທາດທີ່ກຳຈັດພະຍາບາດ

໒. ພິກຂຸໃນທຳວິໄນນີ້ເພິ່ງກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ຈະເລີນກະລຸນາເຈໂຕວິມຸດຕິ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣິບດີແລ້ວ ແຕ່ວິຫິງສາ (ຄວາມບຽດບຽນ) ກໍຍັງຄອບງຳຈິດຂອງຂ້າພະເຈົ້າຢູ່" ພິກຂຸທັງຫຼາຍເພິ່ງກ່າວຕັກເຕືອນທ່ານວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ທ່ານຢ່າໄດ້ກ່າວແນວນີ້

ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນການກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ຕັດແນວນີ້ເລີຍ ຜູ້ມີອາຍຸ ເປັນໄປບໍ່ໄດ້ເລີຍທີ່ພິກຂຸໄດ້ຈະເລີນກະລຸນາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ວິຫິງສາກໍຍັງຄອບງໍາຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນເປັນໄປບໍ່ໄດ້ເລີຍ ຍ້ອນກະລຸນາເຈໂຕວິມຸດຕິນີ້ເປັນທາດທີ່ກໍາຈັດວິຫິງສາ

໓. ພິກຂຸໃນທໍາວິໄນນີ້ເພິ່ງກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ຈະເລີນມຸທິຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ອະຣະຕິ(ຄວາມບໍ່ຍິນດີ) ກໍຍັງຄອບງໍາຈິດຂອງຂ້າພະເຈົ້າຢູ່" ພິກຂຸທັງຫຼາຍເພິ່ງກ່າວ ຕັກເຕືອນທ່ານວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ຢ່າໄດ້ກ່າວແນວນີ້ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ຕັດແນວນີ້ເລີຍ ຜູ້ມີອາຍຸ ເປັນໄປບໍ່ໄດ້ເລີຍທີ່ພິກຂຸໄດ້ຈະເລີນມຸທິຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ອະຣະຕິກໍຍັງຄອບງໍາຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນເປັນໄປບໍ່ໄດ້ເລີຍ ຍ້ອນມຸທິຕາເຈໂຕວິມຸດຕິນີ້ເປັນທາດທີ່ກໍາຈັດອະຣະຕິ

໔. ພິກຂຸໃນທໍາວິໄນນີ້ເພິ່ງກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ຈະເລີນອຸເປກຂາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ຣາຄະກໍຍັງຄອບງໍາຈິດຂອງຂ້າພະເຈົ້າຢູ່" ພິກຂຸທັງຫຼາຍເພິ່ງກ່າວຕັກເຕືອນທ່ານວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ທ່ານຢ່າໄດ້ກ່າວແນວນີ້ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ຕັດແນວນີ້ເລີຍ ຜູ້ມີອາຍຸ ເປັນໄປບໍ່ໄດ້ເລີຍທີ່ພິກຂຸໄດ້ຈະເລີນອຸເປກຂາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ຣາຄະກໍຍັງຄອບງໍາຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນເປັນໄປບໍ່ໄດ້ເລີຍ ຍ້ອນອຸເປກຂາເຈໂຕວິມຸດຕິນີ້ເປັນທາດທີ່ກໍາຈັດຣາຄະ

໕. ພິກຂຸໃນທໍາວິໄນນີ້ເພິ່ງກ່າວແນວນີ້ວ່າ "ຂ້າພະເຈົ້າຈະເລີນອະນິມິຕຕາເຈໂຕວິມຸດຕິ[១] ແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ວິນຍານຂອງຂ້າພະເຈົ້າກໍຍັງແສ່ຫານິມິດຢູ່" ພິກຂຸທັງຫຼາຍເພິ່ງກ່າວຕັກເຕືອນທ່ານວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ທ່ານຢ່າໄດ້ກ່າວແນວນີ້ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ຕັດແນວນີ້ເລີຍ ຜູ້ມີອາຍຸ ເປັນໄປບໍ່ໄດ້ເລີຍທີ່ພິກຂຸໄດ້ຈະເລີນອະນິມິດຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມ

ແລ້ວ ຜາຣົບດີແລ້ວ ແຕ່ວິນຍານຂອງພິກຂຸນັ້ນກໍຍັງແສ່ຫານິມິດຢູ່" ຂໍ້ນັ້ນເປັນໄປບໍ່ໄດ້ເລີຍ ຍ້ອນອະນິມິດຕາເຈໂຕວິມຸດຕິນີ້ເປັນທາດທີ່ກຳຈັດນິມິດທັງປວງ

໖. ພິກຂຸໃນທຳວິໄນນີ້ເພິ່ງກ່າວແນວນີ້ວ່າ "ຂ້າພະເຈົ້າປາສະຈາກອັດສະມິມານະ[១] ແລະບໍ່ພິຈາລະນາເຫັນວ່າ "ເຮົາເປັນນີ້"[២] ແຕ່ລູກສອນຄືຄວາມເຄືອບແຄງສົງໄສກໍຍັງຄອບງຳຈິດຂອງຂ້າພະເຈົ້າຢູ່" ພິກຂຸທັງຫຼາຍ ເພິ່ງກ່າວຕັກເຕືອນທ່ານວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸທ່ານຢ່າໄດ້ກ່າວແນວນີ້ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ຕັດແນວນີ້ເລີຍ ຜູ້ມີອາຍຸ ເປັນໄປບໍ່ໄດ້ເລີຍທີ່ພິກຂຸປາສະຈາກອັດສະມິມານະແລ້ວ ແລະບໍ່ພິຈາລະນາເຫັນວ່າ "ເຮົາເປັນນີ້" ແຕ່ລູກສອນຄືຄວາມເຄືອບແຄງສົງໄສກໍຍັງຄອບງຳຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນເປັນໄປບໍ່ໄດ້ເລີຍ ຍ້ອນສະພາວະທີ່ຖອນອັດສະມິມານະໄດ້ນີ້ເປັນທາດທີ່ກຳຈັດລູກສອນຄືຄວາມເຄືອບແຄງສົງໄສ"

ພິກຂຸທັງຫຼາຍ ທາດທີ່ກຳຈັດ ໖ ປະການນີ້ແລ

**ນິດສາຣະນີຍະສູດທີ ៣ ຈົບ**

# ៤. ພັດທະກະສູດ

## ວ່າດ້ວຍການຢູ່ຢ່າງມີຄວາມຕາຍທີ່ຈະເລີນ

[១៤] ໃນບ່ອນນັ້ນແລ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື່ອງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ພິກຂຸສຳເລັດການຢູ່ຢ່າງມີຄວາມຕາຍທີ່ບໍ່ຈະເລີນ[១] ມີກາລະກິຣິຍາທີ່ບໍ່ຈະເລີນ

ພິກຂຸສຳເລັດການຢູ່ຢ່າງມີຄວາມຕາຍທີ່ບໍ່ຈະເລີນ ມີກາລະກິຣິຍາທີ່ບໍ່ຈະເລີນ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້

១. ເປັນຜູ້ມັກວຽກງານ[២] ຍິນດີໃນວຽກງານ ໝັ່ນປະກອບຄວາມເປັນຜູ້ມັກວຽກງານ
២. ເປັນຜູ້ມັກການໂອ້ລົມ[៣] ຍິນດີໃນການໂອ້ລົມ ໝັ່ນປະກອບຄວາມເປັນຜູ້ມັກການໂອ້ລົມ

๓. ເປັນຜູ້ມັກການນອນຫຼັບ ຍິນດີໃນການນອນຫຼັບ ໝັ່ນປະກອບຄວາມເປັນຜູ້ມັກການນອນຫຼັບ
໔. ເປັນຜູ້ມັກການຄຸກຄີດ້ວຍໝູ່ ຍິນດີໃນການຄຸກຄີດ້ວຍໝູ່ ໝັ່ນປະກອບຄວາມເປັນຜູ້ມັກການຄຸກຄີດ້ວຍໝູ່
໕. ເປັນຜູ້ມັກຄຸກຄີກັບຄະລຶຫັດ ຍິນດີໃນການຄຸກຄີກັບຄະລຶຫັດ ໝັ່ນປະກອບຄວາມເປັນຜູ້ມັກການຄຸກຄີກັບຄະລຶຫັດ
໖. ເປັນຜູ້ມັກທຳທີ່ເປັນເຫດໃຫ້ລ້າຊ້າ ຍິນດີໃນທຳທີ່ເປັນເຫດໃຫ້ລ້າຊ້າ ໝັ່ນປະກອບຄວາມເປັນຜູ້ຊອບທຳທີ່ເປັນເຫດໃຫ້ລ້າຊ້າ

ພິກຂຸສຳເລັດການຢູ່ຢ່າງມີຄວາມຕາຍທີ່ບໍ່ຈະເລີນ ມີກາລະກິຣິຍາທີ່ບໍ່ຈະເລີນ ເປັນແນວນີ້ແລ ພິກຂຸນີ້ຮຽກວ່າ ຜູ້ຍິນດີຍິ່ງໃນຈັກກາຍະ[๑] ບໍ່ລະຈັກກາຍະເພື່ອເຮັດບ່ອນສຸດທຸກໂດຍຖືກຕ້ອງ

ຜູ້ມີອາຍຸທັງຫຼາຍ ພິກຂຸສຳເລັດການຢູ່ຢ່າງມີຄວາມຕາຍທີ່ຈະເລີນ ມີກາລະກິຣິຍາທີ່ຈະເລີນ ພິກຂຸສຳເລັດການຢູ່ຢ່າງມີຄວາມຕາຍທີ່ຈະເລີນ ມີກາລະກິຣິຍາທີ່ຈະເລີນ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ບໍ່ມັກວຽກງານ ບໍ່ຍິນດີໃນວຽກງານ ບໍ່ໝັ່ນປະກອບຄວາມເປັນຜູ້ມັກວຽກງານ
໒. ເປັນຜູ້ບໍ່ມັກການໂອ້ລົມ ບໍ່ຍິນດີໃນການໂອ້ລົມ ບໍ່ໝັ່ນປະກອບຄວາມເປັນຜູ້ມັກການໂອ້ລົມ
໓. ເປັນຜູ້ບໍ່ມັກການນອນຫຼັບ ບໍ່ຍິນດີໃນການນອນຫຼັບ ບໍ່ໝັ່ນປະກອບຄວາມເປັນຜູ້ມັກການນອນຫຼັບ
໔. ເປັນຜູ້ບໍ່ມັກການຄຸກຄີດ້ວຍໝູ່ ບໍ່ຍິນດີການຄຸກຄີດ້ວຍໝູ່ ບໍ່ໝັ່ນປະກອບຄວາມເປັນຜູ້ຄຸກຄີດ້ວຍໝູ່
໕. ເປັນຜູ້ບໍ່ມັກການຄຸກຄີກັບຄະລຶຫັດ ບໍ່ຍິນດີໃນການຄຸກຄີກັບຄະລຶຫັດ ບໍ່ໝັ່ນປະກອບຄວາມເປັນຜູ້ມັກການຄຸກຄີກັບຄະລຶຫັດ
໖. ເປັນຜູ້ບໍ່ມັກທຳທີ່ເປັນເຫດໃຫ້ລ້າຊ້າ ບໍ່ຍິນດີທຳທີ່ເປັນເຫດໃຫ້ລ້າຊ້າ ບໍ່ໝັ່ນປະກອບຄວາມເປັນຜູ້ມັກທຳທີ່ເປັນເຫດໃຫ້ລ້າຊ້າ

ພິກຂຸສຳເລັດການຢູ່ຢ່າງມີຄວາມຕາຍທີ່ຈະເລີນ ມີກາລະກິຣິຍາທີ່ຈະເລີນ ເປັນແນວນີ້ແລ ພິກຂຸນີ້ຮຽກວ່າ ຜູ້ຍິນດີໃນນິບພານ ລະຈັກກາຍະເພື່ອເຮັດບ່ອນສຸດທຸກໂດຍຖືກຕ້ອງ

ທ່ານພຣະສາຣີບຸດໄດ້ກ່າວໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ກ່າວຄາຖາປະພັນຕໍ່ໄປອີກວ່າ

ຜູ້ໃດໝັ່ນປະກອບທຳທີ່ເປັນເຫດໃຫ້ລ້າຊ້າ
ຍິນດີທຳທີ່ເປັນເຫດໃຫ້ລ້າຊ້າ ຜູ້ເປັນເຊັ່ນກັບເນື້ອ
ຜູ້ນັ້ນບໍ່ໄດ້ຊົມນິບພານອັນເປັນແດນກະເສມຈາກໂຍຄະອັນປະເສີດ
ສ່ວນຜູ້ໃດລະທຳທີ່ເປັນເຫດໃຫ້ລ້າຊ້າໄດ້ແລ້ວ
ຍິນດີໃນປົດຄືທຳທີ່ບໍ່ເປັນເຫດໃຫ້ລ້າຊ້າ
ຜູ້ນັ້ນໄດ້ຊົມນິບພານອັນເປັນແດນກະເສມຈາກໂຍຄະອັນປະເສີດ

**ພັດທະກະສູດທີ່ ໔ ຈົບ**

## ໕. ອະນຸຕັບປິຍະສູດ

## ວ່າດ້ວຍການຢູ່ຢ່າງມີການລະກິຣິຍາທີ່ເດືອດຮ້ອນ

[໑໕] ໃນບ່ອນນັ້ນແລ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸສຳເລັດການຢູ່ຢ່າງມີກາລະກິຣິຍາທີ່ເດືອດຮ້ອນ ພິກຂຸສຳເລັດການຢູ່ຢ່າງມີກາລະກິຣິຍາທີ່ເດືອດຮ້ອນ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ມັກວຽກງານ ຍິນດີໃນວຽກງານ ໝັ່ນປະກອບຄວາມເປັນຜູ້ມັກວຽກງານ
໒. ເປັນຜູ້ມັກການໂອ້ລົມ ຯລຯ
໓. ເປັນຜູ້ມັກການນອນຫຼັບ ຯລຯ
໔. ເປັນຜູ້ມັກການຄຸກຄີດ້ວຍໝູ່ ຯລຯ
໕. ເປັນຜູ້ມັກການຄຸກຄີກັບຄະລຶຫັດ ຯລຯ
໖. ເປັນຜູ້ມັກທຳທີ່ເປັນເຫດໃຫ້ລ້າຊ້າ ຍິນດີທຳທີ່ເປັນເຫດໃຫ້ລ້າຊ້າໝັ່ນປະກອບຄວາມເປັນຜູ້ມັກທຳທີ່ເປັນເຫດໃຫ້ລ້າຊ້າ

ພິກຂຸສຳເລັດການຢູ່ແນວມີກາລະກິຣິຍາທີ່ເດືອດຮ້ອນ ເປັນແນວນີ້ແລ ພິກຂຸນີ້ຮຽກວ່າ ຜູ້ຍິນດີໃນຈັກກາຍະ ບໍ່ລະຈັກກາຍະເພື່ອເຮັດບ່ອນສຸດທຸກໂດຍຖືກຕ້ອງ ຜູ້ມີອາຍຸທັງຫຼາຍ ພິກຂຸສຳເລັດການຢູ່ຢ່າງມີກາລະກິຣິຍາທີ່ບໍ່ເດືອດຮ້ອນ ພິກຂຸສຳເລັດການຢູ່ຢ່າງມີກາລະກິຣິຍາທີ່ບໍ່ເດືອດຮ້ອນ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ບໍ່ມັກວຽກງານ ບໍ່ຍິນດີບໍ່ໝັ່ນປະກອບຄວາມເປັນຜູ້ມັກວຽກງານ
໒. ເປັນຜູ້ບໍ່ມັກການໂອ້ລົມ ฯลฯ
໓. ເປັນຜູ້ບໍ່ມັກການນອນຫຼັບ ฯลฯ
໔. ເປັນຜູ້ບໍ່ມັກການຄຸກຄີດ້ວຍໝູ່ ฯลฯ
໕. ເປັນຜູ້ບໍ່ມັກການຄຸກຄີກັບຄະລືຫັດ ฯลฯ
໖. ເປັນຜູ້ບໍ່ມັກທຳທີ່ເປັນເຫດໃຫ້ລ້າຊ້າ ບໍ່ຍິນດີທຳທີ່ເປັນເຫດໃຫ້ລ້າຊ້າ ບໍ່ໝັ່ນປະກອບຄວາມເປັນຜູ້ມັກທຳທີ່ເປັນເຫດໃຫ້ລ້າຊ້າ

ພິກຂຸສຳເລັດການຢູ່ຢ່າງມີກາລະກິຣິຍາທີ່ບໍ່ເດືອດຮ້ອນ ເປັນແນວນີ້ແລ ພິກຂຸນີ້ຮຽກວ່າຜູ້ຍິນດີໃນນິບພານ ລະຈັກກາຍະເພື່ອເຮັດບ່ອນສຸດທຸກໂດຍຖືກຕ້ອງ

ທ່ານພຣະສາຣີບຸດໄດ້ກ່າວໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ກ່າວຄາຖາປະພັນຕໍ່ໄປອີກວ່າ

ຜູ້ໃດໝັ່ນປະກອບທຳທີ່ເປັນເຫດໃຫ້ລ້າຊ້າ
ຍິນດີທຳທີ່ເປັນເຫດໃຫ້ລ້າຊ້າ ຜູ້ເປັນເຊັ່ນກັບເນື້ອ
ຜູ້ນັ້ນບໍ່ໄດ້ຊົມນິບພານອັນເປັນແດນກະເສມຈາກໂຍຄະອັນປະເສີດ
ສ່ວນຜູ້ໃດລະທຳທີ່ເປັນເຫດໃຫ້ລ້າຊ້າໄດ້ແລ້ວ
ຍິນດີໃນບົດຄືທຳທີ່ບໍ່ເປັນເຫດໃຫ້ລ້າຊ້າ
ຜູ້ນັ້ນໄດ້ຊົມນິບພານອັນເປັນແດນກະເສມຈາກໂຍຄະອັນປະເສີດ

**ອະນຸຕັບປິຍະສູດທີ ໕ ຈົບ**

## ໖. ນະກຸລະປິຕຸສູດ

## ວ່າດ້ວຍນະກຸລະປິຕາຄະຫະບໍດີ

[໑໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ປ່າເພສະກະລາມິຄະທາຍະວັນ ນະຄອນສຸງສຸມາຣະຄີຣະ ແຄວ້ນພັກຄະ ສະໄໝນັ້ນ ນະກຸລະປິຕາຄະຫະບໍດີມີຄວາມເຈັບໄຂ້ ໄດ້ຮັບທຸກ ເປັນໄຂ້ໜັກ ຄັ້ງນັ້ນ ນະກຸລະມາຕາຄະຫະປະຕານີໄດ້ກ່າວເຕືອນນະກຸລະປິຕາຄະຫະບໍດີ ວ່າ

ຄະຫະບໍດີ ທ່ານຢ່າໄດ້ຕາຍທັງທີ່ຍັງມີຄວາມຫ່ວງໃຍ°ເລີຍ ຍ້ອນການຕາຍຂອງຜູ້ທີ່ຍັງມີຄວາມຫ່ວງໃຍເປັນທຸກ ແລະພຣະຜູ້ມີພຣະພາກເຈົ້າກໍຊົງຕິຕຽນ

໑. ທ່ານມີຄວາມຫ່ວງໃຍແນວນີ້ຫຼືວ່າ "ເມື່ອເຮົາຕາຍໄປແລ້ວ ນະກຸລະມາຕາ-ຄະຫະປະຕານິຈັກບໍ່ສາມາດລ້ຽງເດັກອ່ອນ ແລະຄອງເຮືອນຢູ່ໄດ້" ທ່ານບໍ່ຄວນຄິດເຫັນແນວນີ້ ຍ້ອນເຮົາເປັນຄົນສະຫຼາດປັ່ນຝ້າຍ ເຮັດຂົນສັດ ເມື່ອທ່ານຕາຍໄປແລ້ວ ເຮົາສາມາດລ້ຽງດູເດັກອ່ອນ ແລະຄອງເຮືອນຢູ່ໄດ້ ຍ້ອນແນວນັ້ນແລ ທ່ານຢ່າໄດ້ຕາຍທັງທີ່ຍັງມີຄວາມຫ່ວງໃຍເລີຍ ຍ້ອນການຕາຍຂອງຜູ້ທີ່ຍັງມີຄວາມຫ່ວງໃຍ ເປັນທຸກ ແລະພຣະຜູ້ມີພຣະພາກເຈົ້າກໍຊົງຕິຕຽນ

໒. ທ່ານມີຄວາມຫ່ວງໃຍແນວນີ້ບໍວ່າ "ເມື່ອເຮົາຕາຍໄປແລ້ວ ນະກຸລະມາຕາຄະຫະປະຕານິຈັກໄດ້ຊາຍອື່ນເປັນສາມີ" ທ່ານບໍ່ຄວນຄິດເຫັນແນວນີ້ ທັງທ່ານແລະເຮົາຍ່ອມຮູ້ວ່າໄດ້ຢູ່ຮ່ວມກັນປະພຶດເຄັ່ງຄັດຕໍ່ລະບຽບປະເພນີ ຂອງຜູ້ຄອງເຮືອນຕະຫຼອດ ໑໖ ປີ ຍ້ອນແນວນັ້ນແລ ທ່ານຢ່າໄດ້ຕາຍທັງທີ່ຍັງມີຄວາມຫ່ວງໃຍເລີຍ ຍ້ອນການຕາຍຂອງຜູ້ທີ່ຍັງມີຄວາມຫ່ວງໃຍ ເປັນທຸກ ແລະພຣະຜູ້ມີພຣະພາກເຈົ້າກໍຊົງຕິຕຽນ

໓. ທ່ານມີຄວາມຫ່ວງໃຍແນວນີ້ບໍວ່າ "ເມື່ອເຮົາຕາຍໄປແລ້ວ ນະກຸລະມາຕາຄະຫະປະຕານິຈັກບໍ່ຕ້ອງການເຫັນພຣະຜູ້ມີພຣະພາກເຈົ້າ ບໍ່ຕ້ອງການເຫັນພິກຂຸສົງ" ທ່ານບໍ່ຄວນຄິດເຫັນແນວນີ້ ຍ້ອນເຮົາຕ້ອງການເຫັນພຣະຜູ້ມີພຣະພາກເຈົ້າຢ່າງຍິ່ງ ຕ້ອງການເຫັນພິກຂຸສົງຢ່າງຍິ່ງ ຍ້ອນແນວນັ້ນແລ ທ່ານຢ່າໄດ້ຕາຍທັງທີ່ຍັງມີຄວາມຫ່ວງໃຍເລີຍ ຍ້ອນການຕາຍຂອງຜູ້ທີ່ຍັງມີຄວາມຫ່ວງໃຍ ເປັນທຸກ ແລະພຣະຜູ້ມີພຣະພາກເຈົ້າກໍຊົງຕິຕຽນ

໔. ທ່ານມີຄວາມຫ່ວງໃຍແນວນີ້ບໍວ່າ "ເມື່ອເຮົາຕາຍໄປແລ້ວ ນະກຸລະມາຕາຄະຫະປະຕານິຈັກບໍ່ເຮັດສິນໃຫ້ບໍລິບູນ" ທ່ານບໍ່ຄວນຄິດເຫັນແນວນີ້ ຍ້ອນສາວິກາທັງຫຼາຍຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ທີ່ຍັງເປັນຄະລິຫັດນຸ່ງຫົ່ມຜ້າຂາວ ພ່ຳເພັງສິນໃຫ້ບໍລິບູນ ມີຈຳນວນທໍ່ໃດ ເຮົາກໍເປັນຄົນໜຶ່ງໃນຈຳນວນສາວິກາເຫຼົ່ານັ້ນ ກໍຜູ້ໃດເພິ່ງມີຄວາມສົງໄສຫຼືເຄືອບແຄງ ຜູ້ນັ້ນຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າຜູ້ກຳລັງປະທັບຢູ່ ປ່າເພສະກະລາມິຄະທາຍະວັນ ນະຄອນ ສຸງສຸມາຣະຄິຣະ ແຄວ້ນພັກຄະແລ້ວທູນຖາມເທີ້ນ ຍ້ອນແນວນັ້ນແລ ທ່ານຢ່າໄດ້ຕາຍທັງທີ່ຍັງມີຄວາມຫ່ວງໃຍເລີຍ ຍ້ອນການຕາຍຂອງຜູ້ທີ່ຍັງມີຄວາມຫ່ວງໃຍ ເປັນທຸກ ແລະພຣະຜູ້ມີພຣະພາກເຈົ້າກໍຊົງຕິຕຽນ

໕. ທ່ານມີຄວາມຫ່ວງໃຍແນວນີ້ບໍວ່າ "ນະກຸລະມາຕາຄະຫະປະຕານິຈັກບໍ່ໄດ້ຄວາມສະງົບໃຈໃນພາຍໃນ" ທ່ານບໍ່ຄວນຄິດເຫັນແນວນີ້ ຍ້ອນສາວິກາທັງຫຼາຍຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ທີ່ຍັງເປັນຄະລິຫັດນຸ່ງຫົ່ມຜ້າຂາວ ໄດ້ຄວາມສະງົບໃຈໃນພາຍໃນ ມີຈຳນວນທໍ່ໃດ ເຮົາກໍເປັນຄົນໜຶ່ງໃນຈຳນວນສາວິກາເຫຼົ່ານັ້ນ ກໍຜູ້ໃດມີຄວາມສົງໄສຫຼືເຄືອບແຄງ ຜູ້ນັ້ນຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າຜູ້ກຳລັງປະທັບຢູ່ ປ່າເພສະກະລາມິຄະທາຍະວັນ ນະຄອນສຸງສຸມາຣະຄິຣະ ແຄວ້ນພັກຄະ ແລ້ວທູນຖາມເທີ້ນ ຍ້ອນແນວນັ້ນ

ແລ ທ່ານຢ່າໄດ້ຕາຍທັງທີ່ຍັງມີຄວາມຫ່ວງໃຍເລີຍ ຍ້ອນການຕາຍຂອງຜູ້ທີ່ຍັງມີຄວາມຫ່ວງໃຍ ເປັນທຸກ ແລະພຣະຜູ້ມີພຣະພາກເຈົ້າກໍຊົງຕິຕຽນ

໙. ທ່ານມີຄວາມຫ່ວງໃຍແນວນີ້ຫຼືວ່າ "ນະກຸລະມາຕາຄະຫະປະຕານີຍັງບໍ່ເຖິງການຢັ່ງລົງ ຍັງບໍ່ເຖິງທີ່ເພິ່ງ ຍັງບໍ່ເຖິງຄວາມເບົາໃຈ ຍັງບໍ່ຂ້າມພົ້ນຄວາມສົງໄສ ຍັງບໍ່ປາສະຈາກຄວາມເຄືອບແຄງ ຍັງບໍ່ເຖິງຄວາມແກ່ກ້າ ຍັງບໍ່ປາສະຈາກຄວາມມີຜູ້ອື່ນເປັນປັດໄຈ[9] ໃນພຣະທຳວິໄນນີ້ ຢູ່ໃນສາດສະໜາຂອງພຣະສາດສະດາ" ທ່ານບໍ່ຄວນຄິດເຫັນແນວນີ້ ຍ້ອນສາວິກາທັງຫຼາຍຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ທີ່ຍັງເປັນຄະລືຫັດນຸ່ງຫົ່ມຜ້າຂາວ ເຖິງການຢັ່ງລົງ ເຖິງທີ່ເພິ່ງ ເຖິງຄວາມເບົາໃຈ ຂ້າມພົ້ນຄວາມສົງໄສ ປາສະຈາກຄວາມເຄືອບແຄງ ເຖິງຄວາມແກ່ກ້າ ປາສະຈາກຄວາມມີຜູ້ອື່ນເປັນປັດໄຈ ໃນພຣະທຳວິໄນນີ້ ຢູ່ໃນສາດສະໜາຂອງພຣະສາດສະດາມີຈຳນວນທໍ່ໃດ ເຮົາກໍເປັນຄົນໜຶ່ງໃນຈຳນວນສາວິກາເຫຼົ່ານັ້ນ ກໍຜູ້ໃດເພິ່ງມີຄວາມສົງໄສຫຼືເຄືອບແຄງ ຜູ້ນັ້ນຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າຜູ້ກຳລັງປະທັບຢູ່ ປ່າເພສະກະລາມິຄະທາຍະວັນ ນະຄອນສຸງສຸມາຣະຄິຣະ ແຄວັ້ນພັກຄະແລ້ວທູນຖາມເທີ້ນ ຍ້ອນແນວນັ້ນແລ ທ່ານຢ່າໄດ້ຕາຍທັງທີ່ຍັງມີຄວາມຫ່ວງໃຍເລີຍ ຍ້ອນການຕາຍຂອງຜູ້ທີ່ຍັງມີຄວາມຫ່ວງໃຍ ເປັນທຸກ ແລະພຣະຜູ້ມີພຣະພາກເຈົ້າກໍຊົງຕິຕຽນ

ຄັ້ງນັ້ນ ເມື່ອນະກຸລະມາຕາຄະຫະປະຕານີກ່າວເຕືອນນະກຸລະປິຕາຄະຫະບໍດີດ້ວຍຄຳເຕືອນນີ້ ຄວາມເຈັບໄຂ້ນັ້ນໄດ້ສະງົບລະງັບໂດຍທັນທີ ທ່ານນະກຸລະປິຕາຄະຫະບໍດີໄດ້ຫາຍຈາກຄວາມເຈັບໄຂ້ນັ້ນ ແລະນະກຸລະປິຕາຄະຫະບໍດີລະຄວາມເຈັບໄຂ້ນັ້ນ ລະໄດ້ໂດຍອາການແນວນັ້ນ

ຄັ້ງນັ້ນແລ ນະກຸລະປິຕາຄະຫະບໍດີ ພໍຫາຍຈາກຄວາມເຈັບໄຂ້ທີ່ນັ້ນ ຍັງຟື້ນຈາກໄຂ້ໄດ້ບໍ່ດົນ ກໍຖືໄມ້ການເທົ້າເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບນະກຸລະປິຕາຄະຫະບໍດີ ດັ່ງນີ້ວ່າ

"ຄະຫະບໍດີ ເປັນລາບຂອງທ່ານນໍ ທ່ານໄດ້ດີແລ້ວນໍ ທີ່ນະກຸລະມາຕາຄະຫະປະຕານີເປັນຜູ້ອະນຸເຄາະ ຫວັງປະໂຫຍດກ່າວຕັກເຕືອນພ່ຳສອນທ່ານ ຄະຫະບໍດີ ສາວິກາທັງຫຼາຍຂອງເຮົາທີ່ຍັງເປັນຄະລືຫັດນຸ່ງຫົ່ມຜ້າຂາວ ເຮັດສີນໃຫ້ບໍລິບູນ ມີຈຳນວນທໍ່ໃດ ນະກຸລະມາຕາຄະຫະປະຕານີກໍເປັນຄົນໜຶ່ງໃນຈຳນວນສາວິກາເຫຼົ່ານັ້ນ ຄະຫະບໍດີ ສາວິກາທັງຫຼາຍຂອງເຮົາທີ່ຍັງເປັນຄະລືຫັດນຸ່ງຫົ່ມຜ້າຂາວ ໄດ້ຄວາມສະງົບໃຈໃນພາຍໃນ ມີຈຳນວນທໍ່ໃດ ນະກຸລະມາຕາຄະຫະປະຕານີ ກໍເປັນຄົນໜຶ່ງໃນຈຳນວນສາວິກາເຫຼົ່ານັ້ນ ຄະຫະບໍດີ ສາວິກາທັງຫຼາຍຂອງເຮົາທີ່ຍັງ ເປັນຄະລືຫັດນຸ່ງຫົ່ມຜ້າຂາວ ເຖິງການຢັ່ງລົງ ເຖິງທີ່ເພິ່ງ ເຖິງຄວາມເບົາໃຈ ຂ້າມພົ້ນຄວາມສົງໄສ ປາສະຈາກຄວາມເຄືອບແຄງ ເຖິງຄວາມແກ່ກ້າ ປາສະຈາກຄວາມມີຜູ້ອື່ນເປັນປັດໄຈໃນ

ທຳວິໄນນີ້ ຢູ່ໃນສາດສະໜາຂອງສາດສະດາ ມີຈຳນວນທໍ່ໃດ ນະກຸລະມາຕາຄະຫະປະຕານີກໍ ເປັນຄົນໜຶ່ງໃນຈຳນວນສາວິກາເຫຼົ່ານັ້ນ ຄະຫະບໍດີ ເປັນລາບຂອງທ່ານນໍ ທ່ານໄດ້ດີແລ້ວນໍ ທີ່ ນະກຸລະມາຕາຄະຫະປະຕານີເປັນຜູ້ອະນຸເຄາະ ຫວັງປະໂຫຍດ ກ່າວຕັກເຕືອນພ່ຳສອນທ່ານ"

**ນະກຸລະປິຕຸສູດທີ ໖ ຈົບ**

# ໗. ໂສບປະສູດ

## ວ່າດ້ວຍການນອນຫຼັບ

[໑໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະ ບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນ ຫຼີບຫຼີກ[១] ໃນເວລາຄ່ຳ ສະເດັດເຂົ້າໄປສູ່ຫໍສັນ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ແມ່ນທ່ານ ພຣະສາຣີບຸດກໍອອກຈາກບ່ອນຫຼີບຫຼີກໃນເວລາຄ່ຳແລ້ວເຂົ້າໄປສູ່ຫໍສັນ ຖວາຍອະພິວາດພຣະຜູ້ ມີພຣະພາກເຈົ້າ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ແມ່ນທ່ານພຣະໂມກຄັນລານະ ແມ່ນທ່ານພຣະ ມະຫາກັດສະປະ ແມ່ນທ່ານພຣະມະຫາກັດຈານະ ແມ່ນທ່ານພຣະມະຫາໂກດຖິກະ ແມ່ນທ່ານ ພຣະມະຫາຈຸນທະ ແມ່ນທ່ານພຣະມະຫາກັບປິນະ ແມ່ນທ່ານພຣະອະນຸຣຸດທະ ແມ່ນທ່ານພຣະ ເຣວະຕະ ແມ່ນທ່ານພຣະອານົນ ກໍອອກຈາກບ່ອນຫຼີບຫຼີກໃນເວລາຄ່ຳ ແລ້ວເຂົ້າໄປສູ່ຫໍສັນ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ຄັ້ງນັ້ນແລ ພຣະຜູ້ມີພຣະ ພາກເຈົ້າຊົງໃຫ້ຣາຕີຜ່ານໄປດົນດ້ວຍການປະທັບນັ່ງ ແລ້ວສະເດັດລຸກຈາກພຸດທະອາດເຂົ້າໄປສູ່ ວິຫານ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຫຼີກໄປບໍ່ດົນ ແມ່ນພຣະເຖຣະເຫຼົ່ານັ້ນ ຕ່າງກໍລຸກຈາກ ອາສະນະເຂົ້າໄປສູ່ບ່ອນຢູ່ຂອງຕົນ ສ່ວນພວກພິກຂຸໃໝ່ບວດບໍ່ດົນ ເພິ່ງມາສູ່ພຣະທຳວິໄນນີ້ ຕ່າງກໍເຂົ້າໄປສູ່ບ່ອນຢູ່ຂອງຕົນ ນອນຫຼັບກົນຢູ່ຈົນພຣະອາທິດຂຶ້ນ ພຣະຜູ້ມີພຣະພາກເຈົ້າໄດ້ ທອດພຣະເນດເຫັນພິກຂຸເຫຼົ່ານັ້ນ ຜູ້ນອນຫຼັບກົນຢູ່ ດ້ວຍທິບພະຈັກຂຸອັນບໍລິສຸດ ເໜືອມະນຸດ ແລ້ວສະເດັດເຂົ້າໄປສູ່ຫໍສັນ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ໄດ້ຮຽກພິກຂຸທັງຫຼາຍມາຕັດ ຖາມ ວ່າ

"ພິກຂຸທັງຫຼາຍ ສາຣີບຸດໄປໃສ ໂມກຄັນລານະໄປໃສ ມະຫາກັດສະປະໄປໃສ ມະຫາ ກັດຈາຍະນະໄປໃສ ມະຫາໂກດຖິກະໄປໃສ ມະຫາຈຸນທະໄປໃສ ມະຫາກັບປິນະໄປໃສ ອະນຸຣຸ ດທະໄປໃສ ເຣວະຕະໄປໃສ ອານົນໄປໃສ ສາວົກຊັ້ນເຖຣະເຫຼົ່ານັ້ນໄປໃສ"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດຫຼີກໄປບໍ່ດົນ ພຣະເຖຣະເຫຼົ່ານັ້ນຕ່າງກໍລຸກຈາກອາສະນະເຂົ້າໄປສູ່ບ່ອນຢູ່ຂອງຕົນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເປັນເຖຣະບໍໜໍ ທ່ານທັງຫຼາຍເປັນພິກຂຸໃໝ່ນອນຫຼັບກິນຢູ່ຈົນພຣະອາທິດຂຶ້ນ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ທ່ານທັງຫຼາຍເຄີຍໄດ້ເຫັນຫຼືເຄີຍໄດ້ຍິນແດ່ບໍວ່າ "ກະສັດຕາທິຣາດໄດ້ຮັບມຸດທາພິເສກແລ້ວ ຊົງປະກອບຄວາມສຸກໃນການບັນທົມ[໑] ຄວາມສຸກໃນການເອນຫຼັງ[໒] ຄວາມສຸກໃນການຫຼັບຢູ່ຕາມພຣະປະສົງຄອງຣາດຈົນຕະຫຼອດພຣະຊົນຊີບ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈຂອງຊາວຊົນນະບົດ"

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເປັນແນວນັ້ນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ຂໍ້ນັ້ນແມ່ນເຮົາກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຍິນມາເລີຍວ່າ "ກະສັດຕາທິຣາດໄດ້ຮັບມຸດທາພິເສກແລ້ວ ຊົງປະກອບຄວາມສຸກໃນການບັນທົມ ຄວາມສຸກໃນການເອນຫຼັງ ຄວາມສຸກໃນການຫຼັບຢູ່ຕາມພຣະປະສົງຄອງຣາດຈົນຕະຫຼອດພຣະຊົນມະຊີບ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈຂອງຊາວຊົນນະບົດ

ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ທ່ານທັງຫຼາຍເຄີຍໄດ້ເຫັນຫຼືເຄີຍໄດ້ຍິນມາແດ່ບໍວ່າ "ທ່ານຜູ້ຄອງຣັດ ຯລຯ ທ່ານຜູ້ເປັນທາຍາດຂອງຕະກູນ ຯລຯ ທ່ານຜູ້ເປັນເສນາບໍດີ ຯລຯ ທ່ານຜູ້ຄອງໝູ່ບ້ານ ຯລຯ ທ່ານຜູ້ເປັນຫົວໜ້າຄະນະ ປະກອບຄວາມສຸກໃນການນອນ ຄວາມ ສຸກໃນການເອນຫຼັງ ຄວາມສຸກໃນການຫຼັບຢູ່ຕາມຄວາມປະສົງ ປົກຄອງໝູ່ຄະນະຈົນຕະຫຼອດຊີວິດ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈຂອງໝູ່ຄະນະ"

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເປັນແນວນັ້ນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ຂໍ້ນັ້ນແມ່ນເຮົາກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຍິນມາເລີຍວ່າ "ທ່ານຜູ້ເປັນຫົວໜ້າຄະນະປະກອບຄວາມສຸກໃນການນອນ ຄວາມສຸກໃນການເອນຫຼັງ ຄວາມສຸກໃນການຫຼັບຢູ່ຕາມຄວາມປະສົງ ປົກຄອງໝູ່ຄະນະຈົນຕະຫຼອດຊີວິດ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈຂອງໝູ່ຄະນະ"

ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນວ່າແນວໃດ ທ່ານທັງຫຼາຍເຄີຍໄດ້ເຫັນຫຼືເຄີຍໄດ້ຍິນມາແດ່ບໍ່ວ່າ ສະມະນະຫຼືພາມປະກອບຄວາມສຸກໃນການນອນ ຄວາມສຸກໃນການເອນຫຼັງ ຄວາມ ສຸກໃນການຫຼັບຢູ່ຕາມຄວາມປະສົງ ບໍ່ຄຸ້ມຄອງທະວານ ໃນອິນຊີທັງຫຼາຍ ບໍ່ຮູ້ຈັກປະມານໃນການບໍຣິໂພກ ບໍ່ໝັ່ນປະກອບຄວາມພຽນເປັນເຄື່ອງຕື່ນຢູ່ ບໍ່ເຫັນແຈ້ງກຸສົນທຳທັງຫຼາຍ ບໍ່ໝັ່ນປະກອບຄວາມພຽນໃນການຈະເລີນໂພທິປັກຂິຍະທຳ ທັງເບື້ອງຕົ້ນແລະເບື້ອງປາຍແຫ່ງຣາຕີແລ້ວເຮັດໃຫ້ແຈ້ງເຈໂຕວິມຸດຕິປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ"

ພິກຂຸທັງຫຼາຍຂາບທູນ ວ່າ "ບໍ່ເປັນແນວນັ້ນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ຂໍ້ນັ້ນແມ່ນເຮົາກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຍິນມາເລີຍວ່າ "ສະມະນະຫຼືພາມປະກອບຄວາມສຸກໃນການນອນ ຄວາມສຸກໃນການເອນຫຼັງ ຄວາມສຸກໃນການຫຼັບຢູ່ຕາມຄວາມປະສົງ ບໍ່ຄຸ້ມຄອງທະວານໃນ ອິນຊີທັງຫຼາຍ ບໍ່ຮູ້ຈັກປະມານໃນການບໍຣິໂພກ ບໍ່ໝັ່ນປະກອບຄວາມພຽນເຄື່ອງຕື່ນຢູ່ ບໍ່ເຫັນແຈ້ງກຸສົນທຳທັງຫຼາຍ ບໍ່ໝັ່ນປະກອບຄວາມພຽນໃນການຈະເລີນ ໂພທິປັກຂິຍະທຳ ທັງເບື້ອງຕົ້ນແລະເບື້ອງປາຍແຫ່ງຣາຕີ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ"

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກຄຸ້ມຄອງທະວານໃນອິນຊີທັງຫຼາຍ ຈັກເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ ຈັກເປັນຜູ້ໝັ່ນປະກອບຄວາມພຽນເຄື່ອງຕື່ນຢູ່ ຈັກເປັນຜູ້ເຫັນແຈ້ງກຸສົນທຳທັງຫຼາຍ ຈັກເປັນຜູ້ໝັ່ນປະກອບຄວາມພຽນໃນການຈະເລີນໂພທິປັກຂິຍະທຳ ທັງເບື້ອງຕົ້ນແລະເບື້ອງປາຍແຫ່ງ ຣາຕີຢູ່"

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ"

**ໂສບປະສູດທີ ໗ ຈົບ**

## ໘. ມັດສະພັນທະສູດ

### ວ່າດ້ວຍຊາວປະມົງຫາປາ

[໑໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ພຣະຜູ້ມີພຣະພາກເຈົ້າຊົງດຳເນີນທາງໄກ ໄດ້ທອດພຣະເນດເຫັນຊາວປະມົງຫາປາ ຂ້າແລ້ວຂາຍຢູ່ ໃນທ້ອງຖິ່ນແຫ່ງໜຶ່ງ ໄດ້ສະເດັດແວ່ຂ້າງທາງ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ທີ່ເຫງົ້າໄມ້ແຫ່ງໜຶ່ງ ແລ້ວໄດ້ຕັດຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເຫັນຊາວປະມົງນັ້ນຜູ້ຫາປາ ຂ້າແລ້ວຂາຍຢູ່ບໍ?"

ພິກຂຸທັງຫຼາຍຂາບທູນວ່າ "ເຫັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ທ່ານທັງຫຼາຍເຄີຍໄດ້ເຫັນຫຼືເຄີຍໄດ້ຍິນມາແດ່ບໍ່ວ່າ "ຊາວປະມົງຫາປາຂ້າແລ້ວ ຂາຍຢູ່ ໄດ້ເປັນຜູ້ຂີ່ຊ້າງ ຂີ່ມ້າ ຂີ່ລົດ ຂີ່ຍານ ເປັນເຈົ້າຂອງໂພຄະຊັບ ຫຼື ຄອບຄອງ ກອງໂພຄະຊັບຫຼວງຫຼາຍ ຍ້ອນກຳນັ້ນ ຍ້ອນອາຊີບນັ້ນ"

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເປັນແນວນັ້ນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ຂໍ້ນັ້ນແມ່ນເຮົາກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຍິນມາເລີຍວ່າ "ຊາວປະມົງຫາປາຂ້າແລ້ວຂາຍຢູ່ ໄດ້ເປັນຜູ້ຂີ່ຊ້າງ ຂີ່ມ້າ ຂີ່ລົດ ຂີ່ຍານ ເປັນເຈົ້າຂອງໂພຄະຊັບ ຫຼືຄອບຄອງກອງໂພຄະຊັບຫຼວງຫຼາຍ ຍ້ອນ ກຳນັ້ນ ຍ້ອນອາຊີບນັ້ນ" ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຂົາເພ່ງເບິ່ງປາເຫຼົ່ານັ້ນທີ່ເຂົາເພິ່ງຂ້າ ທີ່ເພິ່ງນຳມາເພື່ອຂ້າດ້ວຍໃຈທີ່ເປັນບາບ ດັ່ງນັ້ນ ເຂົາຈຶ່ງບໍ່ໄດ້ຂີ່ຊ້າງ ບໍ່ໄດ້ຂີ່ມ້າ ບໍ່ໄດ້ຂີ່ລົດ ບໍ່ໄດ້ຂີ່ຍານ ບໍ່ໄດ້ເປັນເຈົ້າຂອງໂພຄະຊັບ ບໍ່ໄດ້ຄອບຄອງກອງໂພຄະຊັບຫຼວງຫຼາຍ

ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ທ່ານທັງຫຼາຍເຄີຍໄດ້ເຫັນຫຼືເຄີຍໄດ້ຍິນມາແດ່ບໍວ່າ "ຄົນຂ້າງົວ ຂ້າງົວແລ້ວຂາຍຢູ່ ໄດ້ເປັນຜູ້ຂີ່ຊ້າງ ຂີ່ມ້າ ຂີ່ລົດ ຂີ່ຍານ ເປັນເຈົ້າຂອງໂພຄະຊັບ ຫຼືຄອບຄອງກອງໂພຄະຊັບຫຼວງຫຼາຍ ຍ້ອນກຳນັ້ນ ຍ້ອນອາຊີບນັ້ນ"

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເປັນແນວນັ້ນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ຂໍ້ນັ້ນແມ່ນເຮົາກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຍິນມາເລີຍວ່າ "ຄົນຂ້າງົວ ຂ້າງົວແລ້ວຂາຍຢູ່ ໄດ້ເປັນຜູ້ຂີ່ຊ້າງ ຂີ່ມ້າ ຂີ່ລົດ ຂີ່ຍານ ເປັນເຈົ້າຂອງໂພຄະຊັບ ຫຼືຄອບຄອງກອງໂພຄະຊັບຫຼວງຫຼາຍຍ້ອນກຳນັ້ນ ຍ້ອນອາຊີບນັ້ນ" ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຂົາເພ່ງເບິ່ງງົວເຫຼົ່ານັ້ນ ທີ່ເຂົາເພິ່ງຂ້າ ທີ່ເພິ່ງນຳມາເພື່ອຂ້າດ້ວຍໃຈທີ່ເປັນບາບ ດັ່ງນັ້ນ ເຂົາຈຶ່ງບໍ່ໄດ້ຂີ່ຊ້າງ ບໍ່ໄດ້ຂີ່ມ້າ ບໍ່ໄດ້ຂີ່ລົດ ບໍ່ໄດ້ຂີ່ຍານ ບໍ່ໄດ້ເປັນເຈົ້າຂອງໂພຄະຊັບ ບໍ່ໄດ້ຄອບຄອງກອງໂພຄະຊັບຫຼວງຫຼາຍ

ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ທ່ານທັງຫຼາຍເຄີຍໄດ້ເຫັນຫຼືເຄີຍໄດ້ຍິນມາແດ່ບໍວ່າ "ຄົນຂ້າແກະ ຯລຯ ຄົນຂ້າໝູ ຯລຯ ພານນົກ ຯລຯ ນາຍພານເນື້ອ ຂ້າເນື້ອແລ້ວຂາຍຢູ່ ໄດ້ເປັນຜູ້ຂີ່ຊ້າງ ຂີ່ມ້າ ຂີ່ລົດ ຂີ່ຍານ ເປັນເຈົ້າຂອງໂພຄະຊັບ ຫຼືຄອບຄອງກອງໂພຄະຊັບຫຼວງຫຼາຍ ຍ້ອນກຳນັ້ນ ຍ້ອນອາຊີບນັ້ນ"

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເປັນແນວນັ້ນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ຂໍ້ນັ້ນແມ່ນເຮົາກໍບໍ່ເຄີຍໄດ້ເຫັນ ບໍ່ເຄີຍໄດ້ຍິນມາເລີຍວ່າ "ນາຍພານເນື້ອ ຂ້າເນື້ອແລ້ວຂາຍຢູ່ ໄດ້ເປັນຜູ້ຂີ່ຊ້າງ ຂີ່ມ້າ ຂີ່ລົດ ຂີ່ຍານ ເປັນເຈົ້າຂອງໂພຄະຊັບ ຫຼືຄອບຄອງກອງໂພຄະຊັບຫຼວງຫຼາຍ ຍ້ອນກຳນັ້ນ ຍ້ອນອາຊີບນັ້ນ" ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຂົາເພ່ງເບິ່ງເນື້ອທີ່ເຂົາເພິ່ງຂ້າ ທີ່ນຳມາເພື່ອຂ້າດ້ວຍໃຈທີ່ເປັນບາບ ດັ່ງນັ້ນ ເຂົາຈຶ່ງບໍ່ໄດ້ຂີ່ຊ້າງ ບໍ່ໄດ້ຂີ່ມ້າ ບໍ່ໄດ້ຂີ່ລົດ ບໍ່ໄດ້ຂີ່ຍານ ບໍ່ໄດ້ເປັນເຈົ້າຂອງໂພຄະຊັບ ບໍ່ໄດ້ຄອບຄອງກອງໂພຄະຊັບຫຼວງຫຼາຍ

ພິກຂຸທັງຫຼາຍ ຍ້ອນເພ່ງເບິ່ງສັດເດຍຣັດສານເຫຼົ່ານັ້ນທີ່ເຂົາເພິ່ງຂ້າ ທີ່ເພິ່ງນຳມາເພື່ອຂ້າ ດ້ວຍໃຈທີ່ເປັນບາບ ສັນນັ້ນ ເຂົາຈຶ່ງບໍ່ໄດ້ຂີ່ຊ້າງ ບໍ່ໄດ້ຂີ່ມ້າ ບໍ່ໄດ້ຂີ່ລົດ ບໍ່ໄດ້ຂີ່ຍານ ບໍ່ໄດ້ເປັນເຈົ້າຂອງໂພຄະຊັບ ບໍ່ໄດ້ຄອບຄອງກອງໂພຄະຊັບຫຼວງຫຼາຍ ບໍ່ຈຳເປັນຕ້ອງເວົ້າເຖິງຜູ້ເພ່ງເບິ່ງມະນຸດທີ່ເຂົາເພິ່ງຂ້າ ທີ່ເພິ່ງນຳມາເພື່ອຂ້າດ້ວຍໃຈທີ່ເປັນບາບ ຍ້ອນຜົນຂອງກຳນັ້ນ ຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເຂົາຕະຫຼອດການລະນານ ຫຼັງຈາກຕາຍແລ້ວ ເຂົາຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ”

**ມັດສະພັນທະສູດທີ ໗ ຈົບ**

## ໗. ປະຖົມມະຣະນັດສະຕິສູດ

## ວ່າດ້ວຍການຈະເລີນມະຣະນັດສະຕິສູດທີ ໑

[໑໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຄິນຊະກາວະສະຖາຣາມ[๑] ໃນນາທິກະຄາມ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

“ພິກຂຸທັງຫຼາຍ ມະຣະນັດສະຕິທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອະມະຕະ[๒] ມີອະມະຕະເປັນບ່ອນສຸດ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຍັງຈະເລີນມະຣະນັດສະຕິຢູ່ບໍ”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່”

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ “ພິກຂຸ ທ່ານຈະເລີນມະຣະນັດສະຕິແນວໃດ”

ພິກຂຸຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດແນວນີ້ວ່າ “ໂອນໍ ເຮົາເພິ່ງເປັນຢູ່ໄດ້ຕະຫຼອດຄືນໜຶ່ງແລະມື້ໜຶ່ງ ເຮົາເພິ່ງມະນະສິການ ເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍ” ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຈະເລີນມະຣະນັດສະຕິແນວນີ້”

ພິກຂຸອີກອົງໜຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່”

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິແນວໃດ"

ພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຄິດແນວນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ເມີດມື້ໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍ" ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຈະເລີນມະຣະນັດສະຕິແນວນີ້"

ພິກຂຸອີກອົງໜຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິແນວໃດ"

ພິກຂຸຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດ ແນວນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະສັນບິນທະບາດຄາບໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍ" ຂ້າແດ່ ພຣະອົງຜູ້ຈະເລີນຂ້າພຣະອົງຈະເລີນມະຣະນັດສະຕິແນວນີ້"

ພິກຂຸອີກອົງໜຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິແນວໃດ"

ພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງມີຄວາມຄິດແນວນີ້ວ່າ "ໂອນໍເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະຫຍ້ຳກິນຄຳເຂົ້າ ໔-໕ ຄຳ ເຮົາເພິ່ງມະນະສິການ ເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍ" ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈະເລີນມະຣະນັດສະຕິແນວນີ້"

ພິກຂຸອີກອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າ ພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິແນວໃດ"

ພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດ ແນວນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະຫຍ້ຳກິນຄຳເຂົ້າ ໑ ຄຳ ເຮົາເພິ່ງ ມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍ" ຂ້າແດ່ ພຣະອົ ຜູ້ຈະເລີນຂ້າພຣະອົງຈະເລີນມະຣະນັດສະຕິແນວນີ້"

ພິກຂຸອີກອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ແມ່ນຂ້າ ພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິແນວໃດ"

ພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດແນວນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະລົມທັນໃຈເຂົ້າທັນໃຈອອກ ຫຼື ທັນໃຈອອກທັນໃຈເຂົ້າ ເຮົາເພິ່ງມະນະສິການຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍ" ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຈະເລີນມະຣະນັດສະຕິແນວນີ້"

ເມື່ອພິກຂຸເຫຼົ່ານັ້ນຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດວ່າ

"ພິກຂຸທັງຫຼາຍ ພິກຂຸອົງໃດຈະເລີນມະຣະນັດສະຕິວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ຕະຫຼອດຄືນໜຶ່ງແລະມື້ໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍ"

ພິກຂຸອົງໃດ ຈະເລີນມະຣະນັດສະຕິແນວນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ເມິດມື້ໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍ"

ພິກຂຸອົງໃດ ຈະເລີນມະຣະນັດສະຕິແນວນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະສັນບິນທະບາດຄາບໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍ"

ພິກຂຸອົງໃດ ຈະເລີນມະຣະນັດສະຕິແນວນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະຫຍໍ້າກິນຄຳເຂົ້າ ໔-໕ ຄຳ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍ"

ເຮົາກ່າວວ່າ ພິກຂຸເຫຼົ່ານີ້ຍັງເປັນຜູ້ຜະໝາດຢູ່ ຍັງຈະເລີນມະຣະນັດສະຕິຢ່າງເບົາເພື່ອຄວາມໝົດສິ້ນອາສະວະທັງຫຼາຍ

ສ່ວນພິກຂຸອົງໃດ ຈະເລີນມະຣະນັດສະຕິແນວນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະຫຍໍ້າກິນຄຳເຂົ້າ ໑ ຄຳ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດ ກິດໃຫ້ຫຼາຍ"

ແລະ ພິກຂຸອົງໃດຈະເລີນມະຣະນັດສະຕິແນວນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະລົມທັນໃຈເຂົ້າທັນໃຈອອກ ຫຼືທັນໃຈອອກທັນໃຈເຂົ້າ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍ"

ພິກຂຸທັງຫຼາຍ ເຮົາກ່າວວ່າ ພິກຂຸເຫຼົ່ານີ້ເປັນຜູ້ບໍ່ຜະໝາດຢູ່ ຈະເລີນມະຣະນັດສະຕິຢ່າງແຮງກ້າເພື່ອຄວາມໝົດສິ້ນອາສະວະທັງຫຼາຍ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກເປັນຜູ້ບໍ່ຜະໝາດຢູ່ ຈັກຈະເລີນມະຣະນັດສະຕິຢ່າງແຮງກ້າເພື່ອຄວາມໝົດສິ້ນອາສະວະທັງຫຼາຍ"

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ"

**ປະຖົມມະຣະນັດສະຕິສູດທີ ໗ ຈົບ**

## ໑໐. ທຸຕິຍະມະຣະນັດສະຕິສູດ

## ວ່າດ້ວຍການຈະເລີນມະຣະນັດສະຕິສູດທີ ໘

[໘໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຄິນຊະກາວະສະຖາຣາມ ໃນນາທິກະຄາມ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດ ວ່າ

"ພິກຂຸທັງຫຼາຍ ມະຣະນັດສະຕິທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອະມະຕະ ມີອະມະຕະເປັນບ່ອນສຸດ

ມະຣະນັດສະຕິທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອະມະຕະ ມີອະມະຕະເປັນບ່ອນສຸດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເມື່ອກາງເວັນຜ່ານໄປ ກາງຄືນກ້າວເຂົ້າມາ ພິຈາລະນາ ເຫັນດັ່ງນີ້ວ່າ "ປັດໄຈແຫ່ງຄວາມຕາຍຂອງເຮົາມີຫຼາຍແທ້ ຄື ງູເພິ່ງກັດເຮົາກໍໄດ້ ແມງງອດເພິ່ງຕອດເຮົາກໍໄດ້ ຫຼືຂີ້ເຂັບເພິ່ງກັດເຮົາກໍໄດ້ ຍ້ອນເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍ[໑]ນັ້ນ ເຮົາເພິ່ງພາດມື່ນລົ້ມກໍໄດ້ ພັດຕາຫານທີ່ເຮົາສັນແລ້ວບໍ່ເພິ່ງຍ່ອຍກໍໄດ້ ບິຂອງເຮົາເພິ່ງກຳເຣີບກໍໄດ້ ເສມຫະຂອງເຮົາເພິ່ງກຳເຣີບກໍໄດ້ ຫຼືລົມມີພິດດັ່ງອາວຸດຂອງເຮົາເພິ່ງກຳເຣີບກໍໄດ້ ຍ້ອນເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍນັ້ນ" ພິກຂຸທັງຫຼາຍ ພິກຂຸນັ້ນເພິ່ງພິຈາລະນາເຫັນດັ່ງນີ້ວ່າ "ບາບອະກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນອັນຕະລາຍແກ່ເຮົາຜູ້ຈະຕາຍໃນເວລາກາງຄືນມີຢູ່ບໍ"

ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ "ບາບອະກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນອັນຕະລາຍແກ່ເຮົາຜູ້ຈະຕາຍໃນເວລາກາງຄືນຍັງມີຢູ່" ພິກຂຸນັ້ນຄວນທຳຄວາມພໍໃຈ ຄວາມ

ພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອລະບາບອະກຸສົນທຳເຫຼົ່ານັ້ນ

ພິກຂຸນັ້ນຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອລະບາບອະກຸສົນທຳເຫຼົ່ານັ້ນ ປຽບຄືບຸກຄົນຜູ້ມີຜ້າທີ່ຖືກໄຟໄໝ້ ຫຼືມີຫົວຖືກໄຟໄໝ້ ຄວນເຮັດຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອດັບໄຟທີ່ໄໝ້ຜ້າຫຼືໄຟທີ່ໄໝ້ຫົວນັ້ນ

ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ "ບາບອະກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນອັນຕະລາຍແກ່ເຮົາຜູ້ຈະຕາຍໃນເວລາກາງຄືນບໍ່ມີ" ພິກຂຸນັ້ນເພິ່ງເປັນຜູ້ມີປີຕິແລະປາໂມດ ນັ້ນແລ ຕາມຕັ້ງໃຈຮູ້ໃນກຸສົນທຳທັງຫຼາຍທັງກາງເວັນແລະກາງຄືນຢູ່ເທີ້ນ

ພິກຂຸໃນທຳວິໄນນີ້ ເມື່ອກາງຄືນຜ່ານໄປ ກາງເວັນກ້າວເຂົ້າມາ ພິຈາລະນາເຫັນດັ່ງນີ້ວ່າ "ປັດໄຈແຫ່ງຄວາມຕາຍຂອງເຮົາມີຫຼາຍແທ້ ຄື ງູເພິ່ງກັດເຮົາກໍໄດ້ ແມງງອດເພິ່ງຕອດເຮົາກໍໄດ້ ຫຼືຂີ້ເຂັບເພິ່ງກັດເຮົາກໍໄດ້ ຍ້ອນເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍນັ້ນ ເຮົາເພິ່ງພາດມື່ນລົ້ມກໍໄດ້ ພັດຕາຫານທີ່ເຮົາສັນແລ້ວບໍ່ເພິ່ງຍ່ອຍກໍໄດ້ ບີຂອງເຮົາເພິ່ງກຳເຣີບກໍໄດ້ ເສມຫະຂອງເຮົາເພິ່ງກຳເຣີບກໍໄດ້ ຫຼືລົມມີພິດດັ່ງອາວຸດຂອງເຮົາເພິ່ງກຳເຣີບ ຍ້ອນເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍນັ້ນ" ພິກຂຸນັ້ນເພິ່ງພິຈາລະນາເຫັນດັ່ງນີ້ວ່າ "ບາບອະກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນອັນຕະລາຍແກ່ເຮົາຜູ້ຈະຕາຍໃນເວລາກາງເວັນມີຢູ່ບໍ"

ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ "ບາບອະກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນອັນຕະລາຍແກ່ເຮົາຜູ້ຈະຕາຍໃນເວລາກາງເວັນຍັງມີຢູ່" ພິກຂຸນັ້ນຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະ ໃຫ້ມີປະມານຍິ່ງ ເພື່ອລະບາບອະກຸສົນທຳເຫຼົ່ານັ້ນ

ພິກຂຸນັ້ນຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອລະບາບອະກຸສົນທຳເຫຼົ່ານັ້ນ ປຽບຄືບຸກຄົນຜູ້ມີຜ້າທີ່ຖືກໄຟໄໝ້ ຫຼືມີຫົວຖືກໄຟໄໝ້ ເພິ່ງທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອດັບໄຟທີ່ໄໝ້ຜ້າຫຼືໄຟທີ່ໄໝ້ຫົວນັ້ນ

ພິກຂຸທັງຫຼາຍ ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ "ບາບອະກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນອັນຕະລາຍແກ່ເຮົາຜູ້ຈະຕາຍໃນເວລາກາງເວັນບໍ່ມີ" ພິກຂຸນັ້ນ ເພິ່ງເປັນຜູ້ມີປີຕິ

ແລະປາໂມດນັ້ນແລ ຈິດຈໍ່ຕັ້ງໃຈຮູ້ໃນກຸສົນທຳທັງຫຼາຍ ທັງກາງເວັນກາງຄືນຢູ່ເທີ້ນ

ພິກຂຸທັງຫຼາຍ ມະຣະນັດສະຕິທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອະມະຕະ ມີອະມະຕະເປັນບ່ອນສຸດ ເປັນແນວນີ້ແລ"

**ທຸຕິຍະມະຣະນັດສະຕິສູດທີ ໑໐ ຈົບ**

**ສາຣະນີຍະວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມສາຣະນີຍະສູດ
໒. ນິດສາຣະນີຍະສູດ
໓. ອະນຸຕັບປິຍະສູດ
໔. ໂສບປະສູດ
໕. ປະຖົມມະຣະນັດສະຕິສູດ
໖. ທຸຕິຍະສາຣະນີຍະສູດ
໗. ພັດທະກະສູດ
໘. ນະກຸລະປິຕຸສູດ
໙. ມັດສະພັນທະສູດ
໑໐. ທຸຕິຍະມະຣະນັດສະຕິສູດ

## ໔. ອະນຸດຕະຣິຍະວັກ

### ໝວດວ່າດ້ວຍອະນຸດຕະຣິຍະ[1]

### ໑. ສາມະກະສູດ

### ວ່າດ້ວຍໝູ່ບ້ານສາມະ

[໔໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ວິຫານຊື່ໂປກຂະຣະນີ ໃກ້ໝູ່ບ້ານສາມ ແຄວ້ນສັກກະ ຄັ້ງນັ້ນ ເມື່ອຣາຕີຜ່ານໄປ[໔] ເທວະດາຕົນໜຶ່ງມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວໂປກຂະຣະນີວິຫານ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ທຳ ໓ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸ

ທຳ ໓ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກວຽກງານ[໓]

໒. ຄວາມເປັນຜູ້ມັກການໂອ້ລົມ[໔]
໓. ຄວາມເປັນຜູ້ມັກການນອນຫຼັບ[໕]

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໓ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸ"

ເມື່ອເທວະດານັ້ນ ໄດ້ຂາບທູນດັ່ງນີ້ແລ້ວ ພຣະສາດສະດາຊົງພໍພຣະທະໄທ ເມື່ອເທວະດານັ້ນ ຮູ້ວ່າ "ພຣະສາດສະດາຊົງພໍພຣະທະໄທເຮົາ" ຈຶ່ງຖວາຍອະພິວາດກະທຳປະທັກຂິນແລ້ວຫາຍໄປ ໃນບ່ອນນັ້ນແລ

ເມື່ອຄືນນັ້ນຜ່ານໄປ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸ ທັງຫຼາຍ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາຕົນໜຶ່ງມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວໂປກຂະຣະນີວິຫານ ເຂົ້າມາຫາເຮົາຮອດບ່ອນຢູ່ ໄຫວ້ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບເຮົາດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໓ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸ

ທຳ ໓ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກວຽກງານ
໒. ຄວາມເປັນຜູ້ມັກການໂອ້ລົມ
໓. ຄວາມເປັນຜູ້ມັກການນອນຫຼັບ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໓ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸ"

ເທວະດານັ້ນເມື່ອໄດ້ກ່າວດັ່ງນີ້ແລ້ວ ຈຶ່ງໄຫວ້ເຮົາກະທຳປະທັກຂິນແລ້ວຫາຍໄປ ໃນບ່ອນນັ້ນແລ ພິກຂຸທັງຫຼາຍ ບໍ່ແມ່ນລາບຂອງທ່ານທັງຫຼາຍ ທ່ານທັງຫຼາຍໄດ້ຊົ່ວແລ້ວນໍ ທີ່ທ່ານທັງຫຼາຍເສື່ອມຈາກກຸສົນທຳ ແມ່ນພວກເທວະດາກໍຮູ້

ພິກຂຸທັງຫຼາຍ ເຮົາຈັກສະແດງປະຣິຫານີຍະທຳ (ທຳທີ່ເປັນເຫດແຫ່ງຄວາມເສື່ອມ) ໓ ປະການຂໍ້ອື່ນອີກ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ ພິກຂຸທັງຫຼາຍ ປະຣິຫານີຍະທຳ ໓ ປະການ

ປະຣິຫານີຍະທຳ ໓ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກການຄຸກຄີດ້ວຍໝູ່[໑]

໔. ຄວາມເປັນຜູ້ວ່າຍາກ
໓. ຄວາມເປັນຜູ້ມີປາປະມິດ (ມິດຊົ່ວ)

ພິກຂຸທັງຫຼາຍ ປະຣິຫານິຍະທຳ ໓ ປະການນີ້ແລ

ພິກຂຸທັງຫຼາຍ ຊົນທັງຫຼາຍລາງພວກໃນອະດີດເສື່ອມແລ້ວຈາກກຸສົນທຳທັງຫຼາຍ ຊົນເຫຼົ່ານັ້ນທັງໝົດກໍເສື່ອມຍ້ອນທຳ ໖ ປະການນີ້ແລ

ຊົນທັງຫຼາຍລາງພວກໃນອະນາຄົດຈັກເສື່ອມຈາກກຸສົນທຳທັງຫຼາຍ ຊົນເຫຼົ່ານັ້ນທັງໝົດກໍຈັກເສື່ອມຍ້ອນທຳ ໖ ປະການນີ້ແລ

ຊົນທັງຫຼາຍລາງພວກໃນປັດຈຸບັນກຳລັງເສື່ອມຈາກກຸສົນທຳທັງຫຼາຍ ຊົນເຫຼົ່ານັ້ນທັງໝົດກໍເສື່ອມຍ້ອນທຳ ໖ ປະການນີ້ແລ

**ສາມະກະສູດທີ ໑ ຈົບ**

## ໔. ອະປະຣິຫານິຍະສູດ

## ວ່າດ້ວຍອະປະຣິຫານິຍະທຳ

[໔໔] ພິກຂຸທັງຫຼາຍ ເຮົາຈັກສະແດງອະປະຣິຫານິຍະທຳ (ທຳທີ່ບໍ່ເປັນເຫດແຫ່ງຄວາມເສື່ອມ) ໖ ປະການນີ້ ທ່ານທັງຫຼາຍຈົ່ງຟັງ ໆລໆ

ອະປະຣິຫານິຍະທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ບໍ່ມັກ ວຽກງານ[1]
໔. ຄວາມເປັນຜູ້ບໍ່ມັກການ ໂອ້ລົມ[2]
໓. ຄວາມເປັນຜູ້ບໍ່ມັກການ ນອນຫຼັບ[3]
໔. ຄວາມເປັນຜູ້ບໍ່ມັກການ ຄຸກຄີດ້ວຍໝູ່
໕. ຄວາມເປັນຜູ້ວ່າງ່າຍ
໖. ຄວາມເປັນຜູ້ມີກັນລະຍານະມິດ (ມິດດີ)

ພິກຂຸທັງຫຼາຍ ອະປະຣິຫານິຍະທຳ ໖ ປະການນີ້ແລ

ພິກຂຸທັງຫຼາຍ ຊົນທັງຫຼາຍລາງພວກໃນອະດີດບໍ່ເສື່ອມຈາກກຸສົນທຳທັງຫຼາຍ ຊົນເຫຼົ່ານັ້ນທັງໝົດກໍບໍ່ເສື່ອມຍ້ອນທຳ ໖ ປະການນີ້ແລ

ຊົນທັງຫຼາຍລາງພວກໃນອະນາຄົດຈັກບໍ່ເສື່ອມຈາກກຸສົນທຳທັງຫຼາຍ ຊົນເຫຼົ່ານັ້ນທັງໝົດກໍຈັກບໍ່ເສື່ອມຍ້ອນທຳ ໖ ປະການນີ້ແລ

ຊົນທັງຫຼາຍລາງພວກໃນປັດຈຸບັນບໍ່ເສື່ອມຈາກກຸສົນທຳທັງຫຼາຍ ຊົນເຫຼົ່ານັ້ນທັງໝົດກໍບໍ່ເສື່ອມຍ້ອນທຳ ໖ ປະການນີ້ແລ

**ອະປະຣິຫານິຍະສູດທີ ໘ ຈົບ**

## ໙. ພະຍະສູດ
## ວ່າດ້ວຍໄພເປັນຊື່ຂອງກາມ

[໘໙] ພິກຂຸທັງຫຼາຍ

໑. ຄຳວ່າ "ໄພ" ນີ້ເປັນຊື່ຂອງກາມ
໒. ຄຳວ່າ "ທຸກ" ນີ້ເປັນຊື່ຂອງກາມ
໓. ຄຳວ່າ "ພະຍາດ" ນີ້ເປັນຊື່ຂອງກາມ
໔. ຄຳວ່າ "ຝີ" ນີ້ເປັນຊື່ຂອງກາມ
໕. ຄຳວ່າ "ເຄື່ອງຂ້ອງ" ນີ້ເປັນຊື່ຂອງກາມ
໖. ຄຳວ່າ "ເປືອກຕົມ" ນີ້ເປັນຊື່ຂອງກາມ

ຄຳວ່າ "ໄພ" ນີ້ເປັນຊື່ຂອງກາມ ຍ້ອນເຫດໃດ

ຍ້ອນສັດໂລກຜູ້ຍິນດີດ້ວຍກາມຣາຄະ ຖືກສັນທະຣາຄະຜູກມັດໄວ້ ຍ່ອມບໍ່ພົ້ນຈາກໄພທັງທີ່ມີໃນພົບນີ້ ທັງທີ່ມີໃນພົບໜ້າ ດັ່ງນັ້ນ ຄຳວ່າ "ໄພ" ນີ້ຈຶ່ງເປັນຊື່ຂອງກາມ

ຄຳວ່າ "ທຸກ" ฯລฯ

ຄຳວ່າ "ພະຍາດ" ฯລฯ

ຄຳວ່າ "ຝີ" ฯລฯ

ຄຳວ່າ "ເຄື່ອງຂ້ອງ" ฯລฯ

ຄຳວ່າ "ເປືອກຕົມ" ນີ້ເປັນຊື່ຂອງກາມ ຍ້ອນເຫດໃດ

ຍ້ອນສັດໂລກຜູ້ຍິນດີດ້ວຍກາມຣາຄະ ຖືກສັນທະຣາຄະກ່ຽວພັນໄວ້ ຍ່ອມບໍ່ພົ້ນຈາກເປືອກຕົມທັງທີ່ມີໃນພົບນີ້ ທັງທີ່ມີໃນພົບໜ້າ ດັ່ງນັ້ນ ຄຳວ່າ "ເປືອກຕົມ" ນີ້ຈຶ່ງເປັນຊື່ ຂອງກາມ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາ ປະພັນຕໍ່ໄປອີກ ວ່າ

ໄພ ທຸກ ພະຍາດ (ຝີ) ເຄື່ອງຂ້ອງແລະເປືອກຕົມ
ເຫຼົ່ານີ້ເຮົາຮຽກວ່າການທີ່ຂ້ອງຂອງປຸຖຸຊົນ
ຊົນທັງຫຼາຍເຫັນໄພໃນອຸປາທານ[໒]
ອັນເປັນແດນເກີດແຫ່ງຊາດແລະມໍລະນະ
ຍ່ອມລຸດພົ້ນໃນທຳເປັນທີ່ສິ້ນສຸດໄປແຫ່ງຊາດແລະມໍລະນະ[໑]
ຍ້ອນບໍ່ຖືໝັ້ນ
ຊົນເຫຼົ່ານັ້ນ ເຖິງທຳເປັນແດນກະເສມ
ມີຄວາມສຸກ ດັບເຢັນໃນປັດຈຸບັນ
ລ່ວງທຸກທັງໝົດໄປໄດ້ ພົ້ນເວນທັງປວງ

**ພະຍະສູດທີ ໓ ຈົບ**

## ໔. ຫິມະວັນຕະສູດ

## ວ່າດ້ວຍພູຫຼວງຫິມະພານ

[໒໔] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເພິ່ງທຳລາຍພູຫຼວງຫິມະພານໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງອະວິດຊາອັນຊົ່ວຊາມເລີຍ ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ສະຫຼາດໃນການເຂົ້າສະມາທິ[໒]
໒. ເປັນຜູ້ສະຫຼາດໃນການໃຫ້ສະມາທິຕັ້ງຢູ່ໄດ້[໓]
໓. ເປັນຜູ້ສະຫຼາດໃນການອອກຈາກສະມາທິ[໔]
໔. ເປັນຜູ້ສະຫຼາດໃນຄວາມພ້ອມແຫ່ງສະມາທິ[໑]
໕. ເປັນຜູ້ສະຫຼາດໃນອາລົມແຫ່ງສະມາທິ[໒]
໖. ເປັນຜູ້ສະຫຼາດໃນອະພິນີຫານແຫ່ງສະມາທິ[໓]

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເພິ່ງທຳລາຍພູຫຼວງຫິມະພານໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງອະວິດຊາທີ່ຊົ່ວຊາມເລີຍ

**ຫິມະວັນຕະສູດທີ ໔ ຈົບ**

# ໕. ອະນຸດສະຕິດຖານະສູດ

## ວ່າດ້ວຍອະນຸດສະຕິດຖານ[໕]

[໒໕] ພິກຂຸທັງຫຼາຍ ອະນຸດສະຕິດຖານ ໖ ປະການນີ້

ອະນຸດສະຕິດຖານ ໖ ປະການ ອັນໃດແດ່ ຄື

໑. ອະຣິຍະສາວົກໃນທຳວິໄນນີ້ຣະນຶກເຖິງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະ ພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ສະໄໝໃດ ອະຣິຍະສາວົກ ຣະນຶກເຖິງຕະຖາຄົດແລ້ວສະໄໝນັ້ນ ຈິດຂອງທ່ານຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ເປັນຈິດດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປພົ້ນໄປ ລຸດໄປຈາກຄວາມກຳໜັດ ຄຳວ່າ "ກຳໜັດ" ນີ້ເປັນຊື່ຂອງການມະຄຸນ ໕

ພິກຂຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດພຸດທານຸດສະຕິນີ້ໃຫ້ເປັນອາລົມ ຍ່ອມບໍລິສຸດ[໑]ໄດ້ແນວນີ້ແລ

໒. ອະຣິຍະສາວົກຣະນຶກເຖິງທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ໆລໆ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ" ສະໄໝໃດ ອະຣິຍະສາວົກ ຣະນຶກເຖິງທຳ ສະໄໝນັ້ນ ຈິດຂອງທ່ານຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ເປັນຈິດດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປ ພົ້ນໄປ ລຸດໄປຈາກຄວາມກຳໜັດ ຄຳວ່າ "ກຳໜັດ" ນີ້ເປັນຊື່ຂອງການມະຄຸນ ໕

ພິກຂຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດທຳມານຸດສະຕິນີ້ໃຫ້ເປັນອາລົມ ຍ່ອມບໍລິສຸດໄດ້ແນວນີ້ແລ

໓. ອະຣິຍະສາວົກຣະນຶກເຖິງສົງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ໆລໆ ເປັນນາບຸນອັນປະເສີດຂອງໂລກ" ສະໄໝໃດ ອະຣິຍະສາວົກ ຣະນຶກເຖິງສົງສະ ໄໝນັ້ນ ຈິດຂອງທ່ານຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມເປັນຈິດດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປ ພົ້ນໄປ ລຸດໄປຈາກຄວາມກຳໜັດ ຄຳວ່າ "ກຳໜັດ" ນີ້ເປັນຊື່ຂອງການມະຄຸນ ໕

ພິກຂຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດສັງຄານຸດສະຕິນີ້ໃຫ້ເປັນອາລົມ ຍ່ອມບໍລິສຸດໄດ້ແນວນີ້ແລ

๔. ອະຣິຍະສາວິກຣະນຶກເຖິງສີນຂອງຕົນທີ່ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ສະໄໝໃດ ອະຣິຍະສາວິກຣະນຶກເຖິງສີນ ສະໄໝນັ້ນ ຈິດຂອງທ່ານຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ເປັນຈິດດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປ ພົ້ນໄປ ລຸດໄປຈາກຄວາມກຳໜັດ ຄຳວ່າ "ກຳໜັດ" ນີ້ເປັນຊື່ຂອງກາມມະຄຸນ ๕

ພິກຂຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດສີລານຸດສະຕິນີ້ໃຫ້ເປັນອາລົມ ຍ່ອມບໍລິສຸດໄດ້ແນວນີ້ແລ

๕. ອະຣິຍະສາວິກຣະນຶກເຖິງຈາຄະຂອງຕົນວ່າ "ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ຯລຯ ຄວນແກ່ການຂໍ ຍິນດີໃນການແຈກທານຢູ່ຄອງເຮືອນ" ສະໄໝໃດ ອະຣິຍະສາວິກຣະນຶກເຖິງຈາຄະ ສະໄໝນັ້ນ ຈິດຂອງທ່ານຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ເປັນຈິດດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປ ພົ້ນໄປ ລຸດໄປຈາກຄວາມກຳໜັດ ຄຳວ່າ "ກຳໜັດ" ນີ້ເປັນຊື່ຂອງກາມມະຄຸນ ๕

ພິກຂຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດຈາຄານຸດສະຕິນີ້ໃຫ້ເປັນອາລົມ ຍ່ອມບໍລິສຸດໄດ້ແນວນີ້ແລ

๖. ອະຣິຍະສາວິກຣະນຶກເຖິງເທວະດາທັງຫຼາຍວ່າ "ມີເທວະດາຊັ້ນຈາຕຸມະຫາຣາດ ເທວະດາຊັ້ນຕາວະຕິງສາ ເທວະດາຊັ້ນຍາມາ ເທວະດາຊັ້ນດຸສິດ ເທວະດາຊັ້ນນິມມານະຣະດີ ເທວະດາຊັ້ນປະຣະນິມມິຕະວະສະວັດດີ ເທວະດາຊັ້ນພົມກາຍ ເທວະດາຊັ້ນສູງຂຶ້ນໄປກວ່ານັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍສັດທາເຊັ່ນໃດ ຈຸຕິຈາກໂລກນີ້ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີສັດທາເຊັ່ນນັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍສີນເຊັ່ນໃດ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາເຊັ່ນໃດ ຈຸຕິຈາກໂລກນີ້ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີປັນຍາເຊັ່ນນັ້ນ" ສະໄໝໃດ ອະຣິຍະສາວິກຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະ ປັນຍາຂອງຕົນ ແລະຂອງເທວະດາເຫຼົ່ານັ້ນ ສະ ໄໝນັ້ນ ຈິດຂອງທ່ານຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ເປັນຈິດ ດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປ ພົ້ນໄປ ລຸດໄປຈາກຄວາມກຳໜັດ ຄຳວ່າ "ກຳໜັດ" ນີ້ເປັນຊື່ຂອງກາມມະຄຸນ ๕

ພິກຂຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດອະນຸດສະຕິທັງ ๖ ນີ້ໃຫ້ເປັນອາລົມ ຍ່ອມບໍລິສຸດໄດ້ແນວນີ້ແລ

ພິກຂຸທັງຫຼາຍ ອະນຸດສະຕິດຖານ ๖ ປະການນີ້ແລ

**ອະນຸດສະຕິດຖານສູດທີ ๕ ຈົບ**

# ໖. ມະຫາກັດຈານະສູດ

## ວ່າດ້ວຍພຣະມະຫາກັດຈານະ[๑]

[໔໖] ໃນບ່ອນນັ້ນແລ ທ່ານພຣະມະຫາກັດຈານະ ຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະມະຫາກັດຈານະຈຶ່ງໄດ້ກ່າວດັ່ງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ໄດ້ຕັດສະຣູ້ວິທີບັນລຸປ່ອງວ່າງໃນບ່ອນຄັບແຄບ[๒]ຄືອະນຸດສະຕິດຖານ ໖ ປະການ ເພື່ອຄວາມບໍລິສຸດຂອງສັດທັງຫຼາຍ ເພື່ອກ້າວລ່ວງໂສກະ(ຄວາມໂສກເສົ້າ)ແລະປະຣິເທວະ(ຄວາມຮໍ່າໄຮ) ເພື່ອດັບທຸກ(ຄວາມທຸກກາຍ)ແລະໂທມະນັດ(ຄວາມທຸກໃຈ) ເພື່ອບັນລຸຍາຍະທຳ[๓] ເພື່ອເຮັດໃຫ້ແຈ້ງນິບພານ

ອະນຸດສະຕິດຖານ ໖ ປະການ ອັນໃດແດ່ ຄື

໑. ອະຣິຍະສາວົກໃນພຣະທຳວິໄນນີ້ຣະນຶກເຖິງພຣະຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ສະໄໝໃດ ອະຣິຍະສາວົກ ຣະນຶກເຖິງພຣະຕະຖາຄົດ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ເປັນຈິດດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປ ພົ້ນໄປ ລຸດໄປຈາກຄວາມກຳໜັດ ຄຳວ່າ "ກຳໜັດ" ນີ້ ເປັນຊື່ຂອງການມະຄຸນ ໕ ອະຣິຍະສາວົກນັ້ນແລ ມີຈິດສະເໝີອາກາດ ອັນເຕັມປ່ຽມ ເປັນມະ ຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນ[๔]ຢູ່ໂດຍປະການທັງປວງ

ຜູ້ມີອາຍຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດພຸດທານຸດສະຕິນີ້ໃຫ້ເປັນອາລົມ ຍ່ອມເປັນຜູ້ມີຄວາມບໍລິສຸດເປັນທຳມະດາແນວນີ້ແລ

໒. ອະຣິຍະສາວົກຣະນຶກເຖິງພຣະທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຯລຯ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ" ສະໄໝໃດ ອະຣິຍະສາວົກ ຣະນຶກເຖິງພຣະທຳ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ຍ່ອມເປັນຈິດດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປ ພົ້ນໄປ ລຸດໄປຈາກຄວາມກຳໜັດ ຄຳວ່າ "ກຳ ໜັດ" ນີ້ເປັນຊື່ຂອງການມະຄຸນ ໕ ອະຣິຍະສາວົກນັ້ນແລ ມີຈິດສະເໝີອາກາດ ອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ໂດຍປະການທັງປວງ

ຜູ້ມີອາຍຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດທຳມານຸດສະຕິນີ້ໃຫ້ເປັນອາລົມ ຍ່ອມເປັນຜູ້ມີຄວາມບໍລິສຸດເປັນທຳມະດາແນວນີ້ແລ

໓. ອະຣິຍະສາວົກຣະນຶກເຖິງພຣະສົງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ຯລຯ ເປັນນາບຸນອັນປະເສີດຂອງໂລກ" ສະໄໝໃດ ອະຣິຍະສາວົກຣະນຶກເຖິງພຣະສົງ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ຍ່ອມເປັນຈິດດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປ ພົ້ນໄປ ລຸດໄປຈາກຄວາມກຳໜັດ ຄຳວ່າ "ກຳໜັດ" ນີ້ເປັນຊື່ຂອງກາມມະຄຸນ ໕ ອະຣິຍະສາວົກນັ້ນແລ ມີຈິດສະເໝີອາກາດ ອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ໂດຍປະການທັງປວງ

ຜູ້ມີອາຍຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດສັງຄານຸດສະຕິນີ້ໃຫ້ເປັນອາລົມ ຍ່ອມເປັນຜູ້ມີຄວາມບໍລິສຸດເປັນທຳມະດາແນວນີ້ແລ

໔. ອະຣິຍະສາວົກຣະນຶກເຖິງສິນຂອງຕົນ ທີ່ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ສະໄໝໃດ ອະຣິຍະສາວົກຣະນຶກເຖິງສິນຂອງຕົນ ສະໄໝນັ້ນ ຈິດຂອງອະຣິຍະສາວົກ ນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ຍ່ອມເປັນຈິດດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປ ພົ້ນໄປ ລຸດໄປຈາກຄວາມກຳໜັດ ຄຳວ່າ "ກຳໜັດ" ນີ້ເປັນຊື່ຂອງກາມມະຄຸນ ໕ ອະຣິຍະສາວົກນັ້ນແລ ມີຈິດສະເໝີອາກາດ ອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ໂດຍປະການທັງປວງ

ຜູ້ມີອາຍຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດສີລານຸດສະຕິນີ້ໃຫ້ເປັນອາລົມ ຍ່ອມເປັນຜູ້ມີຄວາມບໍລິສຸດເປັນທຳມະດາແນວນີ້ແລ

໕. ອະຣິຍະສາວົກຣະນຶກເຖິງຈາຄະຂອງຕົນວ່າ "ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ຯລຯ ຄວນແກ່ການຂໍ ຍິນດີໃນການແຈກທານຢູ່ຄອງເຮືອນ" ສະໄໝໃດ ອະຣິຍະສາວົກຣະນຶກເຖິງຈາຄະຂອງຕົນ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ເປັນຈິດດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປ ພົ້ນໄປ ລຸດໄປຈາກຄວາມກຳໜັດ ຄຳວ່າ "ກຳໜັດ" ນີ້ ເປັນຊື່ຂອງກາມມະຄຸນ ໕ ອະຣິຍະສາວົກນັ້ນແລມີຈິດສະເໝີອາກາດ ອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ໂດຍປະການທັງປວງ

ຜູ້ມີອາຍຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດຈາຄານຸດສະຕິນີ້ໃຫ້ເປັນອາລົມ ຍ່ອມເປັນຜູ້ມີຄວາມບໍລິສຸດເປັນທຳມະດາແນວນີ້ແລ

໖. ອະຣິຍະສາວົກຣະນຶກເຖິງເທວະດາວ່າ "ມີເທວະດາຊັ້ນຈາຕຸມະຫາຣາດ ຯລຯ ເທວະດາຊັ້ນສູງຂຶ້ນໄປກວ່ານັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍສັດທາເຊັ່ນໃດ ຈຸຕິຈາກໂລກນີ້ ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີສັດທາເຊັ່ນນັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍ ສີນເຊັ່ນໃດຯລຯ ສຸຕະຯລຯ ຈາຄະຯລຯ ປັນຍາເຊັ່ນໃດ ແມ່ນເຮົາເອງກໍມີປັນຍາເຊັ່ນນັ້ນ ສະໄໝໃດ ອະຣິຍະສາວົກຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະປັນຍາຂອງຕົນ ແລະຂອງ ເທວະດາເຫຼົ່ານັ້ນ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະ ກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ເປັນຈິດດຳເນີນໄປຊື່ຢ່າງແນ່ນອນ ເປັນຈິດອອກໄປ ພົ້ນໄປ ລຸດໄປ ຈາກຄວາມກຳໜັດ ຄຳວ່າ "ກຳໜັດ" ນີ້ເປັນຊື່ຂອງກາມມະຄຸນ ໕ ອະຣິຍະສາວົກນັ້ນແລມີຈິດ ສະເໝີດ້ວຍອາກາດ ອັນເຕັມປ່ຽມ ເປັນມະ ຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມ ບຽດບຽນຢູ່ໂດຍປະການທັງປວງ

ຜູ້ມີອາຍຸທັງຫຼາຍ ສັດລາງພວກໃນໂລກນີ້ເຮັດເທວະຕານຸດສະຕິນີ້ໃຫ້ເປັນອາລົມ ຍ່ອມ ເປັນຜູ້ມີຄວາມບໍລິສຸດເປັນທຳມະດາແນວນີ້ແລ

ຜູ້ມີອາຍຸທັງຫຼາຍ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ໄດ້ຕັດສະຮູ້ວິທີ ບັນລຸປ່ອງວ່າງໃນບ່ອນຄັບແຄບ ຄື ອະນຸດສະຕິດຖານ ໖ ປະການນີ້ ເພື່ອຄວາມບໍລິສຸດຂອງ ສັດທັງຫຼາຍ ເພື່ອກ້າວລ່ວງໂສກະ ແລະປະຣິເທວະ ເພື່ອດັບທຸກ ແລະໂທມະນັດ ເພື່ອບັນລຸ ຍາຍະທຳ ເພື່ອເຮັດໃຫ້ແຈ້ງ ນິບພານ

**ມະຫາກັດຈານະສູດທີ ໖ ຈົບ**

## ໗. ປະຖົມສະມະຍະສູດ

### ວ່າດ້ວຍສະໄໝທີ່ຄວນພົບຜູ້ຈະເລີນພາວະນາສູດທີ ໑

[໔໗] ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະ ພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ ມີທໍ່ໃດນໍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸ ສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາ ທາງໃຈ ໖ ປະການນີ້

ສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ ໕ ປະການ ອັນໃດແດ່ ຄື

໑. ສະໄໝໃດ ພິກຂຸໃນທຳວິໄນນີ້ມີຈິດຖືກກາມຣາຄະ໌ກຸ້ມລຸມ ຖືກກາມຣາຄະຄອບງຳຢູ່ ແລະທ່ານບໍ່ຮູ້ແຈ້ງເຊິ່ງອຸບາຍເຄື່ອງກຳຈັດກາມຣາຄະທີ່ເກີດຂຶ້ນຕາມຄວາມເປັນຈິງ ສະໄໝນັ້ນ ພິກຂຸນັ້ນເພິ່ງເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈແລ້ວຖາມແນວນີ້ວ່າ "ຜູ້ມີອາຍຸ ຂ້ານ້ອຍມີຈິດຖືກກາມຣາຄະ ກຸ້ມລຸມ ຖືກກາມຣາຄະຄອບງຳຢູ່ ແລະຂ້ານ້ອຍກໍບໍ່ຮູ້ແຈ້ງເຊິ່ງອຸບາຍເຄື່ອງກຳຈັດກາມຣາຄະທີ່ເກີດຂຶ້ນຕາມຄວາມເປັນຈິງ ຂໍຜູ້ມີອາຍຸໂຜດສະແດງທຳເພື່ອລະກາມຣາຄະແກ່ຂ້ານ້ອຍເທີ້ນ" ພິກຂຸຜູ້ຈະເລີນພາວະນາທາງໃຈຍ່ອມສະແດງທຳ໌ເພື່ອລະກາມຣາຄະແກ່ທ່ານ ນີ້ເປັນສະໄໝທີ ໑ ທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ

໒. ສະໄໝໃດ ພິກຂຸມີຈິດຖືກພະຍາບາດ(ຄວາມຄິດຮ້າຍ)ກຸ້ມລຸມ ຖືກພະຍາບາດຄອບງຳຢູ່ ແລະທ່ານບໍ່ຮູ້ແຈ້ງເຊິ່ງອຸບາຍເຄື່ອງກຳຈັດພະຍາບາດທີ່ເກີດຂຶ້ນຕາມຄວາມເປັນຈິງ ສະໄໝນັ້ນ ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸຜູ້ຈະເລີນພາວະນາທາງໃຈແລ້ວກ່າວແນວນີ້ວ່າ "ຜູ້ມີອາຍຸ ຂ້ານ້ອຍມີຈິດຖືກພະຍາບາດ ກຸ້ມລຸມ ຖືກພະຍາບາດຄອບງຳຢູ່ ແລະຂ້ານ້ອຍກໍບໍ່ຮູ້ແຈ້ງເຊິ່ງອຸບາຍເຄື່ອງກຳຈັດພະຍາບາດທີ່ເກີດຂຶ້ນຕາມຄວາມເປັນຈິງ ຂໍຜູ້ມີອາຍຸໂຜດສະແດງທຳເພື່ອລະພະຍາບາດແກ່ຂ້ານ້ອຍເທີ້ນ" ພິກຂຸຜູ້ຈະເລີນພາວະນາທາງໃຈຍ່ອມສະແດງທຳ໌ເພື່ອລະພະຍາບາດແກ່ທ່ານ ນີ້ເປັນສະໄໝທີ ໒ ທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ

໓. ສະໄໝໃດ ພິກຂຸມີຈິດຖືກຖີນະມິດທະ(ຄວາມທໍ້ຖອຍແລະງ່ວງເຫງົາ)ກຸ້ມລຸມ ຖືກຖີນະມິດທະຄອບງຳຢູ່ ແລະທ່ານບໍ່ຮູ້ແຈ້ງເຊິ່ງອຸບາຍເຄື່ອງກຳຈັດ ຖີນະມິດທະທີ່ເກີດຂຶ້ນຕາມຄວາມເປັນຈິງ ສະ ໄໝນັ້ນ ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸຜູ້ຈະເລີນພາວະນາທາງໃຈແລ້ວກ່າວແນວນີ້ວ່າ "ຜູ້ມີອາຍຸ ຂ້ານ້ອຍມີຈິດຖືກຖີນະມິດທະກຸ້ມລຸມ ຖືກຖີນະມິດທະຄອບງຳຢູ່ ແລະຂ້ານ້ອຍກໍບໍ່ຮູ້ແຈ້ງເຊິ່ງອຸບາຍເຄື່ອງກຳຈັດຖີນະມິດທະທີ່ເກີດຂຶ້ນຕາມຄວາມເປັນຈິງ ຂໍຜູ້ມີອາຍຸໄດ້ໂຜດສະແດງທຳເພື່ອລະຖີນະ ມິດທະແກ່ຂ້ານ້ອຍເທີ້ນ" ພິກຂຸຜູ້ຈະເລີນພາວະນາທາງໃຈ ຍ່ອມສະແດງທຳ໌ເພື່ອລະຖີນະມິດທະແກ່ທ່ານ ນີ້ເປັນສະໄໝທີ ໓ ທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ

໔. ສະໄໝໃດ ພິກຂຸມີຈິດຖືກອຸດທັດຈະກຸກກຸດຈະ(ຄວາມຟຸ້ງຊ່ານແລະຮ້ອນໃຈ) ກຸ້ມລຸມ ຖືກອຸດທັດຈະກຸກກຸດຈະຄອບງຳຢູ່ ແລະທ່ານບໍ່ຮູ້ແຈ້ງເຊິ່ງອຸບາຍ ເຄື່ອງກຳຈັດອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວອອກໄປຕາມຄວາມເປັນຈິງ ສະໄໝນັ້ນ ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸຜູ້ຈະເລີນພາວະນາທາງໃຈແລ້ວກ່າວແນວນີ້ວ່າ "ຜູ້ມີອາຍຸ ຂ້ານ້ອຍມີຈິດຖືກອຸດທັດຈະກຸກກຸດຈະ ກຸ້ມລຸມ ຖືກອຸດທັດຈະກຸກກຸດຈະຄອບງຳຢູ່ ແລະຂ້ານ້ອຍກໍບໍ່ຮູ້ແຈ້ງເຊິ່ງອຸບາຍເຄື່ອງກຳຈັດ ອຸດທັດຈະກຸກກຸດຈະທີ່ເກີດຂຶ້ນຕາມຄວາມເປັນຈິງ ຂໍຜູ້ມີອາຍຸໂຜດສະແດງທຳເພື່ອລະອຸດທັດຈະກຸກ

ກຸດຈະແກ່ຂ້ານ້ອຍເທີ້ນ" ພິກຂຸຜູ້ຈະເລີນພາວະນາທາງໃຈຍ່ອມສະແດງທຳ[1]ເພື່ອລະອຸດທັດຈະກຸກກຸດຈະແກ່ທ່ານ ນີ້ເປັນສະໄໝທີ ໔ ທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ

໕. ສະໄໝໃດ ພິກຂຸມີຈິດຖືກວິຈິກິດສາ(ຄວາມລັງເລສົງໄສ)ກຸ້ມລຸມ ຖືກວິຈິກິດສາ ຄອບງຳຢູ່ ແລະທ່ານບໍ່ຮູ້ແຈ້ງເຊິ່ງອຸບາຍເຄື່ອງກຳຈັດວິຈິກິດສາທີ່ເກີດຂຶ້ນຕາມຄວາມເປັນຈິງ ສະໄໝນັ້ນ ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸຜູ້ຈະເລີນພາວະນາທາງໃຈແລ້ວກ່າວແນວນີ້ວ່າ "ຜູ້ມີອາຍຸຂ້ານ້ອຍມີຈິດຖືກວິຈິກິດສາກຸ້ມລຸມ ຖືກວິຈິກິດສາຄອບງຳຢູ່ ແລະຂ້ານ້ອຍກໍບໍ່ຮູ້ແຈ້ງເຊິ່ງອຸບາຍເຄື່ອງກຳຈັດວິຈິກິດສາ ທີ່ເກີດຂຶ້ນຕາມຄວາມເປັນຈິງ ຂໍຜູ້ມີອາຍຸໂຜດສະແດງທຳເພື່ອລະວິຈິກິດສາແກ່ຂ້ານ້ອຍເທີ້ນ" ພິກຂຸຜູ້ຈະເລີນພາວະນາທາງໃຈຍ່ອມສະແດງທຳ[2]ເພື່ອລະວິຈິກິດສາແກ່ທ່ານ ນີ້ເປັນສະໄໝທີ ໕ ທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ

໖. ສະໄໝໃດ ພິກຂຸບໍ່ຮູ້ບໍ່ເຫັນນິມິດເຊິ່ງເປັນທີ່ສິ້ນສຸດອາສະວະໂດຍລຳດັບສຳລັບຜູ້ອາໄສມະນະສິການຢູ່ ສະໄໝນັ້ນ ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸຜູ້ຈະເລີນພາວະນາທາງໃຈແລ້ວກ່າວແນວນີ້ວ່າ "ຜູ້ມີອາຍຸ ຂ້ານ້ອຍບໍ່ຮູ້ບໍ່ເຫັນນິມິດເຊິ່ງເປັນທີ່ສິ້ນສຸດອາສະວະໂດຍລຳດັບສຳລັບຜູ້ອາໄສມະນະສິການຢູ່ ຂໍຜູ້ມີອາຍຸໂຜດສະແດງທຳເພື່ອຄວາມສິ້ນໄປແຫ່ງອາສະວະທັງຫຼາຍແກ່ຂ້ານ້ອຍເທີ້ນ" ພິກຂຸຜູ້ຈະເລີນພາວະນາທາງໃຈຍ່ອມສະແດງທຳເພື່ອຄວາມໝົດສິ້ນໄປແຫ່ງອາສະວະແກ່ທ່ານ ນີ້ເປັນສະໄໝທີ ໖ ທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ

ພິກຂຸ ສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ ໖ ປະການນີ້ແລ"

**ປະຖົມສະມະຍະສູດທີ ໗ ຈົບ**

## ໘. ທຸຕິຍະສະມະຍະສູດ

## ວ່າດ້ວຍສະໄໝທີ່ຄວນພົບຜູ້ຈະເລີນພາວະນາສູດທີ ໘

[໔໘] ສະໄໝໜຶ່ງ ພິກຂຸເຖຣະຈຳນວນຫຼາຍ ຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ຄັ້ງນັ້ນ ເມື່ອພິກຂຸເຖຣະເຫຼົ່ານັ້ນກັບຈາກບິນທະບາດ ພາຍຫຼັງສັນອາຫານສຳເລັດແລ້ວ ນັ່ງປະຊຸມກັນໃນໂຮງສັນ[3] ໄດ້ເກີດການສົນທະນາກັນຂຶ້ນໃນລະຫວ່າງວ່າ "ຜູ້ມີອາຍຸທັງຫຼາຍ ສະໄໝໃດເປັນສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ"

ເມື່ອກ່າວຖາມກັນແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ກ່າວກັບພິກຂຸເຖຣະດັ່ງນີ້ວ່າ "ຜູ້ມີອາຍຸສະໄໝໃດ ພິກຂຸຜູ້ຈະເລີນພາວະນາທາງໃຈກັບຈາກບິນທະບາດພາຍຫຼັງສັນອາຫານສຳເລັດ

ລ້າງຕີນແລ້ວ ນັ່ງຄູ້ບັນລັງຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ໌ ສະໄໝນັ້ນ ເປັນສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ"

ເມື່ອພິກຂຸນັ້ນກ່າວແນວນີ້ແລ້ວ ພິກຂຸອີກອົງໜຶ່ງໄດ້ກ່າວກັບພິກຂຸນັ້ນດັ່ງນີ້ ວ່າ "ຜູ້ມີອາຍຸ ສະໄໝນັ້ນ ບໍ່ແມ່ນສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ ຍ້ອນສະໄໝໃດ ພິກຂຸຜູ້ຈະເລີນພາວະນາທາງໃຈ ກັບຈາກບິນທະບາດພາຍຫຼັງສັນອາຫານສຳເລັດ ລ້າງຕີນແລ້ວ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ສະໄໝນັ້ນ ຄວາມອິດເມື່ອຍຍ້ອນການທ່ຽວບິນທະບາດຂອງພິກຂຸຜູ້ຈະເລີນພາວະນາທາງໃຈນັ້ນຍັງບໍ່ສະງົບລະງັບ ແລະຄວາມອິດເມື່ອຍຍ້ອນການສັນອາຫານຂອງພິກຂຸຜູ້ຈະເລີນພາວະນາທາງໃຈນັ້ນກໍຍັງບໍ່ສະງົບລະງັບ ດັ່ງນັ້ນ ສະໄໝນັ້ນຈຶ່ງບໍ່ແມ່ນສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈນັ້ນ

ແຕ່ສະໄໝໃດ ພິກຂຸຜູ້ຈະເລີນພາວະນາທາງໃຈ ອອກຈາກບ່ອນຫຼີບຫຼີກໃນເວລາຄ່ຳ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າທີ່ຮົ່ມເງົາວິຫານ ສະໄໝນັ້ນ ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ"

ເມື່ອພິກຂຸນັ້ນກ່າວແນວນີ້ແລ້ວ ພິກຂຸອີກອົງໜຶ່ງໄດ້ກ່າວກັບພິກຂຸນັ້ນດັ່ງນີ້ວ່າ "ຜູ້ມີອາຍຸ ສະໄໝນັ້ນ ບໍ່ແມ່ນສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ ຍ້ອນສະໄໝໃດ ພິກຂຸຜູ້ຈະເລີນພາວະນາທາງໃຈ ອອກຈາກບ່ອນຫຼີບຫຼີກໃນເວລາຄ່ຳ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າທີ່ຮົ່ມເງົາວິຫານ ສະໄໝນັ້ນ ສະມາທິນິມິດທີ່ທ່ານມະນະສິການໃນເວລາກາງເວັນ ກໍຍັງຟຸ້ງຊ່ານຢູ່ ດັ່ງນັ້ນ ສະໄໝນັ້ນຈຶ່ງບໍ່ແມ່ນສະໄໝທີ່ຄວນເຂົ້າໄປພົບພິກຂຸ ຜູ້ຈະເລີນພາວະນາທາງໃຈ ແຕ່ສະໄໝໃດ ພິກຂຸຜູ້ຈະເລີນພາວະນາທາງໃຈ ລຸກຂຶ້ນແຕ່ເຊົ້າມືດ ນັ່ງຄູ້ ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ສະໄໝນັ້ນ ເປັນສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ"

ເມື່ອພິກຂຸນັ້ນກ່າວແນວນີ້ແລ້ວ ພິກຂຸອີກອົງໜຶ່ງ ຈຶ່ງກ່າວກັບພິກຂຸນັ້ນດັ່ງນີ້ ວ່າ "ຜູ້ມີອາຍຸ ສະໄໝນັ້ນ ກໍບໍ່ແມ່ນສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ ແຕ່ສະໄໝໃດ ພິກຂຸຜູ້ຈະເລີນພາວະນາທາງໃຈລຸກຂຶ້ນແຕ່ເຊົ້າມືດ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ສະໄໝນັ້ນ ກາຍຂອງທ່ານຕັ້ງຢູ່ໃນໂອຊາຣົດ ຄວາມສະບາຍຍ່ອມມີແກ່ທ່ານເພື່ອມະນະສິການເຖິງຄຳສອນຂອງພຣະພຸດທະເຈົ້າ ດັ່ງນັ້ນ ສະໄໝນັ້ນ ຈຶ່ງເປັນສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ"

ເມື່ອພິກຂຸນັ້ນກ່າວແນວນີ້ແລ້ວ ທ່ານພຣະມະຫາກັດຈານະຈຶ່ງໄດ້ກ່າວກັບພິກຂຸເຖຣະທັງຫຼາຍດັ່ງນີ້ວ່າ "ຜູ້ມີອາຍຸທັງຫຼາຍ ຂໍ້ນັ້ນຂ້ານ້ອຍໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ພິກຂຸ ສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ ໖ ປະການນີ້

ສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ ໖ ປະການ ອັນໃດແດ່ ຄື

໑. ສະໄໝໃດ ພິກຂຸໃນທຳວິໄນນີ້ມີຈິດຖືກກາມຣາຄະກຸ້ມລຸມ ຖືກກາມຣາຄະຄອບງຳຢູ່ ແລະທ່ານກໍບໍ່ຮູ້ແຈ້ງເຊິ່ງອຸບາຍເຄື່ອງກຳຈັດກາມຣາຄະທີ່ເກີດຂຶ້ນຕາມຄວາມເປັນຈິງ ສະໄໝນັ້ນ ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸຜູ້ຈະເລີນພາວະນາທາງໃຈແລ້ວກ່າວແນວນີ້ວ່າ "ຜູ້ມີອາຍຸ ຂ້ານ້ອຍມີຈິດຖືກ ກາມຣາຄະກຸ້ມລຸມ ຖືກກາມຣາຄະຄອບງຳຢູ່ ແລະຂ້ານ້ອຍກໍບໍ່ຮູ້ແຈ້ງເຊິ່ງອຸບາຍເຄື່ອງກຳຈັດກາມຣາຄະທີ່ເກີດຂຶ້ນຕາມຄວາມເປັນຈິງ ຂໍຜູ້ມີອາຍຸໂຜດສະແດງທຳເພື່ອລະກາມຣາຄະແກ່ຂ້ານ້ອຍເທີ້ນ" ພິກຂຸຜູ້ຈະເລີນພາວະນາທາງໃຈຍ່ອມສະແດງທຳເພື່ອລະກາມຣາຄະແກ່ທ່ານ ນີ້ເປັນສະໄໝທີ ໑ ທີ່ຄວນໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ

໒. ສະໄໝໃດ ພິກຂຸມີຈິດຖືກພະຍາບາດກຸ້ມລຸມ ຯລຯ[១]

໓. ສະໄໝໃດ ພິກຂຸມີຈິດຖືກຖີນະມິດທະກຸ້ມລຸມ ຯລຯ

໔. ສະໄໝໃດ ພິກຂຸມີຈິດຖືກອຸດທັດຈະກຸກກຸດຈະກຸ້ມລຸມ ຯລຯ

໕. ສະໄໝໃດ ພິກຂຸມີຈິດຖືກວິຈິກິດສາກຸ້ມລຸມ ຯລຯ

໖. ສະໄໝໃດ ພິກຂຸບໍ່ຮູ້ບໍ່ເຫັນນິມິດເຊິ່ງເປັນທີ່ສິ້ນສຸດອາສະວະໂດຍລຳດັບສຳລັບຜູ້ອາໄສມະນະສິການຢູ່ ສະໄໝນັ້ນ ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸຜູ້ຈະເລີນພາວະນາທາງໃຈແລ້ວກ່າວແນວນີ້ວ່າ "ຜູ້ມີອາຍຸ ຂ້ານ້ອຍບໍ່ຮູ້ບໍ່ເຫັນນິມິດເຊິ່ງເປັນທີ່ສິ້ນສຸດອາສະວະໂດຍລຳດັບສຳລັບຜູ້ອາໄສມະນະສິການຢູ່ ຂໍຜູ້ມີອາຍຸໂຜດສະແດງທຳເພື່ອຄວາມໝົດສິ້ນໄປແຫ່ງອາສະວະທັງຫຼາຍແກ່ຂ້ານ້ອຍເທີ້ນ" ພິກຂຸຜູ້ຈະເລີນພາວະນາທາງໃຈຍ່ອມສະແດງທຳເພື່ອຄວາມໝົດສິ້ນໄປແຫ່ງອາສະວະທັງຫຼາຍແກ່ທ່ານ ນີ້ເປັນສະໄໝທີ ໖ ທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ

ຜູ້ມີອາຍຸທັງຫຼາຍ ຂໍ້ນັ້ນຂ້ານ້ອຍໄດ້ສະດັບຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ພິກຂຸ ສະໄໝທີ່ຄວນເຂົ້າໄປພົບພິກຂຸຜູ້ຈະເລີນພາວະນາທາງໃຈ ໖ ປະການນີ້ແລ"

**ທຸຕິຍະສະມະຍະສູດທີ ໗ ຈົບ**

## ໘. ອຸທາຍີສູດ

## ວ່າດ້ວຍທ່ານພຣະອຸທາຍີ

[໒໘] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະອຸທາຍີມາຕັດຖາມວ່າ "ອຸທາຍີ ອະນຸດສະຕິດຖານ[໒] ມີທີ່ໃດນໍ" ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມແນວນີ້ ທ່ານພຣະອຸທາຍີໄດ້ມິດຢູ່

ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າກໍຮັບສັ່ງຮຽກທ່ານພຣະອຸທາຍີມາຕັດຖາມວ່າ "ອຸທາຍີ ອະນຸດສະຕິດຖານ ມີທີ່ໃດນໍ" ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມແລ້ວແນວນີ້ ແມ່ນເທື່ອທີ ໒ ທ່ານພຣະອຸທາຍີກໍມິດຢູ່

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າກໍຮັບສັ່ງຮຽກທ່ານພຣະອຸທາຍີມາຕັດຖາມວ່າ "ອຸທາຍີ ອະນຸດສະຕິດຖານ ມີທີ່ໃດນໍ" ແມ່ນເທື່ອທີ ໓ ທ່ານພຣະອຸທາຍີກໍມິດຢູ່

ຄັ້ງນັ້ນ ທ່ານພຣະອານົນໄດ້ກ່າວກັບທ່ານພຣະອຸທາຍີວ່າ "ທ່ານອຸທາຍີ ພຣະສາດສະດາຕັດຖາມທ່ານ"

ທ່ານພຣະອຸທາຍີຕອບວ່າ "ທ່ານອານົນ ຂ້ານ້ອຍໄດ້ຍິນພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າຢູ່" ແລະໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າຕໍ່ໄປອີກວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃນທຳວິໄນນີ້ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໗ລ໗ ຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ເປັນອະນຸດສະຕິດຖານ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ອານົນ ເຮົາຮູ້ແລ້ວ ອຸທາຍີນີ້ເປັນໂມຄະບຸຣຸດ ບໍ່ປະກອບອະທິຈິດຯຢູ່" ແລ້ວຕັດຖາມທ່ານພຣະອານົນຕໍ່ໄປວ່າ "ອານົນ ອະນຸດສະຕິດຖານ ມີທີ່ໃດ"

ທ່ານພຣະອານົນຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ອະນຸດສະຕິດຖານ ມີ ໕ ປະການ ອະນຸດສະຕິດຖານ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ສະຫງັດຈາກກາມແລະອະກຸສົນທຳແລ້ວບັນລຸປະຖົມຊານ ທີ່ມີວິຕົກວິຈານ ປີຕິແລະສຸກເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປພິກຂຸບັນລຸທຸຕິຍະຊານມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິແລະສຸກເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກພິກຂຸມີອຸເປກຂາມີສະຕິມີສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາມີສະຕິຢູ່ເປັນສຸກ" ຢູ່ ຂ້າແດ່ພຣະອົງຜູ້ຈະເລີນ ນີ້ເປັນອະນຸດສະຕິດຖານ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວແນວນີ້ ຍ່ອມເປັນໄປເພື່ອຢູ່ເປັນສຸກໃນປັດຈຸບັນ

໒. ພິກຂຸມະນະສິການອາໂລກະສັນຍາ ຕັ້ງສັນຍາໄວ້ວ່າເປັນກາງເວັນຢູ່ ມະນະສິການອາໂລກະສັນຍາວ່າກາງເວັນແນວໃດ ກາງຄືນກໍແນວນັ້ນ ກາງຄືນແນວໃດ ກາງເວັນກໍແນວນັ້ນ ພິກຂຸນັ້ນມີ ຈິດປອດໂປ່ງບໍ່ຖືກນິວອນ ພົວພັນ ຍ່ອມຈະເລີນຈິດທີ່ມີຄວາມສະຫວ່າງຯດ້ວຍປະ

ການແນວນີ້ ນີ້ເປັນ ອະນຸດສະຕິດຖານ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວແນວນີ້ ຍ່ອມເປັນໄປເພື່ອໄດ້ຍານທັດສະນະ[໒]

໓. ພິກຂຸພິຈາລະນາເຫັນກາຍນີ້ທີ່ນັ້ນ ຕັ້ງແຕ່ພື້ນຕີນຂຶ້ນໄປ ຕັ້ງແຕ່ປາຍຜົມລົງມາ ມີໜັງຫຸ້ມຢູ່ໂດຍຮອບ ເຕັມໄປດ້ວຍຂອງບໍ່ສະອາດປະການຕ່າງ ໆ ວ່າ “ໃນກາຍນີ້ມີ ຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນ ກະດູກ ໄຕ[໓] ຫົວໃຈ ຕັບ ພັງຜືດ ມ້າມ[໔] ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ບີ ຂີ້ກະເທີ່ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ[໕]” ນີ້ເປັນອະນຸດສະຕິດຖານ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວແນວນີ້ ຍ່ອມເປັນໄປເພື່ອລະການຣາຄະ

໔. ພິກຂຸເຫັນສະຣີຣະທີ່ຖືກຖິ້ມໄວ້ໃນປ່າຊ້າ ຕາຍແລ້ວມື້ໜຶ່ງ ສອງມື້ ຫຼື ສາມມື້ ພອງຂຶ້ນ ມີສີຂຽວແຫຼ້ ມີໜອງໄຫຼອອກແນວໃດ ກໍນ້ອມ ກາຍນີ້ແລ ເຂົ້າໄປປຽບແນວນັ້ນວ່າ “ແມ່ນກາຍນີ້ກໍເປັນທຳມະດາແນວນີ້ ມີພາວະແນວນີ້ ບໍ່ລ່ວງພົ້ນແນວນີ້ໄປໄດ້”[໑]

ພິກຂຸນັ້ນເຫັນສະຣີຣະທີ່ຖືກຖິ້ມໄວ້ໃນປ່າຊ້າ ຖືກຝູງກາ ນົກແຫຼວ ນົກແຮ້ງ ໝາບ້ານ ໝາຈອກຫຼືສັດມີຊີວິດຊະນິດຕ່າງ ໆ ກຳລັງກັດກິນແນວໃດ ກໍນ້ອມກາຍນີ້ແລເຂົ້າໄປປຽບແນວນັ້ນວ່າ “ແມ່ນກາຍນີ້ກໍເປັນທຳມະດາແນວນີ້ ມີພາວະແນວນີ້ ບໍ່ລ່ວງພົ້ນແນວນີ້ໄປໄດ້”

ພິກຂຸນັ້ນເຫັນສະຣີຣະທີ່ຖືກຖິ້ມໄວ້ໃນປ່າຊ້າ ມີໂຄງກະດູກ ມີຊີ້ນແລະເລືອດ ມີເອັນ ຍຶດຮັດໄວ້ ฯລฯ ມີແຕ່ໂຄງກະດູກ ບໍ່ມີຊີ້ນແລະເລືອດ ມີເອັນຍຶດຮັດໄວ້ ฯລฯ ມີແຕ່ໂຄງກະດູກປາສະຈາກຊີ້ນແລະເລືອດ ຍັງມີເອັນຍຶດຮັດໄວ້ ฯລฯ ມີແຕ່ທ່ອນກະດູກປາສະຈາກເຄື່ອງມັດກະຈັດກະຈາຍໄປຄົນລະທິດລະທາງ ຄື ກະດູກມືໄປທາງໜຶ່ງ ກະດູກຕີນໄປທາງໜຶ່ງ ກະດູກແຂ່ງໄປທາງໜຶ່ງ ກະດູກຂາໄປທາງໜຶ່ງ ກະດູກບັ້ນແອວໄປທາງໜຶ່ງ ກະດູກສັນຫຼັງໄປທາງໜຶ່ງ ກະໂຫຼກຫົວໄປທາງໜຶ່ງແນວໃດ ກໍນ້ອມກາຍນີ້ແລເຂົ້າໄປປຽບແນວນັ້ນວ່າ “ແມ່ນກາຍນີ້ ກໍເປັນທຳມະດາແນວນີ້ ມີພາວະແນວນີ້ ບໍ່ລ່ວງພົ້ນແນວນີ້ໄປໄດ້”

ຫຼືພິກຂຸນັ້ນເຫັນສະຣີຣະທີ່ຖືກຖິ້ມໄວ້ໃນປ່າຊ້າ ເປັນກະດູກມີສີຂາວຄືສີຫອຍສັງ ເປັນກະດູກທີ່ສັດເຮັດໃຫ້ເປັນກອງ ໆ ເກີນໜຶ່ງປີ ເປັນກະດູກໂດກແຕກເປັນຕ່ອນນ້ອຍໆ ແນວໃດ ກໍນ້ອມກາຍນີ້ແລເຂົ້າໄປປຽບແນວນັ້ນວ່າ “ແມ່ນກາຍນີ້ ກໍເປັນທຳມະດາແນວນີ້ ມີພາວະແນວນີ້ ບໍ່ລ່ວງພົ້ນແນວນີ້ໄປໄດ້” ນີ້ເປັນອະນຸດສະຕິດຖານທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວແນວນີ້ ຍ່ອມເປັນໄປເພື່ອຖອນ ອັດສະມິມານະ[໒]ໄດ້

໕. ພິກຂຸ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ຈຶ່ງບັນລຸຈະ ຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ເປັນອະນຸດສະຕິດຖານທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວແນວນີ້ ຍ່ອມເປັນໄປເພື່ອການຮູ້ແຈ້ງທາດຫຼາຍຊະນິດ[໑]

ຂ້າແດ່ ພຣະອົງຜູ້ຈະເລີນອະນຸດສະຕິດຖານ ໕ ປະການນີ້ແລ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ອານົນ ຖ້າເປັນແນວນັ້ນ ທ່ານຈົ່ງຊົງຈຳອະນຸດສະຕິດຖານ ຂໍ້ທີ ໖ ນີ້ ຄື ພິກຂຸໃນທຳວິໄນນີ້ ມີສະຕິກ້າວໄປ ມີສະຕິຖອຍກັບ[໒] ມີສະຕິຢືນຢູ່ ມີສະຕິນັ່ງຢູ່ ມີສະຕິນອນຢູ່ ມີສະຕິປະກອບບວງກາງານຢູ່

ອານົນ ນີ້ເປັນອະນຸດສະຕິດຖານ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວແນວນີ້ ຍ່ອມເປັນໄປເພື່ອສະຕິສຳປະຊັນຍະ"

**ອຸທາຍີສູດທີ ໙ ຈົບ**

## ໑໐. ອະນຸດຕະຣິຍະສູດ

### ວ່າດ້ວຍອະນຸດຕະຣິຍະ[໓]

[໓໐] ພິກຂຸທັງຫຼາຍ ອະນຸດຕະຣິຍະ (ພາວະອັນຍອດຢ້ຽມ) ໖ ປະການນີ້

ອະນຸດຕະຣິຍະ ໖ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ທັດສະນານຸດຕະຣິຍະ | (ການເຫັນອັນຍອດຢ້ຽມ) |
| ໒. ສະວະນານຸດຕະຣິຍະ | (ການຟັງອັນຍອດຢ້ຽມ) |
| ໓. ລາພານຸດຕະຣິຍະ | (ການໄດ້ອັນຍອດຢ້ຽມ) |
| ໔. ສິກຂານຸດຕະຣິຍະ | (ການສຶກສາອັນຍອດຢ້ຽມ) |
| ໕. ປາຣິຈະຣິຍານຸດຕະຣິຍະ | (ການບຳລຸງອັນຍອດຢ້ຽມ) |
| ໖. ອະນຸດສະຕານຸດຕະຣິຍະ | (ການຣະນຶກອັນຍອດຢ້ຽມ) |

ທັດສະນານຸດຕະຣິຍະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໄປເພື່ອເຫັນຊ້າງແກ້ວແດ່ ໄປເພື່ອເຫັນມ້າແກ້ວແດ່ ໄປເພື່ອເຫັນແກ້ວມະນີແດ່ ໄປເພື່ອເຫັນຂອງສູງຂອງຕ່ຳແດ່ ຫຼືໄປເພື່ອເຫັນສະມະນະຫຼືພາມຜູ້ເຫັນຜິດປະຕິບັດຜິດແດ່ ພິກຂຸທັງຫຼາຍ ການເຫັນນີ້ມີຢູ່ ເຮົາບໍ່ກ່າວວ່າ ບໍ່ມີ ແຕ່ວ່າການເຫັນນີ້ຍັງເປັນການເຫັນທີ່ຊົ່ວ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນອະຣິຍະ[໑] ບໍ່ປະກອບດ້ວຍ

ປະໂຫຍດ[໖] ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ

ສ່ວນບຸກຄົນໃດມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ[໗] ມີຄວາມເຫຼື້ອມໃສຢ່າງຍິ່ງ ໄປເພື່ອເຫັນຕະຖາຄົດຫຼືສາວົກຂອງຕະຖາຄົດ ພິກຂຸທັງຫຼາຍ ການເຫັນນີ້ຂອງ ບຸກຄົນນັ້ນ ເປັນການເຫັນທີ່ຍອດຢ້ຽມກວ່າການເຫັນທັງຫຼາຍ ເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳເພື່ອເຮັດໃຫ້ແຈ້ງນິບພານ

ການທີ່ບຸກຄົນຜູ້ມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ ມີຄວາມເຫຼື້ອມໃສຢ່າງຍິ່ງ ໄປເພື່ອເຫັນຕະຖາຄົດຫຼືສາວົກຂອງພຣະຕະຖາຄົດ ນີ້ຮຽກວ່າ ທັດສະນານຸດຕະຣິຍະ

ທັດສະນານຸດຕະຣິຍະ ເປັນແນວນີ້

ສະວະນານຸດຕະຣິຍະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໄປເພື່ອຟັງສຽງກອງແດ່ ໄປເພື່ອຟັງສຽງພິນແດ່ ໄປເພື່ອຟັງສຽງເພງຂັບແດ່ ໄປເພື່ອຟັງສຽງສູງສຽງຕ່ຳແດ່ ຫຼືໄປເພື່ອຟັງທຳຂອງສະມະນະຫຼືພາມຜູ້ເຫັນຜິດປະຕິບັດແດ່ ພິກຂຸທັງຫຼາຍ ການຟັງນີ້ມີຢູ່ ເຮົາບໍ່ກ່າວວ່າ ບໍ່ມີ ແຕ່ວ່າການຟັງນີ້ ຍັງເປັນການຟັງທີ່ຊົ່ວ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ

ສ່ວນບຸກຄົນໃດມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ ມີຄວາມເຫຼື້ອມໃສຢ່າງຍິ່ງ ໄປເພື່ອຟັງທຳຂອງຕະຖາຄົດຫຼືສາວົກຂອງຕະຖາຄົດ ພິກຂຸທັງຫຼາຍ ການຟັງນີ້ຂອງບຸກຄົນນັ້ນ ເປັນການຟັງທີ່ຍອດຢ້ຽມກວ່າການຟັງທັງຫຼາຍ ເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳເພື່ອເຮັດໃຫ້ແຈ້ງນິບພານ

ການທີ່ບຸກຄົນຜູ້ມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ ມີຄວາມເຫຼື້ອມໃສຢ່າງຍິ່ງ ໄປເພື່ອຟັງທຳຂອງຕະຖາຄົດ ຫຼືສາວົກຂອງພຣະຕະຖາຄົດ ນີ້ຮຽກວ່າ ສະວະນານຸດຕະຣິຍະ ທັດສະນານຸດຕະຣິຍະ ສະວະນານຸດຕະຣິຍະ ເປັນແນວນີ້

ລາພານຸດຕະຣິຍະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໄດ້ບຸດແດ່ ໄດ້ພັນລະຍາແດ່ ໄດ້ຊັບແດ່ ໄດ້ຂອງສູງຂອງຕ່ຳແດ່ຫຼືໄດ້ສັດທາໃນສະມະນະຫຼືພາມຜູ້ເຫັນຜິດປະຕິບັດຜິດແດ່ ພິກຂຸທັງຫຼາຍ ການໄດ້ນັ້ນມີຢູ່ ເຮົາບໍ່ກ່າວວ່າ ບໍ່ມີ ແຕ່ວ່າການໄດ້ນີ້ຍັງເປັນການໄດ້ທີ່ຊົ່ວ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ

ສ່ວນບຸກຄົນໃດມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ ມີຄວາມເຫຼື້ອມໃສຢ່າງຍິ່ງ ໄດ້ສັດທາໃນຕະຖາຄົດ ຫຼືສາວົກຂອງຕະຖາຄົດ ພິກຂຸທັງຫຼາຍ ການໄດ້ນີ້ຂອງບຸກຄົນນັ້ນເປັນການໄດ້ທີ່ຍອດຢ້ຽມກວ່າການໄດ້ທັງຫຼາຍ ເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງນິບພານ

ການທີ່ບຸກຄົນມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ ມີຄວາມເຫຼື້ອມໃສຢ່າງຍິ່ງ ໄດ້ສັດທາໃນຕະຖາຄົດ ຫຼືສາວົກຂອງຕະຖາຄົດ ນີ້ຮຽກວ່າ ລາພານຸດຕະຣິຍະ ທັດສະນານຸດຕະຣິຍະ ສະວະນານຸດຕະຣິຍະ ລາພານຸດຕະຣິຍະ ເປັນແນວນີ້

ສິກຂານຸດຕະຣິຍະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ສຶກສາສິລະປະກ່ຽວກັບຊ້າງແດ່ ສຶກສາສິລະປະກ່ຽວກັບມ້າແດ່ ສຶກສາສິລະປະກ່ຽວກັບລົດແດ່ ສຶກສາສິລະປະກ່ຽວກັບທະນູແດ່ ສຶກສາສິລະປະກ່ຽວກັບດາບແດ່ ສຶກສາສິລະປະຊັ້ນສູງຊັ້ນຕ່ຳແດ່ ຫຼືສຶກສາສິລະປະຈາກສະມະນະຫຼືພາມຜູ້ເຫັນຜິດປະຕິບັດຜິດແດ່ ພິກຂຸທັງຫຼາຍ ການສຶກສານັ້ນມີຢູ່ ເຮົາບໍ່ກ່າວວ່າ ບໍ່ມີ ແຕ່ວ່າການສຶກສານີ້ຍັງເປັນການສຶກສາທີ່ຊົ່ວ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ

ສ່ວນບຸກຄົນໃດມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ ມີຄວາມເຫຼື້ອມໃສຢ່າງຍິ່ງ ສຶກສາອະທິສີນແດ່ ສຶກສາອະທິຈິດແດ່ ສຶກສາອະທິປັນຍາແດ່ ໃນທຳວິໄນທີ່ຕະຖາຄົດປະກາດໄວ້ ການສຶກສານີ້ຂອງບຸກຄົນນັ້ນເປັນການສຶກສາທີ່ຍອດຢ້ຽມກວ່າການສຶກສາທັງຫຼາຍ ເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງນິບພານ

ການທີ່ບຸກຄົນມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ ມີຄວາມເຫຼື້ອມໃສຢ່າງຍິ່ງ ສຶກສາອະທິສີນແດ່ ສຶກສາອະທິຈິດແດ່ ສຶກສາອະທິປັນຍາແດ່ ໃນທຳວິໄນທີ່ຕະຖາຄົດປະກາດໄວ້ ນີ້ຮຽກວ່າ ສິກຂານຸດຕະຣິຍະ ທັດສະນານຸດຕະຣິຍະ ສະວະນານຸດຕະຣິຍະ ລາພານຸດຕະຣິຍະ ສິກຂານຸດຕະຣິຍະ ເປັນແນວນີ້

ປາຣິຈະຣິຍານຸດຕະຣິຍະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບຳລຸງກະສັດແດ່ ບຳລຸງພາມແດ່ ບຳລຸງຄະຫະບໍດີແດ່ ບຳລຸງຄົນຊັ້ນສູງຊັ້ນຕ່ຳແດ່ ຫຼືບຳລຸງສະມະນະຫຼືພາມຜູ້ເຫັນຜິດປະຕິບັດຜິດແດ່ ພິກຂຸທັງຫຼາຍ ການບຳລຸງນັ້ນມີຢູ່ ເຮົາບໍ່ກ່າວວ່າ ບໍ່ມີ ແຕ່ວ່າການບຳລຸງນີ້ຍັງເປັນການບຳລຸງ ທີ່ຊົ່ວ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຮູ້ ບໍ່ເປັນໄປເພື່ອນິບພານ

ສ່ວນບຸກຄົນໃດມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ ມີຄວາມເຫຼື້ອມໃສຢ່າງຍິ່ງ ບຳລຸງຕະຖາຄົດຫຼືສາວົກຂອງຕະຖາຄົດ ການບຳລຸງນີ້ຂອງບຸກຄົນນັ້ນເປັນການບຳລຸງທີ່ຍອດຢ້ຽມກວ່າການບຳລຸງທັງຫຼາຍ ເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງ ນິບພານ

ການທີ່ບຸກຄົນມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ ມີຄວາມເຫຼື້ອມໃສຢ່າງຍິ່ງ ບຳລຸງຕະຖາຄົດຫຼືສາວົກຂອງຕະຖາຄົດ ນີ້ຮຽກວ່າ ປາຣິຈະຣິຍານຸດຕະຣິຍະ ທັດສະນານຸດຕະຣິຍະ ສະວະນານຸດຕະຣິຍະ ລາພານຸດຕະຣິຍະ ສິກຂານຸດຕະຣິຍະ ປາຣິຈະຣິຍານຸດຕະຣິຍະ ເປັນແນວນີ້

ອະນຸດສະຕານຸດຕະຣິຍະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຣະນຶກເຖິງການໄດ້ບຸດແດ່ ຣະນຶກເຖິງການໄດ້ພັນລະຍາແດ່ ຣະນຶກເຖິງການໄດ້ຊັບແດ່ ຣະນຶກເຖິງການໄດ້ຂອງສູງຂອງຕ່ຳແດ່ ຫຼືຣະນຶກເຖິງສະມະນະ ຫຼືພາມຜູ້ເຫັນຜິດປະຕິບັດຜິດແດ່ ພິກຂຸທັງຫຼາຍ ການຣະນຶກນັ້ນມີຢູ່ ເຮົາບໍ່ກ່າວວ່າ ບໍ່ມີ ແຕ່ວ່າການຣະນຶກນີ້ຍັງເປັນການຣະນຶກທີ່ຊົ່ວ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ບໍ່ເປັນໄປຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຮູ້ ບໍ່ເປັນໄປເພື່ອນິບພານ

ສ່ວນບຸກຄົນໃດມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ ມີຄວາມເຫຼື້ອມໃສຢ່າງຍິ່ງ ຣະນຶກເຖິງຕະຖາຄົດຫຼືສາວົກຂອງຕະຖາຄົດ ພິກຂຸທັງຫຼາຍ ການຣະນຶກເຖິງນີ້ຂອງບຸກຄົນນັ້ນ ເປັນການຣະນຶກເຖິງທີ່ຍອດຢ້ຽມກວ່າການຣະນຶກເຖິງທັງຫຼາຍ ເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງນິບພານ

ການທີ່ບຸກຄົນມີສັດທາຕັ້ງໝັ້ນ ມີຄວາມຮັກຕັ້ງໝັ້ນ ບັນລຸບ່ອນສຸດ ມີຄວາມເຫຼື້ອມໃສຢ່າງຍິ່ງ ນີ້ຮຽກວ່າ ອະນຸດສະຕານຸດຕະຣິຍະ

ພິກຂຸທັງຫຼາຍ ອະນຸດຕະຣິຍະ ໖ ປະການນີ້ແລ

ພິກຂຸເຫຼົ່າໃດໄດ້ທັດສະນານຸດຕະຣິຍະ
ສະວະນານຸດຕະຣິຍະ ລາພານຸດຕະຣິຍະ
ຍິນດີໃນສິກຂານຸດຕະຣິຍະ ຕັ້ງໝັ້ນປາຣິຈະຣິຍານຸດຕະຣິຍະ
ຈະເລີນອະນຸດສະຕານຸດຕະຣິຍະອັນປະກອບດ້ວຍວິເວກ[໑]
ອັນກະເສມ ໃຫ້ເຖິງອະມະຕະທຳ
ເປັນຜູ້ຍິນດີໃນຄວາມບໍ່ຜະໝາດ
ມີປັນຍາເຄື່ອງຮັກສາຕົນ ສັງລວມໃນສິນ
ພິກຂຸເຫຼົ່ານັ້ນແລ ຍ່ອມຮູ້ບ່ອນເປັນທີ່ດັບແຫ່ງທຸກຕາມການອັນຄວນ

**ອະນຸດຕະຣິຍະສູດທີ ໑໐ ຈົບ**

**ອະນຸດຕະຣິຍະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສາມະກະສູດ
໒. ພະຍະສູດ
໓. ອະນຸດສະຕິດຖານະສູດ
໔. ປະຖົມສະມະຍະສູດ
໕. ອຸທາຍີສູດ
໖. ອະປະຣິຫານິຍະສູດ
໗. ຫິມະວັນຕະສູດ
໘. ມະຫາກັດຈານະສູດ
໙. ທຸຕິຍະສະມະຍະສູດ
໑໐. ອະນຸດຕະຣິຍະສູດ

# ໔. ເທວະຕາວັກ

## ໝວດວ່າດ້ວຍເທວະດາ

## ໑. ເສຂະສູດ

### ວ່າດ້ວຍທຳຂອງພຣະເສຂະ[១]

[໓໑] ພິກຂຸທັງຫຼາຍ ທຳ ໖ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກ ວຽກງານ
໒. ຄວາມເປັນຜູ້ມັກ ການໂອ້ລົມ
໓. ຄວາມເປັນຜູ້ມັກ ການນອນຫຼັບ
໔. ຄວາມເປັນຜູ້ມັກ ການຄຸກຄີດ້ວຍໝູ່
໕. ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ[២]
໖. ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ

ພິກຂຸທັງຫຼາຍ ທຳ ໖ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ

ພິກຂຸທັງຫຼາຍ ທຳ ໖ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ບໍ່ມັກ ວຽກງານ
໒. ຄວາມເປັນຜູ້ບໍ່ມັກ ການໂອ້ລົມ
໓. ຄວາມເປັນຜູ້ບໍ່ມັກ ການນອນຫຼັບ
໔. ຄວາມເປັນຜູ້ບໍ່ມັກ ການຄຸກຄີດ້ວຍໝູ່
໕. ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໖. ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ

ພິກຂຸທັງຫຼາຍ ທຳ ໖ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ

**ເສຂະສູດທີ ໑ ຈົບ**

# ໒. ປະຖົມອະປະຣິຫານະສູດ

## ວ່າດ້ວຍອະປະຣິຫານິຍະທຳສູດທີ ໑

[໓໒] ຄັ້ງນັ້ນ ເມື່ອຣາຕີຜ່ານໄປ[໑] ເທວະດາຕົນໜຶ່ງມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໖ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ

ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສາດສະດາ
໒. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະທຳ
໓. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສົງ
໔. ຄວາມເປັນຜູ້ມີຄວາມເຄົາລົບໃນ ສິກຂາ
໕. ຄວາມເປັນຜູ້ມີຄວາມເຄົາລົບໃນ ຄວາມບໍ່ຜະໝາດ
໖. ຄວາມເປັນຜູ້ມີຄວາມເຄົາລົບໃນ ປະຕິສັນຖານ[໒]

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໖ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ

ເມື່ອເທວະດານັ້ນໄດ້ຂາບທູນດັ່ງນີ້ແລ້ວ ພຣະສາດສະດາຊົງພໍພຣະທະໄທ ເມື່ອເທວະດານັ້ນ ຮູ້ວ່າ “ພຣະສາດສະດາຊົງພໍພຣະທະໄທເຮົາ” ຈຶ່ງຖວາຍອະພິວາດ ກະທຳປະທັກຂິນ[໓] ແລ້ວຫາຍໄປ ໃນບ່ອນນັ້ນແລ

ເມື່ອຄືນນັ້ນຜ່ານໄປ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ “ພິກຂຸທັງຫຼາຍ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາຕົນໜຶ່ງມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າມາຫາເຮົາຮອດບ່ອນຢູ່ ໄຫວ້ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບເຮົາດັ່ງນີ້ວ່າ

“ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໖ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ ພິກຂຸ

ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສາດສະດາ
໒. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະທຳ

໓. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສົງ
໔. ຄວາມເປັນຜູ້ມີຄວາມເຄົາລົບໃນ ສິກຂາ
໕. ຄວາມເປັນຜູ້ມີຄວາມເຄົາລົບໃນ ຄວາມບໍ່ຜະໝາດ
໖. ຄວາມເປັນຜູ້ມີຄວາມເຄົາລົບໃນ ປະຕິສັນຖານ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໖ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ”

ພິກຂຸທັງຫຼາຍ ເທວະດານັ້ນເມື່ອໄດ້ກ່າວດັ່ງນີ້ແລ້ວ ຈຶ່ງໄຫວ້ເຮົາກະທຳປະທັກຂິນແລ້ວຫາຍໄປ ໃນບ່ອນນັ້ນແລ

ພິກຂຸມີຄວາມເຄົາລົບໃນສາດສະດາ
ມີຄວາມເຄົາລົບໃນທຳ
ມີຄວາມເຄົາລົບຢ່າງແຮງກ້າໃນສົງ
ມີຄວາມເຄົາລົບໃນຄວາມບໍ່ຜະໝາດ
ມີຄວາມເຄົາລົບໃນປະຕິສັນຖານ
ເປັນຜູ້ບໍ່ຄວນເສື່ອມ ດຳລົງຢູ່ໃກ້ນິບພານຢ່າງແນ່ນອນ[໑]”

**ປະຖົມອະປະຣິຫານະສູດທີ ໘ ຈົບ**

## ໓. ທຸຕິຍະອະປະຣິຫານະສູດ

## ວ່າດ້ວຍອະປະຣິຫານິຍະທຳສູດທີ ໒

[໓໓] ພິກຂຸທັງຫຼາຍ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາຕົນໜຶ່ງມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າມາຫາເຮົາຮອດບ່ອນຢູ່ ໄຫວ້ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບເຮົາດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໖ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ

ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສາດສະດາ
໒. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະທຳ
໓. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສົງ
໔. ຄວາມເປັນຜູ້ມີຄວາມເຄົາລົບໃນ ສິກຂາ

໕. ຄວາມເປັນຜູ້ມີຄວາມເຄົາລົບໃນ ຫິຣິ (ຄວາມອາຍບາບ)
໖. ຄວາມເປັນຜູ້ມີຄວາມເຄົາລົບໃນ ໂອດຕັບປະ (ຄວາມຢ້ານບາບ)

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໖ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ

ພິກຂຸທັງຫຼາຍ ເທວະດານັ້ນເມື່ອໄດ້ກ່າວດັ່ງນີ້ແລ້ວ ຈຶ່ງໄຫວ້ເຮົາກະທຳປະທັກຂິນແລ້ວຫາຍໄປ ໃນບ່ອນນັ້ນແລ

ພິກຂຸມີຄວາມເຄົາລົບໃນສາດສະດາ
ມີຄວາມເຄົາລົບໃນທຳ
ມີຄວາມເຄົາລົບຢ່າງແຮງກ້າໃນສົງ
ເຖິງພ້ອມດ້ວຍຫິຣິແລະໂອດຕັບປະ
ມີຄວາມຢຳເກງ ມີຄວາມເຄົາລົບ
ເປັນຜູ້ບໍ່ຄວນເສື່ອມ ດຳລົງຢູ່ໃກ້ນິບພານຢ່າງແນ່ນອນ

**ທຸຕິຍະອະປະຣິຫານະສູດທີ ໓ ຈົບ**

## ໔. ມະຫາໂມກຄັນລານະສູດ

### ວ່າດ້ວຍພຣະມະຫາໂມກຄັນລານະ

[໓໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະໂມກຄັນລານະຫຼີກຫຼີກຢູ່ໃນ ບ່ອນສະງັດ ເກີດຄວາມຄິດຄຳນຶງຂຶ້ນໃນຈິດວ່າ "ເທວະດາເຫຼົ່າໃດມີຍານແນວນີ້ວ່າ "ເຮົາເປັນໂສດາບັນບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິ໋ໃນມື້ທາງໜ້າ"

ສະໄໝນັ້ນແລ ພິກຂຸຊື່ວ່າຕິດສະມໍຣະນະພາບບໍ່ດົນ ໄດ້ບັງເກີດໃນພົມມະໂລກຊັ້ນໜຶ່ງຢູ່ພົມມະໂລກຊັ້ນນັ້ນ ເທວະດາທັງຫຼາຍກໍຮູ້ຈັກພົມນັ້ນວ່າ "ຕິດສະພົມມີລິດຫຼາຍ ມີອານຸພາບຫຼາຍ"

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ຫາຍໄປຈາກພຣະເຊຕະວັນມາຜາກົດໃນພົມມະໂລກນັ້ນ ຄືບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ຕິດສະພົມໄດ້ເຫັນທ່ານພຣະມະຫາໂມກຄັນລານະມາແຕ່ໄກ ຈຶ່ງໄດ້ກ່າວກັບທ່ານພຣະໂມກຄັນລານະວ່າ "ທ່ານພຣະໂມກຄັນລານະຜູ້ບໍ່ມີທຸກ ຂໍທ່ານຈົ່ງມາເທີ້ນ ທ່ານມາດີແລ້ວ ທ່ານຈັດລຳດັບໃນການມາໃນບ່ອນນີ້ດົນແທ້ນໍ ຂໍນິມົນນັ່ງເທີ້ນ ນີ້ອາສະນະທີ່ປູລາດໄວ້"

ທ່ານພຣະມະຫາໂມກຄັນລານະນັ່ງເທິງອາສະນະທີ່ເຂົາປູລາດໄວ້ແລ້ວ ຝ່າຍຕິດສະພົມໄຫວ້ທ່ານພຣະມະຫາໂມກຄັນລານະແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະໄດ້ຖາມຕິດສະພົມດັ່ງນີ້ວ່າ

"ຕິດສະພົມ ເທວະດາຊັ້ນໃດບໍ ມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ"

ຕິດສະພົມຕອບວ່າ "ທ່ານພຣະໂມກຄັນລານະຜູ້ບໍ່ມີທຸກ ເທວະດາຊັ້ນຈາຕຸມະຫາຣາດມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ"

ທ່ານພຣະໂມກຄັນລານະຖາມວ່າ "ຕິດສະພົມ ເທວະດາຊັ້ນຈາຕຸມະຫາຣາດທັງໝົດເລີຍບໍທີ່ມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ"

ຕິດສະພົມຕອບວ່າ "ທ່ານພຣະໂມກຄັນລານະຜູ້ບໍ່ມີທຸກ ບໍ່ແມ່ນເທວະດາຊັ້ນຈາຕຸມະຫາຣາດທັງໝົດທີ່ມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ" ທ່ານພຣະມະຫາໂມກຄັນລານະຜູ້ບໍ່ມີທຸກ ເທວະດາຊັ້ນຈາຕຸມະຫາຣາດເຫຼົ່າໃດ ບໍ່ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ບໍ່ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ບໍ່ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ບໍ່ມີສິນທີ່ພຣະອະຣິຍະຕ້ອງການ ເທວະດາຊັ້ນຈາຕຸມະຫາຣາດເຫຼົ່ານັ້ນກໍບໍ່ມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ" ທ່ານພຣະມະຫາໂມກຄັນລານະຜູ້ບໍ່ມີທຸກ ສ່ວນເທວະດາຊັ້ນຈາຕຸມະຫາຣາດເຫຼົ່າໃດ ມີຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ມີສິນທີ່ພຣະອະຣິຍະຕ້ອງການ ເທວະດາຊັ້ນຈາຕຸມະຫາຣາດເຫຼົ່ານັ້ນຈຶ່ງມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນ ທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ"

ທ່ານພຣະໂມກຄັນລານະຖາມວ່າ "ຕິດສະພົມ ເທວະດາຊັ້ນຈາຕຸມະຫາຣາດທໍ່ນັ້ນບໍ ທີ່ມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ" ຫຼືວ່າແມ່ນເທວະດາຊັ້ນຕາວະຕິງສາ ຯລຯ ແມ່ນເທວະດາຊັ້ນຍາມາ ຯລຯ ແມ່ນເທວະດາຊັ້ນດຸສິດ ຯລຯ ແມ່ນເທວະດາຊັ້ນນິມມານະຣະດີ ຯລຯ ແມ່ນເທວະດາຊັ້ນປະຣະນິມມິຕະວະສະວັດດີກໍມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ"

ຕິດສະພົມຕອບວ່າ "ທ່ານພຣະໂມກຄັນລານະຜູ້ບໍ່ມີທຸກ ເທວະດາຊັ້ນປະຣະນິມມິຕະວະສະວັດດີມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ"

ທ່ານພຣະໂມກຄັນລານະຖາມວ່າ "ຕິດສະພົມ ເທວະດາຊັ້ນປະຣະນິມມິຕະວະສະວັດດີທັງໝົດເລີຍບໍທີ່ມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ"

ຕິດສະພົມຕອບວ່າ "ທ່ານພຣະໂມກຄັນລານະຜູ້ບໍ່ມີທຸກ ບໍ່ແມ່ນເທວະດາຊັ້ນປະຣະນິມມິຕະວະສະວັດດີທັງໝົດທີ່ມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ" ທ່ານພຣະໂມກຄັນລານະຜູ້ບໍ່ມີທຸກ ເທວະດາຊັ້ນປະຣະນິມມິຕະວະສະວັດດີເຫຼົ່າໃດ ບໍ່ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ບໍ່ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ບໍ່ມີຄວາມເຫຼື້ອມໃສໃນອັນບໍ່ຫວັ່ນໄຫວໃນພຣະສົງ ບໍ່ມີສີນທີ່ພຣະອະຣິຍະຕ້ອງການເທວະດາຊັ້ນປະຣະນິມມິຕະວະສະວັດດີເຫຼົ່ານັ້ນບໍ່ມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ" ທ່ານພຣະໂມກຄັນລານະຜູ້ບໍ່ມີທຸກ ສ່ວນເທວະດາຊັ້ນປະຣະນິມມິຕະວະສະວັດດີເຫຼົ່າໃດ ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ມີສີນທີ່ພຣະອະຣິຍະຕ້ອງການ ເທວະດາຊັ້ນປະຣະນິມມິຕະວະສະວັດດີເຫຼົ່ານັ້ນຈຶ່ງມີຍານແນວນີ້ວ່າ "ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ"

ລຳດັບນັ້ນ ທ່ານພຣະໂມກຄັນລານະຊົມຊື່ນ ອະນຸໂມທະນາພາສິດຂອງຕິດສະພົມແລ້ວຫາຍໄປຈາກພົມມະໂລກມາຜາກົດ ທີ່ພຣະເຊຕະວັນ ຄືບຸຣຸດຜູ້ມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າ

**ມະຫາໂມກຄັນລານະສູດທີ ໔ ຈົບ**

## ໕. ວິດຊາພາຄິຍະສູດ

## ວ່າດ້ວຍທຳທີ່ເປັນສ່ວນແຫ່ງວິດຊາ

[໓໕] ພິກຂຸທັງຫຼາຍ ທຳ ໖ ປະການນີ້ ເປັນສ່ວນແຫ່ງວິດຊາ

ທຳ໌ ໖ ປະການ ອັນໃດແດ່ ຄື

໑. ອະນິດຈະສັນຍາ

໒. ອະນິດເຈ ທຸກຂະສັນຍາ

໓. ທຸກເຂ ອະນັດຕະສັນຍາ

໔. ປະຫານະສັນຍາ

໕. ວິຣາຄະສັນຍາ

໖. ນິໂຣທະສັນຍາ

ພິກຂຸທັງຫຼາຍ ທຳ ໖ ປະການນີ້ ຍ່ອມເປັນສ່ວນແຫ່ງວິດຊາ

**ວິດຊາພາຄິຍະສູດທີ ໕ ຈົບ**

## ໖. ວິວາທະມູລະສູດ

## ວ່າດ້ວຍມູນເຫດແຫ່ງການຜິດຖຽງ

[໓໖] ພິກຂຸທັງຫຼາຍ ມູນເຫດແຫ່ງການຜິດຖຽງ ໖ ປະການນີ້

ມູນເຫດແຫ່ງການຜິດຖຽງ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມັກໂກດ ຜູກໂກດໄວ້ ພິກຂຸໃດເປັນຜູ້ມັກໂກດ ຜູກໂກດໄວ້ ພິກຂຸນັ້ນບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສົງ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສົງ ແລະບໍ່ເຮັດສິກຂາ ໃຫ້ບໍລິບູນ ຍ່ອມກໍ່ຜິດຖຽງໃຫ້ເກີດຂຶ້ນໃນສົງ ເຊິ່ງເປັນໄປເພື່ອບໍ່ເກື້ອກູນ ແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ ພິກຂຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາເຫັນມູນເຫດແຫ່ງການຜິດຖຽງແນວນີ້ ພາຍໃນຫຼືພາຍນອກ ທ່ານທັງຫຼາຍເພິ່ງພະຍາຍາມເພື່ອລະມູນເຫດແຫ່ງການຜິດຖຽງທີ່ເປັນບາບພາຍໃນຫຼືພາຍນອກນັ້ນແລ ຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນເຫດແຫ່ງການຜິດຖຽງແນວນີ້ພາຍໃນຫຼືພາຍນອກ ທ່ານທັງຫຼາຍ ເພິ່ງປະຕິບັດເພື່ອໃຫ້ມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນແລບໍ່ຍືດເຍື້ອຕໍ່ໄປ ການລະມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນຍ່ອມມີໄດ້ ແລະມູນເຫດແຫ່ງການຜິດຖຽງ ທີ່ເປັນບາບນັ້ນ ຍ່ອມບໍ່ຍືດເຍື້ອຕໍ່ໄປ

໒. ເປັນຜູ້ລົບຫລູ່ ຕີສະເໝີ ຯລຯ
໓. ເປັນຜູ້ຣິດສະຫຍາ ມີຄວາມຂີ້ຖີ່ ຯລຯ
໔. ເປັນຜູ້ໂອ້ອວດ ມີມາຍາ ຯລຯ
໕. ເປັນຜູ້ມີຄວາມປາຖະໜາຊົ່ວເປັນມິດສາທິດຖິ໌ ຯລຯ

໖. ເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ ພິກຂຸທັງຫຼາຍ ພິກຂຸໃດ ເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ ພິກຂຸນັ້ນຍ່ອມບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງແມ່ນໃນສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງແມ່ນໃນທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງແມ່ນໃນພຣະສົງ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສາດສະດາ ຯລຯ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ຍ່ອມກໍ່ການຜິດຖຽງໃຫ້ເກີດຂຶ້ນໃນສົງ ເຊິ່ງເປັນໄປເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ ພິກຂຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາເຫັນມູນເຫດແຫ່ງການຜິດຖຽງແນວນີ້ ທັງພາຍໃນຫຼືພາຍນອກ ທ່ານທັງຫຼາຍເພິ່ງພະຍາຍາມເພື່ອລະມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນແລທັງພາຍໃນຫຼືພາຍນອກນັ້ນ ຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນເຫດແຫ່ງການຜິດຖຽງແນວນີ້ ທັງພາຍໃນຫຼືພາຍນອກ ທ່ານທັງຫຼາຍເພິ່ງປະຕິບັດເພື່ອໃຫ້ມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນແລບໍ່ຍືດເຍື້ອຕໍ່ໄປ ການລະມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນແລຍ່ອມມີໄດ້ ແລະມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນ ຍ່ອມບໍ່ຍືດເຍື້ອຕໍ່ໄປ

ພິກຂຸທັງຫຼາຍ ມູນເຫດແຫ່ງການຜິດຖຽງ ໖ ປະການ ນີ້ແລ

**ວິວາທະມູລະສູດທີ ໖ ຈົບ**

## ໗. ທານະສູດ

## ວ່າດ້ວຍອົງແຫ່ງທັກຂິນາທານ

[໓໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ອຸປາສິກາຊື່ນັນທະມາຕາ ຊາວເມືອງເວລຸກັນທະກະ ຖວາຍທັກຂິນາອັນປະກອບດ້ວຍອົງ ໖ ໃນໝູ່ພິກຂຸມີພຣະສາຣີບຸດແລະພຣະໂມກຄັນລານະເປັນປະທານ ພຣະຜູ້ມີພຣະພາກເຈົ້າໄດ້ຊົງເຫັນອຸປາສິກາຊື່ນັນທະມາຕາ ຊາວເມືອງເວລຸກັນທະກະນັ້ນແລ້ວ ຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ອຸປາສິກາຊື່ນັນທະມາຕາ

ຊາວເມືອງເວລຸກັນທະກະນັ້ນ ຖວາຍທານອັນປະກອບດ້ວຍອົງ ໖ ໃນໝູ່ພິກຂຸມີສາຣີບຸດແລະໂມກຄັນລານະເປັນປະທານ

ທັກຂິນາອັນປະກອບດ້ວຍອົງ ໖ ເປັນແນວໃດ?

ຄື ຝ່າຍທາຍົກ(ຜູ້ໃຫ້)ມີອົງ ໓ ປະການ ຝ່າຍປະຕິຄາຫົກ (ຜູ້ຮັບ) ມີອົງ ໓ ປະການ ອົງ ໓ ປະການ ຂອງທາຍົກ ອັນໃດແດ່ ຄື

ທາຍົກໃນທຳວິໄນນີ້

໑. ກ່ອນໃຫ້ກໍມີໃຈດີ
໒. ກຳລັງໃຫ້ກໍເຮັດຈິດໃຫ້ເຫຼື້ອມໃສ
໓. ເມື່ອໃຫ້ແລ້ວກໍມີໃຈເບີກບານ

ນີ້ຄືອົງ ໓ ປະການ ຂອງທາຍົກ

ອົງ ໓ ປະການ ຂອງປະຕິຄາຫົກ ອັນໃດແດ່ ຄື

ປະຕິຄາຫົກໃນທຳວິໄນນີ້

໑. ເປັນຜູ້ປາສະຈາກຣາຄະ ຫຼື ປະຕິບັດເພື່ອກຳຈັດຣາຄະ
໒. ເປັນຜູ້ປາສະຈາກໂທສະ ຫຼື ປະຕິບັດເພື່ອກຳຈັດໂທສະ
໓. ເປັນຜູ້ປາສະຈາກໂມຫະ ຫຼື ປະຕິບັດເພື່ອກຳຈັດໂມຫະ

ນີ້ຄືອົງ ໓ ປະການ ຂອງປະຕິຄາຫົກ ອົງ ໓ ປະການ ຂອງທາຍົກ ອົງ ໓ ປະການ ຂອງປະຕິຄາຫົກ ມີດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ທັກຂິນາອັນປະກອບດ້ວຍອົງ ໖ ເປັນແນວນີ້ແລ

ພິກຂຸທັງຫຼາຍ ການກຳນົດປະມານບຸນແຫ່ງທັກຂິນາອັນປະກອບດ້ວຍອົງ ໖ ແນວນີ້ວ່າ "ຫ້ວງບຸນ ຫ້ວງກຸສົນມີປະມານທໍ່ນີ້ ນຳຄວາມສຸກມາໃຫ້ ມີອາລົມດີເລີດ[1] ມີວິບາກເປັນສຸກ ເປັນໄປເພື່ອສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ" ບໍ່ແມ່ນເຮັດໄດ້ງ່າຍ ແທ້ຈິງແລ້ວ ຫ້ວງບຸນ ຫ້ວງກຸສົນແຫ່ງທັກຂິນານັ້ນເຖິງການນັບວ່າ "ເປັນກອງບຸນໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້"

ປຽບຄື ການກຳນົດປະລິມານຂອງນ້ຳໃນມະຫາສະມຸດວ່າ "ນ້ຳມີປະລິມານທໍ່ນີ້ອາລະຫະກະ ນ້ຳມີປະລິມານທໍ່ນີ້ ໑໐໐ ອາລະຫະກະ ນ້ຳມີປະລິມານທໍ່ນີ້ ໑,໐໐໐ ອາລະຫະກະ ຫຼືນ້ຳມີປະລິມານທໍ່ນີ້ ໑໐໐,໐໐໐ ອາລະຫະກະ" ບໍ່ແມ່ນເຮັດໄດ້ງ່າຍ ແທ້ຈິງແລ້ວ ນ້ຳໃນມະຫາສະມຸດນັ້ນເຖິງການນັບວ່າ "ເປັນແມ່ນ້ຳໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້" ສັນໃດ

ພິກຂຸທັງຫຼາຍ ການກຳນົດປະມານບຸນແຫ່ງທັກຂິນາອັນປະກອບດ້ວຍອົງ ໖ ແນວນີ້ວ່າ "ຫ້ວງບຸນ ຫ້ວງກຸສົນມີປະມານທໍ່ນີ້ ນຳຄວາມສຸກມາໃຫ້ ມີອາລົມດີເລີດ ມີວິບາກເປັນສຸກ ເປັນໄປເພື່ອສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ" ບໍ່ແມ່ນເຮັດໄດ້ງ່າຍ ແທ້ຈິງແລ້ວ ຫ້ວງບຸນ ຫ້ວງກຸສົນຂອງທັກຂິນານັ້ນ ເຖິງການນັບວ່າ "ເປັນກອງບຸນໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້" ສັນນັ້ນ

ທາຍົກ ກ່ອນໃຫ້ກໍມີໃຈດີ
ເມື່ອກຳລັງໃຫ້ກໍເຮັດຈິດໃຫ້ເຫຼື້ອມໃສ
ເມື່ອໃຫ້ແລ້ວກໍມີໃຈເບີກບານ
ນີ້ເປັນຄວາມເຖິງພ້ອມແຫ່ງຍັນ໌
ປະຕິຄາຫົກຜູ້ສັງລວມປະພຶດພົມມະຈັນທັງຫຼາຍ
ຄື ທ່ານຜູ້ປາສະຈາກຣາຄະ ປາສະຈາກໂທສະ
ປາສະຈາກໂມຫະ ບໍ່ມີອາສະວະ
ຍ່ອມເປັນເຂດທີ່ສົມບູນແຫ່ງການໃຫ້
ທາຍົກຕ້ອນຮັບປະຕິຄາຫົກດ້ວຍຕົນເອງ
ຖວາຍທານດ້ວຍມືຕົນເອງ
ຍັນນັ້ນຍ່ອມມີຜົນຫຼາຍ
ຍ້ອນຕົນ (ທາຍົກຜູ້ໃຫ້ທານ) ແລະຍ້ອນຜູ້ອື່ນ (ປະຕິຄາຫົກ)
ເປັນບັນດິດຜູ້ເປັນນັກປາດ ມີສັດທາ
ມີໃຈພົ້ນແລ້ວ˚ບູຊາຍັນແນວນີ້
ຍ່ອມເຂົ້າເຖິງໂລກທີ່ປາສະຈາກຄວາມບຽດບຽນເປັນສຸກ

**ທານະສູດທີ ໗ ຈົບ**

## ໘. ອັດຕະກາຣີສູດ
## ວ່າດ້ວຍອັດຕະການ

[໓໘] ຄັ້ງນັ້ນແລ ພາມຄົນໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນບ່ອນຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ຂ້າພຣະອົງມີວາທະແນວນີ້ ມີທິດຖິແນວນີ້ວ່າ "ບໍ່ມີອັດຕະການ (ມີຕົນເປັນໂຕການ) ບໍ່ມີປະຣະການ໌ (ມີສິ່ງອື່ນເປັນໂຕການ)"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ເຮົາບໍ່ເຄີຍໄດ້ເຫັນບໍ່ເຄີຍໄດ້ຟັງຄຳຂອງບຸກຄົນຜູ້ມີວາທະແນວນີ້ ມີທິດຖິແນວນີ້ເລີຍ ກໍບຸກຄົນເມື່ອກ້າວໄປທາງໜ້າເອງໄດ້ ຖອຍກັບເອງໄດ້ ເປັນຫຍັງຈຶ່ງຈັກກ່າວແນວນີ້ວ່າ "ບໍ່ມີອັດຕະການ ບໍ່ມີປະຣະການ" ພາມ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ອາຣັບພະທາດ[໑]ມີຢູ່ບໍ?"

ພາມຂາບທູນວ່າ "ມີ ທ່ານພຣະໂຄດົມ"

"ເມື່ອມີອາຣັບພະທາດ ສັດທັງຫຼາຍຜູ້ມີຄວາມພຽນລິເລີ່ມຍັງມີຜາກົດຢູ່ບໍ?"

"ຍັງມີຜາກົດ ທ່ານພຣະໂຄດົມ"

"ພາມ ການທີ່ເມື່ອມີອາຣັບພະທາດ ສັດທັງຫຼາຍ ຜູ້ມີຄວາມພຽນລິເລີ່ມຍັງມີຜາກົດຢູ່ ນີ້ແລຄືອັດຕະການ ນີ້ແລ ຄືປະຣະການຂອງສັດທັງຫຼາຍ"

ພາມ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ນິກກະມະທາດມີຢູ່ບໍ ຯລຯ ປະຣັກກະມະທາດມີຢູ່ບໍ? ຯລຯ ຖາມະທາດມີຢູ່ບໍ? ຯລຯ ທິຕິທາດມີຢູ່ບໍ? ຯລຯ ອຸປັກກະມະທາດ[໑] ມີຢູ່ບໍ? ຯລຯ"

"ມີ ທ່ານພຣະໂຄດົມ"

"ພາມ ເມື່ອມີອຸປັກກະມະທາດ ສັດທັງຫຼາຍ ຜູ້ມີຄວາມພະຍາຍາມຍັງມີຜາກົດຢູ່ບໍ?"

"ຍັງມີຜາກົດ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ການທີ່ເມື່ອມີອຸປັກກະມະທາດ ສັດທັງຫຼາຍຜູ້ມີຄວາມພະຍາຍາມຍັງມີຜາກົດຢູ່ ນີ້ແລຄືອັດຕະການ ນີ້ແລຄືປະຣະການຂອງສັດທັງຫຼາຍ

ພາມ ເຮົາບໍ່ເຄີຍໄດ້ເຫັນບໍ່ເຄີຍໄດ້ຟັງຄຳຂອງບຸກຄົນຜູ້ມີວາທະແນວນີ້ ຜູ້ມີທິດຖິແນວນີ້ເລີຍ ກໍບຸກຄົນເມື່ອກ້າວໄປທາງໜ້າເອງໄດ້ ຖອຍກັບເອງໄດ້ ເປັນຫຍັງຈຶ່ງຈັກກ່າວ ແນວນີ້ວ່າ "ບໍ່ມີອັດຕະການ ບໍ່ມີປະຣະການ"

ພາມຂາບທູນວ່າ "ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນນ່ອນຫຼາຍ ຯລຯ ຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ອັດຕະກາຣີສູດທີ ໗ ຈົບ**

## ໘. ນິທານະສູດ

## ວ່າດ້ວຍເຫດໃຫ້ເກີດກຳ

[໓໘] ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ(ຊົ່ວ) ໓ ປະການນີ້

ເຫດໃຫ້ເກີດກຳ ໓ ປະການ ອັນໃດແດ່ ຄື

໑. ໂລພະ (ຄວາມຢາກໄດ້)ເປັນເຫດໃຫ້ເກີດກຳ
໒. ໂທສະ (ຄວາມຄິດປະທຸດສະຮ້າຍ)ເປັນເຫດໃຫ້ເກີດກຳ
໓. ໂມຫະ (ຄວາມຫຼົງ)ເປັນເຫດໃຫ້ເກີດກຳ

ພິກຂຸທັງຫຼາຍ ອະໂລພະບໍ່ເກີດຂຶ້ນຍ້ອນໂລພະ ແທ້ຈິງແລ້ວ ໂລພະທີ່ນັ້ນເກີດຂຶ້ນຍ້ອນໂລພະ

ອະໂທສະບໍ່ເກີດຂຶ້ນຍ້ອນໂທສະ ແທ້ຈິງແລ້ວ ໂທສະທີ່ນັ້ນເກີດຂຶ້ນຍ້ອນໂທສະ

ອະໂມຫະບໍ່ເກີດຂຶ້ນຍ້ອນໂມຫະ ແທ້ຈິງແລ້ວ ໂມຫະທີ່ນັ້ນເກີດຂຶ້ນຍ້ອນໂມຫະ

ເທວະດາ ມະນຸດ ຫຼື ແມ່ນສຸກຄະຕິແນວໃດແນວໜຶ່ງ ບໍ່ຜາກົດຍ້ອນກຳທີ່ເກີດຈາກໂລພະ ຍ້ອນກຳທີ່ເກີດຈາກໂທສະ ແລະຍ້ອນກຳທີ່ເກີດຈາກໂມຫະ ແທ້ຈິງແລ້ວນະຮົກ ກຳເນີດສັດເດຍຣັດສານ ແດນເຜດ ຫຼື ແມ່ນທຸກຄະຕິແນວໃດແນວໜຶ່ງ ຍ່ອມຜາກົດຍ້ອນກຳທີ່ເກີດຈາກໂລພະ ຍ້ອນກຳທີ່ເກີດຈາກໂທສະ ແລະຍ້ອນກຳທີ່ເກີດຈາກໂມຫະ

ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ ໓ ປະການນີ້ແລ

ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ (ດີ) ໓ ປະການນີ້
ເຫດໃຫ້ເກີດກຳ ໓ ປະການ ອັນໃດແດ່ ຄື

໑. ອະໂລພະ (ຄວາມບໍ່ຢາກໄດ້)ເປັນເຫດໃຫ້ເກີດກຳ
໒. ອະໂທສະ (ຄວາມບໍ່ຄິດປະທຸດສະຮ້າຍ)ເປັນເຫດໃຫ້ເກີດກຳ
໓. ອະໂມຫະ (ຄວາມບໍ່ຫຼົງ)ເປັນເຫດໃຫ້ເກີດກຳ

ພິກຂຸທັງຫຼາຍ ໂລພະບໍ່ເກີດຂຶ້ນຍ້ອນອະໂລພະ ແທ້ຈິງແລ້ວ ອະໂລພະທີ່ນັ້ນເກີດຂຶ້ນຍ້ອນອະໂລພະ

ໂທສະບໍ່ເກີດຂຶ້ນຍ້ອນອະໂທສະ ແທ້ຈິງແລ້ວ ອະໂທສະທີ່ນັ້ນເກີດຂຶ້ນຍ້ອນອະໂທສະ

ໂມຫະບໍ່ເກີດຂຶ້ນຍ້ອນອະໂມຫະ ແທ້ຈິງແລ້ວ ອະໂມຫະທີ່ນັ້ນເກີດຂຶ້ນຍ້ອນອະໂມຫະ

ນະຮົກ ກຳເນີດສັດເດຍຣັດສານ ແດນເຜດ ຫຼືແມ່ນທຸກຄະຕິແນວໃດແນວໜຶ່ງບໍ່ຜາກົດຍ້ອນກຳທີ່ເກີດຈາກອະໂລພະ ຍ້ອນກຳທີ່ເກີດຈາກອະໂທສະ ແລະຍ້ອນກຳທີ່ເກີດຈາກອະໂມຫະ

ແທ້ຈິງແລ້ວ ເທວະດາ ມະນຸດທັງຫຼາຍ ຫຼືແມ່ນສຸກຄະຕິແນວໃດແນວໜຶ່ງ ຍ່ອມຜາກົດຍ້ອນກຳທີ່ເກີດຈາກອະໂລພະ ຍ້ອນກຳທີ່ເກີດຈາກອະໂທສະ ແລະຍ້ອນກຳທີ່ເກີດຈາກອະໂມຫະ

ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ ໓ ປະການນີ້ແລ

**ນິທານະສູດທີ ໙ ຈົບ**

# ໑໐. ກິມມິລະສູດ

## ວ່າດ້ວຍທ່ານພຣະກິມມິລະ

[໔໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ປ່າໄຜ່ ເຂດເມືອງກິມມິລາ ຄັ້ງນັ້ນ ທ່ານພຣະກິມມິລະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດປັດໄຈໃຫ້ພຣະສັດທຳບໍ່ດຳລົງຢູ່ໄດ້ດົນ ໃນເມື່ອພຣະຕະຖາຄົດປະຣິນິບພານແລ້ວ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ກິມມິລະ ເມື່ອຕະຖາຄົດປະຣິນິບພານແລ້ວ ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາໃນທຳວິໄນນີ້

໑. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສາດສະດາ
໒. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນທຳ
໓. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສົງ
໔. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສິກຂາ
໕. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນຄວາມບໍ່ຜະໝາດ
໖. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນປະຕິສັນຖານ

ກິມມິລະ ນີ້ແລ ເປັນເຫດປັດໄຈໃຫ້ສັດທຳບໍ່ດຳລົງຢູ່ໄດ້ດົນ ໃນເມື່ອຕະຖາຄົດປະຣິນິບພານແລ້ວ”

ທ່ານກິມມິລະທູນຖາມວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດປັດໄຈໃຫ້ພຣະສັດທຳດຳລົງຢູ່ໄດ້ດົນ ໃນເມື່ອພຣະຕະຖາຄົດປະຣິນິບພານແລ້ວ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ກິມມິລະ ເມື່ອຕະຖາຄົດປະຣິນິບພານແລ້ວ ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາໃນທຳວິໄນນີ້

໑. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນສາດສະດາ
໒. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນທຳ
໓. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນສົງ
໔. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນສິກຂາ
໕. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນຄວາມບໍ່ພະໝາດ
໖. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນປະຕິສັນຖານ

ກິມມິລະ ນີ້ແລ ເປັນເຫດປັດໄຈໃຫ້ສັດທຳດຳລົງຢູ່ໄດ້ດົນ ໃນເມື່ອຕະຖາຄົດປະຣິນິບພານແລ້ວ"

**ກິມມິລະສູດທີ ໑໐ ຈົບ**

## ໑໑. ທາຣຸກຂັນທະສູດ

## ວ່າດ້ວຍກອງຟືນ

[໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພູຄິດຊະກູດ[໑] ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ເວລາເຊົ້າ ທ່ານພຣະສາຣີບຸດຄອງອັນຕະຣະວາສົກຖືບາດ ແລະຈີວອນລົງຈາກພູ ຄິດຊະກູດ ພ້ອມດ້ວຍພິກຂຸຈຳນວນຫຼາຍ ໄດ້ເຫັນກອງຟືນໃຫຍ່ໃນບ່ອນແຫ່ງໜຶ່ງ ຈຶ່ງຖາມພິກຂຸທັງຫຼາຍວ່າ "ຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍ ເຫັນກອງຟືນໃຫຍ່ນັ້ນບໍ?"

ພິກຂຸເຫຼົ່ານັ້ນຕອບວ່າ "ເຫັນ ຜູ້ມີອາຍຸ"

ທ່ານພຣະສາຣີບຸດຈຶ່ງກ່າວວ່າ ຜູ້ມີອາຍຸທັງຫຼາຍ

໑. ພິກຂຸຜູ້ມີລິດ ບັນລຸຄວາມຊ່ຽວຊານທາງໃຈ ເມື່ອຕ້ອງການ ເພິ່ງນ້ອມຈິດເຖິງກອງຟືນນັ້ນວ່າ "ດິນ" ກໍໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທີ່ກອງຟືນນັ້ນມີປະຖະວີທາດ(ທາດດິນ)ຢູ່ ເຊິ່ງພິກຂຸຜູ້ມີລິດ ບັນລຸຄວາມຊ່ຽວຊານທາງໃຈ ຈະເພິ່ງອາໄສນ້ອມຈິດເຖິງກອງຟືນນັ້ນວ່າ "ດິນ"
໒. ພິກຂຸຜູ້ມີລິດ ບັນລຸຄວາມຊ່ຽວຊານທາງໃຈ ເມື່ອຕ້ອງການ ເພິ່ງນ້ອມຈິດເຖິງກອງຟືນນັ້ນວ່າ "ນ້ຳ" ຯລຯ
໓. ພິກຂຸຜູ້ມີລິດ ບັນລຸຄວາມຊ່ຽວຊານທາງໃຈ ເມື່ອຕ້ອງການ ເພິ່ງນ້ອມຈິດເຖິງກອງຟືນນັ້ນວ່າ "ໄຟ" ຯລຯ

໔. ພິກຂຸຜູ້ມີລິດ ບັນລຸຄວາມຊ່ຽວຊານທາງໃຈ ເມື່ອຕ້ອງການ ເພິ່ງນ້ອມຈິດເຖິງກອງຟືນນັ້ນວ່າ “ລົມ” ຯລຯ

໕. ພິກຂຸຜູ້ມີລິດ ບັນລຸຄວາມຊ່ຽວຊານທາງໃຈ ເມື່ອຕ້ອງການເພິ່ງນ້ອມຈິດເຖິງກອງຟືນນັ້ນວ່າ “ງາມ” ຯລຯ

໖. ພິກຂຸຜູ້ມີລິດ ບັນລຸຄວາມຊ່ຽວຊານທາງໃຈ ເມື່ອຕ້ອງການ ເພິ່ງນ້ອມຈິດເຖິງກອງຟືນນັ້ນວ່າ “ບໍ່ງາມ” ກໍໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທີ່ ກອງຟືນນັ້ນມີອະສຸພະທາດ[໑]ຢູ່ ເຊິ່ງພິກຂຸຜູ້ມີລິດ ບັນລຸຄວາມຊ່ຽວຊານ ທາງໃຈ ຈະເພິ່ງອາໄສນ້ອມຈິດເຖິງກອງຟືນນັ້ນວ່າ “ບໍ່ງາມ”

**ທາຣຸກຂັນທະສູດທີ ໑໑ ຈົບ**

## ໑໘. ນາຄິຕະສູດ[໒]

### ວ່າດ້ວຍທ່ານພຣະນາຄິຕະ

[໔໘] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງໝູ່ບ້ານພາມແຄວ້ນໂກສົນຊື່ອິດສານັງຄະລະ ເລົ່າກັນວ່າເວລານັ້ນພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ແຄມປ່າຊື່ອິດສານັງຄະລະ ໃກ້ໝູ່ບ້ານພາມຊື່ ອິດສານັງຄະລະ

ພວກພາມແລະຄະຫະບໍດີຊາວບ້ານອິດສານັງຄະລະໄດ້ຮູ້ຂ່າວວ່າ “ທ່ານຜູ້ຈະເລີນ ຂ່າວວ່າພຣະສະມະນະໂຄດົມສາກະຍະບຸດ ຊົງອອກບວດຈາກສາກະຍະຕະກູນ ສະເດັດເຖິງບ້ານ ອິດສານັງຄະລະ ປະທັບຢູ່ທີ່ແຄມປ່າຊື່ອິດສານັງຄະລະ ໃກ້ໝູ່ບ້ານພາມຊື່ ອິດສານັງຄະລະ ທ່ານພຣະສະມະນະໂຄດົມພຣະອົງນັ້ນມີກິດຕິສັບອັນງາມຊ່າລືໄປແບບນີ້ວ່າ “ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງພຽບພ້ອມດ້ວຍວິດຊາແລະຈະຣະນະ ຯລຯ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ” ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ຯລຯ ການໄດ້ພົບພຣະອະຣະຫັນແບບນີ້ ເປັນຄວາມດີຢ່າງແທ້ຈິງ”

ເມື່ອຄືນນັ້ນຜ່ານໄປ ພາມແລະຄະຫະບໍດີຊາວບ້ານອິດສານັງຄະລະ ຈຶ່ງພາກັນຖືເອົາຂອງຫຍ້ຳຂອງສັນຫຼວງຫຼາຍເຂົ້າໄປເຖິງແຄມປ່າຊື່ອິດສານັງຄະລະ ໄດ້ຢືນຊຸມນຸມກັນສົ່ງສຽງ ອື້ອຶງທີ່ຊຸ້ມປະຕູດ້ານນອກ

ສະໄໝນັ້ນແລ ທ່ານພຣະນາຄິຕະເປັນອຸປັດຖາກຂອງພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະ ພາກເຈົ້າໄດ້ຮັບສັ່ງຮຽກທ່ານພຣະນາຄິຕະມາຕັດຖາມວ່າ "ນາຄິຕະ ຄົນພວກໃດສົ່ງສຽງອື້ອຶງຢູ່ນັ້ນ ຄ້າຍພວກຊາວປະມົງແຍ່ງປາກັນ"

ທ່ານພຣະນາຄິຕະຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພາມແລະຄະຫະບໍດີ ຊາວບ້ານ ອິດສານັງຄະລະເຫຼົ່ານັ້ນ ພາກັນຖືເອົາຂອງຫຍໍ້າຂອງສັນຫຼວງຫຼາຍມາຢືນຊຸມນຸມກັນຢູ່ທີ່ຊຸ້ມປະຕູດ້ານນອກເພື່ອຖວາຍພຣະຜູ້ມີພຣະພາກເຈົ້າ ແລະພິກຂຸສົງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ນາຄິຕະ ເຮົາບໍ່ຕິດຍົດ ແລະຍົດກໍບໍ່ຕິດເຮົາ ຜູ້ໃດແລບໍ່ໄດ້ຕາມຄວາມປາຖະໜາ ບໍ່ໄດ້ໂດຍບໍ່ຍາກ ບໍ່ໄດ້ໂດຍບໍ່ລຳບາກເຊິ່ງເນກຂຳມະສຸກ ປະວິເວກສຸກ ອຸປະສະມະສຸກ ສຳໂພທະສຸກທີ່ເຮົາໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກນີ້ ຜູ້ນັ້ນຊື່ວ່າຍິນດີສຸກທີ່ບໍ່ສະອາດ ສຸກໃນການນອນຫຼັບ ແລະສຸກທີ່ອີງອາໄສລາບສັກກາຣະແລະການສັນເສີນ"

ທ່ານພຣະນາຄິຕະຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າຜູ້ ສຸຄົດຈົ່ງຊົງຮັບ ບັດນີ້ເປັນເວລາທີ່ພຣະຜູ້ມີພຣະພາກເຈົ້າຈະຊົງຮັບ ພຣະອົງຈັກສະເດັດໄປ ທາງໃດ ໆ ພາມ ຄະຫະບໍດີຊາວນິຄົມ ແລະຊາວຊົນນະບົດກໍຈັກຫຼັ່ງໄຫຼໄປທາງນັ້ນ ໆ ປຽບ ຄືເມື່ອຝົນເມັດໃຫຍ່ຕົກລົງມາ ນໍ້າຍ່ອມໄຫຼໄປຕາມບ່ອນຫຼຸບ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງມີສີນແລະປັນຍາ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ນາຄິຕະ ເຮົາບໍ່ຕິດຍົດ ແລະຍົດກໍບໍ່ຕິດເຮົາ ຜູ້ໃດແລບໍ່ໄດ້ຕາມຄວາມປາຖະໜາ ບໍ່ໄດ້ໂດຍບໍ່ຍາກ ບໍ່ໄດ້ໂດຍບໍ່ລຳບາກເຊິ່ງເນກຂຳມະສຸກ ປະວິເວກສຸກ ອຸປະສະມະສຸກ ສຳໂພທະສຸກທີ່ເຮົາໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກນີ້ ຜູ້ນັ້ນຊື່ວ່າຍິນດີສຸກທີ່ບໍ່ສະອາດ ສຸກໃນການນອນຫຼັບ ແລະສຸກທີ່ອີງອາໄສລາບສັກກາຣະແລະການສັນເສີນ

ນາຄິຕະ

໑. ເຮົາເຫັນພິກຂຸໃນທຳວິໄນນີ້ ຜູ້ຢູ່ໃນເສນາສະນະໃກ້ໝູ່ບ້ານ ມີສະມາທິ ນັ່ງຢູ່ ເຮົາມີຄວາມຄິດແນວນີ້ວ່າ "ບັດນີ້ ຄົນວັດຈັກລົບກວນທ່ານຜູ້ນີ້ ຫຼືສະມະນຸດເທດ໑ຈັກເຮັດໃຫ້ທ່ານເຄື່ອນຈາກສະມາທິ" ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ຍິນດີການຢູ່ໃນເສນາສະນະໃກ້ບ້ານຂອງພິກຂຸນັ້ນ

໔. ເຮົາເຫັນພິກຂຸໃນທຳວິໄນນີ້ຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ນັ່ງໂງກງ່ວງຢູ່ໃນປ່າ ເຮົາມີຄວາມຄິດແນວນີ້ວ່າ "ບັດນີ້ ທ່ານຜູ້ນີ້ຈັກບັນເທົາຄວາມລຳບາກຄືການຫຼັບນີ້ ແລ້ວມະນະສິການຄວາມກຳນົດໝາຍວ່າປ່າເປັນເອກັກຄະຕາຣົມ" ຍ້ອນເຫດນັ້ນ ເຮົາຈຶ່ງຍິນດີການຢູ່ໃນປ່າຂອງພິກຂຸນັ້ນ

໕. ເຮົາເຫັນພິກຂຸໃນທຳວິໄນນີ້ ຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ບໍ່ມີສະມາທິນັ່ງຢູ່ໃນປ່າ ເຮົາມີຄວາມຄິດແນວນີ້ວ່າ "ບັດນີ້ ທ່ານຜູ້ນີ້ຈັກຕັ້ງຈິດທີ່ບໍ່ເປັນສະມາທິໃຫ້ເປັນສະມາທິ ຫຼືຈັກຕາມຮັກສາຈິດທີ່ເປັນສະມາທິໄວ້" ຍ້ອນເຫດນັ້ນ ເຮົາຈຶ່ງຍິນດີການຢູ່ໃນປ່າຂອງພິກຂຸນັ້ນ

໖. ເຮົາເຫັນພິກຂຸໃນທຳວິໄນນີ້ ຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ມີສະມາທິນັ່ງຢູ່ໃນປ່າ ເຮົາມີຄວາມຄິດແນວນີ້ວ່າ "ບັດນີ້ ທ່ານຜູ້ນີ້ຈັກປົດເປື້ອງຈິດທີ່ຍັງບໍ່ລຸດພົ້ນໃຫ້ລຸດພົ້ນ[໒] ຫຼືວ່າຈັກຕາມຮັກສາຈິດທີ່ລຸດພົ້ນແລ້ວໄວ້ໄດ້" ຍ້ອນເຫດນັ້ນ ເຮົາຈຶ່ງຍິນດີການຢູ່ໃນປ່າຂອງພິກຂຸນັ້ນ

໗. ເຮົາເຫັນພິກຂຸໃນທຳວິໄນນີ້ ຜູ້ຢູ່ໃນເສນາສະນະໃກ້ບ້ານ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ທ່ານພໍໃຈລາບສັກກາຣະແລະ ການສັນເສີນນັ້ນ ລະຖິ້ມການຫຼີບຫຼີກ ລະຖິ້ມເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າທຶບ ຫຼືເຂົ້າມາລວມກັນຢູ່ຍັງໝູ່ບ້ານ ເຂດແລະເມືອງຫຼວງ" ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ຍິນດີການຢູ່ໃນເສນາສະນະໃກ້ໝູ່ບ້ານຂອງພິກຂຸນັ້ນ

໘. ເຮົາເຫັນພິກຂຸໃນທຳວິໄນນີ້ຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ທ່ານກຳຈັດລາບສັກກາຣະ ແລະການສັນເສີນນັ້ນ ບໍ່ລະຖິ້ມການຫຼີບຫຼີກ ບໍ່ລະຖິ້ມເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າທຶບ" ຍ້ອນເຫດນັ້ນ ເຮົາຈຶ່ງຍິນດີການຢູ່ໃນປ່າຂອງພິກຂຸນັ້ນ

ອັນໜຶ່ງ ສະໄໝໃດ ເຮົາເດີນທາງໄກ ບໍ່ເຫັນໃຜທາງໜ້າຫຼືທາງຫຼັງ ສະໄໝນັ້ນ ເຮົາຍ່ອມ ມີຄວາມຜາສຸກ ໂດຍທີ່ສຸດ ແມ່ນດ້ວຍການຖ່າຍອຸດຈາຣະແລະປັດສາວະ"

**ນາຄິຕະສູດທີ ໑໘ ຈົບ**

**ເທວະຕາວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໕. ທຳມິກະວັກ

## ໝວດວ່າດ້ວຍພຣະທຳມິກະ

## ໑. ນາຄະສູດ

### ວ່າດ້ວຍນາກ[១]

[໔໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງ ອັນຕະຣະວາສົກຖືບາດແລະຈີວອນສະເດັດເຂົ້າໄປບິນທະບາດໃນເມືອງສາວັດຖີ ເມື່ອສະເດັດກັບຈາກບິນທະບາດພາຍຫຼັງສະເຫວີຍພຣະກະຍາຫານສຳເລັດແລ້ວ ໄດ້ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນ ອານົນ ເຮົາຈັກເຂົ້າໄປສູ່ຜາສາດມິຄາຣະມາຕາ ໃນບຸບພາຣາມວິຫານ ເພື່ອພັກກາງເວັນ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າພ້ອມກັບທ່ານພຣະອານົນໄດ້ສະເດັດເຂົ້າໄປສູ່ຜາສາດຂອງມິຄາຣະມາຕາ ໃນບຸບພາຣາມວິຫານ ຕໍ່ມາໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ ໄດ້ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນ ອານົນ ເຮົາຈັກເຂົ້າໄປສູ່ທ່ານ້ຳປຸບພະໂກດຖະກະເພື່ອອາບນ້ຳ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າພ້ອມກັບທ່ານພຣະອານົນ ໄດ້ສະເດັດເຂົ້າໄປສູ່ທ່ານ້ຳປຸບພະໂກດຖະກະເພື່ອອາບນ້ຳ ແລ້ວ ສະເດັດຂຶ້ນມາມີຈີວອນຜືນດຽວຕາກພຣະວໍຣະກາຍຢູ່

ສະໄໝນັ້ນ ພຣະເສວະຕະກຸນຊະຣະ[២]ຂອງພຣະເຈົ້າປະເສນທິໂກສົນ ຂຶ້ນຈາກທ່ານ້ຳປຸບພະໂກດຖະກະ ຍ້ອນສຽງດົນຕີໃຫຍ່ທີ່ເຂົາຕີປະໂຄມ ເຫຼົ່າຊົນເຫັນຊ້າງນັ້ນແລ້ວຈຶ່ງກ່າວຊົມແນວ

ນີ້ວ່າ "ນາກຂອງພຣະຣາຊາຊ່າງງາມຫຼາຍ ນາກຂອງພຣະຣາຊາຊ່າງໜ້າເບິ່ງ ນາກຂອງພຣະຣາຊາ ຊ່າງ ໜ້າເຫຼື້ອມໃສ ນາກຂອງພຣະຣາຊາມີອະໄວຍະວະສົມບູນ"

ເມື່ອມະຫາຊະນົກລ່າວຊົມແນວນີ້ແລ້ວ ທ່ານພຣະອຸທາຍີ[១]ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຄົນທັງຫຼາຍເຫັນຊ້າງເຊືອກໃຫຍ່ ສູງ ມີອະໄວຍະວະສົມບູນທີ່ນັ້ນ ບໍ ຈຶ່ງໄດ້ກ່າວແນວນີ້ວ່າ "ນາກ ໜ້າອັດສະຈັນແທ້ ທ່ານຜູ້ຈະເລີນ ນາກ ໜ້າອັດສະຈັນແທ້" ຫຼືວ່າເຫັນສັດຊະນິດອື່ນທີ່ໃຫຍ່ ສູງ ມີອະໄວຍະວະສົມບູນຈຶ່ງໄດ້ກ່າວແນວນີ້ວ່າ "ນາກ ໜ້າອັດສະຈັນແທ້ ທ່ານຜູ້ຈະເລີນ ນາກ ໜ້າອັດສະຈັນແທ້"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸທາຍີ ຄົນທັງຫຼາຍເຫັນຊ້າງເຊືອກໃຫຍ່ ສູງ ມີອະໄວຍະວະສົມບູນ ຈຶ່ງໄດ້ກ່າວແນວນີ້ວ່າ "ນາກ ໜ້າອັດສະຈັນແທ້ ທ່ານຜູ້ຈະເລີນ ນາກ ໜ້າອັດສະຈັນແທ້" ແດ່ ເຫັນມ້າໂຕໃຫຍ່ ສູງ ຯລຯ ເຫັນງົວໂຕໃຫຍ່ ສູງ ຯລຯ ເຫັນງູໂຕໃຫຍ່ຍາວ ຯລຯ ເຫັນຕົ້ນໄມ້ໃຫຍ່ ສູງ ຯລຯ ເຫັນມະນຸດຜູ້ມີຮ່າງກາຍໃຫຍ່ ສູງ ມີອະໄວຍະວະສົມບູນ ຈຶ່ງໄດ້ກ່າວແນວນີ້ວ່າ "ນາກ ໜ້າອັດສະຈັນແທ້ ທ່ານຜູ້ຈະເລີນ ນາກ ໜ້າອັດສະຈັນແທ້" ແດ່

ອຸທາຍີ ແຕ່ເຮົາຮຽກບຸກຄົນຜູ້ບໍ່ທຳຄວາມຊົ່ວທາງກາຍ ທາງວາຈາ ທາງໃຈ ໃນໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມເທວະດາແລະມະນຸດນັ້ນວ່າ "ນາກ"

ທ່ານພຣະອຸທາຍີຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ອຸທາຍີ ເຮົາຮຽກບຸກຄົນຜູ້ບໍ່ທຳຄວາມຊົ່ວທາງກາຍ ທາງວາຈາ ທາງໃຈ ໃນໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດວ່າ "ນາກ"

ທ່ານພຣະອຸທາຍີໄດ້ຂາບທູນຕໍ່ໄປວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງ ຂໍອະນຸໂມທະນາພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວນີ້ດ້ວຍຄາຖາເຫຼົ່ານີ້ວ່າ

ຂ້າພຣະອົງໄດ້ສະດັບມາຈາກພຣະອົງຜູ້ເປັນພຣະອະຣະຫັນ ວ່າ
ມະນຸດທັງຫຼາຍນອບນ້ອມພຣະສຳພຸດທະເຈົ້າ ຜູ້ເປັນມະນຸດ
ຊົງເຝິກພຣະອົງແລ້ວ[໒] ມີພຣະທະໄທຕັ້ງໝັ້ນແລ້ວ
ຜູ້ຊົງດຳເນີນໄປໃນທາງປະເສີດ
ຜູ້ຊົງຍິນດີໃນຄວາມສະງົບແຫ່ງຈິດ[໓]
ຜູ້ຊົງເຖິງຝັ່ງແຫ່ງທຳທັງປວງ[໔]

ແມ່ນເທວະດາທັງຫຼາຍກໍນອບນ້ອມພຣະສໍາພຸດທະເຈົ້າພຣະອົງນັ້ນ
ຜູ້ຊົງກ້າວລ່ວງສັງໂຍດທັງປວງໄດ້
ຊົງບັນລຸນິບພານເຊິ່ງເປັນທາງອອກຈາກປ່າຄືກິເລດ
ຜູ້ຊົງຍິນດີໃນເນກຂໍາມະ[1]
ຜູ້ລຸດພົ້ນແລ້ວ ຄືຄໍາທີ່ພົ້ນຈາກຫີນ

ພຣະອົງຜູ້ຊົງພຣະນາມວ່ານາກ ຮຸ່ງເຮືອງລ່ວງສັບພະສັດ
ຄືພູຫິມະພານທີ່ສູງກວ່າພູໜ່ວຍອື່ນ ໆ
ພຣະອົງຜູ້ຊົງພຣະນາມວ່ານາກອັນເປັນພຣະນາມຈິງ
ທີ່ຍອດຍ້ຽມກວ່າເທວະດາຜູ້ມີນາມວ່ານາກທຸກຈໍາພວກ

ຂ້າພຣະອົງຈັກປະກາດພຣະອົງຜູ້ຊົງພຣະນາມວ່ານາກ
ຍ້ອນພຣະອົງບໍ່ຊົງທໍາຄວາມຊົ່ວ
ພຣະອົງຜູ້ຊົງພຣະນາມວ່ານາກ
ຊົງມີໂສຣັດຈະແລະອະວິຫິງສາເປັນຕີນໜ້າທັງສອງ
ຊົງມີຕະບະແລະພົມມະຈັນ ເປັນຕີນຫຼັງທັງສອງ
ຊົງເປັນຄືຊ້າງໂຕປະເສີດ
ຊົງມີສັດທາເປັນງວງ ມີອຸເປກຂາເປັນງາຂາວ

ມີສະຕິເປັນຄໍ ມີປັນຍາເປັນສຽນ
ມີການສອດສ່ອງທໍາເປັນປາຍງວງ
ມີທໍາເຄື່ອງເຜົາກິເລດເປັນທ້ອງ ມີວິເວກເປັນຫາງ

ພຣະອົງຜູ້ຊົງມີຊານ ຊົງຍິນດີລົມອັດສາສະປັດສາສະ[๑]
ຊົງມີຈິດຕັ້ງໝັ້ນດີພາຍໃນ
ດໍາເນີນໄປກໍຊົງມີຈິດຕັ້ງໝັ້ນ ປະທັບຢືນກໍຊົງມີຈິດຕັ້ງໝັ້ນ
ບັນທົມກໍຊົງມີຈິດຕັ້ງໝັ້ນ ປະທັບນັ່ງກໍຊົງມີຈິດຕັ້ງໝັ້ນ
ຊົງສັງລວມແລ້ວໃນທະວານທັງປວງ
ນີ້ເປັນສົມບັດຂອງພຣະອົງຜູ້ຊົງພຣະນາມວ່ານາກ

ພຣະອົງຜູ້ຊົງພຣະນາມວ່ານາກ
ສະເຫວີຍແຕ່ສິ່ງທີ່ບໍ່ມີໂທດ ບໍ່ສະເຫວີຍສິ່ງທີ່ມີໂທດ
ໄດ້ອາຫານແລະເຄື່ອງນຸ່ງຫົ່ມແລ້ວ
ຊົງເວັ້ນການສະສົມ
ຊົງຕັດສັງໂຍດເຄື່ອງຜູກພັນນ້ອຍໃຫຍ່ທັງປວງໄດ້
ຈະສະເດັດໄປ ໃນບ່ອນໃດ? ໆ ກໍບໍ່ມີຄວາມຫ່ວງໃຍສະເດັດໄປໃນບ່ອນນັ້ນ ໆ

ດອກບົວຂາວ ມີກິ່ນຫອມ
ໜ້າອອນຊອນໃຈ ເກີດໃນນ້ຳ
ຈະເລີນໃນນ້ຳ ບໍ່ເປິເປື້ອນດ້ວຍນ້ຳ ສັນໃດ
ພຣະອົງ ກໍຄືກັນສັນນັ້ນ
ຊົງອຸບັດດີແລ້ວໃນໂລກ ເປັນພຣະພຸດທະເຈົ້າໃນໂລກ
ແຕ່ບໍ່ຕິດຢູ່ກັບໂລກ
ຄືດອກບົວຫຼວງບໍ່ປຽກນ້ຳ ສັນນັ້ນ
ໄຟກອງໃຫຍ່ລຸກເປັນແປວສະຫວ່າງສະໄຫວ
ຍ່ອມດັບຍ້ອນໝົດເຊື້ອ ສັນໃດ
ພຣະອົງກໍຄືກັນສັນນັ້ນ
ເມື່ອສັງຂານທັງຫຼາຍສະງົບລະງັບໄປແລ້ວ
ຊາວໂລກກໍຮຽກກັນວ່າຊົງນິບພານແລ້ວ
ຂໍ້ອຸປະມາທີ່ໃຫ້ຮູ້ເນື້ອຄວາມແຈ່ມແຈ້ງນີ້
ອັນວິນຍູຊົນທັງຫຼາຍສະແດງໄວ້ແລ້ວ
ພຣະອະຣະຫັນທັງຫຼາຍຜູ້ເປັນມະຫານາຄະ
ຈັກຮູ້ແຈ້ງພຣະອົງຜູ້ຊົງພຣະນາມວ່ານາກ
ທີ່ທ່ານຜູ້ເປັນນາກສະແດງໄວ້ແລ້ວ
ພຣະອົງຜູ້ຊົງພຣະນາມວ່ານາກ
ຊົງປາສະຈາກຣາຄະ ປາສະຈາກໂທສະ
ປາສະຈາກໂມຫະ ບໍ່ມີອາສະວະ
ເມື່ອຊົງລະສະຣີຣະ ຈັກເປັນຜູ້ບໍ່ມີອາສະວະ ປະຣິນິບພານ"

**ນາຄະສູດທີ ໑ ຈົບ**

## ໘. ມິຄະສາລາສູດ[๑]

## ວ່າດ້ວຍອຸປາສິກາຊື່ມິຄະສາລາ

[໔໔] ຄັ້ງນັ້ນໃນເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດແລະຈີວອນ[๔] ແລ້ວເຂົ້າໄປສູ່ບ່ອນຢູ່ຂອງມິຄະສາລາອຸປາສິກາ ນັ່ງເທິງອາສະນະທີ່ປູລາດໄວ້ ລຳດັບນັ້ນແລ ມິຄະສາລາອຸປາສິກາໄດ້ເຂົ້າໄປຫາທ່ານພຣະອານົນອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານດັ່ງນີ້ວ່າ

"ທ່ານອານົນ ທຳນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງວ່າ "ຄົນ ໔ ຄົນ ຄື ຄົນໜຶ່ງປະພຶດພົມມະຈັນ ອີກຄົນໜຶ່ງບໍ່ປະພຶດພົມມະຈັນ ເປັນຜູ້ມີຄະຕິສະເໝີຄືກັນໃນສຳປະຣາຍະພົບ" ຈະເພິ່ງຮູ້ໄດ້ແນວໃດ ທ່ານຜູ້ຈະເລີນ ບິດາຂອງຂ້ານ້ອຍຊື່ວ່າປຸຣານະ ເປັນຜູ້ປະພຶດພົມມະຈັນປະພຶດຫ່າງໄກ ງົດເວັ້ນຈາກເມຖຸນ໌ເຊິ່ງເປັນທຳຂອງຊາວບ້ານ ທ່ານເຖິງແກ່ກຳແລ້ວ ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນວ່າເປັນສະກະທາຄາມີບຸກຄົນເກີດໃນໝູ່ເທບຊັ້ນດຸສິດ

ເພື່ອນຮັກຂອງບິດາຂ້ານ້ອຍ ຊື່ວ່າອິສິທັດຕະ ເຖິງບໍ່ປະພຶດພົມມະຈັນ ແຕ່ຖື ສະທາຣະສັນໂດດ(ຍິນດີດ້ວຍພັນລະຍາຂອງຕົນ) ແມ່ນເຂົາເຖິງແກ່ກຳແລ້ວ ພຣະຜູ້ມີພຣະພາກເຈົ້າກໍຊົງພະຍາກອນວ່າເປັນສະກະທາຄາມີບຸກຄົນເກີດໃນໝູ່ເທບຊັ້ນດຸສິດ ທ່ານອານົນ ທຳນີ້ທີ່ ພຣະຜູ້ມີພຣະພາກເຈົ້າຊົງສະແດງວ່າ "ຄົນ ໔ ຄົນ ຄື ຄົນໜຶ່ງປະພຶດພົມມະຈັນ ອີກຄົນໜຶ່ງບໍ່ປະພຶດພົມມະຈັນ ເປັນຜູ້ມີຄະຕິສະເໝີຄືກັນໃນສຳປະຣາຍະພົບ" ຈະເພິ່ງຮູ້ໄດ້ແນວໃດ"

ທ່ານພຣະອານົນຕອບວ່າ "ນາງ ຂໍ້ນີ້ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນໄວ້ແລ້ວແນວນີ້ຄືກັນ"

ຄັ້ງນັ້ນແລ ທ່ານພຣະອານົນຮັບບິນທະບາດ ໃນບ່ອນຢູ່ຂອງມິຄະສາລາອຸປາສິກາແລ້ວລຸກຈາກອາສະນະຫຼີກໄປ ເມື່ອໃນເວລາຫຼັງພັດຕາຫານ ທ່ານພຣະອານົນກັບຈາກບິນທະບາດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂອກາດ ເວລາເຊົ້າ ຂ້າພຣະອົງຄອງ ອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ບ່ອນຢູ່ຂອງມິຄະສາລາອຸປາສິກາ ນັ່ງເທິງອາສະນະທີ່ ປູລາດໄວ້ ລຳດັບນັ້ນແລ ນາງໄດ້ເຂົ້າໄປຫາຂ້າພຣະອົງ ອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມຂ້າພຣະອົງວ່າ

"ທ່ານອານົນ ທຳນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງວ່າ "ຄົນ ໔ ຄົນ ຄື ຄົນໜຶ່ງປະພຶດພົມມະຈັນ ອີກຄົນໜຶ່ງບໍ່ປະພຶດພົມມະຈັນ ເປັນຜູ້ມີຄະຕິສະເໝີຄືກັນໃນສຳປະຣາຍະພົບ" ຈະເພິ່ງຮູ້ໄດ້ແນວໃດ ທ່ານຜູ້ຈະເລີນ ບິດາຂອງຂ້ານ້ອຍຊື່ປຸຣານະ ເປັນຜູ້ປະພຶດພົມມະຈັນປະພຶດຫ່າງໄກ ງົດເວັ້ນຈາກເມຖຸນເຊິ່ງເປັນທຳຂອງຊາວບ້ານ ທ່ານເຖິງແກ່ກຳແລ້ວ ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນວ່າເປັນສະກະທາຄາມີບຸກຄົນເກີດໃນໝູ່ເທບຊັ້ນດຸສິດ

ເພື່ອນຮັກຂອງບິດາຂ້ານ້ອຍ ຊື່ວ່າອິສິທັດຕະ ເຖິງບໍ່ປະພຶດພົມມະຈັນ ແຕ່ຖື ສະທາຣະສັນໂດດ ແມ່ນເຂົາເຖິງແກ່ກຳແລ້ວ ພຣະຜູ້ມີພຣະພາກເຈົ້າກໍຊົງພະຍາກອນວ່າເປັນ ສະກະທາຄາມີບຸກຄົນເກີດໃນໝູ່ເທບຊັ້ນດຸສິດ

ທ່ານອານົນ ທຳນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງວ່າ "ຄົນ ໔ ຄົນ ຄືຄົນໜຶ່ງປະພຶດພົມມະຈັນ ອີກຄົນໜຶ່ງບໍ່ປະພຶດພົມມະຈັນ ເປັນຜູ້ມີຄະຕິສະເໝີ ຄືກັນໃນສຳປະຣາຍະພົບ" ຈະເພິ່ງຮູ້ໄດ້ແນວໃດ" ເມື່ອມິຄະສາລາອຸປາສິກາກ່າວແນວນີ້ແລ້ວ ຂ້າພຣະອົງຈຶ່ງຕອບວ່າ "ນາງ ຂໍ້ນີ້ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນໄວ້ແລ້ວແນວນີ້ຄືກັນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ໃນເລື້ອງຍານເປັນເຄື່ອງກຳນົດຮູ້ອິນຊີ ແກ່ກ້າ ແລະອິນຊີອ່ອນຂອງບຸກຄົນ ໃຜກັນນໍຄື ມິຄະສາລາອຸປາສິກາຜູ້ຈ໊າ ບໍ່ສະຫຼາດ ບໍ່ຫຼັກແຫຼມ ມີປັນຍາທຶບ ແລະໃຜກັນນໍ ຄື ພຣະສຳມາສຳພຸດທະເຈົ້າຜູ້ມີວິໄສທີ່ບໍ່ມີອັນໃດຂັດຂວາງໄດ້[1]

ອານົນ ບຸກຄົນ ໖ ຈຳພວກນີ້ ມີຜາກົດຢູ່ໃນໂລກ ຄື

໑. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ງົດເວັ້ນຈາກບາບ ມີການຢູ່ຮ່ວມເປັນສຸກ ເພື່ອນພົມມະຈາຣີທັງຫຼາຍຍ່ອມຍິນດີຍິ່ງດ້ວຍການຢູ່ຮ່ວມກັນ ບຸກຄົນນັ້ນບໍ່ເຮັດກິດດ້ວຍການຟັງ ບໍ່ເຮັດກິດດ້ວຍຄວາມເປັນພະຫູສູດ ແລະບໍ່ໄດ້ແທງຕະຫຼອດດີດ້ວຍທິດຖິ ບໍ່ໄດ້ວິມຸດຕິຕາມເວລາອັນຄວນ[2] ຫຼັງຈາກຕາຍແລ້ວເຂົາຍ່ອມໄປທາງເສື່ອມ ບໍ່ໄປທາງຈະເລີນ ຍ່ອມເຖິງຄວາມເສື່ອມແນວດຽວ ບໍ່ເຖິງຄວາມຈະເລີນ

໔. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ງົດເວັ້ນຈາກບາບ ມີການຢູ່ຮ່ວມເປັນສຸກ ເພື່ອນພົມມະຈາຣີທັງຫຼາຍຍ່ອມຍິນດີຍິ່ງດ້ວຍການຢູ່ຮ່ວມກັນ ບຸກຄົນນັ້ນເຮັດກິດດ້ວຍການຟັງ ເຮັດກິດດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິ ແລະໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວເຂົາຍ່ອມໄປທາງຈະເລີນ ບໍ່ໄປທາງເສື່ອມ ຍ່ອມເຖິງຄວາມຈະເລີນແນວດຽວ ບໍ່ເຖິງຄວາມເສື່ອມ

ບຸກຄົນຜູ້ຖືປະມານ[3]ຍ່ອມຖືປະມານຂໍ້ນັ້ນວ່າ "ທຳແມ່ນຂອງບຸກຄົນນີ້ກໍຄືທຳຂອງອີກຄົນໜຶ່ງນັ້ນແລ ບັນດາບຸກຄົນ ໔ ຄົນນັ້ນ ຍ້ອນເຫດໃດ ຄົນໜຶ່ງຈຶ່ງຊົ່ວ ຄົນໜຶ່ງຈຶ່ງດີ" ແທ້ຈິງແລ້ວການຖືປະມານຂອງຜູ້ຖືປະມານເຫຼົ່ານັ້ນ ເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານ

ບັນດາບຸກຄົນ ໔ ຄົນນັ້ນ ບຸກຄົນໃດເປັນຜູ້ງົດເວັ້ນຈາກບາບ ມີການຢູ່ຮ່ວມເປັນສຸກ ເພື່ອນພົມມະຈາຣີທັງຫຼາຍຍ່ອມຍິນດີຍິ່ງດ້ວຍການຢູ່ຮ່ວມກັນ ບຸກຄົນນັ້ນເຮັດກິດດ້ວຍການຟັງ ເຮັດກິດດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິ ແລະໄດ້ວິມຸດຕິຕາມເວລາອັນຄວນ ບຸກຄົນນີ້ດີກວ່າ ແລະປະນີດກວ່າບຸກຄົນທີ່ກ່າວຂ້າງຕົ້ນນັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນີ້ຢັ່ງລົງສູ່ອະຣິຍະພູມ ໃຜນໍຈະເພິ່ງຮູ້ເຫດນັ້ນໄດ້ນອກຈາກຕະຖາຄົດ ຍ້ອນເຫດນັ້ນແລ ທ່ານທັງຫຼາຍຢ່າໄດ້ເປັນຜູ້

ມັກຖືປະມານໃນບຸກຄົນ ແລະຢ່າຖືປະມານໃນບຸກຄົນ ຍ້ອນບຸກຄົນຜູ້ຖືປະມານໃນບຸກຄົນ ຍ່ອມທຳລາຍຄຸນວິເສດຂອງຕົນ ສ່ວນເຮົາຫຼືຜູ້ຄືເຮົາເພິ່ງຖືປະມານໃນບຸກຄົນໄດ້

໓. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມັກໂກດແລະຖືໂຕ ແລະລາງເທື່ອບາງເວລາ ໂລພະທຳຍ່ອມເກີດຂຶ້ນແກ່ເຂົາ ບຸກຄົນນັ້ນບໍ່ເຮັດກິດດ້ວຍການຟັງ ບໍ່ເຮັດກິດດ້ວຍຄວາມເປັນພະຫູສູດ ບໍ່ແທງຕະຫຼອດດີດ້ວຍທິດຖິ ແລະບໍ່ໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວເຂົາຍ່ອມໄປທາງເສື່ອມ ບໍ່ໄປທາງຈະເລີນ ຍ່ອມເຖິງຄວາມເສື່ອມແນວດຽວ ບໍ່ເຖິງຄວາມຈະເລີນ

໔. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມັກໂກດແລະຖືໂຕ ແລະລາງເທື່ອບາງເວລາ ໂລພະທຳຍ່ອມເກີດຂຶ້ນແກ່ເຂົາ ບຸກຄົນນັ້ນເຮັດກິດດ້ວຍການຟັງ ເຮັດກິດ ດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິແລະໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວເຂົາຍ່ອມໄປທາງຈະເລີນ ບໍ່ໄປທາງເສື່ອມ ຍ່ອມເຖິງຄວາມຈະເລີນແນວດຽວ ບໍ່ເຖິງຄວາມເສື່ອມ

ບຸກຄົນຜູ້ຖືປະມານ ຍ່ອມຖືປະມານໃນຂໍ້ນັ້ນວ່າ ໆລໆ ສ່ວນເຮົາຫຼືຜູ້ຄືເຮົາເພິ່ງຖືປະມານໃນບຸກຄົນໄດ້

໕. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມັກໂກດແລະຖືໂຕ ແລະລາງເທື່ອບາງເວລາ ວະຈີສັງຂານ°ຍ່ອມເກີດຂຶ້ນແກ່ເຂົາ ບຸກຄົນນັ້ນບໍ່ເຮັດກິດດ້ວຍການຟັງ ບໍ່ເຮັດກິດດ້ວຍຄວາມເປັນພະຫູສູດ ບໍ່ແທງຕະຫຼອດດີດ້ວຍທິດຖິ ແລະບໍ່ໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວເຂົາຍ່ອມໄປທາງເສື່ອມ ບໍ່ໄປທາງຈະເລີນ ຍ່ອມເຖິງຄວາມເສື່ອມແນວດຽວ ບໍ່ເຖິງຄວາມຈະເລີນ

໖. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມັກໂກດແລະຖືໂຕ ແລະລາງເທື່ອບາງເວລາ ວະຈີສັງຂານຍ່ອມເກີດຂຶ້ນແກ່ເຂົາ ບຸກຄົນນັ້ນເຮັດກິດດ້ວຍການຟັງ ເຮັດກິດດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິ ແລະໄດ້ວິມຸດຕິຕາມເວລາ ອັນຄວນ ຫຼັງຈາກຕາຍແລ້ວເຂົາຍ່ອມໄປທາງຈະເລີນ ບໍ່ໄປທາງເສື່ອມ ຍ່ອມເຖິງຄວາມຈະເລີນແນວດຽວ ບໍ່ເຖິງຄວາມເສື່ອມ

ອານົນ ບຸກຄົນຜູ້ຖືປະມານຍ່ອມຖືປະມານໃນຂໍ້ນັ້ນວ່າ "ທຳແມ່ນຂອງບຸກຄົນນີ້ກໍຄືທຳຂອງອີກຄົນໜຶ່ງນັ້ນແລ ບັນດາບຸກຄົນ ໔ ຄົນນັ້ນ ຍ້ອນເຫດໃດ ຄົນໜຶ່ງ ຈຶ່ງຊົ່ວ ຄົນໜຶ່ງຈຶ່ງດີ" ແທ້ຈິງແລ້ວການຖືປະມານຂອງຜູ້ຖືປະມານເຫຼົ່ານັ້ນ ເປັນໄປເພື່ອ ບໍ່ແມ່ນປະໂຫຍດເກື້ອກູນເພື່ອທຸກຕະຫຼອດການລະນານ

ບັນດາບຸກຄົນ ໔ ຄົນນັ້ນ ບຸກຄົນໃດເປັນຜູ້ມັກໂກດແລະຖືໂຕ ລາງເທື່ອບາງເວລາວະຈີສັງຂານຍ່ອມເກີດຂຶ້ນແກ່ເຂົາ ບຸກຄົນນັ້ນເຮັດກິດດ້ວຍການຟັງ ເຮັດກິດດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິ ແລະໄດ້ວິມຸດຕິຕາມເວລາອັນຄວນ ບຸກຄົນນີ້ດີກວ່າແລະປະນີດກວ່າ

ບຸກຄົນທີ່ກ່າວຂ້າງຕົ້ນນັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນີ້ຢັ່ງລົງສູ່ອະຣິຍະພູມ ໃຜນໍຈະເພິ່ງຮູ້ເຫດນັ້ນໄດ້ ນອກຈາກຕະຖາຄົດ ຍ້ອນເຫດນັ້ນແລ ທ່ານທັງຫຼາຍຢ່າໄດ້ເປັນຜູ້ມັກຖືປະມານໃນບຸກຄົນ ແລະຢ່າຖືປະມານໃນບຸກຄົນ ຍ້ອນບຸກຄົນຜູ້ຖືປະມານໃນບຸກຄົນ ຍ່ອມທຳລາຍຄຸນວິເສດຂອງຕົນ ສ່ວນເຮົາຫຼືຜູ້ຄືເຮົາເພິ່ງຖືປະມານໃນບຸກຄົນໄດ້

ໃນເລື້ອງຍານເປັນເຄື່ອງກຳນົດຮູ້ອິນຊີແກ່ກ້າ ແລະອິນຊີອ່ອນຂອງບຸກຄົນ ໃຜກັນນໍ ຄືມິຄະສາລາອຸປາສິກາຜູ້ຈ້ຳ ບໍ່ສະຫຼາດ ບໍ່ຫຼັກແຫຼມ ມີປັນຍາທຶບ ແລະໃຜກັນນໍ ຄື ພຣະສຳມາສຳພຸດທະເຈົ້າຜູ້ມີວິໄສທີ່ບໍ່ມີອັນໃດຂັດຂວາງໄດ້

ອານົນ ບຸກຄົນ ໒ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

ບຸຣຸດຊື່ວ່າປຸຣານະເປັນຜູ້ປະກອບດ້ວຍສີນເຊັ່ນໃດ ບຸຣຸດຊື່ວ່າອິສິທັດຕະກໍເປັນຜູ້ປະກອບດ້ວຍສີນເຊັ່ນນັ້ນ ບຸຣຸດຊື່ວ່າປຸຣານະຈະໄດ້ຮູ້ແນ່ນຄະຕິຂອງບຸຣຸດຊື່ວ່າອິສິທັດຕະ ໃນໂລກນີ້ ກໍເປັນໄປບໍ່ໄດ້ ບຸຣຸດຊື່ວ່າອິສິທັດຕະເປັນຜູ້ປະກອບດ້ວຍປັນຍາເຊັ່ນໃດ ບຸຣຸດຊື່ວ່າ ປຸຣານະກໍເປັນຜູ້ປະກອບດ້ວຍປັນຍາເຊັ່ນນັ້ນ ບຸຣຸດຊື່ວ່າອິສິທັດຕະຈະໄດ້ຮູ້ແນ່ນຄະຕິຂອງບຸຣຸດຊື່ວ່າປຸຣານະໃນໂລກນີ້ກໍເປັນໄປບໍ່ໄດ້

ອານົນ ບຸກຄົນ ໘ ຄົນນີ້ແລ ເປັນຜູ້ຕ່ຳກວ່າກັນດ້ວຍອົງຄຸນຄົນລະຢ່າງ ແນວນີ້ແລ

**ມິຄະສາລາສູດທີ ໘ ຈົບ**

## ໙. ອິນະສູດ

## ວ່າດ້ວຍຄວາມເປັນໜີ້

[໔໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ “ພິກຂຸທັງຫຼາຍ ຄວາມຍາກຈົນເປັນທຸກຂອງການໂພຄີບຸກຄົນ[໑]ໃນໂລກ”

ພິກຂຸທັງຫຼາຍ ຂາບທູນວ່າ “ເປັນແນວນັ້ນ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ພິກຂຸທັງຫຼາຍ ຄົນຈົນເຂັນໃຈຍາກໄຮ້ ຍ່ອມກູ້ໜີ້ ແມ່ນການກູ້ໜີ້ກໍເປັນທຸກຂອງການໂພຄີບຸກຄົນໃນໂລກ”

“ເປັນແນວນັ້ນ ຂ້ານ້ອຍ”

"ພິກຂຸທັງຫຼາຍ ຄົນຈົນເຂັນໃຈຍາກໄຮ້ ເມື່ອກູ້ໜີ້ແລ້ວ ຍ່ອມໃຊ້ດອກເບ້ຍ ແມ່ນການໃຊ້ດອກເບ້ຍກໍເປັນທຸກຂອງການໂພຄີບຸກຄົນໃນໂລກ"

"ເປັນແນວນັ້ນ ຂ້ານ້ອຍ"

"ພິກຂຸທັງຫຼາຍ ຄົນຈົນເຂັນໃຈຍາກໄຮ້ ເມື່ອໃຊ້ດອກເບ້ຍແລ້ວ ບໍ່ໃຫ້ດອກເບ້ຍຕາມກຳນົດເວລາ ພວກເຈົ້າໜີ້ຍ່ອມນຳທວງເຂົາ ແມ່ນການນຳທວງກໍເປັນທຸກຂອງການໂພຄີບຸກຄົນໃນໂລກ"

"ເປັນແນວນັ້ນ ຂ້ານ້ອຍ"

"ພິກຂຸທັງຫຼາຍ ຄົນຈົນເຂັນໃຈຍາກໄຮ້ ເມື່ອຖືກເຈົ້າໜີ້ທວງ ຍັງບໍ່ໃຫ້ ພວກເຈົ້າໜີ້ຍ່ອມຕິດຕາມ ແມ່ນການຖືກຕິດຕາມກໍເປັນທຸກຂອງການໂພຄີບຸກຄົນໃນໂລກ"

"ເປັນແນວນັ້ນ ຂ້ານ້ອຍ"

"ພິກຂຸທັງຫຼາຍ ຄົນຈົນເຂັນໃຈຍາກໄຮ້ ຖືກເຈົ້າໜີ້ຕິດຕາມທັນ ຍັງບໍ່ທັນໃຫ້ ພວກເຈົ້າໜີ້ຍ່ອມຄຸມຂັງເຂົາ ແມ່ນການຖືກຄຸມຂັງກໍເປັນທຸກຂອງການໂພຄີບຸກຄົນໃນໂລກ"

"ເປັນແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ແມ່ນຄວາມຍາກຈົນກໍເປັນທຸກຂອງ ການໂພຄີບຸກຄົນໃນໂລກ ແມ່ນການກູ້ໜີ້ກໍເປັນທຸກຂອງການໂພຄີບຸກຄົນໃນໂລກ ແມ່ນການໃຊ້ດອກເບ້ຍກໍເປັນທຸກຂອງການໂພຄີບຸກຄົນໃນໂລກ ແມ່ນການຖືກທວງກໍເປັນທຸກຂອງການໂພຄີບຸກຄົນໃນໂລກ ແມ່ນການຖືກຕິດຕາມກໍເປັນທຸກຂອງການໂພຄີບຸກຄົນໃນໂລກ ແມ່ນການຖືກຄຸມຂັງກໍເປັນທຸກຂອງການໂພຄີບຸກຄົນໃນໂລກ ດ້ວຍປະການດັ່ງນີ້ ສັນໃດ

ພິກຂຸທັງຫຼາຍ ບຸກຄົນລາງຄົນ ກໍຄືກັນສັນນັ້ນແລ ບໍ່ມີສັດທາໃນກຸສົນທຳ ບໍ່ມີຫິຣິໃນກຸສົນທຳ ບໍ່ມີໂອດຕັບປະໃນກຸສົນທຳ ບໍ່ມີວິຣິຍະໃນກຸສົນທຳ ບໍ່ມີປັນຍາໃນກຸສົນທຳ ບຸກຄົນນີ້ເຮົາກໍຮຽກວ່າ ເປັນຄົນຈົນເຂັນໃຈຍາກໄຮ້ໃນອະຣິຍະວິໄນ

ພິກຂຸທັງຫຼາຍ ບຸກຄົນນັ້ນ ໆແລຜູ້ເປັນຄົນຈົນເຂັນໃຈຍາກໄຮ້ ເມື່ອບໍ່ມີສັດທາໃນກຸສົນທຳ ເມື່ອບໍ່ມີຫິຣິໃນກຸສົນທຳ ເມື່ອບໍ່ມີໂອດຕັບປະໃນກຸສົນທຳ ເມື່ອບໍ່ມີວິຣິຍະ ໃນກຸສົນທຳ ເມື່ອບໍ່ມີປັນຍາໃນກຸສົນທຳ ຍ່ອມປະພຶດກາຍທຸດຈະຣິດ ປະພຶດວະຈີທຸດຈະຣິດ ປະພຶດມະໂນທຸດຈະຣິດ

ເຮົາກ່າວວ່າການປະພຶດທຸດຈະຣິດແບບນີ້ຂອງເຂົາ ເປັນການກູ້ໜີ້

ຍ້ອນການປົກປິດກາຍທຸດຈະຣິດເປັນເຫດ ເຂົາຈຶ່ງຕັ້ງຄວາມປາຖະໜາອັນຊົ່ວວ່າ "ຂໍຊົນເຫຼົ່າອື່ນຢ່າຮູ້ເຮົາເລີຍ" ດຳຣິວ່າ "ຂໍຊົນເຫຼົ່າອື່ນຢ່າຮູ້ເຮົາເລີຍ" ເວົ້າວ່າ "ຂໍຊົນເຫຼົ່າອື່ນຢ່າຮູ້ເຮົາເລີຍ" ພະຍາຍາມດ້ວຍກາຍວ່າ "ຂໍຊົນເຫຼົ່າອື່ນຢ່າຮູ້ເຮົາເລີຍ"

ຍ້ອນການປົກປິດວະຈີທຸດຈະຣິດເປັນເຫດ ເຂົາຈຶ່ງຕັ້ງຄວາມປາຖະໜາອັນຊົ່ວ ຯລຯ

ຍ້ອນການປົກປິດມະໂນທຸດຈະຣິດເປັນເຫດ ເຂົາຈຶ່ງຕັ້ງຄວາມປາຖະໜາຊົ່ວວ່າ "ຂໍຊົນເຫຼົ່າອື່ນຢ່າຮູ້ເຮົາເລີຍ" ດຳຣິວ່າ "ຂໍຊົນເຫຼົ່າອື່ນຢ່າຮູ້ເຮົາເລີຍ" ເວົ້າວ່າ "ຂໍຊົນເຫຼົ່າອື່ນຢ່າຮູ້ເຮົາເລີຍ" ພະຍາຍາມດ້ວຍກາຍວ່າ "ຂໍຊົນເຫຼົ່າອື່ນຢ່າຮູ້ເຮົາເລີຍ"

ເຮົາກ່າວວ່າການປົກປິດທຸດຈະຣິດເປັນເຫດນັ້ນ ເປັນການໃຊ້ດອກເບ້ຍ

ເພື່ອນພົມມະຈາຣີຜູ້ມີສິນເປັນທີ່ຮັກໄດ້ກ່າວກັບບຸກຄົນນັ້ນແບບນີ້ວ່າ "ຜູ້ມີອາຍຸນີ້ເປັນຜູ້ເຮັດແບບນີ້ ເປັນຜູ້ປະພຶດແບບນີ້"

ເຮົາກ່າວວ່າການຖືກວ່າກ່າວແບບນີ້ຂອງເຂົາ ເປັນການທວງໜີ້

ບາບອະກຸສົນວິຕົກທີ່ປະກອບດ້ວຍວິບປະຕິສານ (ຄວາມຮ້ອນໃຈ) ຍ່ອມຄອບງຳບຸກຄົນນັ້ນຜູ້ໄປສູ່ປ່າ ໄປສູ່ເຫງົ້າໄມ້ ຫຼືໄປສູ່ເຮືອນວ່າງ

ເຮົາກ່າວວ່າການຖືກບາບອະກຸສົນວິຕົກຄອບງຳແບບນີ້ຂອງເຂົາ ເປັນການຖືກຕິດຕາມ

ພິກຂຸທັງຫຼາຍ ບຸກຄົນນັ້ນ ໆແລ ເປັນຄົນຈົນເຂັນໃຈຍາກໄຮ້ ເມື່ອປະພຶດ ກາຍທຸດຈະຣິດ ປະພຶດວະຈີທຸດຈະຣິດ ແລະປະພຶດມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຍ່ອມຖືກ ຄຸມຂັງໃນຄຸກຄືນະຮົກ ຫຼືໃນຄຸກຄືກຳເນີດສັດເດຍຣັດສານ

ພິກຂຸທັງຫຼາຍ ເຮົາບໍ່ເຫັນຄຸກອື່ນແມ່ນແບບໜຶ່ງ ທີ່ດຸຮ້າຍແບບນີ້ ເປັນທຸກແບບນີ້ ແລະເຮັດອັນຕະລາຍແກ່ການບັນລຸນິບພານເຊິ່ງເປັນແດນກະເສມຈາກໂຍຄະອັນປະເສີດ ແບບນີ້ ຄືຄຸກຄືນະຮົກ ຫຼືຄຸກຄືກຳເນີດສັດເດຍຣັດສານນີ້ເລີຍ

ຄວາມຍາກຈົນ ແລະການກູ້ໜີ້
ເຮົາຮຽກວ່າເປັນທຸກໃນໂລກ
ຄົນຈົນເມື່ອກູ້ໜີ້ໃຊ້ສອຍຢູ່ ຍ່ອມເດືອດຮ້ອນ
ຍ້ອນການບໍ່ໃຊ້ຄືນນັ້ນ ພວກເຈົ້າໜີ້ຈຶ່ງຕິດຕາມເຂົາ

ເຂົາຍ່ອມເຂົ້າເຖິງການຖືກຄຸມຂັງ
ການຖືກຄຸມຂັງນັ້ນແລ ເປັນທຸກຂອງໝູ່ຊົນຜູ້ປາຖະໜາການ

ໃນອະຣິຍະວິໄນ ກໍເຊັ່ນດຽວກັນ
ຜູ້ໃດບໍ່ມີສັດທາ ບໍ່ມີຫິຣິ
ບໍ່ມີໂອດຕັບປະ ພອກພູນບາບກໍາ
ທໍາກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ
ປາຖະໜາວ່າ "ຊົນທັງຫຼາຍຢ່າຮູ້ຈັກເຮົາ"

ຜູ້ນັ້ນຍ່ອມດີ້ນຣົນພອກພູນບາບກໍາ
ທັງທາງກາຍ ທາງວາຈາ ແລະທາງໃຈ ໃນບ່ອນນັ້ນໆ ເລື້ອຍ ໆ
ເຂົາຜູ້ມີບາບກໍາ ມີປັນຍາຊາມ
ຮູ້ການເຮັດຊົ່ວຂອງຕົນຢູ່ ເປັນຄົນຈົນ
ກູ້ໜີ້ໃຊ້ສອຍຢູ່ ຍ່ອມເດືອດຮ້ອນ

ລໍາດັບນັ້ນ ຄວາມດໍາຣິເກີດແຕ່ວິບປະຕິສານກໍ່ທຸກທາງໃຈ
ຍ່ອມຕິດຕາມເຂົາທັງໃນບ້ານຫຼືໃນປ່າ
ເຂົາຜູ້ມີບາບກໍາ ມີປັນຍາຊາມ ຮູ້ການເຮັດຊົ່ວຂອງຕົນຢູ່
ຍ່ອມໄປສູ່ກໍາເນີດສັດເດຍຣັດສານຫຼືຖືກຄຸມຂັງໃນນະຣົກ

ສ່ວນນັກປາດຜູ້ເຮັດຈິດໃຫ້ເຫຼື້ອມໃສ
ໃຫ້ທານດ້ວຍໂພຄະຊັບທັງຫຼາຍທີ່ໄດ້ມາໂດຍຖືກຕ້ອງຕາມທໍາ
ຍ່ອມພົ້ນຈາກການຄຸມຂັງທີ່ເປັນທຸກນັ້ນ
ເຂົາເປັນຜູ້ຖືໄຊຊະນະໃນປະໂຫຍດທັງສອງ
ຂອງຜູ້ມີສັດທາຢູ່ຄອງເຮືອນ
ຄື ປະໂຫຍດເກື້ອກູນໃນພົບນີ້ ແລະສຸກໃນພົບໜ້າ
ບຸນຄືການບໍລິຈາກຂອງຄະລືຫັດນັ້ນ ຍ່ອມເພີ່ມພູນ

ອັນໜຶ່ງ ຜູ້ໃດມີສັດທາຕັ້ງໝັ້ນໃນອະຣິຍະວິໄນ
ມີຈິດປະກອບດ້ວຍຫິຣິ ມີໂອດຕັບປະ
ມີປັນຍາ ແລະສັງລວມໃນສິນ
ເຮົາຮຽກຜູ້ນັ້ນແລວ່າ "ຜູ້ມີຊີວິດເປັນສຸກໃນອະຣິຍະວິໄນ"

ເຂົາໄດ້ສຸກທີ່ບໍ່ອີງອາມິດ[១]
ອຸເປກຂາ[໒]ຕັ້ງໝັ້ນ ລະນິວອນ ໕ ປະການໄດ້
ຜາຣົບຄວາມພຽນເປັນປະຈໍາ
ບັນລຸຊານທັງຫຼາຍມີເອກັກຄະຕາຈິດຜາກົດ

ມີປັນຍາຮັກສາຕົນ ມີສະຕິ ຮູ້ແຈ້ງເຫດນັ້ນຕາມຄວາມເປັນຈິງ
ໃນທຳເປັນທີ່ສິ້ນສຸດໄປແຫ່ງສັງໂຍດທັງປວງ[๖]
ຈິດຍ່ອມລຸດພົ້ນໂດຍຖືກຕ້ອງ ຍ້ອນບໍ່ຖືໝັ້ນໂດຍເດັດຂາດ
ຫາກວ່າເຂົາມີຈິດລຸດພົ້ນໂດຍຖືກຕ້ອງ
ເປັນຜູ້ໝັ້ນຄົງໃນທຳເປັນທີ່ສິ້ນສຸດໄປແຫ່ງພະອະສັງໂຍດ
ມີຍານຫຍັ່ງຮູ້ວ່າ "ວິມຸດຕິຂອງເຮົາບໍ່ກຳເຣິບ[๔]"
ຍານນັ້ນແລ ເປັນຍານຊັ້ນເລີດ
ຍານນັ້ນແລ ເປັນສຸກອັນປະເສີດ
ຍານນັ້ນບໍ່ມີຄວາມໂສກ ປາສະຈາກທຸລີ
ມີຄວາມກະເສມສູງສຸດກວ່າຄວາມບໍ່ມີໜີ້

**ອິນະສູດທີ ໖ ຈົບ**

## ໔. ມະຫາຈຸນທະສູດ

### ວ່າດ້ວຍພຣະມະຫາຈຸນທະ[๑]

[໔໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະມະຫາຈຸນທະຢູ່ ນິຄົມຊື່ວ່າສັນຊາດ ໃນແຄວ້ນເຈຕີ ສະໄໝ ນັ້ນແລ ທ່ານພຣະມະຫາຈຸນທະຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະມະຫາຈຸນທະຈຶ່ງໄດ້ກ່າວເລື້ອງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ໃນພຣະທຳວິໄນນີ້ ພວກພິກຂຸຜູ້ປະກອບທຳ[๒]ຮຸກຮານພວກພິກຂຸຜູ້ເພ່ງຊານວ່າ "ພິກຂຸເຫຼົ່ານີ້ ເພ່ງ ພິນິດ ຢຶດ ໝ່ວງຊານຢູ່ວ່າ "ພວກເຮົາເປັນຜູ້ເພ່ງຊານ ພວກເຮົາເປັນຜູ້ເພ່ງຊານ" ພິກຂຸເຫຼົ່ານີ້ເພ່ງຊານເຮັດຫຍັງ ເພ່ງຊານເພື່ອອັນໃດ ເພ່ງຊານຍ້ອນເຫດໃດ"

ພວກພິກຂຸຜູ້ປະກອບທຳ ບໍ່ເຫຼື້ອມໃສໃນພວກພິກຂຸຜູ້ເພ່ງຊານນັ້ນ ແລະພວກພິກຂຸຜູ້ເພ່ງຊານກໍບໍ່ເຫຼື້ອມໃສໃນພວກພິກຂຸຜູ້ປະກອບທຳນັ້ນ ທັງບໍ່ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

ຜູ້ມີອາຍຸທັງຫຼາຍ ພວກພິກຂຸຜູ້ເພ່ງຊານຮຸກຮານພວກພິກຂຸຜູ້ປະກອບທຳວ່າ "ພິກຂຸເຫຼົ່ານີ້ຄິດວ່າ "ພວກເຮົາເປັນຜູ້ປະກອບທຳ ພວກເຮົາເປັນຜູ້ປະກອບທຳ" ເປັນຜູ້ຟຸ້ງຊ່ານ ຖືໂຕ

ໂລເລ ປາກຮ້າຍ ເວົ້າພ່ຳເພື້ອ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ ພິກຂຸເຫຼົ່ານີ້ປະກອບທຳເຮັດຫຍັງ ປະກອບທຳເພື່ອອັນໃດ ປະກອບທຳຍ້ອນເຫດໃດ”

ພວກພິກຂຸຜູ້ເພ່ງຊານບໍ່ເຫຼື້ອມໃສໃນພວກພິກຂຸຜູ້ປະກອບທຳນັ້ນ ແລະພວກພິກຂຸຜູ້ປະກອບທຳກໍບໍ່ເຫຼື້ອມໃສໃນພວກພິກຂຸຜູ້ເພ່ງຊານນັ້ນ ທັງບໍ່ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກ ແກ່ເທວະດາ ແລະມະນຸດທັງຫຼາຍ

ພວກພິກຂຸຜູ້ປະກອບທຳສັນເສີນພວກພິກຂຸຜູ້ປະກອບທຳທີ່ນັ້ນ ບໍ່ສັນເສີນພວກພິກຂຸຜູ້ເພ່ງຊານ ພວກພິກຂຸຜູ້ປະກອບທຳບໍ່ເຫຼື້ອມໃສໃນພວກພິກຂຸຜູ້ເພ່ງຊານນັ້ນ ແລະພວກພິກຂຸຜູ້ເພ່ງຊານກໍບໍ່ເຫຼື້ອມໃສໃນພວກພິກຂຸຜູ້ປະກອບທຳນັ້ນ ທັງບໍ່ປະຕິບັດເພື່ອ ເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

ພວກພິກຂຸຜູ້ເພ່ງຊານສັນເສີນພວກພິກຂຸຜູ້ເພ່ງຊານທີ່ນັ້ນ ບໍ່ສັນເສີນພວກພິກຂຸ ຜູ້ປະກອບທຳ ແລະພວກພິກຂຸຜູ້ເພ່ງຊານບໍ່ເຫຼື້ອມໃສໃນພວກພິກຂຸຜູ້ປະກອບທຳນັ້ນ ແລະພວກພິກຂຸຜູ້ປະກອບທຳກໍບໍ່ເຫຼື້ອມໃສໃນພວກພິກຂຸຜູ້ເພ່ງຊານນັ້ນ ທັງບໍ່ປະຕິບັດເພື່ອ ເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

ຜູ້ມີອາຍຸທັງຫຼາຍ ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ “ພວກເຮົາທັງຫຼາຍເມື່ອເປັນຜູ້ປະກອບທຳ ຈັກສັນເສີນພວກພິກຂຸຜູ້ເພ່ງຊານ” ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນຜູ້ຖືກຕ້ອງອະມະຕະທາດດ້ວຍກາຍ ເປັນອັດສະຣິຍະບຸກຄົນ ຫາໄດ້ຍາກໃນໂລກ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ “ເຮົາທັງຫຼາຍເມື່ອເປັນ ຜູ້ເພ່ງຊານ ຈັກສັນເສີນພວກພິກຂຸຜູ້ປະກອບທຳ” ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນຜູ້ຮູ້ແຈ້ງ ເຫັນອັດຖະບົດອັນເລິກເຊິ່ງໆດ້ວຍ ປັນຍານັ້ນ ເປັນອັຈສະຣິຍະບຸກຄົນຫາໄດ້ຍາກໃນໂລກ

**ມະຫາຈຸນທະສູດທີ ໔ ຈົບ**

# ໕. ປະຖົມສັນທິດຖິກະສູດ

## ວ່າດ້ວຍທຳທີ່ຜູ້ປະຕິບັດເພິ່ງເຫັນແຈ້ງດ້ວຍຕົນເອງສູດທີ ໑

[໔໗] ຄັ້ງນັ້ນ ໂມລິຍະສີວະກະປະຣິພາຊົກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນບ່ອນຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ "ທຳອັນຜູ້ປະຕິບັດເພິ່ງເຫັນແຈ້ງດ້ວຍຕົນເອງ ທຳອັນຜູ້ປະຕິບັດເພິ່ງເຫັນແຈ້ງດ້ວຍຕົນເອງ" ຂ້າແດ່ ພຣະອົງຜູ້ຈະເລີນ ທຳອັນຜູ້ປະຕິບັດເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ[໑] ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ຍ່ອມມີດ້ວຍເຫດພຽງໃດນໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສີວະກະ ຖ້າເປັນແນວນັ້ນ ເຮົາຈັກຍ້ອນຖາມທ່ານໃນເລື້ອງນີ້ ທ່ານເພິ່ງພະຍາກອນເລື້ອງນັ້ນຕາມສົມຄວນແກ່ທ່ານ ສີວະກະ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ທ່ານຮູ້ແຈ້ງໂລພະທີ່ມີຢູ່ພາຍໃນວ່າ "ໂລພະມີຢູ່ພາຍໃນເຮົາ" ຮູ້ແຈ້ງໂລພະທີ່ບໍ່ມີຢູ່ພາຍໃນວ່າ "ໂລພະບໍ່ມີຢູ່ພາຍໃນເຮົາ" ບໍ"

ສີວະກະປະຣິພາຊົກຂາບທູນວ່າ "ຮູ້ແຈ້ງ ຂ້ານ້ອຍ"

"ສີວະກະ ການທີ່ທ່ານຮູ້ແຈ້ງໂລພະທີ່ມີຢູ່ພາຍໃນວ່າ "ໂລພະມີຢູ່ພາຍໃນເຮົາ" ຮູ້ແຈ້ງໂລພະທີ່ບໍ່ມີຢູ່ພາຍໃນວ່າ "ໂລພະບໍ່ມີຢູ່ພາຍໃນເຮົາ" ແນວນີ້ແລຄືທຳອັນຜູ້ປະຕິບັດເພິ່ງເຫັນແຈ້ງດ້ວຍຕົນເອງ ຯລຯ

ສີວະກະ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ທ່ານຮູ້ແຈ້ງໂທສະທີ່ມີຢູ່ພາຍໃນ ຯລຯ ໂມຫະທີ່ມີຢູ່ພາຍໃນ ຯລຯ ທຳທີ່ປະກອບດ້ວຍໂລພະທີ່ມີຢູ່ພາຍໃນ ຯລຯ ທຳທີ່ປະກອບດ້ວຍໂທສະທີ່ມີຢູ່ພາຍໃນ ຯລຯ ຮູ້ແຈ້ງທຳທີ່ປະກອບດ້ວຍໂມຫະທີ່ມີຢູ່ໃນພາຍໃນວ່າ "ທຳທີ່ປະກອບດ້ວຍໂມຫະທີ່ມີຢູ່ພາຍໃນເຮົາ" ຮູ້ແຈ້ງທຳທີ່ປະກອບດ້ວຍໂມຫະທີ່ບໍ່ມີຢູ່ພາຍໃນວ່າ "ທຳທີ່ປະກອບດ້ວຍໂມຫະບໍ່ມີຢູ່ພາຍໃນເຮົາ" ບໍ"

ສີວະກະປະຣິພາຊົກຂາບທູນວ່າ "ຮູ້ແຈ້ງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສີວະກະ ການທີ່ທ່ານຮູ້ແຈ້ງທຳທີ່ປະກອບດ້ວຍໂມຫະທີ່ມີຢູ່ພາຍໃນວ່າ "ທຳທີ່ປະກອບດ້ວຍໂມຫະມີຢູ່ພາຍໃນເຮົາ" ຮູ້ແຈ້ງທຳທີ່ປະກອບດ້ວຍໂມຫະທີ່ບໍ່ມີຢູ່ພາຍໃນວ່າ "ທຳທີ່ປະກອບດ້ວຍໂມຫະບໍ່ມີຢູ່ພາຍໃນເຮົາ" ແນວນີ້ແລ ຄືທຳອັນຜູ້ປະຕິບັດ

ເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ"

ສີວະກະປະຣິພາຊິກຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດເຈນນ່ອນຫຼາຍ ຯລຯ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈໍາຂ້າພຣະອົງວ່າເປັນອຸປາສິກາຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ປະຖົມສັນທິດຖິກະສູດທີ ໕ ຈົບ**

## ໖. ທຸຕິຍະສັນທິດຖິກະສູດ

## ວ່າດ້ວຍທໍາທີ່ຜູ້ປະຕິບັດເພິ່ງເຫັນແຈ້ງດ້ວຍຕົນເອງສູດທີ ໒

[໔໗] ຄັ້ງນັ້ນ ພາມຄົນໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນບ່ອນຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ທ່ານພຣະໂຄດົມ ພຣະອົງຕັດວ່າ "ທໍາອັນຜູ້ປະຕິບັດເພິ່ງເຫັນແຈ້ງດ້ວຍຕົນເອງ ທໍາອັນຜູ້ປະຕິບັດເພິ່ງເຫັນແຈ້ງດ້ວຍຕົນເອງ" ຂ້າແດ່ທ່ານພຣະໂຄດົມ ທໍາອັນຜູ້ປະຕິບັດເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ຍ່ອມມີດ້ວຍເຫດພຽງທໍ່ໃດນໍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ຖ້າເປັນແນວນັ້ນ ເຮົາຈັກຍ້ອນຖາມທ່ານໃນເລື້ອງນີ້ ທ່ານເພິ່ງພະຍາກອນເລື້ອງນັ້ນຕາມສົມຄວນແກ່ທ່ານ ພາມ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ທ່ານຮູ້ແຈ້ງຣາຄະທີ່ມີຢູ່ພາຍໃນວ່າ "ຣາຄະມີຢູ່ພາຍໃນເຮົາ" ຮູ້ແຈ້ງຣາຄະທີ່ບໍ່ມີຢູ່ພາຍໃນວ່າ "ຣາຄະບໍ່ມີຢູ່ພາຍໃນເຮົາ" ບໍ"

ພາມຂາບທູນວ່າ "ຮູ້ແຈ້ງ ຂ້ານ້ອຍ"

"ພາມ ການທີ່ທ່ານຮູ້ແຈ້ງຣາຄະທີ່ມີຢູ່ພາຍໃນວ່າ "ຣາຄະມີຢູ່ພາຍໃນເຮົາ" ຮູ້ແຈ້ງຣາຄະທີ່ບໍ່ມີຢູ່ພາຍໃນວ່າ "ຣາຄະບໍ່ມີຢູ່ພາຍໃນເຮົາ" ແນວນີ້ແລຄື ທໍາອັນຜູ້ປະຕິບັດ ເພິ່ງເຫັນແຈ້ງດ້ວຍຕົນເອງ ຯລຯ ພາມ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ທ່ານຮູ້ແຈ້ງໂທສະທີ່ມີຢູ່ພາຍໃນ ຯລຯ ໂມຫະທີ່ມີຢູ່ພາຍໃນ ຯລຯ ເຫດເຄື່ອງປະທຸດສະຮ້າຍທາງກາຍທີ່ມີຢູ່ ພາຍໃນ ຯລຯ ເຫດເຄື່ອງປະທຸດສະຮ້າຍທາງວາຈາທີ່ມີຢູ່ພາຍໃນ ຯລຯ ຮູ້ແຈ້ງເຫດເຄື່ອງປະທຸດສະຮ້າຍທາງ

ໃຈທີ່ມີຢູ່ພາຍໃນວ່າ "ເຫດເຄື່ອງປະທຸດສະຮ້າຍທາງໃຈມີຢູ່ພາຍໃນເຮົາ" ຮູ້ແຈ້ງເຫດເຄື່ອງປະທຸດສະຮ້າຍທາງໃຈທີ່ບໍ່ມີຢູ່ພາຍໃນວ່າ "ເຫດເຄື່ອງປະທຸດສະຮ້າຍທາງໃຈບໍ່ມີຢູ່ພາຍໃນເຮົາ" ບໍ"

ພາມຂາບທູນວ່າ "ຮູ້ແຈ້ງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ການທີ່ທ່ານຮູ້ແຈ້ງເຫດເຄື່ອງປະທຸດສະຮ້າຍ ທາງໃຈທີ່ມີຢູ່ພາຍໃນວ່າ "ເຫດເຄື່ອງປະທຸດສະຮ້າຍທາງໃຈມີຢູ່ພາຍໃນເຮົາ" ຮູ້ແຈ້ງເຫດເຄື່ອງປະທຸດສະຮ້າຍທາງໃຈທີ່ບໍ່ມີຢູ່ພາຍໃນວ່າ "ເຫດເຄື່ອງປະທຸດສະຮ້າຍທາງໃຈບໍ່ມີຢູ່ພາຍໃນເຮົາ" ແບບນີ້ແລຄື ທຳອັນຜູ້ປະຕິບັດເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ"

ພາມຂາບທູນວ່າ "ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ໆລໆ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ທຸຕິຍະສັນທິດຖິກະສູດທີ ໖ ຈົບ**

## ໗. ເຂມະສູດ

## ວ່າດ້ວຍພຣະເຂມະ

[໔໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ທ່ານພຣະເຂມະແລະທ່ານພຣະສຸມະນະຢູ່ທີ່ປ່າອັນທະວັນ ເຂດນະຄອນສາວັດຖີ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວນັ່ງລົງບ່ອນທີ່ສົມຄວນ ທ່ານພຣະເຂມະໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸໃດເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດ[໑]ສຳເລັດແລ້ວ ປົງພາຣະ[໒]ໄດ້ແລ້ວ ບັນລຸປະໂຫຍດຕົນ[໓]ໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ[໔] ພິກຂຸນັ້ນບໍ່ມີຄວາມຄິດແບບນີ້ວ່າ "ຜູ້ທີ່ປະເສີດກວ່າເຮົາມີຢູ່" ວ່າ "ຜູ້ທີ່ສະເໝີກັບເຮົາມີຢູ່" ຫຼືວ່າ "ຜູ້ທີ່ຕ່ຳຕ້ອຍກວ່າເຮົາມີຢູ່"

ເມື່ອທ່ານພຣະເຂມະຂາບທູນແລ້ວແບບນີ້ ພຣະສາດສະດາຊົງພໍພຣະທະໄທ ລຳດັບນັ້ນທ່ານພຣະເຂມະຮູ້ວ່າ "ພຣະສາດສະດາຊົງພໍພຣະທະໄທເຮົາ" ຈຶ່ງລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຫຼີກໄປ

ຄັ້ງນັ້ນແລ ເມື່ອທ່ານພຣະເຂມະຫຼີກໄປບໍ່ດົນ ທ່ານພຣະສຸມະນະໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃດເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ພິກຂຸນັ້ນບໍ່ມີຄວາມຄິດແນວນີ້ວ່າ "ຜູ້ທີ່ປະເສີດກວ່າເຮົາບໍ່ມີ" ວ່າ "ຜູ້ທີ່ສະເໝີກັບເຮົາບໍ່ມີ" ຫຼືວ່າ "ຜູ້ທີ່ດ້ອຍກວ່າເຮົາບໍ່ມີ"

ເມື່ອທ່ານພຣະສຸມະນະຂາບທູນແນວນີ້ແລ້ວ ພຣະສາດສະດາຊົງພໍພຣະທະໄທ ລຳດັບນັ້ນ ທ່ານພຣະສຸມະນະຮູ້ວ່າ "ພຣະສາດສະດາຊົງພໍພຣະທະໄທເຮົາ" ຈຶ່ງລຸກຈາກອາສະນະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຫຼີກໄປ

ຄັ້ງນັ້ນແລ ເມື່ອທ່ານພຣະເຂມະແລະທ່ານພຣະສຸມະນະຫຼີກໄປບໍ່ດົນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ກຸນລະບຸດທັງຫຼາຍ ພະຍາກອນອະຣະຫັດຕະຜົນແນວນີ້ ກ່າວແຕ່ເນື້ອຄວາມ ແລະບໍ່ນ້ອມຕົນເຂົ້າໄປຫາ ສ່ວນໂມຄະບຸຣຸດ ລາງພວກໃນທຳວິໄນນີ້ ຄືຈະແຈ່ມໃສກ່າວພະຍາກອນອະຣະຫັດຕະຜົນຢູ່ ເຂົາເຫຼົ່ານັ້ນຍ່ອມເຖິງຄວາມຄັບແຄ້ນໃນພາຍຫຼັງ

ພຣະຂີນາສົບທັງຫຼາຍ
ບໍ່ນ້ອມຕົນເຂົ້າໄປປຽບທຽບກັບບຸກຄົນທີ່ດີກວ່າ
ບໍ່ນ້ອມຕົນເຂົ້າໄປປຽບທຽບກັບບຸກຄົນທີ່ຕ່ຳຕ້ອຍກວ່າ
ບໍ່ນ້ອມຕົນເຂົ້າໄປປຽບທຽບກັບບຸກຄົນທີ່ສະເໝີກັນ
ມີຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ
ເປັນຜູ້ລຸດພົ້ນຈາກສັງໂຍດທັງປວງທ່ຽວໄປຢູ່

**ເຂມະສູດທີ ໗ ຈົບ**

## ໘. ອິນທະຣິຍະສັງວະຣະສູດ

## ວ່າດ້ວຍອິນຊີສັງວອນ[១]

[໕໐] ພິກຂຸທັງຫຼາຍ ເມື່ອອິນຊີສັງວອນບໍ່ມີ ສີນຂອງບຸກຄົນຜູ້ມີອິນຊີສັງວອນວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສີນບໍ່ມີ ສຳມາສະມາທິຂອງບຸກຄົນຜູ້ມີສີນວິບັດ ຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະ[២]ຂອງບຸກຄົນຜູ້ມີສຳມາສະມາທິວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີ ນິບພິທາແລະ ວິຣາຄະ[៣]ຂອງບຸກຄົນຜູ້ມີຍະຖາພູຕະຍານທັດສະນະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອນິບພິທາ ແລະ

ວິຣາຄະບໍ່ມີ ວິມຸດຕິຍານທັດສະນະ“ຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ

ເມື່ອອິນຊີສັງວອນບໍ່ມີ ສີນຂອງບຸກຄົນຜູ້ມີອິນຊີສັງວອນວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ฯลฯ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບວິບັດແລ້ວ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນຍ່ອມບໍ່ເຖິງຄວາມບໍລິບູນ ສັນນັ້ນ

ເມື່ອອິນຊີສັງວອນມີ ສີນຂອງບຸກຄົນຜູ້ສົມບູນດ້ວຍອິນຊີສັງວອນ ຊື່ວ່າມີເຫດສົມບູນ ເມື່ອສີນມີ ສຳມາສະມາທິຂອງບຸກຄົນຜູ້ສົມບູນດ້ວຍສີນ ຊື່ວ່າມີເຫດສົມບູນ ເມື່ອສຳມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິ ຊື່ວ່າມີເຫດສົມບູນ ເມື່ອຍະຖາພູຕະຍານ ທັດສະນະມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ສົມບູນດ້ວຍຍະຖາພູຕະຍານທັດສະນະ ຊື່ວ່າມີເຫດສົມບູນ ເມື່ອນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະວິຣາຄະ ຊື່ວ່າມີເຫດສົມບູນ

ພິກຂຸທັງຫຼາຍ ເມື່ອອິນຊີສັງວອນມີ ສີນຂອງບຸກຄົນຜູ້ສົມບູນດ້ວຍອິນຊີສັງວອນ ຊື່ວ່າມີເຫດສົມບູນ ฯลฯ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະ ວິຣາຄະ ຊື່ວ່າມີເຫດສົມບູນ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບສົມບູນ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນຍ່ອມເຖິງຄວາມສົມບູນ

**ອິນທະຣິຍະສັງວະຣະສູດທີ ໓ ຈົບ**

## ໗. ອານັນທະສູດ

## ວ່າດ້ວຍຄຸນນະທຳຂອງພຣະອານົນ

[໔໑] ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນບ່ອນຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະສາຣີບຸດດັ່ງນີ້ວ່າ

“ທ່ານສາຣີບຸດ ພິກຂຸໄດ້ຟັງທຳທີ່ຍັງບໍ່ເຄີຍຟັງ ທຳທີ່ພິກຂຸນັ້ນເຄີຍຟັງແລ້ວບໍ່ເຖິງຄວາມເລີເລືອນ ທຳທີ່ພິກຂຸນັ້ນເຄີຍສຳຜັດດ້ວຍໃຈມາກ່ອນ ຜາກົດແກ່ທ່ານ ແລະພິກຂຸນັ້ນຍ່ອມຮູ້ທຳທີ່ຍັງບໍ່ເຄີຍຮູ້ດ້ວຍເຫດທໍ່ໃດນໍ”

ທ່ານພຣະສາຣີບຸດກ່າວວ່າ "ທ່ານອານົນ ເປັນພະຫູສູດ ສະເພາະທ່ານອານົນທໍ່ນັ້ນ ທີ່ຈະອະທິບາຍເນື້ອຄວາມແຫ່ງພາສິດນັ້ນໃຫ້ແຈ່ມແຈ້ງໄດ້"

ທ່ານພຣະອານົນກ່າວວ່າ "ທ່ານສາຣີບຸດ ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້ານ້ອຍຈັກກ່າວ" ທ່ານພຣະສາຣີບຸດຮັບຄໍາແລ້ວ ທ່ານພຣະອານົນຈຶ່ງໄດ້ກ່າວເລື້ອງນີ້ວ່າ

"ທ່ານສາຣີບຸດ ພິກຂຸໃນພຣະທໍາວິໄນນີ້ຮຽນທໍາຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທໍາ ເວທັນລະ ທ່ານສະແດງທໍາ ຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ບອກທໍາຕາມທີ່ຕົນໄດ້ ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ສາທະຍາຍທໍາຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ ນຶກຕາມ ຕອງຕາມ ເພ່ງຕາມດ້ວຍໃຈເຊິ່ງທໍາຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ຢູ່ຈໍາພັນສາໃນອາວາດທີ່ມີພິກຂຸເຖຣະຜູ້ເປັນພະຫູສູດ ຮຽນຈົບຄໍາພີ ຊົງທໍາ ຊົງວິໄນ ຊົງມາຕິກາຢູ່ ເຂົ້າໄປຫາພິກຂຸເຖຣະເຫຼົ່ານັ້ນໃນເວລາທີ່ສົມຄວນ ແລ້ວສອບຖາມ ໄຕ່ຖາມວ່າ "ພຣະພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຣະພຸດທະພົດນີ້ເປັນແນວໃດ?" ພິກຂຸຜູ້ເຖຣະເຫຼົ່ານັ້ນ ຍ່ອມເປີດເຜີຍຂໍ້ທີ່ຍັງບໍ່ເປີດເຜີຍ ເຮັດຂໍ້ທີ່ເຂົ້າໃຈຍາກໃຫ້ເຂົ້າໃຈງ່າຍ ແລະບັນເທົາຄວາມສົງໄສໃນທໍາທີ່ໜ້າສົງໄສຫຼາຍແນວແກ່ພິກຂຸນັ້ນ ທ່ານສາຣີບຸດ ພິກຂຸໄດ້ຟັງທໍາທີ່ຍັງບໍ່ເຄີຍຟັງ ທໍາທີ່ພິກຂຸນັ້ນເຄີຍຟັງແລ້ວ ຍ່ອມບໍ່ເຖິງຄວາມເລີເລືອນ ທໍາທີ່ພິກຂຸນັ້ນເຄີຍສໍາຜັດດ້ວຍໃຈມາກ່ອນ ຜາກົດແກ່ທ່ານ ແລະພິກຂຸນັ້ນ ຮູ້ທໍາທີ່ຍັງບໍ່ເຄີຍຮູ້ແຈ້ງດ້ວຍເຫດທໍ່ນີ້ແລ"

ທ່ານພຣະສາຣີບຸດກ່າວວ່າ "ຜູ້ມີອາຍຸ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ທ່ານອານົນ ໄດ້ກ່າວໄວ້ດີແລ້ວ ພວກຂ້ານ້ອຍຈະຊົງຈໍາທ່ານອານົນວ່າເປັນຜູ້ປະກອບດ້ວຍທໍາ ໖ ປະການນີ້ ຍ້ອນທ່ານອານົນ

໑. ຮຽນທໍາ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທໍາ ເວທັນລະ
໒. ສະແດງທໍາຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ
໓. ບອກທໍາຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ
໔. ສາທະຍາຍທໍາຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ

໕. ນຶກຕາມ ຕອງຕາມ ເພ່ງຕາມດ້ວຍໃຈເຊິ່ງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ

໖. ຢູ່ຈຳພັນສາໃນອາວາດທີ່ມີພິກຂຸເຖຣະຜູ້ເປັນພະຫູສູດ ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາ ເຂົ້າໄປຫາພິກຂຸເຖຣະເຫຼົ່ານັ້ນຕາມການອັນຄວນ ແລ້ວສອບຖາມໄຕ່ຖາມວ່າ "ພຣະພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຣະພຸດທະພົດນີ້ເປັນແນວໃດ?" ພິກຂຸເຫຼົ່ານັ້ນ ຍ່ອມເປີດເຜີຍຂໍ້ທີ່ຍັງບໍ່ເປີດເຜີຍ ເຮັດຂໍ້ທີ່ເຂົ້າໃຈຍາກໃຫ້ເຂົ້າໃຈໂດຍງ່າຍ ແລະບັນເທົາຄວາມສົງໄສໃນທຳທີ່ໜ້າສົງໄສຫຼາຍແນວແກ່ພິກຂຸນັ້ນ"

**ອານັນທະສູດທີ ໙ ຈົບ**

## ໑໐. ຂັດຕິຍະສູດ

### ວ່າດ້ວຍຄວາມປະສົງຂອງກະສັດ

[໕໘] ຄັ້ງນັ້ນ ຊານຸດໂສນີພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນບ່ອນຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ທ່ານພຣະໂຄດົມ ກະສັດທັງຫຼາຍມີຄວາມປະສົງອັນໃດ ນິຍົມອັນໃດ ໝັ້ນໃຈອັນໃດ ຕ້ອງການອັນໃດ ມີອັນໃດເປັນບ່ອນສຸດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ກະສັດທັງຫຼາຍມີຄວາມປະສົງໂພຄະຊັບ ນິຍົມປັນຍາ ໝັ້ນໃຈໃນກຳລັງທະຫານ ຕ້ອງການໄດ້ເປັນເຈົ້າແຜ່ນດິນ ມີຄວາມເປັນໃຫຍ່ເປັນບ່ອນສຸດ"

ຊານຸດໂສນີພາມທູນຖາມວ່າ "ຂ້າແດ່ ທ່ານພຣະໂຄດົມ ພາມທັງຫຼາຍມີຄວາມປະສົງອັນໃດ ນິຍົມອັນໃດ ໝັ້ນໃຈອັນໃດ ຕ້ອງການອັນໃດ ມີອັນໃດເປັນບ່ອນສຸດ"

"ພາມທັງຫຼາຍມີຄວາມປະສົງໂພຄະຊັບ ນິຍົມປັນຍາ ໝັ້ນໃຈໃນມົນ ຕ້ອງການບູຊາຍັນ ມີພົມມະໂລກເປັນບ່ອນສຸດ"

"ຂ້າແດ່ ທ່ານພຣະໂຄດົມ ຄະຫະບໍດີທັງຫຼາຍມີຄວາມປະສົງອັນໃດ ນິຍົມອັນໃດ ໝັ້ນໃຈອັນໃດ ຕ້ອງການອັນໃດ ມີອັນໃດເປັນບ່ອນສຸດ"

"ຄະຫະບໍດີທັງຫຼາຍມີຄວາມປະສົງໂພຄະຊັບ ນິຍົມປັນຍາ ໝັ້ນໃຈໃນສິລະປະຕ້ອງການວຽກງານ ມີວຽກງານທີ່ເຮັດສຳເລັດແລ້ວເປັນບ່ອນສຸດ"

"ຂ້າແດ່ ທ່ານພຣະໂຄດົມ ແມ່ຍິງທັງຫຼາຍມີຄວາມປະສົງອັນໃດ ນິຍົມອັນໃດ ໝັ້ນໃຈອັນໃດ ຕ້ອງການອັນໃດ ມີອັນໃດເປັນບ່ອນສຸດ"

"ແມ່ຍິງທັງຫຼາຍມີຄວາມປະສົງບຸຣຸດ ນິຍົມເຄື່ອງປະດັບ ໝັ້ນໃຈໃນບຸດ ບໍ່ຕ້ອງການຍິງອື່ນຮ່ວມສາມີ ມີຄວາມເປັນໃຫຍ່ໃນເຮືອນເປັນບ່ອນສຸດ"

"ຂ້າແດ່ ທ່ານພຣະໂຄດົມ ໂຈນທັງຫຼາຍມີຄວາມປະສົງອັນໃດ ນິຍົມອັນໃດ ໝັ້ນໃຈອັນໃດ ຕ້ອງການອັນໃດ ມີອັນໃດເປັນບ່ອນສຸດ"

"ພາມ ໂຈນທັງຫຼາຍມີຄວາມປະສົງການລັກຊັບຜູ້ອື່ນ ນິຍົມບ່ອນລີ້ລັບ ໝັ້ນໃຈໃນອາວຸດຕ້ອງການທີ່ມືດ ມີຜູ້ອື່ນບໍ່ເຫັນເປັນບ່ອນສຸດ"

"ຂ້າແດ່ ທ່ານພຣະໂຄດົມ ສະມະນະທັງຫຼາຍມີຄວາມປະສົງອັນໃດ ນິຍົມອັນໃດ ໝັ້ນໃຈອັນໃດ ຕ້ອງການອັນໃດ ມີອັນໃດເປັນບ່ອນສຸດ"

"ສະມະນະທັງຫຼາຍມີຄວາມປະສົງຂັນຕິແລະໂສຣັດຈະ ນິຍົມປັນຍາ ໝັ້ນໃຈໃນສີນຕ້ອງການຄວາມບໍ່ມີກິເລດເຄື່ອງກັງວົນ ມີນິບພານເປັນບ່ອນສຸດ"

ຊານຸດໂສນີພາມຂາບທູນວ່າ "ຂ້າແດ່ທ່ານພຣະໂຄດົມ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດທ່ານພຣະໂຄດົມຊົງຮູ້ຄວາມປະສົງ ຄວາມນິຍົມ ຄວາມຫມັ້ນໃຈ ຄວາມຕ້ອງການ ແລະສິ່ງອັນເປັນບ່ອນສຸດ ແມ່ນແຫ່ງກະສັດທັງຫຼາຍ ໆລໆ ແມ່ນແຫ່ງພາມທັງຫຼາຍ ໆລໆ ແມ່ນແຫ່ງຄະຫະບໍດີທັງຫຼາຍ ໆລໆ ແມ່ນແຫ່ງແມ່ຍິງທັງຫຼາຍ ໆລໆ ແມ່ນແຫ່ງໂຈນທັງຫຼາຍ ໆລໆ ທ່ານພຣະໂຄດົມຊົງຮູ້ຄວາມປະສົງ ຄວາມນິຍົມ ຄວາມຫມັ້ນໃຈ ຄວາມຕ້ອງການແລະສິ່ງອັນເປັນບ່ອນສຸດແມ່ນແຫ່ງສະມະນະທັງຫຼາຍ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມ ຊັດເຈນມ່ວນຫຼາຍ ໆລໆ ຂໍທ່ານພຣະໂຄດົມຈົ່ງຊົງຈຳ ຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ຂັດຕິຍະສູດທີ ໑໐ ຈົບ**

## ໑໑. ອັບປະມາທະສູດ

## ວ່າດ້ວຍຄວາມບໍ່ຜະໝາດ

[໔໖] ຄັ້ງນັ້ນ ພາມຄົນໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນບ່ອນຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ທ່ານພຣະໂຄດົມ ທຳແນວໜຶ່ງທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມຢຶດຖື ໄວ້ໄດ້ເຊິ່ງປະໂຫຍດທັງສອງ ຄື ປະໂຫຍດໃນພົບນີ້ ແລະປະໂຫຍດໃນພົບໜ້າ ມີຢູ່ບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ທຳແນວໜຶ່ງທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍ ແລ້ວ ຍ່ອມຢຶດຖືໄວ້ໄດ້ເຊິ່ງປະໂຫຍດທັງສອງ ຄື ປະໂຫຍດໃນພົບນີ້ ແລະປະໂຫຍດໃນພົບໜ້າ ມີຢູ່"

ພາມທູນຖາມວ່າ "ຂ້າແດ່ທ່ານພຣະໂຄດົມ ກໍທຳແນວໜຶ່ງທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍ ແລ້ວ ຍ່ອມຢຶດຖືໄວ້ໄດ້ເຊິ່ງປະໂຫຍດທັງສອງ ຄື ປະໂຫຍດໃນພົບນີ້ ແລະປະໂຫຍດໃນພົບໜ້າ ເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ທຳແນວໜຶ່ງຄືຄວາມບໍ່ຜະໝາດ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢຶດຖືໄວ້ໄດ້ເຊິ່ງປະໂຫຍດທັງສອງ ຄື ປະໂຫຍດໃນພົບນີ້ ແລະປະ ໂຫຍດໃນພົບໜ້າ

ປຽບຄື ຮອຍຕີນຊະນິດໃດຂອງສັດທັງຫຼາຍຜູ້ສັນຈອນໄປເທິງແຜ່ນດິນ ຮອຍຕີນເຫຼົ່ານັ້ນ ທັງໝົດຍ່ອມເຖິງຄວາມລວມລົງໃນຮ້ອຍຕີນຊ້າງ ຮອຍຕີນຊ້າງ ຊາວໂລກກ່າວວ່າເປັນເລີດກວ່າ ຮອຍຕີນເຫຼົ່ານັ້ນ ຍ້ອນຮອຍຕີນຊ້າງເປັນຮອຍຕີນໃຫຍ່ ສັນໃດ

ທຳແນວໜຶ່ງຄືຄວາມບໍ່ຜະໝາດທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມຢຶດຖືໄວ້ໄດ້ເຊິ່ງ ປະໂຫຍດທັງສອງ ຄື ປະໂຫຍດໃນພົບນີ້ ແລະປະໂຫຍດໃນພົບໜ້າ ກໍສັນນັ້ນ ຄືກັນ

ປຽບຄື ກອນຊະນິດໃດຊະນິດໜຶ່ງແຫ່ງເຮືອນຍອດ ກອນເຫຼົ່ານັ້ນທັງໝົດຍ່ອມອຽງນ້ອມ ລວມເຂົ້າຫາຍອດເຮືອນ ຍອດເຮືອນ ຊາວໂລກກ່າວວ່າເປັນເລີດກວ່າກອນ ເຫຼົ່ານັ້ນ ສັນໃດ

ທຳແນວໜຶ່ງຄືຄວາມບໍ່ຜະໝາດທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ฯລฯ ກໍຄືກັນສັນນັ້ນ

ປຽບຄື ບຸກຄົນຜູ້ກ່ຽວຫຍ້າ ກ່ຽວຫຍ້າແລ້ວກໍຈັບຢູ່ຍອດກໍາຈັດລົງຟາດໄປ ເຄາະໄປ ສັນໃດ ທຳແນວໜຶ່ງຄືຄວາມບໍ່ຜະໝາດທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ฯລฯ ກໍຄືກັນສັນນັ້ນ

ປຽບຄື ເມື່ອພົ້ວໝາກມ່ວງຖືກຕັດທີ່ຂວັ້ນ ໝາກມ່ວງໜ່ວຍໃດໜ່ວຍໜຶ່ງທີ່ຕິດຢູ່ກັບຂວັ້ນ ໝາກມ່ວງເຫຼົ່ານັ້ນທັງໝົດຍ່ອມເປັນຂອງຕິດໄປກັບຂວັ້ນ ສັນໃດ ທຳແນວໜຶ່ງຄືຄວາມບໍ່ຜະໝາດ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ฯລฯ ກໍສັນນັ້ນ ຄືກັນ

ປຽບຄື ພຣະຣາຊາຜູ້ປົກຄອງປະເທດນ້ອຍ ໆ ພຣະອົງໃດພຣະອົງໜຶ່ງ ພຣະຣາຊາເຫຼົ່າ ນັ້ນທັງໝົດ ຍ່ອມເປັນຜູ້ຂຶ້ນກົງຕໍ່ພຣະເຈົ້າຈັກກະພັດ ພຣະເຈົ້າຈັກກະພັດ ຊາວໂລກກ່າວວ່າເປັນ

ເລີດກວ່າພຣະຣາຊາເຫຼົ່ານັ້ນ ສັນໃດ ທຳແນວໜຶ່ງຄືຄວາມບໍ່ຜະໝາດ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ໆລໆ ກໍສັນນັ້ນ ຄືກັນ

ປຽບຄື ແສງສະຫວ່າງຊະນິດໃດຊະນິດໜຶ່ງແຫ່ງດວງດາວ ແສງສະຫວ່າງເຫຼົ່ານັ້ນທັງໝົດບໍ່ເຖິງສ່ວນທີສິບຫົກແຫ່ງແສງສະຫວ່າງຂອງດວງຈັນ ແສງສະຫວ່າງຂອງດວງຈັນ ຊາວໂລກກ່າວວ່າເປັນເລີດກວ່າແສງສະຫວ່າງແຫ່ງດວງດາວເຫຼົ່ານັ້ນ ສັນໃດ ທຳແນວໜຶ່ງ ຄື ຄວາມບໍ່ຜະໝາດທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມຍຶດຖືໄວ້ໄດ້ເຊິ່ງປະໂຫຍດທັງສອງ ຄື ປະໂຫຍດໃນພົບນີ້ ແລະປະໂຫຍດໃນພົບໜ້າ ກໍຄືກັນສັນນັ້ນ

ພາມ ທຳແນວໜຶ່ງຄືຄວາມບໍ່ຜະໝາດທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມຍຶດຖືໄວ້ໄດ້ເຊິ່ງປະໂຫຍດທັງສອງຄື ປະໂຫຍດໃນພົບນີ້ ແລະປະໂຫຍດໃນພົບໜ້າ"

ພາມຂາບທູນວ່າ "ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມ ຊັດເຈນມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມ ຊັດເຈນມ່ວນຫຼາຍ ໆລໆ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ອັບປະມາທະສູດທີ ໑໑ ຈົບ**

## ໑໘. ທຳມິກະສູດ

### ວ່າດ້ວຍທ່ານພຣະທຳມິກະ

[໕໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພູຄິດຊະກູດ[๑] ເຂດນະຄອນຣາດຊະຄື ສະໄໝນັ້ນ ທ່ານພຣະທຳມິກະເປັນເຈົ້າອາວາດ ຢູ່ໃນອາວາດ ໆ ແຫ່ງ ໃນຊາດພູມຊົນນະບົດ ທັງໝົດ ຮູ້ວ່າ ທ່ານພຣະທຳມິກະດ່າ ກ່າວໂທດ ບຽດບຽນ ສຽບແທງ ສຽດສີພວກພິກຂຸອາຄັນຕຸກະດ້ວຍວາຈາ ແລະພິກຂຸອາຄັນຕຸກະເຫຼົ່ານັ້ນເມື່ອຖືກທ່ານພຣະທຳມິກະດ່າ ກ່າວໂທດ ບຽດບຽນ ສຽບແທງ ສຽດສີດ້ວຍວາຈາ ຈຶ່ງຫຼີກໄປ ບໍ່ຢູ່ ລະຖິ້ມອາວາດ

ຄັ້ງນັ້ນ ພວກອຸປາສົກແລະອຸປາສິກາຊາວຊາດພູມຊົນນະບົດມີຄວາມຄິດດັ່ງນີ້ວ່າ "ພວກເຮົາ ໄດ້ບຳລຸງພິກຂຸສົງດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ແຕ່ພວກພິກຂຸອາຄັນຕຸກະກໍໜີໄປ ບໍ່ຢູ່ ລະຖິ້ມອາວາດ ອັນໃດນໍເປັນເຫດປັດໄຈ ໃຫ້ພວກພິກຂຸອາຄັນຕຸກະຫຼີກໄປ ບໍ່ຢູ່ ລະຖິ້ມອາວາດ"

ຕໍ່ມາ ພວກອຸປາສົກແລະອຸປາສິກາຊາວຊາດພູມຊິນນະບົດຄິດກັນວ່າ "ທ່ານພຣະທຳມິກະນີ້ເອງ ດ່າ ກ່າວໂທດ ບຽດບຽນ ສຽບແທງ ສຽດສີພິກຂຸອາຄັນຕຸກະດ້ວຍວາຈາ ແລະພິກຂຸອາຄັນຕຸກະເຫຼົ່ານັ້ນເມື່ອຖືກທ່ານພຣະທຳມິກະດ່າ ກ່າວໂທດ ບຽດບຽນ ສຽບແທງ ສຽດສີດ້ວຍວາຈາ ຈຶ່ງຫຼີກໄປ ບໍ່ຢູ່ ລະຖິ້ມອາວາດ ທາງທີ່ດີພວກເຮົາເພິ່ງຊ່ອຍກັນຂັບໄລ່ທ່ານ ພຣະທຳມິກະໃຫ້ໜີໄປ" ຈຶ່ງເຂົ້າໄປຫາທ່ານພຣະທຳມິກະຮອດບ່ອນຢູ່ ໄດ້ກ່າວກັບທ່ານພຣະທຳມິກະດັ່ງນີ້ວ່າ "ຂ້າແດ່ທ່ານຜູ້ຈະເລີນ ຂໍທ່ານພຣະທຳມິກະຈົ່ງຫຼີກໄປຈາກອາວາດນີ້ ທ່ານບໍ່ຄວນຢູ່ໃນອາວາດນີ້"

ພາຍຫຼັງຕໍ່ມາ ທ່ານພຣະທຳມິກະກໍໄດ້ຈາກອາວາດນັ້ນໄປສູ່ອາວາດອື່ນ ໄດ້ຂ່າວວ່າແມ່ນທີ່ອາວາດນັ້ນ ທ່ານພຣະທຳມິກະກໍດ່າ ກ່າວໂທດ ບຽດບຽນ ສຽບແທງ ສຽດສີພວກພິກຂຸອາຄັນຕຸກະດ້ວຍວາຈາ ແລະພິກຂຸອາຄັນຕຸກະເຫຼົ່ານັ້ນເມື່ອຖືກທ່ານພຣະທຳມິກະດ່າ ກ່າວໂທດ ບຽດບຽນ ສຽບແທງ ສຽດສີດ້ວຍວາຈາ ຫຼີກໄປ ບໍ່ຢູ່ ລະຖິ້ມອາວາດ

ຄັ້ງນັ້ນ ພວກອຸປາສົກແລະອຸປາສິກາຊາວຊາດພູມຊິນນະບົດມີຄວາມຄິດດັ່ງນີ້ວ່າ "ພວກເຮົາ ໄດ້ບຳລຸງພິກຂຸສົງດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ແຕ່ພວກພິກຂຸອາຄັນຕຸກະກໍໜີໄປ ບໍ່ຢູ່ ລະຖິ້ມອາວາດ ອັນໃດນໍເປັນເຫດປັດໄຈໃຫ້ພວກພິກຂຸອາຄັນຕຸກະຫຼີກໄປ ບໍ່ຢູ່ ລະຖິ້ມອາວາດ"

ພວກອຸປາສົກແລະອຸປາສິກາຊາວຊາດພູມຊິນນະບົດຄິດກັນວ່າ "ທ່ານພຣະທຳມິກະນີ້ເອງ ດ່າ ກ່າວໂທດ ບຽດບຽນ ສຽບແທງ ສຽດສີພວກພິກຂຸອາຄັນຕຸກະດ້ວຍວາຈາ ແລະພິກຂຸອາຄັນຕຸກະເຫຼົ່ານັ້ນເມື່ອຖືກທ່ານພຣະທຳມິກະດ່າ ກ່າວໂທດ ບຽດບຽນ ສຽບແທງ ສຽດສີດ້ວຍວາຈາ ຈຶ່ງຫຼີກໄປ ບໍ່ຢູ່ ລະຖິ້ມອາວາດ ທາງທີ່ດີ ພວກເຮົາເພິ່ງຊ່ອຍກັນຂັບໄລ່ທ່ານ ພຣະທຳມິກະໃຫ້ໜີໄປ" ຈຶ່ງເຂົ້າໄປຫາທ່ານພຣະທຳມິກະຮອດບ່ອນຢູ່ ແລ້ວໄດ້ກ່າວກັບທ່ານພຣະທຳມິກະດັ່ງນີ້ວ່າ "ຂ້າແດ່ທ່ານຜູ້ຈະເລີນ ຂໍທ່ານພຣະທຳມິກະຈົ່ງຫຼີກໄປຈາກອາວາດນີ້ ທ່ານບໍ່ຄວນຢູ່ໃນອາວາດນີ້"

ພາຍຫຼັງຕໍ່ມາ ທ່ານພຣະທຳມິກະກໍໄດ້ຈາກອາວາດແມ່ນນັ້ນໄປສູ່ອາວາດອື່ນ ໄດ້ຂ່າວວ່າແມ່ນທີ່ອາວາດນັ້ນ ທ່ານພຣະທຳມິກະກໍດ່າ ກ່າວໂທດ ບຽດບຽນ ສຽບແທງ ສຽດສີພວກພິກຂຸອາຄັນຕຸກະດ້ວຍວາຈາ ແລະພິກຂຸອາຄັນຕຸກະເຫຼົ່ານັ້ນ ເມື່ອຖືກທ່ານພຣະທຳມິກະດ່າ ກ່າວໂທດ ບຽດບຽນ ສຽບແທງ ສຽດສີດ້ວຍວາຈາ ກໍໜີໄປ ບໍ່ຢູ່ ລະຖິ້ມອາວາດ

ຄັ້ງນັ້ນ ພວກອຸປາສົກແລະອຸປາສິກາຊາວຊາດພູມຊິນນະບົດມີຄວາມຄິດດັ່ງນີ້ວ່າ "ພວກເຮົາ ໄດ້ບຳລຸງພິກຂຸສົງດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍ

ຣິຂານ ແຕ່ພວກພິກຂຸອາຄັນຕຸກະຫຼີກໄປ ບໍ່ຢູ່ ລະຖິ້ມອາວາດ ອັນໃດນໍເປັນເຫດປັດໄຈໃຫ້ພວກພິກຂຸອາຄັນຕຸກະຫຼີກໄປ ບໍ່ຢູ່ ລະຖິ້ມອາວາດ”

ຕໍ່ມາ ພວກອຸປາສົກແລະອຸປາສິກາຊາວຊາດພູມຊົນນະບົດຄິດກັນວ່າ “ຢລຢ ທາງທີ່ດີພວກເຮົາເພິ່ງຊ່ອຍກັນຂັບໄລ່ທ່ານພຣະທຳມິກະໃຫ້ຫຼີກໄປຈາກອາວາດທັງ ໆ ແຫ່ງ ໃນຊາດພູມຊົນນະບົດທັງໝົດ” ຈຶ່ງເຂົ້າໄປຫາພຣະທຳມິກະຮອດບ່ອນຢູ່ແລ້ວໄດ້ກ່າວກັບທ່ານພຣະທຳມິກະດັ່ງນີ້ວ່າ “ຂ້າແດ່ທ່ານຜູ້ຈະເລີນ ຂໍທ່ານພຣະທຳມິກະຈົ່ງຫຼີກໄປຈາກອາວາດທັງ ໆ ແຫ່ງ ໃນຊາດພູມທັງໝົດ”

ຄັ້ງນັ້ນ ທ່ານພຣະທຳມິກະກໍໄດ້ມີຄວາມຄິດດັ່ງນີ້ວ່າ “ເຮົາຖືກພວກອຸປາສົກແລະອຸປາສິກາຊາວຊາດພູມຊົນນະບົດຂັບໄລ່ອອກຈາກອາວາດທັງ ໆ ແຫ່ງໃນຊາດພູມຊົນນະບົດທັງໝົດ ບັດນີ້ເຮົາຈັກໄປຢູ່ໃສນໍ” ຄັ້ງນັ້ນ ທ່ານພຣະທຳມິກະກໍໄດ້ມີຄວາມຄິດວ່າ “ທາງທີ່ດີ ເຮົາຄວນຈະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່”

ລຳດັບນັ້ນ ທ່ານພຣະທຳມິກະຖືບາດແລະຈີວອນຫຼີກໄປທາງນະຄອນຣາດຊະຄຶ ໄປເຖິງນະຄອນຣາດຊະຄຶແລະພູຄິດຊະກູດໂດຍລຳດັບ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດດັ່ງນີ້ວ່າ “ພາມທຳມິກະ ເຊີນເທີ້ນ ທ່ານມາຈາກໄສນໍ”

ທ່ານພຣະທຳມິກະຂາບທູນວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຖືກພວກອຸປາສົກແລະອຸປາສິກາຊາວຊາດພູມຊົນນະບົດຂັບໄລ່ອອກຈາກອາວາດທັງ ໆ ແຫ່ງໃນຊາດພູມຊົນນະບົດທັງໝົດ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ພາມທຳມິກະ ຈະມີປະໂຫຍດອັນໃດແກ່ທ່ານດ້ວຍການຢູ່ໃນຊາດພູມຊົນນະບົດນີ້ ຄວນແລ້ວທີ່ທ່ານຖືກຂັບໄລ່ໃຫ້ອອກຈາກອາວາດນັ້ນ ໆ ແລ້ວມາໃນສຳນັກຂອງເຮົາ ເລື້ອງເຄີຍມີມາແລ້ວ ພວກພໍ່ຄ້າທາງທະເລ ຈັບນົກທີ່ຄົ້ນຫາຝັ່ງແລ້ວ ອອກເຮືອເດີນທາງໄປສູ່ສະມຸດ ເມື່ອແລ່ນເຮືອໄປບໍ່ເຫັນຝັ່ງ ພວກເຂົາກໍປ່ອຍນົກຄົ້ນຫາຝັ່ງ ມັນບິນໄປທາງທິດຕາເວັນອອກ ບິນໄປທາງທິດຕາເວັນຕົກ ບິນໄປທາງທິດເໜືອ ບິນໄປທາງທິດໃຕ້ ບິນຂຶ້ນສູງບິນໄປທາງທິດສຽງ ຖ້າມັນເຫັນຝັ່ງຢູ່ໃກ້ ກໍບິນເຂົ້າໄປຫາຝັ່ງທັນທີ ແຕ່ຖ້າມັນບໍ່ເຫັນຝັ່ງຢູ່ໃກ້ ມັນກໍຈະກັບມາຍັງເຮືອນັ້ນ ສັນໃດ ພາມທຳມິກະ ທ່ານຖືກຂັບໄລ່ໃຫ້ອອກຈາກອາວາດນັ້ນ ໆ ແລ້ວມາຍັງສຳນັກຂອງເຮົາກໍຄືກັນສັນນັ້ນ

ເລື້ອງເຄີຍມີມາແລ້ວ ຕົ້ນໄຮໄທຍ່ຊື່ສຸປະຕິດຖະຂອງພຣະເຈົ້າໂກຣັບພະຍະມີ ໕ ງ່າ ມີຮົ່ມເງົາເຢັນ ໜ້າອອນຊອນໃຈ ກໍຕົ້ນໄຮໃຫຍ່ຊື່ສຸປະຕິດຖະ ມີກິ່ງກ້ານແຜ່ໄປເຖິງ ໑໔ ໂຍດ ມີ

ຮາກແຜ່ໄປໄດ້ ໕ ໂຍດ ມີໝາກໃຫຍ່ຄືກະທະທຸງເຂົ້າສານໄດ້ອາລະທະກະໜຶ່ງ ມີໝາກແຊບ ຄື ຮັງເຜີ້ງນ້ອຍ ເຊິ່ງບໍ່ມີໂທດ ພຣະຣາຊາສະເຫວີຍໝາກໄຮໃຫຍ່ຊື່ສຸປະຕິດຖະງ່າໜຶ່ງພ້ອມກັບນາງ ສະໜົມ ໝູ່ທະຫານບໍຣິໂພກງ່າໜຶ່ງ ຊາວນິຄົມແລະຊາວຊົນນະບົດບໍຣິໂພກງ່າໜຶ່ງ ສະມະນະ ພາມບໍຣິໂພກງ່າໜຶ່ງ ເນື້ອແລະນົກກິນງ່າໜຶ່ງ ບໍ່ມີໃຜຫວງແຫນໝາກຂອງຕົ້ນໄຮໃຫຍ່ຊື່ສຸປະຕິດ ຖະໄວ້ ແລະບໍ່ມີໃຜ ໆ ຍາດແຍ່ງ ໝາກຂອງກັນແລະກັນ ຕໍ່ມາບຸຣຸດຄົນໜຶ່ງບໍຣິໂພກໝາກ ຂອງຕົ້ນໄຮໃຫຍ່ຊື່ສຸປະຕິດຖະພໍແກ່ຄວາມຕ້ອງການແລ້ວຫັກງ່າຫຼີກໄປ

ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນໄຮໃຫຍ່ຊື່ສຸປະຕິດຖະມີຄວາມຄິດດັ່ງນີ້ວ່າ "ທ່ານ ຜູ້ ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດນໍ ຄົນຊົ່ວນີ້ບໍຣິໂພກໝາກຂອງຕົ້ນໄຮໃຫຍ່ຊື່ ສຸປະຕິດ ຖະຈົນພໍແກ່ຄວາມຕ້ອງການແລ້ວຫັກງ່າຫຼີກໄປ ເຮັດແນວໃດ ຕົ້ນໄຮໃຫຍ່ຊື່ສຸປະຕິດຖະ ຈຶ່ງຈະ ບໍ່ເປັນໝາກຕໍ່ໄປ" ຫຼັງຈາກນັ້ນ ຕົ້ນໄຮໃຫຍ່ຊື່ສຸປະຕິດຖະບໍ່ເປັນໝາກອີກຕໍ່ໄປ

ເມື່ອຕໍ່ມາ ພຣະເຈົ້າໂກຣັບພະຍະສະເດັດເຂົ້າໄປຫາທ້າວສັກກະຈອມເທບຮອດບ່ອນຢູ່ໄດ້ ທູນທ້າວສັກກະວ່າ "ຂໍເດຊະ ທ່ານຜູນິຣະທຸກ ພຣະອົງເພິ່ງຮູ້ເທີ້ນວ່າ ຕົ້ນໄຮໃຫຍ່ຊື່ ສຸປະຕິດຖະ ບໍ່ເປັນ ໝາກ" ບັດນັ້ນທ້າວສັກກະຈອມເທບຊົງບັນດານໃຫ້ມີລົມຝົນຢ່າງແຮງພັດກົ່ນຕົ້ນໄຮໃຫຍ່ ຊື່ສຸປະຕິດຖະລົ້ມລົງ ເຮັດໃຫ້ມີຮາກຂຶ້ນເບື້ອງເທິງດ້ວຍລິດ ລຳດັບນັ້ນ ເທວະດາຜູ້ສິງສະຖິດຢູ່ທີ່ ຕົ້ນໄຮໃຫຍ່ຊື່ສຸປະ ຕິດຖະເປັນທຸກ ເສຍໃຈ ໄດ້ຢືນຮ້ອງໄຫ້ນ້ຳຕານອງໜ້າຢູ່ບ່ອນທີ່ສົມຄວນ

ພາຍຫຼັງ ທ້າວສັກກະຈອມເທບເຂົ້າໄປຫາເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນໄຮໃຫຍ່ຊື່ສຸປະຕິດ ຖະ ຮອດບ່ອນຢູ່ແລ້ວຖາມວ່າ "ເທວະດາ ເປັນຫຍັງນໍທ່ານຈຶ່ງເປັນທຸກ ເສຍໃຈ ຢືນຮ້ອງໄຫ້ນ້ຳ ຕານອງໜ້າຢູ່ບ່ອນທີ່ສົມຄວນ"

ເທວະດານັ້ນທູນວ່າ "ຂ້າແດ່ພຣະອົງຜູນິຣະທຸກ ຍ້ອນລົມຝົນຢ່າງແຮງພັດກົ່ນບ່ອນຢູ່ ຂອງຂ້າພຣະອົງລົ້ມລົງ ເຮັດໃຫ້ມີຮາກຂຶ້ນເບື້ອງເທິງ ຂ້ານ້ອຍ"

"ເທວະດາ ກໍເມື່ອທ່ານດຳລົງຢູ່ໃນຣຸກຂະທຳ (ທຳທີ່ເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນໄມ້ເພິ່ງ ປະພຶດ) ແລ້ວ ລົມຝົນຢ່າງແຮງໄດ້ພັດມາກົ່ນບ່ອນຢູ່ຂອງທ່ານລົ້ມລົງ ເຮັດໃຫ້ມີຮາກຂຶ້ນເບື້ອງ ເທິງໄດ້ແນວໃດ"

ເທວະດາທູນຖາມວ່າ "ຂ້າແດ່ພຣະອົງຜູນິຣະທຸກ ເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນໄມ້ດຳ ລົງຢູ່ໃນຣຸກຂະທຳເປັນແນວໃດ?"

"ເທວະດາ ໝູ່ຄົນໃນໂລກນີ້ ຜູ້ຕ້ອງການຮາກຍ່ອມນຳຮາກຂອງຕົ້ນໄມ້ໄປ ຜູ້ຕ້ອງການ ເປືອກຍ່ອມນຳເປືອກໄປ ຜູ້ຕ້ອງການໃບຍ່ອມນຳໃບໄປ ຜູ້ຕ້ອງການດອກຍ່ອມນຳດອກໄປ ຜູ້ຕ້ອງ

ການໝາກຍ່ອມນຳໝາກໄປ ແຕ່ເທວະດາບໍ່ເພິ່ງດີໃຈຫຼືເສຍໃຈຍ້ອນການກະທຳນັ້ນ ໆ ເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນໄມ້ດຳລົງຢູ່ໃນຣຸກຂະທຳເປັນແນວນີ້ແລ"

"ຂ້າແດ່ ພຣະອົງຜູ້ນິຣະທຸກ ຂ້າພຣະອົງບໍ່ໄດ້ດຳລົງຢູ່ໃນຣຸກຂະທຳແທ້ ລົມຝົນຢ່າງແຮງຈຶ່ງໄດ້ພັດກົ່ນບ່ອນຢູ່ຂອງຂ້າພຣະອົງໃຫ້ລົ້ມລົງ ເຮັດໃຫ້ມີຮາກຂຶ້ນເບື້ອງເທິງ"

"ເທວະດາ ຖ້າທ່ານເພິ່ງດຳລົງຢູ່ໃນຣຸກຂະທຳ ບ່ອນຢູ່ຂອງທ່ານກໍຈະເພິ່ງມີຄືແຕ່ກ່ອນ"

"ຂ້າແດ່ ພຣະອົງຜູ້ນິຣະທຸກ ຂ້າພຣະອົງຈະດຳລົງຢູ່ໃນຣຸກຂະທຳ ຂໍໃຫ້ບ່ອນຢູ່ຂອງຂ້າພຣະອົງຈົ່ງມີຄືແຕ່ກ່ອນເທີ້ນ"

ລຳດັບນັ້ນ ທ້າວສັກກະຈອມເທບໄດ້ຊົງບັນດານໃຫ້ມີລົມຝົນຢ່າງແຮງພັດຕົ້ນໄຮໃຫຍ່ຊື່ສຸປະຕິດຖະໃຫ້ກັບຕັ້ງຂຶ້ນດັ່ງເດີມດ້ວຍລິດ ຕົ້ນໄຮໃຫຍ່ຊື່ສຸປະຕິດຖະໄດ້ມີເປືອກມີຮາກຕັ້ງຢູ່ດັ່ງເດີມສັນໃດ

ພາມທຳມິກະ ອຸປາສົກອຸປາສິກາຊາວຊາດພູມຊົນນະບົດທັງຫຼາຍ ໄດ້ຂັບໄລ່ທ່ານ ຜູ້ຕັ້ງຢູ່ໃນສະມະນະທຳໃຫ້ອອກຈາກອາວາດທັງ ກ ແຫ່ງໃນຊາດພູມຊົນນະບົດທັງໝົດກໍຄືກັນສັນນັ້ນ"

ທ່ານພຣະທຳມິກະທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ສະມະນະດຳລົງຢູ່ໃນສະມະນະທຳ ເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມທຳມິກະ ສະມະນະໃນທຳວິໄນນີ້ບໍ່ດ່າຕອບບຸກຄົນຜູ້ດ່າຢູ່ ບໍ່ສຽດສີຕອບບຸກຄົນຜູ້ສຽດສີຢູ່ ບໍ່ປະຫານຕອບບຸກຄົນຜູ້ປະຫານຢູ່ ພາມທຳມິກະສະມະນະດຳລົງຢູ່ໃນສະມະນະທຳເປັນແນວນີ້ແລ"

ທ່ານພຣະທຳມິກະທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພວກອຸປາສົກຊາວຊາດພູມຊົນນະບົດ ໄດ້ຂັບໄລ່ຂ້າພຣະອົງຜູ້ບໍ່ດຳລົງຢູ່ໃນສະມະນະທຳໃຫ້ອອກຈາກອາວາດທັງ ກ ແຫ່ງໃນຊາດພູມຊົນນະບົດທັງໝົດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມທຳມິກະ ເລື້ອງເຄີຍມີມາແລ້ວ ມີຄູຊື່ສຸເນດຕະເປັນເຈົ້າລັດທິຜູ້ປາສະຈາກຄວາມກຳໜັດໃນກາມທັງຫຼາຍ ມີສາວົກຫຼາຍຮ້ອຍຄົນ ໄດ້ສະແດງທຳແກ່ສາວົກທັງຫຼາຍເພື່ອຄວາມເປັນຜູ້ເກີດໃນພົມມະໂລກ ສາວົກເຫຼົ່າໃດເມື່ອຄູສຸເນດຕະ ສະແດງທຳເພື່ອຄວາມເປັນຜູ້ເກີດໃນພົມມະໂລກຢູ່ ບໍ່ເຮັດຈິດໃຫ້ເຫຼື້ອມໃສ ສາວົກເຫຼົ່ານັ້ນຫຼັງຈາກຕາຍແລ້ວໄດ້ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ສ່ວນສາວົກເຫຼົ່າໃດ ເມື່ອຄູສຸເນດຕະສະແດງ

ທຳເພື່ອຄວາມເປັນຜູ້ເກີດໃນພົມມະໂລກຢູ່ ໄດ້ເຮັດຈິດໃຫ້ເຫຼື້ອມໃສ ສາວົກເຫຼົ່ານັ້ນຫຼັງຈາກຕາຍແລ້ວໄດ້ໄປເກີດໃນສຸກຄະຕິໂລກສະຫວັນ

ເລື້ອງເຄີຍມີມາແລ້ວ ມີຄູຊື່ມູຄະປັກຂະ ฯລฯ ມີຄູຊື່ອະຣະເນມິ ฯລฯ ມີຄູຊື່ກຸດທາລະກະ ฯລฯ ມີຄູຊື່ຫັດຖິປາລະ ฯລฯ ມີຄູຊື່ໂຊຕິປາລະ ເປັນເຈົ້າລັດທິຜູ້ ປາສະຈາກຄວາມກຳໜັດໃນກາມທັງຫຼາຍ ມີສາວົກຫຼາຍຮ້ອຍຄົນ ໄດ້ສະແດງທຳເພື່ອຄວາມເປັນຜູ້ເກີດໃນພົມມະໂລກ ສາວົກເຫຼົ່າໃດ ເມື່ອຄູໂຊຕິປາລະສະແດງທຳເພື່ອຄວາມເປັນຜູ້ເກີດໃນພົມມະໂລກຢູ່ ບໍ່ເຮັດຈິດໃຫ້ເຫຼື້ອມໃສ ສາວົກເຫຼົ່ານັ້ນຫຼັງຈາກຕາຍແລ້ວໄດ້ ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ສ່ວນສາວົກເຫຼົ່າໃດ ເມື່ອຄູໂຊຕິປາລະສະແດງທຳ ເພື່ອຄວາມເປັນຜູ້ເກີດໃນພົມມະໂລກຢູ່ ໄດ້ເຮັດຈິດໃຫ້ເຫຼື້ອມໃສ ສາວົກເຫຼົ່ານັ້ນຫຼັງຈາກຕາຍແລ້ວ ໄດ້ໄປເກີດໃນສຸກຄະຕິໂລກສະຫວັນ

ພາມທຳມິກະ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ຜູ້ໃດມີຈິດຖືກໂທສະປະທຸດສະຮ້າຍ ເພິ່ງດ່າກ່າວໂທດ ຄູທັງ ໖ ນີ້ ຜູ້ເປັນເຈົ້າລັດທິ ຜູ້ປາສະຈາກຄວາມກຳໜັດໃນກາມທັງຫຼາຍ ມີບໍລິວານຫຼາຍຮ້ອຍຄົນ ພ້ອມທັງໝູ່ສາວົກ ຜູ້ນັ້ນເພິ່ງປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ ບໍ?"

ທ່ານພຣະທຳມິກະຂາບທູນວ່າ "ເພິ່ງປະສົບ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມທຳມິກະ ຜູ້ໃດມີຈິດຖືກໂທສະປະທຸດສະຮ້າຍ ເພິ່ງດ່າເພິ່ງກ່າວໂທດຄູທັງ ໖ ນີ້ ຜູ້ເປັນເຈົ້າລັດທິ ຜູ້ປາສະຈາກຄວາມກຳໜັດໃນກາມທັງຫຼາຍ ມີບໍລິວານຫຼາຍຮ້ອຍຄົນ ພ້ອມທັງໝູ່ສາວົກ ຜູ້ນັ້ນເພິ່ງປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ ຜູ້ໃດມີຈິດຖືກໂທສະປະທຸດສະຮ້າຍ ເພິ່ງດ່າ ກ່າວໂທດບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ° ຄົນດຽວ ຜູ້ນັ້ນຍ່ອມປະສົບສິ່ງທີ່ບໍ່ແມ່ນບຸນຫຼາຍກວ່າບຸກຄົນຜູ້ດ່າ ກ່າວໂທດຄູທັງ ໖ ນັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຮົາບໍ່ກ່າວວ່າການຂຸດກົ່ນຄຸນຄວາມດີຂອງຕົນແນວນີ້ ຈະມີພາຍນອກສາດສະໜານີ້ ຄືການດ່າ ການກ່າວໂທດເພື່ອນພົມມະຈາຣີ

ພາມທຳມິກະ ຍ້ອນເຫດນັ້ນແລ ທ່ານເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ຈິດຂອງເຮົາ ຈັກບໍ່ປະທຸດສະຮ້າຍໃນເພື່ອນພົມມະຈາຣີຜູ້ສະເໝີຕົນ"

ພາມທຳມິກະ ທ່ານເພິ່ງຕັ້ງໃຈຮູ້ແນວນີ້ແລ"

ຄູທັງ ໖ ຜູ້ມີຍົດ ໄດ້ຮັບຍ້ອງຍໍວ່າເປັນເຈົ້າລັດທິໃນອະດີດ<br>
ຄືຄູສຸເນດຕະ ຄູມູຄະປັກຂະ ຄູອະຣະເນມິ<br>
ຄູກຸດທາລະກະ ຄູຫັດຖິປາລະມານົບ<br>
ແລະຄູໂຊຕິປາລະຜູ້ເປັນພາມປຸໂລຫິດ<br>
ຂອງພຣະຣາຊາ ໗ ພຣະອົງ ເປັນເຈົ້າຂອງງົວ

ທ່ານເຫຼົ່ານັ້ນ ເປັນຜູ້ໝົດກິ່ນສາບ[໑]
ມຸ້ງໝັ້ນໃນກະລຸນາ ລ່ວງພົ້ນການສັງໂຍດ
ຄາຍການຮາຄະໄດ້
ເປັນຜູ້ເຂົ້າເຖິງພົມມະໂລກແລ້ວ

ແມ່ນສາວົກຫຼາຍຮ້ອຍຄົນຂອງຄູເຫຼົ່ານັ້ນ
ກໍເປັນຜູ້ໝົດກິ່ນສາບ ມຸ້ງໝັ້ນໃນກະລຸນາ
ລ່ວງພົ້ນການສັງໂຍດ ຄາຍການຮາຄະໄດ້
ເປັນຜູ້ເຂົ້າເຖິງພົມມະໂລກແລ້ວ

ນໍຣະຊົນໃດ ມີຄວາມດໍາຣິທາງໃຈຖືກໂທສະປະທຸດສະຮ້າຍແລ້ວ
ກ່າວໂທດທ່ານຜູ້ເປັນລືສີທັງຫຼາຍພາຍນອກສາດສະໜາ
ຜູ້ປາສະຈາກຄວາມກໍາໜັດ ມີຈິດຕັ້ງໝັ້ນແລ້ວ

ນໍຣະຊົນນັ້ນຍ່ອມປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ
ສ່ວນນໍຣະຊົນໃດມີຄວາມດໍາຣິທາງໃຈຖືກໂທສະປະທຸດສະຮ້າຍແລ້ວ
ກ່າວໂທດພິກຂຸຜູ້ເປັນພຸດທະສາວົກມີທິດຖິສົມບູນອົງດຽວ

ນໍຣະຊົນນີ້ຍ່ອມປະສົບສິ່ງທີ່ບໍ່ແມ່ນບຸນ
ຫຼາຍກວ່າຜູ້ກ່າວໂທດຄູເຫຼົ່ານັ້ນ
ນໍຣະຊົນບໍ່ເພິ່ງສຽດສີທ່ານຜູ້ມີຄວາມດີ ຜູ້ລະທິດຖິ[໒]ໄດ້ແລ້ວ

ເຮົາຮຽກບຸກຄົນຜູ້ມີອິນຊີ ໕ ທີ່ຍັງອ່ອນ
ຄື ສັດທາ ສະຕິ ວິຣິຍະ ສະມະຖະ ແລະວິປັດສະນາ
ຍັງບໍ່ປາສະຈາກຄວາມກໍາໜັດໃນການທັງຫຼາຍ
ວ່າເປັນບຸກຄົນທີ ໗[໑] ແຫ່ງອະຣິຍະສົງ

ນໍຣະຊົນໃດ ບຽດບຽນທໍາຮ້າຍບຸກຄົນເຊັ່ນນັ້ນ
ຜູ້ເປັນພິກຂຸໃນການກ່ອນ
ນໍຣະຊົນນັ້ນຊື່ວ່າທໍາຮ້າຍຕົນເອງ
ບັ່ນທອນອະຣະທັດຕະຜົນໃນພາຍຫຼັງ

ສ່ວນນໍຣະຊົນໃດ ຮັກສາຕົນ
ນໍຣະຊົນນັ້ນຊື່ວ່າເປັນຜູ້ຮັກສາຕົນໃນພາຍນອກ
ຍ້ອນເຫດນັ້ນ ບັນດິດບໍ່ເພິ່ງຂຸດກົ່ນຄຸນຄວາມດີຂອງຕົນ
ເພິ່ງຮັກສາຕົນທຸກເມື່ອເທີ້ນ

**ທໍາມິກະສູດທີ ໑໔ ຈົບ**

**ທໍາມິກະວັກທີ ໕ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື



**ປະຖົມປັນນາດ ຈົບ**

# ໔. ທຸຕິຍະປັນນາດ

## ໓. ມະຫາວັກ

### ໝວດວ່າດ້ວຍເລື້ອງໃຫຍ່

## ໑. ໂສນະສູດ

### ວ່າດ້ວຍພຣະໂສນະ

[໕໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພູຄິດຊະກູດ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ທ່ານພຣະໂສນະຢູ່ທີ່ປ່າສີຕະວັນ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ທ່ານພຣະໂສນະຫຼີບຫຼີກຢູ່ໃນບ່ອນສະງັດເກີດຄວາມຄິດຄຳນຶງໃນຈິດດັ່ງນີ້ວ່າ "ໃນບັນດາພຣະສາວົກຂອງພຣະຜູ້ມີພຣະພາກເຈົ້າທີ່ຜາຣົບຄວາມພຽນ ເຮົາກໍເປັນອົງໜຶ່ງ ແຕ່ເປັນຫຍັງຈິດຂອງເຮົາຈຶ່ງຍັງບໍ່ລຸດພົ້ນຈາກອາສະວະໂດຍບໍ່ຢຶດໝັ້ນຖືໝັ້ນນໍ ຊັບສົມບັດໃນຕະກູນຂອງເຮົາມີຢູ່ ເຮົາອາດໃຊ້ສອຍຊັບສົມບັດແລະພໍາເພັງບຸນໄດ້ ທາງທີ່ດີ ເຮົາຄວນບອກຄືນສິກຂາກັບມາເປັນຄະລິຫັດ ໃຊ້ສອຍຊັບສົມບັດ ແລະພໍາເພັງບຸນ[໑]"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ດ້ວຍພຣະຫະໄທເຖິງຄວາມຄິດຄຳນຶງໃນຈິດ ຂອງທ່ານພຣະໂສນະ ຈຶ່ງຊົງຫາຍໄປຈາກພູຄິດຊະກູດ ມາຜາກົດພຣະອົງທີ່ປ່າສີຕະວັນ ຄືບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້[໒] ແມ່ນທ່ານພຣະໂສນະກໍຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະໂສນະດັ່ງນີ້ວ່າ

"ໂສນະ ທ່ານຫຼີບຫຼີກຢູ່ໃນບ່ອນສະງັດ ມີຄວາມຄິດຄຳນຶງໃນຈິດດັ່ງນີ້ວ່າ "ໃນບັນດາພຣະສາວົກຂອງພຣະຜູ້ມີພຣະພາກເຈົ້າທີ່ຜາຣົບຄວາມພຽນ ເຮົາກໍເປັນອົງໜຶ່ງ ແຕ່ເປັນຫຍັງຈິດຂອງເຮົາຈຶ່ງຍັງບໍ່ລຸດພົ້ນຈາກອາສະວະໂດຍບໍ່ຢຶດໝັ້ນຖືໝັ້ນນໍ ຊັບສົມບັດໃນຕະກູນຂອງເຮົາມີຢູ່ ເຮົາອາດໃຊ້ສອຍຊັບສົມບັດແລະພໍາເພັງບຸນໄດ້ ທາງທີ່ດີ ເຮົາຄວນບອກຄືນສິກຂາກັບມາເປັນຄະລິຫັດໃຊ້ສອຍຊັບສົມບັດແລະພໍາເພັງບຸນ" ບໍ່ແມ່ນບໍ"

ທ່ານພຣະໂສນະທູນຮັບວ່າ "ເປັນແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໂສນະ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ເມື່ອຄັ້ງທີ່ທ່ານ ຢູ່ຄອງເຮືອນນັ້ນ ທ່ານເປັນຜູ້ຊ່ຽວຊານໃນການດີດພິນບໍ່ແມ່ນບໍ"

ທ່ານພຣະໂສນະທູນຮັບວ່າ "ເປັນແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໂສນະ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ເວລາສາຍພິນ ຂອງທ່ານເຄັ່ງເກີນໄປ ພິນຂອງທ່ານມີສຽງໃຊ້ການໄດ້ບໍ"

ທ່ານພຣະໂສນະຂາບທູນວ່າ "ໃຊ້ການບໍ່ໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໂສນະ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ເວລາສາຍພິນ ຂອງທ່ານຍານເກີນໄປ ພິນຂອງທ່ານມີສຽງໃຊ້ການໄດ້ບໍ"

ທ່ານພຣະໂສນະຂາບທູນວ່າ "ໃຊ້ການບໍ່ໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໂສນະ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ເວລາສາຍພິນຂອງທ່ານບໍ່ເຄັ່ງ ບໍ່ຍານເກີນໄປ ຊຶ່ງຢູ່ໃນລະດັບທີ່ພໍເໝາະ ພິນຂອງທ່ານມີສຽງໃຊ້ການໄດ້ບໍ"

ທ່ານພຣະໂສນະທູນຮັບວ່າ "ໃຊ້ການໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂສນະ ເຊັ່ນດຽວກັນ ຄວາມພຽນທີ່ຜາຮົບເກີນໄປ ຍ່ອມເປັນໄປເພື່ອຄວາມຟຸ້ງຊ່ານ ຄວາມພຽນທີ່ຫຍ່ອນຍານເກີນໄປ ຍ່ອມເປັນໄປເພື່ອຄວາມຂີ້ຄ້ານ ສັນນັ້ນ ທ່ານຈົ່ງຕັ້ງຄວາມພຽນໃຫ້ພໍດີ ຈົ່ງປັບອິນຊີໃຫ້ສະເໝີກັນ[໑] ແລະຈົ່ງຖືເອົານິມິດ[໒]ໃນຄວາມສະເໝີກັນນັ້ນ"

ທ່ານພຣະໂສນະທູນຮັບສະໜອງພຣະດຳຣັດແລ້ວ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອນທ່ານພຣະໂສນະດ້ວຍພຣະໂອວາດຂໍ້ນີ້ແລ້ວ ຊົງຫາຍໄປຈາກປ່າສີຕະວັນຕໍ່ໜ້າທ່ານພຣະໂສນະມາຜາກົດພຣະອົງທີ່ພູຄິດຊະກູດ ຄືບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ

ເມື່ອຕໍ່ມາ ທ່ານພຣະໂສນະໄດ້ຕັ້ງຄວາມພຽນໃຫ້ພໍດີ ປັບອິນຊີໃຫ້ສະເໝີກັນ ແລະຖືເອົານິມິດໃນຄວາມສະເໝີກັນນັ້ນ ໄດ້ຫຼີກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ບໍ່ດົນປານໃດ ກໍໄດ້ເຮັດໃຫ້ແຈ້ງປະໂຫຍດປະເສີດອັນເປັນບ່ອນສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາ ອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນແທ້ ຮູ້ແຈ້ງວ່າ "ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດ[໓]

ສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ[໔]" ທ່ານພຣະໂສນະໄດ້ເປັນພຣະອະຣະຫັນອົງໜຶ່ງໃນຈຳນວນພຣະອະຣະຫັນທັງຫຼາຍ

ຄັ້ງນັ້ນ ທ່ານພຣະໂສນະຜູ້ໄດ້ບັນລຸອະຣະຫັດຕະຜົນແລ້ວ ໄດ້ມີຄວາມຄິດດັ່ງນີ້ວ່າ "ທາງທີ່ດີ ເຮົາຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວພະຍາກອນອະຣະຫັດຕະຜົນໃນສຳນັກ ພຣະຜູ້ມີພຣະພາກເຈົ້າເທີ້ນ" ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນແລ້ວ ສິ້ນພະອະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ຍ່ອມນ້ອມໄປ[໑]ໃນຖານະ ໖ ປະການ[໒] ຄື

໑. ນ້ອມໄປໃນ ເນກຂຳມະ
໒. ນ້ອມໄປໃນ ປະວິເວກ
໓. ນ້ອມໄປໃນຄວາມ ບໍ່ບຽດບຽນ
໔. ນ້ອມໄປໃນຄວາມ ໝົດສິ້ນຕັນຫາ
໕. ນ້ອມໄປໃນຄວາມ ໝົດສິ້ນອຸປາທານ
໖. ນ້ອມໄປໃນຄວາມ ບໍ່ລຸ້ມຫຼົງ

ລາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ສຳຄັນໄປວ່າ "ທ່ານອົງນີ້ອາໄສຄຸນພຽງສັດທາແນວດຽວເປັນແນ່ ຈຶ່ງນ້ອມໄປໃນເນກຂຳມະ" ແຕ່ຂໍ້ນີ້ບໍ່ເພິ່ງເຫັນແນວນັ້ນ ຍ້ອນພຣະຂີນາສົບຜູ້ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ເຫັນວ່າຕົນ ຍັງຈະຕ້ອງເຮັດກິດອັນໃດອີກ ຫຼືຕ້ອງໄປສັ່ງສົມກິດທີ່ເຮັດແລ້ວ[໓] ຍ່ອມນ້ອມໄປໃນເນກຂຳມະຍ້ອນໝົດສິ້ນຣາຄະ ຍ້ອນປາສະຈາກຣາຄະ ຍ່ອມນ້ອມໄປໃນເນກຂຳມະຍ້ອນໝົດສິ້ນໂທສະ ຍ້ອນປາສະຈາກໂທສະ ຍ່ອມນ້ອມໄປໃນເນກຂຳມະຍ້ອນໝົດສິ້ນໂມຫະ ຍ້ອນປາສະຈາກໂມຫະ

ລາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ສຳຄັນໄປວ່າ "ທ່ານອົງນີ້ຕ້ອງການລາບ ສັກການະແລະການສັນເສີນເປັນແນ່ ຈຶ່ງນ້ອມໄປໃນປະວິເວກ[໑]" "ແຕ່ຂໍ້ນີ້ກໍບໍ່ເພິ່ງເຫັນແນວນັ້ນ ຍ້ອນພຣະຂີນາສົບຜູ້ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ເຫັນວ່າຕົນ ຍັງຈະຕ້ອງເຮັດກິດອັນໃດອີກ ຫຼືຕ້ອງໄປສັ່ງສົມກິດທີ່ເຮັດແລ້ວ ຍ່ອມນ້ອມໄປໃນປະວິເວກຍ້ອນໝົດສິ້ນຣາຄະ ຍ້ອນປາສະຈາກຣາຄະ ຍ່ອມນ້ອມໄປໃນປະວິເວກ ຍ້ອນໝົດສິ້ນໂທສະ ຍ້ອນປາສະຈາກໂທສະ ຍ່ອມນ້ອມໄປໃນປະວິເວກຍ້ອນໝົດສິ້ນໂມຫະ ຍ້ອນປາສະຈາກໂມຫະ

ລາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ສຳຄັນໄປວ່າ "ທ່ານອົງນີ້ຖືສີລັບພະຕະປະຣາມາດ໌ເປັນສາຣະເປັນແນ່ ຈຶ່ງນ້ອມໄປໃນຄວາມບໍ່ບຽດບຽນ" ແຕ່ຂໍ້ນີ້ກໍບໍ່ເພິ່ງເຫັນແນວນັ້ນ ຍ້ອນພຣະຂີນາສົບຜູ້ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ເຫັນວ່າຕົນຍັງຈະຕ້ອງເຮັດກິດອັນໃດອີກ ຫຼືຕ້ອງໄປສັ່ງສົມກິດທີ່ເຮັດແລ້ວ ຍ່ອມນ້ອມໄປໃນຄວາມບໍ່ບຽດບຽນຍ້ອນໝົດສິ້ນຣາຄະ ຍ້ອນປາສະຈາກຣາຄະ ຍ່ອມນ້ອມໄປໃນຄວາມບໍ່ບຽດບຽນຍ້ອນໝົດສິ້ນໂທສະ ຍ້ອນປາສະຈາກໂທສະ ຍ່ອມນ້ອມຄວາມບໍ່ບຽດບຽນຍ້ອນໝົດສິ້ນໂມຫະ ຍ້ອນປາສະຈາກໂມຫະ

ລາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ ຯລຯ ຍ່ອມນ້ອມໄປໃນຄວາມໝົດສິ້ນຕັນຫາຍ້ອນໝົດສິ້ນຣາຄະ ຍ້ອນປາສະຈາກຣາຄະ ຍ່ອມນ້ອມໄປໃນຄວາມໝົດສິ້ນຕັນຫາ ຍ້ອນສິ້ນໂທສະ ຍ້ອນປາສະຈາກໂທສະ ຍ່ອມນ້ອມໄປໃນຄວາມໝົດສິ້ນຕັນຫາ ຍ້ອນໝົດສິ້ນໂມຫະຍ້ອນປາສະຈາກໂມຫະ

ລາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ ຯລຯ ຍ່ອມນ້ອມໄປໃນຄວາມໝົດສິ້ນອຸປາທານ ຍ້ອນໝົດສິ້ນຣາຄະ ຍ້ອນປາສະຈາກຣາຄະ ຍ່ອມນ້ອມໄປຄວາມໝົດສິ້ນອຸປາທານ ຍ້ອນໝົດສິ້ນ ໂທສະ ຍ້ອນປາສະຈາກໂທສະ ຍ່ອມນ້ອມໄປໃນຄວາມໝົດສິ້ນອຸປາທານ ຍ້ອນໝົດສິ້ນໂມຫະ ຍ້ອນປາສະຈາກໂມຫະ

ລາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ ຯລຯ ຍ່ອມນ້ອມໄປໃນຄວາມບໍ່ລຸ້ມຫຼົງ ຍ້ອນໝົດສິ້ນຣາຄະ ຍ້ອນປາສະຈາກຣາຄະ ຍ່ອມນ້ອມໄປໃນຄວາມບໍ່ລຸ້ມຫຼົງຍ້ອນໝົດສິ້ນໂທສະຍ້ອນປາສະຈາກໂທສະ ຍ່ອມນ້ອມໄປໃນຄວາມບໍ່ລຸ້ມຫຼົງ ຍ້ອນໝົດສິ້ນໂມຫະ ຍ້ອນປາສະຈາກໂມຫະ

ຂ້າແດ່ພຣະອົງຜູ້ຈະເລີນ ຖ້າຮູບອາຣົມທີ່ຮຸນແຮງທີ່ຈະຮັບຮູ້ແຈ້ງທາງຕາ ມາຜາກົດທາງຕາຂອງພິກຂຸຜູ້ມີຈິດລຸດພົ້ນແລ້ວໂດຍຖືກຕ້ອງແນວນີ້ ຮູບອາລົມເຫຼົ່ານັ້ນຍ່ອມບໍ່ຄອບງຳ ຈິດຂອງພິກຂຸນັ້ນໄດ້ເລີຍ ຈິດຂອງພິກຂຸນັ້ນບໍ່ຖືກອາລົມຄອບງຳ ເປັນທຳມະຊາດໝັ້ນຄົງ ໜັກແໜ້ນແລະພິກຂຸນັ້ນກໍພິຈາລະນາເຫັນຄວາມເກີດດັບຂອງຈິດນັ້ນ

ຖ້າສັດທາຣົມທີ່ຮຸນແຮງທີ່ຈະຮັບຮູ້ແຈ້ງທາງຫູ ຯລຯ
ຖ້າຄັນທາຣົມທີ່ຮຸນແຮງທີ່ຈະຮັບຮູ້ແຈ້ງທາງດັງ ຯລຯ
ຖ້າຣະສາຣົມທີ່ຮຸນແຮງທີ່ຈະຮັບຮູ້ແຈ້ງທາງລີ້ນ ຯລຯ
ຖ້າໂຜດຖັບພາຣົມທີ່ຮຸນແຮງທີ່ຈະຮັບຮູ້ແຈ້ງທາງກາຍ ຯລຯ

ແມ່ນຖ້າທຳມາຣົມທີ່ຮຸນແຮງທີ່ຈະຮັບຮູ້ແຈ້ງທາງໃຈ ມາຜາກົດທາງໃຈຂອງພິກຂຸຜູ້ມີຈິດລຸດພົ້ນແລ້ວໂດຍຖືກຕ້ອງແນວນີ້ ທຳມາຣົມເຫຼົ່ານັ້ນ ຍ່ອມບໍ່ຄອບງຳຈິດຂອງພິກຂຸນັ້ນໄດ້ເລີຍ ຈິດ

ຂອງພິກຂຸນັ້ນບໍ່ຖືກອາລົມຄອບງຳ ເປັນທຳມະຊາດໝັ້ນຄົງໜັກແໜ້ນ ແລະພິກຂຸນັ້ນກໍພິຈາລະນາເຫັນຄວາມເກີດດັບຂອງຈິດນັ້ນ

ຈິດຂອງພຣະຂີນາສົບຜູ້ນ້ອມໄປໃນເນກຂຳມະ
ນ້ອມໄປໃນປະວິເວກ ນ້ອມໄປໃນຄວາມບໍ່ບຽດບຽນ
ນ້ອມໄປໃນຄວາມໝົດສິ້ນອຸປາທານ
ນ້ອມໄປໃນຄວາມໝົດສິ້ນຕັນຫາ ແລະນ້ອມໄປໃນຄວາມບໍ່ລຸ້ມຫຼົງ
ຍ່ອມລຸດພົ້ນໂດຍຖືກຕ້ອງຍ້ອນເຫັນຄວາມເກີດແຫ່ງອາຍະຕະນະ[໑]
ພິກຂຸຜູ້ມີຈິດສະຫງົບລະງັບລຸດພົ້ນໂດຍຖືກຕ້ອງ
ຍ່ອມບໍ່ມີການສັ່ງສົມກິດທີ່ເຮັດແລ້ວ
ທັງບໍ່ມີກິດທີ່ຈະຕ້ອງເຮັດອີກ
ພູຫີນແທ່ງທຶບຍ່ອມບໍ່ສະເທືອນຍ້ອນລົມ ສັນໃດ
ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ແລະທຳມາຣົມທັງມວນ
ທັງທີ່ເປັນອິດຖາຣົມ ແລະອະນິດຖາຣົມ
ຍ່ອມເຮັດຈິດຂອງຜູ້ໝັ້ນຄົງໃຫ້ຫວັ່ນໄຫວບໍ່ໄດ້ ສັນນັ້ນ
ຈິດຂອງຜູ້ໝັ້ນຄົງນັ້ນເປັນຈິດຕັ້ງໝັ້ນ ບໍ່ຫວັ່ນໄຫວ
ບໍ່ເກາະກ່ຽວດ້ວຍອາລົມອັນໃດ
ຍ້ອນທ່ານຜູ້ໝັ້ນຄົງພິຈາລະນາເຫັນຄວາມເກີດດັບຂອງຈິດນັ້ນ[໑]

**ໂສນະສູດທີ ໑ ຈົບ**

## ໔. ຜັກຄຸນະສູດ

### ວ່າດ້ວຍພຣະຜັກຄຸນະອາພາດ

[໕໖] ສະໄໝນັ້ນແລ ທ່ານພຣະຜັກຄຸນະ ອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ຄັ້ງນັ້ນທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະຜັກຄຸນະອາພາດ ມີທຸກ ເປັນໄຂ້ໜັກ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະ ສະເດັດເຂົ້າໄປຢ້ຽມທ່ານພຣະຜັກຄຸນະຮອດບ່ອນຢູ່ເທີ້ນ ພຣະຜູ້ມີພຣະພາກເຈົ້າຊົງຮັບດ້ວຍພຣະອາການດຸດສະນີ

ເມື່ອເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ໌ສະເດັດເຂົ້າໄປຫາທ່ານພຣະຜັກຄຸນະຮອດບ່ອນຢູ່ ທ່ານພຣະຜັກຄຸນະໄດ້ເຫັນພຣະຜູ້ມີພຣະພາກເຈົ້າກຳລັງສະເດັດມາແຕ່ໄກ ຈຶ່ງລຸກຂຶ້ນຈາກຕຽງ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະຜັກຄຸນະວ່າ "ຢ່າເລີຍ ຜັກຄຸນະ ທ່ານຢ່າລຸກຈາກຕຽງເລີຍ ອາສະນະທີ່ພິກຂຸອື່ນປູລາດໄວ້ຍັງມີຢູ່ ເຮົາຈັກນັ່ງເທິງອາສະນະນັ້ນ" ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ໄດ້ຕັດຖາມທ່ານພຣະຜັກຄຸນະດັ່ງນີ້ ວ່າ

"ຜັກຄຸນະ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທຸກຂະເວທະນາທຸເລົາບໍ່ກຳເຣີບບໍ ອາການທຸເລົາຜາກົດ ອາການກຳເຣີບບໍ່ຜາກົດບໍ?"

ທ່ານພຣະຜັກຄຸນະຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້າພຣະອົງມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ

ປຽບຄື ຄົນທີ່ແຂງແຮງໃຊ້ເຫຼັກແຫຼມທີ່ຄົມແທງຫົວ ສັນໃດ ລົມອັນແຮງກ້າກໍສຽບແທງຫົວຂອງຂ້າພຣະອົງ ຄືກັນສັນນັ້ນ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້າພຣະອົງມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ

ປຽບຄື ຄົນທີ່ແຂງແຮງ ເພິ່ງໃຊ້ເຊືອກໜັງທີ່ໜຽວຮັດທີ່ຫົວ ສັນໃດ ຄວາມເຈັບປວດໃນຫົວຂອງຂ້າພຣະອົງກໍມີປະມານຍິ່ງຄືກັນສັນນັ້ນ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້າພຣະອົງມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ

ປຽບຄື ຄົນຂ້າງົວຫຼືລູກມືຂອງຄົນຂ້າງົວຜູ້ຊ່ຽວຊານເພິ່ງໃຊ້ມີດຄົວຊີ້ນທີ່ຄົມຂີດທ້ອງ ສັນໃດ ລົມອັນແຮງກ້າກໍສຽບແທງທ້ອງຂອງຂ້າພຣະອົງ ຄືກັນສັນນັ້ນ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້າພຣະອົງມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ

ປຽບຄື ຄົນທີ່ແຂງແຮງ ໒ ຄົນເພິ່ງຈັບແຂນຄົນທີ່ອ່ອນແອກວ່າຄົນລະຂ້າງ ຢ້າງໃຫ້ຮ້ອນເທິງຂຸມຖ່ານໄຟ ສັນໃດ ຄວາມຮ້ອນຮົນໃນກາຍຂອງຂ້າພຣະອົງກໍມີຫຼາຍຢ່າງຍິ່ງຄືກັນສັນນັ້ນ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້າພຣະອົງມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ໌

ລຳດັບນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຊີ້ງຊີ້ແຈ່ງໃຫ້ທ່ານພຣະຜັກຄຸນະເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຣອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ສະເດັດລຸກຈາກພຸດທະອາດຈາກໄປ

ຄັ້ງນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຫຼີກໄປບໍ່ດົນ ທ່ານພຣະຜັກຄຸນະໄດ້ມໍຣະນະພາບແລ້ວ ໃນເວລາມໍຣະນະພາບ ອິນຊີ²ຂອງທ່ານຜ່ອງໃສຫຼາຍ ຕໍ່ມາ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະ ພາກເຈົ້າດັ່ງນີ້ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຫຼີກໄປບໍ່ດົນ ທ່ານພຣະຜັກຄຸນະໄດ້ມໍຣະນະພາບແລ້ວ ແລະໃນເວລາມໍຣະນະພາບອິນຊີຂອງທ່ານຜ່ອງໃສຫຼາຍ”

## ອານິສົງການຟັງທຳ

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ອານົນ ອິນຊີຂອງຜັກຄຸນະພິກຂຸຈັກບໍ່ຜ່ອງໃສໄດ້ແນວໃດ ໃນເບື້ອງຕົ້ນຈິດຂອງຜັກຄຸນະພິກຂຸຍັງບໍ່ລຸດພົ້ນຈາກໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕໍ່າ) ໕ ປະການ ແຕ່ຍ້ອນໄດ້ຟັງທຳມະເທດສະໜານັ້ນ ຈິດຂອງຜັກຄຸນະພິກຂຸ ຈຶ່ງລຸດພົ້ນຈາກໂອຣຳພາຄິຍະສັງໂຍດ ໕ ປະການ  ອານົນ ການຟັງທຳຕາມການ ການພິຈາລະນາເນື້ອຄວາມຕາມການມີອານິສົງ ໖ ປະການນີ້

ອານິສົງ ໖ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ມີຈິດຍັງບໍ່ລຸດພົ້ນຈາກໂອຣຳພາຄິຍະສັງໂຍດ ໕ ປະການ ໃນເວລາໃກ້ຕາຍ ໃນເວລານັ້ນ ທ່ານໄດ້ເຫັນຕະຖາຄົດ ຕະຖາຄົດສະແດງທຳທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນແກ່ທ່ານ ຍ້ອນໄດ້ຟັງທຳມະເທດສະໜານັ້ນ ຈິດຂອງທ່ານຈຶ່ງລຸດພົ້ນຈາກໂອຣຳພາຄິຍະສັງໂຍດ ໕ ປະການ ນີ້ເປັນອານິສົງ ປະການທີ ໑ ໃນການຟັງທຳຕາມການ

໒. ພິກຂຸໃນທຳວິໄນນີ້ມີຈິດຍັງບໍ່ລຸດພົ້ນຈາກໂອຣຳພາຄິຍະສັງໂຍດ ໕ ປະການ ໃນເວລາໃກ້ຕາຍ ໃນເວລານັ້ນ ທ່ານບໍ່ໄດ້ເຫັນຕະຖາຄົດເລີຍ ແຕ່ໄດ້ເຫັນສາວົກຂອງຕະຖາຄົດ ສາວົກຂອງຕະຖາຄົດສະແດງທຳທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນແກ່ທ່ານ ຍ້ອນໄດ້ຟັງທຳມະເທດສະໜານັ້ນ ຈິດຂອງທ່ານຈຶ່ງລຸດພົ້ນຈາກໂອຣຳພາຄິຍະສັງໂຍດ ໕ ປະການ ນີ້ເປັນອານິສົງປະການທີ ໒ ໃນການຟັງທຳຕາມການ

໓. ພິກຂຸໃນທຳວິໄນນີ້ມີຈິດຍັງບໍ່ລຸດພົ້ນຈາກໂອຣຳພາຄິຍະສັງໂຍດ ໕ ປະການ ໃນເວລາໃກ້ຕາຍ ໃນເວລານັ້ນ ທ່ານບໍ່ໄດ້ເຫັນຕະຖາຄົດ ທັງບໍ່ໄດ້ເຫັນສາວົກຂອງຕະຖາຄົດ ແຕ່ນຶກຕາມ ຕອງຕາມ ເພ່ງຕາມດ້ວຍໃຈ ເຊິ່ງທຳ ຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ເມື່ອທ່ານນຶກຕາມ ຕອງຕາມ ເພ່ງຕາມດ້ວຍໃຈເຊິ່ງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ໄດ້ຮຽນມາ ຈິດຂອງທ່ານຈຶ່ງລຸດພົ້ນຈາກໂອຣຳພາຄິຍະສັງໂຍດ ໕ ປະການ ນີ້ເປັນອານິສົງປະການທີ ໓ ໃນການພິຈາລະນາເນື້ອຄວາມຕາມການ

໔. ພິກຂຸໃນທຳວິໄນນີ້ມີຈິດລຸດພົ້ນແລ້ວຈາກໂອຣຳພາຄິຍະສັງໂຍດ ໕ ປະການ ແຕ່ຈິດຂອງທ່ານຍັງບໍ່ນ້ອມໄປໃນທຳເປັນທີ່ສິ້ນສຸດໄປແຫ່ງອຸປະທິກິເລດອັນປະເສີດ[໑] ໃນເວລາໃກ້ຕາຍ ໃນເວລານັ້ນ ທ່ານໄດ້ເຫັນຕະຖາຄົດ ຕະຖາຄົດຍ່ອມສະແດງທຳທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ຯລຯ ປະກາດພົມມະຈັນບໍລິສຸດ ບໍລິບູນຄົບຖ້ວນ ແກ່ທ່ານ ຍ້ອນໄດ້ຟັງທຳມະເທດສະໜານັ້ນ ຈິດຂອງທ່ານຈຶ່ງນ້ອມໄປໃນທຳເປັນທີ່ສິ້ນສຸດໄປແຫ່ງອຸປະທິກິເລດອັນປະເສີດ ນີ້ເປັນອານິສົງປະການທີ ໔ ໃນການຟັງທຳຕາມການ

໕. ພິກຂຸໃນທຳວິໄນນີ້ມີຈິດລຸດພົ້ນແລ້ວຈາກໂອຣຳພາຄິຍະສັງໂຍດ ໕ ປະການ ແຕ່ຈິດຂອງທ່ານບໍ່ນ້ອມໄປໃນທຳເປັນທີ່ສິ້ນສຸດໄປແຫ່ງອຸປະທິກິເລດ ອັນປະເສີດ ໃນເວລາໃກ້ຕາຍ ໃນເວລານັ້ນ ທ່ານບໍ່ໄດ້ເຫັນຕະຖາຄົດ ແຕ່ທ່ານໄດ້ເຫັນສາວົກຂອງຕະຖາຄົດ ສາວົກຂອງຕະຖາຄົດສະແດງທຳທີ່ມີຄວາມງາມໃນເບື້ອງຕົ້ນ ຯລຯ ປະກາດພົມມະຈັນບໍລິສຸດ ບໍລິບູນຄົບຖ້ວນແກ່ທ່ານ ຍ້ອນໄດ້ຟັງທຳມະເທດສະໜານັ້ນ ຈິດຂອງທ່ານຈຶ່ງນ້ອມໄປໃນທຳເປັນທີ່ສິ້ນສຸດໄປແຫ່ງອຸປະທິກິເລດອັນປະເສີດ ນີ້ເປັນອານິສົງປະການທີ ໕ ໃນການຟັງທຳຕາມການ

໖. ພິກຂຸໃນທຳວິໄນນີ້ມີຈິດລຸດພົ້ນແລ້ວຈາກໂອຣຳພາຄິຍະສັງໂຍດ ໕ ປະການ ແຕ່ຈິດຂອງທ່ານບໍ່ນ້ອມໄປໃນທຳເປັນທີ່ສິ້ນສຸດໄປແຫ່ງອຸປະທິກິເລດອັນປະເສີດ ໃນເວລາໃກ້ຕາຍ ໃນເວລານັ້ນ ທ່ານບໍ່ໄດ້ເຫັນທັງຕະຖາຄົດ ທັງບໍ່ໄດ້ເຫັນສາວົກຂອງຕະຖາຄົດ ແຕ່ທ່ານນຶກຕາມຕອງຕາມ ເພ່ງຕາມດ້ວຍໃຈເຊິ່ງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ເມື່ອທ່ານນຶກຕາມ ຕອງຕາມ ເພ່ງຕາມດ້ວຍໃຈເຊິ່ງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ຈິດຂອງທ່ານຈຶ່ງນ້ອມໄປໃນທຳເປັນທີ່ສິ້ນສຸດໄປແຫ່ງ ອຸປະທິກິເລດອັນປະເສີດ ນີ້ເປັນອານິສົງປະການທີ ໖ ໃນການພິຈາລະນາ ເນື້ອຄວາມຕາມການ

ອານົນ ການພິຈາລະນາເນື້ອຄວາມຕາມການມີອານິສົງ ໖ ປະການນີ້ແລ

**ຜັກຄຸນະສູດທີ ໘ ຈົບ**

# ໓. ສະລະພິຊາຕິສູດ

## ວ່າດ້ວຍອະພິຊາດ[១] ໖ ຈຳພວກ

[໕໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດນະຄອນ ຣາດຊະຄຶ ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ປູຣະນະ ກັດສະປະບັນຍັດອະພິຊາດ ໖ ຈຳພວກ ຄື

໑. ບັນຍັດກັນຫາພິຊາດ (ຊາດດຳ)
໒. ບັນຍັດນີລາພິຊາດ (ຊາດຂຽວ)
໓. ບັນຍັດໂລຫິຕາພິຊາດ (ຊາດແດງ)
໔. ບັນຍັດຫະລິດທາພິຊາດ (ຊາດເຫຼືອງ)
໕. ບັນຍັດສຸກກາພິຊາດ (ຊາດຂາວ)
໖. ບັນຍັດປະຣະມະສຸກກາພິຊາດ (ຊາດຂາວຍິ່ງ)

ປູຣະນະກັດສະປະ ບັນຍັດຄົນຂ້າແບ້ ຄົນຂ້າໝູ ພານນົກ ນາຍພານເນື້ອ ຊາວປະມົງ ໂຈນ ເພດຊະຄາດ ເຈົ້າໜ້າທີ່ຄຸກ ຫຼືຄົນທຳງານທີ່ໂຫດຮ້າຍອື່ນ ໆ ວ່າ ເປັນກັນຫາພິຊາດ

ບັນຍັດພວກພິກຂຸຜູ້ເອນອຽງໄປໃນຝ່າຍດຳ ຫຼື ພວກກຳມະວາທະ ກິຣິຍະວາທະອື່ນ ໆ ວ່າເປັນນີລາພິຊາດ

ບັນຍັດນິຄົນຜູ້ໃຊ້ຜ້າຜືນດຽວວ່າເປັນໂລຫິຕາພິຊາດ

ບັນຍັດຄະລິຫັດຜູ້ນຸ່ງຜ້າຂາວ ຫຼື ສາວົກຂອງອະເຈລະກະ[២]ວ່າເປັນຫະລິດທາພິຊາດ

ບັນຍັດອາຊີວົກຫຼືອາຊີວິກາວ່າເປັນສຸກກາພິຊາດ

ບັນຍັດເຈົ້າລັດທິຊື່ວ່າ ນັນທະວັດສະໂຄດ ເຈົ້າລັດທິຊື່ກິດສັງກັດຈະໂຄດ ເຈົ້າລັດທິຊື່ມັກ ຂະລິໂຄສານວ່າເປັນປະຣະມະສຸກກາພິຊາດ

ຂ້າແດ່ ພຣະອົງຜູ້ຈະເລີນ ປູຣະນະກັດສະປະ ບັນຍັດອະພິຊາດ ໖ ປະການນີ້ໄວ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອານົນ ການທີ່ປູຣະນະກັດສະປະ ບັນຍັດອະພິຊາດ ໖ ປະການນີ້ໄວ້ ຊາວໂລກທັງປວງເຫັນຄວນນຳຢູ່ບໍ?"

ພຣະອານົນຂາບທູນວ່າ "ບໍ່ເປັນແນວນັ້ນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຄົນທັງຫຼາຍບັງຄັບບຸຣຸດຍາກຈົນ ຂັດສົນ ເຂັນ ໃຈ ຜູ້ບໍ່ປາຖະໜາສ່ວນຊີ້ນວ່າ "ແນ່ະບຸຣຸດຜູ້ຈະເລີນ ທ່ານເພິ່ງກິນຊີ້ນນີ້ ແລະຕ້ອງໃຫ້ຄ່າຊີ້ນ" ສັນໃດ ປູຣະນະ ກັດສະປະ ກໍຄືກັນສັນນັ້ນ ບັນຍັດອະພິຊາດ ໖ ປະການນີ້ສຳລັບສະມະນະ ພາມເຫຼົ່ານັ້ນໄວ້ ໂດຍທີ່ຊາວໂລກທັງປວງກໍບໍ່ຍອມຮັບ ຄືຄົນພານບໍ່ແຫຼມຄົມ ບໍ່ຮູ້ຫຼັກການບັນຍັດ ບໍ່ສະຫຼາດ

ອານົນ ເຮົາກໍບັນຍັດອະພິຊາດ ໖ ປະການໄວ້ ຂໍທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກ ກ່າວ" ເມື່ອທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດ ເລື້ອງນີ້ວ່າ

ອານົນ ອະພິຊາດ ໖ ປະການ ອັນໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ເປັນກັນຫາພິຊາດ ປະພຶດທຳດຳ
໒. ບຸກຄົນລາງຄົນໃນໂລກນີ້ເປັນກັນຫາພິຊາດ ປະພຶດທຳຂາວ
໓. ບຸກຄົນລາງຄົນໃນໂລກນີ້ເປັນກັນຫາພິຊາດ ບັນລຸນິບພານທີ່ບໍ່ດຳບໍ່ຂາວ
໔. ບຸກຄົນລາງຄົນໃນໂກກໄກລກນີ້ເປັນສຸກກາພິຊາດ ປະພຶດທຳດຳ
໕. ບຸກຄົນລາງຄົນໃນໂລກນີ້ເປັນສຸກກາພິຊາດ ປະພຶດທຳຂາວ
໖. ບຸກຄົນລາງຄົນໃນໂລກນີ້ເປັນສຸກກາພິຊາດ ບັນລຸນິບພານທີ່ບໍ່ດຳບໍ່ຂາວ

ບຸກຄົນເປັນກັນຫາພິຊາດ ປະພຶດທຳດຳ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເກີດໃນຕະກູນຕ່ຳ ຄື ຕະກູນຈັນທານ ຕະກູນນາຍ ພານ ຕະກູນຊ່າງສານ ຕະກູນຊ່າງລົດ ຫຼືຕະກູນຄົນຂົນຂີ້ເຫຍື້ອ ເຊິ່ງເປັນຕະກູນຍາກຈົນ ມີເຂົ້າ ນ້ຳແລະສິ່ງຂອງເຄື່ອງໃຊ້ໜ້ອຍ ເປັນໄປຢ່າງຝືດເຄືອງ ເປັນແຫຼ່ງທີ່ຫາຂອງກິນແລະເຄື່ອງນຸ່ງຫົ່ມ ໄດ້ຍາກ ແລະເຂົາມີຜິວພັນໝົ່ນໝອງ ບໍ່ໜ້າເບິ່ງ ຕ່ຳຕ້ອຍ ມີຄວາມເຈັບປ່ວຍຫຼາຍ ຕາບອດ ເປັນງ່ອຍ ເປັນຄົນບໍ່ສົມປະກອບຫຼືເປັນພະຍາດອຳມະພາດ ມັກບໍ່ໄດ້ເຂົ້າ ນ້ຳ ຜ້າ ຍານ ດອກ ໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ ແລະເຂົາຍັງປະພຶດກາຍທຸດ ຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ ທຸກຄະ ຕິ ວິນິບາດ[១] ນະຮົກ

ບຸກຄົນເປັນກັນຫາພິຊາດ ປະພຶດທຳດຳ ເປັນແນວນີ້ແລ

ບຸກຄົນເປັນກັນຫາພິຊາດ ປະພຶດທຳຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເກີດໃນຕະກູນຕໍ່າ ຄື ຕະກູນຈັນທານ ຯລຯ ມັກບໍ່ໄດ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ ແຕ່ເຂົາປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ

ບຸກຄົນເປັນກັນຫາພິຊາດ ປະພຶດທຳຂາວ ເປັນແນວນີ້ແລ

ບຸກຄົນເປັນກັນຫາພິຊາດ ບັນລຸນິບພານທີ່ບໍ່ດຳບໍ່ຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເກີດໃນຕະກູນຕໍ່າ ຄື ຕະກູນຈັນທານ ຯລຯ ແລະເຂົາມີຜິວພັນໝົ່ນໝອງ ບໍ່ໜ້າເບິ່ງ ຕໍ່າຕ້ອຍ ເຂົາແຖຜົມແລະໜວດ ນຸ່ງຫົ່ມຜ້າ ກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ ເຂົາຜູ້ບວດແລ້ວແນວນີ້ ລະນິວອນ ໕ ປະການອັນເປັນເຄື່ອງເສົ້າໝອງໃຈ ທອນກຳລັງປັນຍາ ມີຈິດຕັ້ງໝັ້ນດີໃນສະຕິປັດຖານ ໔ ປະການ[໑] ຈະເລີນໂພດຊົງ ໗ ປະການ[໒] ຕາມຄວາມເປັນຈິງແລ້ວ ບັນລຸນິບພານທີ່ບໍ່ດຳບໍ່ຂາວ

ບຸກຄົນເປັນກັນຫາພິຊາດ ບັນລຸນິບພານທີ່ບໍ່ດຳບໍ່ຂາວ ເປັນແນວນີ້ແລ

ບຸກຄົນເປັນສຸກກາພິຊາດ ປະພຶດທຳດຳ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເກີດໃນຕະກູນສູງ ຄື ຕະກູນຂັດຕິຍະມະຫາສານຕະກູນ ພາມມະນະມະຫາສານ ຕະກູນຄະຫະບໍດີມະຫາສານ ເຊິ່ງເປັນຕະກູນຮັ່ງມີ ມີຊັບຫຼາຍມີໂພຄະຫຼາຍ ມີຄຳແລະເງິນຫຼາຍ ມີເຄື່ອງໃຊ້ທີ່ໜ້າພໍໃຈຫຼາຍ ມີຊັບແລະເຂົ້າເປືອກຫຼາຍ[໓] ແລະເຂົາມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີສະຫວີວັນຜຸດຜ່ອງຢ່າງຍິ່ງ ມັກໄດ້ເຂົ້າ ນໍ້າ ຜ້າ ຍານດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ ແຕ່ເຂົາປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ບຸກຄົນເປັນສຸກກາພິຊາດ ປະພຶດທຳດຳ ເປັນແນວນີ້ແລ

ບຸກຄົນເປັນສຸກກາພິຊາດ ປະພຶດທຳຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເກີດໃນຕະກູນສູງ ຄື ຕະກູນຂັດຕິຍະມະຫາສານ ຯລຯ ມັກໄດ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ຂອງຫອມ ແລະເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ ແລະເຂົາຍັງປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ

ບຸກຄົນເປັນສຸກກາພິຊາດ ປະພຶດທຳຂາວ ເປັນແນວນີ້ແລ

ບຸກຄົນເປັນສຸກກາພິຊາດ ບັນລຸນິບພານທີ່ບໍ່ດຳບໍ່ຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເກີດໃນຕະກູນສູງ ຄື ຕະກູນຂັດຕິຍະມະຫາສານ ຕະກູນພາມມະນະມະຫາສານ ຕະກູນຄະຫະບໍດີມະຫາສານ ເຊິ່ງເປັນຕະກູນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຄຳແລະເງິນຫຼາຍ ມີເຄື່ອງໃຊ້ທີ່ໜ້າພໍໃຈຫຼາຍ ມີຊັບແລະເຂົ້າເປືອກຫຼາຍ ແລະເຂົາມີຮູບງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີສະຫວີວັນຜຸດຜ່ອງຍິ່ງ ເຂົາແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ເຂົາຜູ້ບວດແລ້ວແນວນີ້ ລະນີວອນ ໕ ປະການ ອັນເປັນເຄື່ອງເສົ້າໝອງໃຈ ທອນກຳລັງປັນຍາ ມີຈິດຕັ້ງໝັ້ນດີໃນສະຕິປັດຖານ ໔ ປະການ ຈະເລີນໂພດຊົງ ໗ ປະການ ຕາມຄວາມ ເປັນຈິງແລ້ວ ບັນລຸນິບພານທີ່ບໍ່ດຳບໍ່ຂາວແນວນີ້

ບຸກຄົນເປັນສຸກກາພິຊາດ ບັນລຸນິບພານທີ່ບໍ່ດຳບໍ່ຂາວ ເປັນແນວນີ້ແລ

ອານົນ ອະພິຊາດ ໖ ປະການນີ້ແລ

**ສະລະພິຊາຕິສູດທີ ໓ ຈົບ**

## ໔. ອາສະວະສູດ

### ວ່າດ້ວຍອາສະວະທຳ[1]

[໕໘] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການ ສັງວອນ[2]
໒. ລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການ ໃຊ້ສອຍ
໓. ລະອາສະວະທີ່ຈະເພິ່ງລະໄດ້ດ້ວຍຄວາມ ອົດກັ້ນ
໔. ລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການ ເວັ້ນ
໕. ລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການ ບັນເທົາ[1]
໖. ລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການ ຈະເລີນ

ພິກຂຸລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການສັງວອນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາໂດຍແຍບຄາຍແລ້ວ[໔] ເປັນຜູ້ສັງລວມດ້ວຍການສັງວອນ ໃນຈັກຂຸນຊີຢູ່ ເຊິ່ງເມື່ອທ່ານບໍ່ສັງລວມຢູ່ ອາສະວະ[໕]ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ກໍຈະເພິ່ງເກີດຂຶ້ນ ເມື່ອທ່ານສັງລວມຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນຍ່ອມບໍ່ມີແກ່ທ່ານ ດ້ວຍອາການແນວນີ້ ພິກຂຸພິຈາລະນາໂດຍແຍບຄາຍແລ້ວເປັນຜູ້ສັງລວມດ້ວຍການສັງວອນໃນໂສຕິນຊີ ຯລຯ ຄານິນຊີ ຯລຯ ຊິວຫິນຊີ ຯລຯ ກາຍິນຊີ ຯລຯ ເປັນຜູ້ສັງລວມດ້ວຍການສັງວອນໃນມະນິນຊີຢູ່ ເຊິ່ງເມື່ອທ່ານບໍ່ສັງລວມຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນກໍຈະເພິ່ງເກີດຂຶ້ນ ເມື່ອທ່ານສັງລວມຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນຍ່ອມບໍ່ມີແກ່ທ່ານ ດ້ວຍອາການແນວນີ້

ພິກຂຸທັງຫຼາຍ ນີ້ຮຽກວ່າ ພິກຂຸລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການສັງວອນ

ພິກຂຸລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການໃຊ້ສອຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາໂດຍແຍບຄາຍແລ້ວໃຊ້ສອຍຈີວອນພຽງເພື່ອປ້ອງກັນຄວາມ ໜາວ ຄວາມຮ້ອນ ເຮືອດຍຸງ ລົມ ແດດ ແລະສຳຜັດແຫ່ງສັດເລືອຄານ ເພື່ອປົກປິດອະໄວຍະວະທີ່ ໜ້າລະອາຍ ພິຈາລະນາໂດຍແຍບຄາຍແລ້ວສັນບິນທະບາດ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອຄວາມມົວເມົາ[໑] ບໍ່ແມ່ນເພື່ອປະດັບ[໔] ບໍ່ແມ່ນເພື່ອຕົກແຕ່ງ[໕] ແຕ່ເພື່ອກາຍນີ້ດຳລົງຢູ່ໄດ້ເພື່ອໃຫ້ຊີວິຕິນຊີເປັນໄປ ເພື່ອບຳບັດຄວາມຫິວ ເພື່ອອະນຸເຄາະພົມມະຈັນດ້ວຍຄິດເຫັນວ່າ "ໂດຍອຸບາຍນີ້ເຮົາຈັກກຳຈັດເວທະນາເກົ່າໄດ້ ແລະຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳລົງຢູ່ແຫ່ງຊີວິດ ຄວາມບໍ່ມີໂທດ ແລະການຢູ່ໂດຍຜາສຸກຈັກມີແກ່ເຮົາ" ພິຈາລະນາໂດຍແຍບຄາຍແລ້ວໃຊ້ສອຍເສນາສະນະເພື່ອປ້ອງກັນຄວາມ ໜາວ ຄວາມຮ້ອນ ເຮືອດ ຍຸງ ລົມ ແດດ ແລະສຳຜັດແຫ່ງສັດເລືອຄານ ເພື່ອບັນເທົາອັນຕະລາຍທີ່ເກີດ ຈາກລະດູ ແລະຍິນດີໃນການຫຼີກຫຼີກ ພິຈາລະນາໂດຍແຍບຄາຍແລ້ວໃຊ້ສອຍຄິລານະປັດໄຈ- ເພສັດຊະບໍຣິຂານ[໖] ເພື່ອບັນເທົາເວທະນາທີ່ເກີດຈາກອາພາດຕ່າງ ໆ ທີ່ເກີດຂຶ້ນແລ້ວ ເພື່ອບໍ່ມີຄວາມບຽດບຽນເປັນບ່ອນສຸດ[໖] ເຊິ່ງເມື່ອທ່ານບໍ່ໃຊ້ສອຍຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນກໍຈະເພິ່ງເກີດຂຶ້ນ ເມື່ອທ່ານໃຊ້ສອຍຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ຍ່ອມບໍ່ມີແກ່ທ່ານ ດ້ວຍອາການແນວນີ້

ພິກຂຸທັງຫຼາຍ ນີ້ຮຽກວ່າ ພິກຂຸລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການໃຊ້ສອຍ

ພິກຂຸລະອາສະວະທີ່ຈະເພິ່ງລະໄດ້ດ້ວຍຄວາມອົດກັ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາໂດຍແຍບຄາຍແລ້ວເປັນຜູ້ອົດທົນຕໍ່ຄວາມໜາວ ຄວາມຮ້ອນ ຄວາມຫິວກະຫາຍ ເຮືອດ ຍຸງ ລົມ ແດດ ແລະສຳຜັດແຫ່ງສັດເລືອຄານ ເປັນຜູ້ອົດກັ້ນຕໍ່ຄຳຫຍາບ ຄຳສົບສໍ່ ຕໍ່ເວທະນາທັງຫຼາຍອັນມີໃນຮ່າງກາຍເປັນທຸກ ກ້າແຂງ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດໄດ້ ເຊິ່ງເມື່ອທ່ານບໍ່ອົດກັ້ນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນກໍຈະເພິ່ງເກີດຂຶ້ນ ເມື່ອທ່ານອົດກັ້ນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນຍ່ອມບໍ່ມີແກ່ທ່ານ ດ້ວຍອາການແນວນີ້

ພິກຂຸທັງຫຼາຍ ນີ້ຮຽກວ່າ ພິກຂຸລະອາສະວະທີ່ຈະເພິ່ງລະໄດ້ດ້ວຍຄວາມອົດກັ້ນ

ພິກຂຸລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການເວັ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາໂດຍແຍບຄາຍແລ້ວເວັ້ນຊ້າງດຸຮ້າຍ ເວັ້ນມ້າດຸຮ້າຍ ເວັ້ນງົວດຸຮ້າຍ ເວັ້ນໝາດຸຮ້າຍ ເວັ້ນງູ ຫຼັກ ຕໍ ສະຖານທີ່ມີໜາມ ຂຸມ ເຫວ ນ້ຳສ້າງ ນ້ຳສ້າງສົກກະປົກ ແລະພິຈາລະນາໂດຍແຍບຄາຍແລ້ວເວັ້ນສະຖານທີ່ບໍ່ຄວນນັ່ງ ສະຖານທີ່ບໍ່ຄວນທ່ຽວໄປ ແລະມິດຊົ່ວ ທີ່ເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍລົງຄວາມເຫັນວ່າເປັນຖານະທີ່ເປັນ ບາບເສຍ ເຊິ່ງເມື່ອທ່ານບໍ່ເວັ້ນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນກໍຈະເພິ່ງ ເກີດຂຶ້ນ ເມື່ອທ່ານເວັ້ນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນຍ່ອມບໍ່ມີແກ່ທ່ານ ດ້ວຍອາການແນວນີ້

ພິກຂຸທັງຫຼາຍ ນີ້ຮຽກວ່າ ພິກຂຸລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການເວັ້ນ

ພິກຂຸລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການບັນເທົາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາໂດຍແຍບຄາຍແລ້ວບໍ່ຮັບການວິຕົກທີ່ເກີດຂຶ້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ພິຈາລະນາໂດຍແຍບຄາຍແລ້ວບໍ່ຮັບພະຍາບາດວິຕົກທີ່ເກີດຂຶ້ນ ໆລໆ ບໍ່ຮັບວິຫິງສາວິຕົກທີ່ເກີດຂຶ້ນ ໆລໆ ບໍ່ຮັບບາບ ອະກຸສົນທຳທີ່ເກີດຂຶ້ນແລ້ວເກີດຂຶ້ນອີກ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ເຊິ່ງເມື່ອທ່ານບໍ່ບັນເທົາຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ກໍຈະເພິ່ງເກີດຂຶ້ນ ເມື່ອທ່ານບັນເທົາຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນຍ່ອມບໍ່ມີແກ່ທ່ານ ດ້ວຍອາການແນວນີ້

ພິກຂຸທັງຫຼາຍ ນີ້ຮຽກວ່າ ພິກຂຸລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການບັນເທົາ

ພິກຂຸລະອາສະວະທີ່ຈະເພິ່ງລະໄດ້ດ້ວຍການຈະເລີນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາໂດຍແຍບຄາຍແລ້ວຈະເລີນສະຕິສຳໂພດຊົງທີ່ອາໄສວິເວກ໑ ອາໄສວິຣາຄະ (ຄວາມຄາຍກຳໜັດ) ອາໄສນິໂຣທ (ຄວາມດັບ) ນ້ອມໄປໃນການສະລະ ພິຈາລະນາໂດຍແຍບຄາຍແລ້ວຈະເລີນທຳມະວິຈະຍະສຳໂພດຊົງ ຯລຯ ຈະເລີນວິຣິຍະສຳໂພດຊົງ ຯລຯ ຈະເລີນປີຕິສຳໂພດຊົງ ຯລຯ ຈະເລີນປັດສັດທິສຳໂພດຊົງ ຯລຯ ຈະເລີນສະມາທິ- ສຳໂພດຊົງ ຯລຯ ຈະເລີນອຸເປກຂາສຳໂພດຊົງທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣທ ນ້ອມໄປໃນການສະລະ ເຊິ່ງເມື່ອທ່ານບໍ່ຈະເລີນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ກໍຈະເພີ່ງເກີດຂຶ້ນ ເມື່ອທ່ານຈະເລີນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນຍ່ອມບໍ່ມີແກ່ທ່ານ ດ້ວຍອາການແນວນີ້

ພິກຂຸທັງຫຼາຍ ນີ້ຮຽກວ່າ ພິກຂຸລະອາສະວະທີ່ຈະເພີ່ງລະໄດ້ດ້ວຍການຈະເລີນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

**ອາສະວະສູດທີ ໔ ຈົບ**

## ໕. ທາຣຸກຳມິກະສູດ

### ວ່າດ້ວຍຄະຫະບໍດີຊື່ທາຣຸກຳມິກະ

[໕໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຄິນຊະກາວະສະຖາຣາມ ຄັ້ງນັ້ນ ຄະຫະບໍດີ ຊື່ວ່າທາຣຸກຳມິກະ[໑] ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມດັ່ງນີ້ວ່າ

"ຄະຫະບໍດີ ທານປະຈຳຕະກູນທ່ານຍັງໃຫ້ຢູ່ບໍ"

ຄະຫະບໍດີຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ທານປະຈຳຕະກູນຂ້າພຣະອົງຍັງໃຫ້ຢູ່ ທັງທານນັ້ນຂ້າພຣະອົງໃຫ້ໃນພິກຂຸຜູ້ເປັນພຣະອະຣະຫັນ ຫຼືຜູ້ບັນລຸອະຣະຫັດຕະມັກ ຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ຜູ້ຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ຄະຫະບໍດີ ທ່ານຜູ້ເປັນຄະລິຫັດ ເປັນການໂພຄີ ຢູ່ຄອງເຮືອນ ນອນບຽດສຽດບຸດ ໃຊ້ສອຍຜົງແກ່ນຈັນຈາກແຄວັນກາສີ ທັດຊົງດອກໄມ້ ຂອງ

ຫອມ ແລະເຄື່ອງລູບທາ ຍິນດີຄຳແລະເງິນຢູ່ ເພິ່ງຮູ້ຂໍ້ນີ້ໄດ້ຍາກວ່າ "ເຫຼົ່ານີ້ຄືພຣະອະຣະຫັນ ເຫຼົ່ານີ້ຄືທ່ານຜູ້ບັນລຸອະຣະຫັດຕະມັກ"

ຄະຫະບໍດີ

໑. ຖ້າພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ຟຸ້ງຊ່ານ ຖືໂຕ ໂລເລ ປາກຮ້າຍ ເວົ້າພ່ຳເພື້ອ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ ເມື່ອເປັນແນວນີ້ ພິກຂຸນັ້ນເພິ່ງຖືກຕິຕຽນດ້ວຍເຫດນັ້ນ ຖ້າພິກຂຸຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ບໍ່ຟຸ້ງຊ່ານ ບໍ່ຖືໂຕ ບໍ່ໂລເລ ບໍ່ປາກຮ້າຍ ບໍ່ເວົ້າພ່ຳເພື້ອ ມີສະຕິໝັ້ນຄົງ ມີສຳປະຊັນຍະ ມີຈິດຕັ້ງໝັ້ນ ມີຈິດແນ່ວແນ່ ສັງລວມອິນຊີ ເມື່ອເປັນແນວນີ້ ພິກຂຸນັ້ນເພິ່ງໄດ້ຮັບການສັນເສີນດ້ວຍເຫດນັ້ນ

໒. ຖ້າພິກຂຸຜູ້ຢູ່ໃກ້ບ້ານ ເປັນຜູ້ຟຸ້ງຊ່ານ ຯລຯ ເມື່ອເປັນແນວນີ້ ພິກຂຸນັ້ນເພິ່ງຖືກຕິຕຽນດ້ວຍເຫດນັ້ນ ຖ້າພິກຂຸຜູ້ຢູ່ໃກ້ບ້ານ ເປັນຜູ້ບໍ່ຟຸ້ງຊ່ານ ຯລຯ ເມື່ອເປັນແນວນີ້ ພິກຂຸນັ້ນເພິ່ງໄດ້ຮັບການສັນເສີນດ້ວຍເຫດນັ້ນ

໓. ຖ້າພິກຂຸຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ເປັນຜູ້ຟຸ້ງຊ່ານ ຯລຯ ເມື່ອເປັນແນວນີ້ ພິກຂຸນັ້ນເພິ່ງຖືກຕິຕຽນດ້ວຍເຫດນັ້ນ ຖ້າພິກຂຸຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ເປັນຜູ້ບໍ່ຟຸ້ງຊ່ານ ຯລຯ ເມື່ອເປັນແນວນີ້ ພິກຂຸນັ້ນເພິ່ງໄດ້ຮັບການສັນເສີນດ້ວຍເຫດນັ້ນ

໔. ຖ້າພິກຂຸຜູ້ຮັບນິມົນ ເປັນຜູ້ຟຸ້ງຊ່ານ ຯລຯ ເມື່ອເປັນແນວນີ້ ພິກຂຸນັ້ນ ເພິ່ງຖືກຕິຕຽນດ້ວຍເຫດນັ້ນ ຖ້າພິກຂຸຮັບນິມົນ ເປັນຜູ້ບໍ່ຟຸ້ງຊ່ານ ຯລຯ ເມື່ອເປັນແນວນີ້ ພິກຂຸນັ້ນເພິ່ງໄດ້ຮັບການສັນເສີນດ້ວຍເຫດນັ້ນ

໕. ຖ້າພິກຂຸຜູ້ຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ເປັນຜູ້ຟຸ້ງຊ່ານ ຯລຯ ເມື່ອເປັນແນວນີ້ ພິກຂຸນັ້ນເພິ່ງຖືກຕິຕຽນດ້ວຍເຫດນັ້ນ ຖ້າພິກຂຸຜູ້ຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ເປັນຜູ້ບໍ່ຟຸ້ງຊ່ານ ຯລຯ ເມື່ອເປັນແນວນີ້ ພິກຂຸນັ້ນເພິ່ງໄດ້ຮັບການສັນເສີນດ້ວຍເຫດນັ້ນ

໖. ຖ້າພິກຂຸຜູ້ຊົງຄະຫະບໍດີຈີວອນ ເປັນຜູ້ຟຸ້ງຊ່ານ ຖືໂຕ ໂລເລ ປາກຮ້າຍ ເວົ້າພ່ຳເພື້ອ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ ເມື່ອເປັນແນວນີ້ ພິກຂຸນັ້ນເພິ່ງຖືກຕິຕຽນດ້ວຍເຫດນັ້ນ ຖ້າແມ່ນພິກຂຸຜູ້ຊົງຄະຫະບໍດີຈີວອນ ເປັນຜູ້ບໍ່ຟຸ້ງຊ່ານ ບໍ່ຖືໂຕ ບໍ່ໂລເລ ບໍ່ປາກຮ້າຍ ບໍ່ເວົ້າພ່ຳເພື້ອ ມີສະຕິໝັ້ນຄົງ ມີສຳປະຊັນຍະ ມີຈິດຕັ້ງໝັ້ນ ມີຈິດແນ່ວແນ່ ສັງລວມອິນຊີ ເມື່ອເປັນແນວນີ້ ພິກຂຸນັ້ນເພິ່ງໄດ້ຮັບການສັນເສີນດ້ວຍເຫດນັ້ນ

ຄະຫະບໍດີ ເຊີນທ່ານຖວາຍສັງຄະທານເທີ້ນ ເມື່ອທ່ານຖວາຍສັງຄະທານຢູ່ ຈິດຈັກເຫຼື້ອມໃສ ຫຼັງຈາກຕາຍແລ້ວທ່ານຈະໄປເກີດໃນສຸກຄະຕິໂລກສະຫວັນ"

ຄະຫະບໍດີຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກຖວາຍສັງຄະທານຕັ້ງແຕ່ມື້ນີ້ເປັນຕົ້ນໄປ"

**ທາຣຸກຳມິກະສູດທີ ໕ ຈົບ**

# ໖. ຫັດຖິສາຣີປຸດຕະສູດ

## ວ່າດ້ວຍທ່ານພຣະຈິດຕະຫັດຖິກະສາຣີບຸດ

[໖໐] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນ ພາຣານະສີ ສະໄໝນັ້ນແລ ພິກຂຸເຖຣະຈຳນວນຫຼາຍກັບຈາກບິນທະບາດພາຍຫຼັງສັນອາຫານສຳເລັດແລ້ວ ນັ່ງປະຊຸມສົນທະນາອະພິທຳມະກະຖາຢູ່ໃນໂຮງສັນ[១] ໄດ້ຍິນວ່າ ໃນບ່ອນປະຊຸມນັ້ນ ເມື່ອພິກຂຸຜູ້ເປັນເຖຣະກຳລັງສົນທະນາອະພິທຳມະກະຖາກັນຢູ່ ທ່ານພຣະຈິດຕະຫັດຖິກະສາຣີບຸດກໍເວົ້າສອດຂຶ້ນໃນລະຫວ່າງ

ລຳດັບນັ້ນ ທ່ານພຣະມະຫາໂກດຖິກະກໍໄດ້ກ່າວກັບທ່ານພຣະຈິດຕະຫັດຖິກະສາຣີບຸດວ່າ "ເມື່ອພິກຂຸຜູ້ເປັນເຖຣະກຳລັງສົນທະນາອະພິທຳມະກະຖາກັນຢູ່ ທ່ານຈິດຕະຫັດຖິກະສາຣີບຸດເວົ້າສອດຂຶ້ນໃນລະຫວ່າງ ຂໍໃຫ້ທ່ານຈິດຕະຫັດຖິກະສາຣີບຸດລໍຖ້າຈົນກວ່າພິກຂຸຜູ້ເປັນເຖຣະຈະສົນທະນາ ກັນຈົບ"

ເມື່ອທ່ານພຣະມະຫາໂກດຖິກະກ່າວແບບນີ້ແລ້ວ ພວກພິກຂຸຜູ້ເປັນສະຫາຍຂອງທ່ານພຣະ ຈິດຕະຫັດຖິກະສາຣີບຸດໄດ້ກ່າວກັບທ່ານມະຫາໂກດຖິກະວ່າ "ແມ່ນທ່ານພຣະມະຫາໂກດຖິກະກໍຢ່າຮຸກຮານທ່ານຈິດຕະຫັດຖິກະສາຣີບຸດ ຍ້ອນທ່ານຈິດຕະຫັດຖິສາຣີບຸດເປັນບັນດິດ ແລະທ່ານສາມາດກ່າວອະພິທຳມະກະຖາກັບພິກຂຸຜູ້ເປັນເຖຣະໄດ້"

ທ່ານພຣະມະຫາໂກດຖິກະກໍໄດ້ກ່າວວ່າ "ຜູ້ມີອາຍຸທັງຫຼາຍ ບຸກຄົນຜູ້ບໍ່ຮູ້ວາຣະຈິດຂອງຜູ້ອື່ນເພິ່ງຮູ້ຂໍ້ນີ້ໄດ້ຍາກ ຄື

໑. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ສະງົບສະງ່ຽມ ອ່ອນນ້ອມ ຮຽບຮ້ອຍ ຕະຫຼອດເວລາທີ່ຍັງອາໄສພຣະສາດສະດາຫຼືເພື່ອນພົມມະຈາຣີຜູ້ດຳລົງຢູ່ໃນຖານະເປັນຄູອົງໃດອົງໜຶ່ງຢູ່ ແຕ່

ເມື່ອໃດ ເຂົາຫຼີກໄປຈາກພຣະສາດສະດາ ຫຼີກໄປຈາກເພື່ອນພົມມະຈາຣີເຊິ່ງດຳລົງຢູ່ໃນຖານະເປັນຄູ ເມື່ອນັ້ນ ເຂົາຄຸກຄີ°ຢູ່ກັບເຫຼົ່າພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ເດຍຣະຖີ ແລະສາວົກຂອງເດຍຣະຖີ ເມື່ອເຂົາຄຸກຄີຢູ່ ປ່ອຍຈິດ ບໍ່ສັງລວມອິນຊີ ມັກໂອ້ອວດ ຣາຄະຈຶ່ງ ລົບກວນຈິດເຂົາ ເຂົາຖືກຣາຄະລົບກວນຈິດແລ້ວ ຍ່ອມບອກຄືນສິກຂາກັບມາເປັນຄະລຶຫັດ ຜູ້ມີອາຍຸທັງຫຼາຍ ປຽບຄືງົວທີ່ເຄີຍກິນເຂົ້າກ້າ ຖືກເຂົາມັດໄວ້ດ້ວຍເຊືອກຫຼືຂັງໄວ້ໃນຄອກ ຜູ້ໃດເພິ່ງກ່າວແນວນີ້ວ່າ "ບັດນີ້ ງົວໂຕທີ່ເຄີຍກິນເຂົ້າກ້ານີ້ຈັກບໍ່ລົງກິນເຂົ້າກ້າອີກ" ຜູ້ນັ້ນຊື່ວ່າກ່າວຖືກຕ້ອງບໍ ຜູ້ມີອາຍຸທັງຫຼາຍ ຂໍ້ນີ້ບໍ່ເປັນເຊັ່ນນັ້ນ ແຕ່ເປັນໄປໄດ້ທີ່ງົວທີ່ເຄີຍກິນເຂົ້າກ້າໂຕນັ້ນເພິ່ງດຶງເຊືອກຂາດຫຼືແຫກຄອກແລ້ວລົງໄປກິນເຂົ້າກ້າອີກ ສັນໃດ ຜູ້ມີອາຍຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ ກໍຄືກັນສັນນັ້ນ ເປັນຜູ້ສະຫງົບສະຫງ່ຽມ ອ່ອນນ້ອມ ຮຽບຮ້ອຍ ຕະຫຼອດເວລາທີ່ຍັງອາໄສພຣະສາດສະດາຫຼືເພື່ອນພົມມະຈາຣີຜູ້ດຳລົງຢູ່ໃນຖານະເປັນຄູອົງໃດອົງໜຶ່ງຢູ່ ແຕ່ເມື່ອໃດ ເຂົາຫຼີກໄປຈາກພຣະສາດສະດາ ຫຼີກໄປຈາກເພື່ອນພົມມະຈາຣີເຊິ່ງດຳລົງຢູ່ໃນຖານະເປັນຄູ ເມື່ອນັ້ນ ເຂົາຄຸກຄີຢູ່ກັບເຫຼົ່າພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ເດຍຣະຖີ ແລະສາວົກຂອງເດຍຣະຖີ ເມື່ອເຂົາຄຸກຄີຢູ່ ປ່ອຍຈິດ ບໍ່ສັງລວມອິນຊີ ມັກໂອ້ອວດ ຣາຄະຈຶ່ງລົບກວນຈິດເຂົາ ເຂົາຖືກຣາຄະລົບກວນຈິດແລ້ວ ຍ່ອມບອກຄືນສິກຂາກັບມາເປັນຄະລຶຫັດ

໔. ບຸກຄົນລາງຄົນໃນໂລກນີ້ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ມີປີຕິແລະສຸກອັນເກີດຈາກວິເວກຢູ່ ເຂົາກ່າວວ່າ "ເຮົາໄດ້ປະຖົມຊານ" ແຕ່ຍັງຄຸກຄີຢູ່ກັບພວກພິກຂຸ ຯລຯ ຍ່ອມບອກຄືນສິກຂາກັບມາເປັນຄະລຶຫັດ ຜູ້ມີອາຍຸທັງຫຼາຍ ປຽບຄືຝົນໝາກເຫັບ ຕົກທີ່ທາງໃຫຍ່ສີ່ແຍກ ເພິ່ງເຮັດຝຸ່ນໃຫ້ຫາຍໄປ ຜາກົດເປັນທາງມື່ນ ຜູ້ໃດເພິ່ງກ່າວແນວນີ້ວ່າ "ບັດນີ້ ຝຸ່ນຈັກບໍ່ຜາກົດທີ່ທາງໃຫຍ່ສີ່ແຍກນັ້ນອີກ" ຜູ້ນັ້ນຊື່ວ່າກ່າວຖືກຕ້ອງບໍ ຜູ້ມີອາຍຸທັງຫຼາຍ ຂໍ້ນີ້ບໍ່ເປັນເຊັ່ນນັ້ນ ແຕ່ເປັນໄປໄດ້ທີ່ມະນຸດ ງົວ ຫຼືສັດລ້ຽງ ເພິ່ງຢຽບນ້ຳທີ່ທາງໃຫຍ່ສີ່ແຍກນັ້ນ ຫຼືລົມແລະແດດເພິ່ງແຜດເຜົາ ໃຫ້ແຫ້ງ ເມື່ອເປັນແນວນັ້ນຝຸ່ນກໍເພິ່ງຜາກົດອີກໄດ້ ສັນໃດ ຜູ້ມີອາຍຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ ກໍຄືກັນສັນນັ້ນ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກວິຈານ ມີປີຕິແລະສຸກ ອັນເກີດຈາກວິເວກຢູ່ ເຂົາກ່າວວ່າ "ເຮົາໄດ້ປະຖົມຊານ" ແຕ່ຍັງຄຸກຄີຢູ່ກັບພວກພິກຂຸ ຯລຯ ຍ່ອມບອກຄືນສິກຂາກັບມາເປັນຄະລຶຫັດ

໕. ບຸກຄົນລາງຄົນໃນໂລກນີ້ ຍ້ອນວິຕົກວິຈານສະຫງົບລະງັບໄປ ບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ເຂົາກ່າວວ່າ "ເຮົາໄດ້ທຸຕິຍະຊານ" ແຕ່ຍັງຄຸກຄີຢູ່ກັບພວກພິກຂຸ ຯລຯ ຍ່ອມບອກຄືນ ສິກຂາກັບມາເປັນຄະລຶຫັດ ຜູ້ມີອາຍຸທັງຫຼາຍ ປຽບຄືຝົນໝາກເຫັບຕົກລົງທີ່ໜອງ

ໃຫຍ່ບໍ່ໄກບ້ານຫຼືນິຄົມ ເພິ່ງຍັງຫອຍໂຂ່ງ ຫອຍກາບ ກ້ອນຫີນ ແລະກະເບື້ອງຖ້ວຍໃຫ້ໝົດໄປ ຜູ້ໃດເພິ່ງກ່າວແນວນີ້ວ່າ "ບັດນີ້ ຫອຍໂຂ່ງ ຫອຍກາບ ກ້ອນຫີນ ແລະກະເບື້ອງຖ້ວຍ ຈັກບໍ່ຜາກົດໃນບຶງນັ້ນອີກ" ຜູ້ນັ້ນຊື່ວ່າກ່າວຖືກຕ້ອງບໍ ຜູ້ມີອາຍຸທັງຫຼາຍ ຂໍ້ນີ້ບໍ່ເປັນເຊັ່ນນັ້ນ ແຕ່ເປັນໄປໄດ້ທີ່ມະນຸດ ງົວ ແລະສັດລ້ຽງເພິ່ງ ດື່ມນ້ຳໃນບຶງນັ້ນ ຫຼືລົມແດດເພິ່ງແຜດເຜົາໃຫ້ແຫ້ງໄປ ເມື່ອເປັນແນວນັ້ນ ຫອຍໂຂ່ງ ຫອຍກາບ ກ້ອນຫີນ ແລະກະເບື້ອງຖ້ວຍກໍເພິ່ງຜາກົດໄດ້ອີກ ສັນໃດ ຜູ້ມີອາຍຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ກໍຄືກັນສັນນັ້ນ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານ ມີຄວາມຜ່ອງໃສ ໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ເຂົາກ່າວວ່າ "ເຮົາໄດ້ທຸຕິຍະຊານ" ແຕ່ຍັງຄຸກຄີຢູ່ກັບພວກພິກຂຸ ຯລຯ ຍ່ອມບອກຄືນສິກຂາກັບມາເປັນຄະລຶຫັດ

໔. ບຸກຄົນລາງຄົນໃນໂລກນີ້ ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ເຂົາກ່າວວ່າ "ເຮົາໄດ້ຕະຕິຍະຊານ" ແຕ່ຍັງຄຸກຄີຢູ່ກັບພວກພິກຂຸ ຯລຯ ຍ່ອມບອກ ຄືນສິກຂາກັບມາເປັນຄະລຶຫັດ ຜູ້ມີອາຍຸທັງຫຼາຍ ປຽບຄືອາຫານທີ່ແຊບຄືນ ບໍ່ເພິ່ງຍັງບຸຣຸດຜູ້ມັກບໍຣິໂພກອາຫານທີ່ປະນີດໃຫ້ຍິນດີໄດ້ ຜູ້ໃດເພິ່ງກ່າວແນວນີ້ວ່າ "ບັດນີ້ ບຸຣຸດນັ້ນຈັກບໍ່ພໍໃຈອາຫານອີກແນ່ "ຜູ້ນັ້ນຊື່ວ່າກ່າວຖືກຕ້ອງບໍ ຜູ້ມີອາຍຸທັງຫຼາຍ ຂໍ້ນີ້ບໍ່ເປັນເຊັ່ນນັ້ນ ແຕ່ເປັນໄປໄດ້ທີ່ອາຫານອື່ນຈັກບໍ່ຍັງບຸຣຸດນັ້ນຜູ້ມັກບໍຣິໂພກອາຫານທີ່ປະນີດ ໃຫ້ຍິນດີໄດ້ຕະຫຼອດເວລາທີ່ຣົດອາຫານນັ້ນຈັກດຳລົງຢູ່ໃນຮ່າງກາຍຂອງເຂົາ ແຕ່ເມື່ອໃດ ຣົດອາຫານນັ້ນຈັກໝົດໄປ ເມື່ອນັ້ນ ອາຫານນັ້ນກໍເພິ່ງຍັງເຂົາໃຫ້ຍິນດີອີກໄດ້ ສັນໃດ ຜູ້ມີອາຍຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ກໍຄືກັນສັນນັ້ນ ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ" ເຂົາກ່າວວ່າ "ເຮົາໄດ້ຕະຕິຍະຊານ" ແຕ່ຄຸກຄີຢູ່ກັບພວກພິກຂຸ ຯລຯ ຍ່ອມບອກຄືນສິກຂາກັບມາເປັນຄະລຶຫັດ

໕. ບຸກຄົນລາງຄົນໃນໂລກນີ້ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະ ໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ເຂົາກ່າວວ່າ "ເຮົາໄດ້ຈະຕຸດຖະຊານ" ແຕ່ຍັງຄຸກຄີຢູ່ກັບພວກພິກຂຸ ຯລຯ ຍ່ອມບອກຄືນສິກຂາກັບມາເປັນຄະລຶຫັດ ຜູ້ມີອາຍຸ ປຽບຄືແມ່ນ້ຳໃກ້ພູບໍ່ມີລົມ ປາສະຈາກຄື້ນ ຜູ້ໃດເພິ່ງກ່າວແນວນີ້ວ່າ "ບັດນີ້ ຄື້ນຈັກບໍ່ຜາກົດທີ່ແມ່ນ້ຳ ນັ້ນອີກ" ຜູ້ນັ້ນຊື່ວ່າກ່າວຖືກຕ້ອງບໍ ຜູ້ມີອາຍຸທັງຫຼາຍ ຂໍ້ນີ້ບໍ່ເປັນເຊັ່ນນັ້ນ ແຕ່ເປັນໄປໄດ້ທີ່ລົມຝົນອັນແຮງກ້າເພິ່ງພັດມາຈາກທິດຕາເວັນອອກ ເຮັດໃຫ້ເກີດຄື້ນທີ່ແມ່ນ້ຳນັ້ນ ລົມຝົນທີ່ພັດມາຈາກທິດຕາເວັນຕົກ ຯລຯ ທິດເໜືອ ຯລຯ ທິດໃຕ້ ກໍເພິ່ງເຮັດໃຫ້ເກີດຄື້ນທີ່ແມ່ນ້ຳນັ້ນໄດ້ ສັນໃດ ຜູ້ມີອາຍຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ ກໍຄືກັນສັນນັ້ນ

ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ເຂົາກ່າວວ່າ "ເຮົາໄດ້ຈະຕຸດຖະຊານ" ແຕ່ຍັງຄຸກຄີຢູ່ກັບພວກພິກຂຸ ຍ່ອມບອກຄືນສິກຂາກັບມາເປັນຄະລືຫັດ

໗. ບຸກຄົນລາງຄົນໃນໂລກນີ້ ຍ້ອນບໍ່ມະນະສິການເຖິງນິມິດທັງປວງ ຈຶ່ງບັນລຸເຈໂຕສະມາທິທີ່ບໍ່ມີນິມິດຢູ່ ເຂົາກ່າວວ່າ "ເຮົາໄດ້ເຈໂຕສະມາທິທີ່ບໍ່ມີນິມິດ" ແຕ່ຍັງຄຸກຄີຢູ່ກັບພວກພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ພວກເດຍຣະຖີ ສາວົກຂອງເດຍຣະຖີ ເມື່ອເຂົາຄຸກຄີຢູ່ ປ່ອຍຈິດ ບໍ່ສັງລວມອິນຊີ ມັກເວົ້າຄຸຍ ຣາຄະຈຶ່ງລົບກວນຈິດເຂົາ ເຂົາຖືກຣາຄະລົບກວນ ຈິດແລ້ວຍ່ອມບອກຄືນສິກຂາ ກັບມາເປັນຄະລືຫັດ ຜູ້ມີອາຍຸທັງຫຼາຍ ປຽບຄືພຣະຣາຊາ ຫຼື ມະຫາອຳມາດຂອງພຣະຣາຊາ ຍົກກອງທັບ ໔ ເຫຼົ່າເດີນທາງໄກ ໄປພັກແຮມຢູ່ຕາມປ່າແຫ່ງໜຶ່ງ ໃນປ່ານັ້ນ ສຽງຈັກຈັ່ນເລໄລເພິ່ງງຽບໄປຍ້ອນສຽງຊ້າງ ສຽງມ້າ ສຽງລົດ ສຽງພົນຍ່າງ ສຽງກົກກ້ອງ ແຫ່ງກອງ ບັນເດາະ ຫອຍສັງ ແລະພິນ ຜູ້ໃດເພິ່ງກ່າວແນວນີ້ວ່າ "ບັດນີ້ ສຽງຈັກຈັ່ນເລໄລຈັກບໍ່ຜາກົດທີ່ປ່ານັ້ນອີກ" ຜູ້ນັ້ນຊື່ວ່າກ່າວຖືກຕ້ອງບໍ ຜູ້ມີອາຍຸທັງຫຼາຍ ຂໍ້ນີ້ບໍ່ເປັນເຊັ່ນນັ້ນ ແຕ່ເປັນໄປໄດ້ທີ່ ເມື່ອໃດ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ສະເດັດຫຼີກໄປຈາກປ່ານັ້ນ ເມື່ອນັ້ນ ສຽງຈັກຈັ່ນເລໄລ ກໍເພິ່ງຜາກົດໄດ້ອີກ ສັນໃດ ຜູ້ມີອາຍຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ ກໍຄືກັນສັນນັ້ນ ຍ້ອນບໍ່ມະນະສິການເຖິງນິມິດທັງປວງ ບັນລຸເຈໂຕສະມາທິຢູ່ ເຂົາກ່າວວ່າ "ເຮົາໄດ້ເຈໂຕສະມາທິອັນບໍ່ມີນິມິດ" ແຕ່ຍັງຄຸກຄີຢູ່ກັບພວກພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ພວກເດຍຣະຖີ ສາວົກຂອງເດຍຣະຖີ ເມື່ອເຂົາຄຸກຄີຢູ່ ປ່ອຍຈິດ ບໍ່ສັງລວມອິນຊີ ມັກເວົ້າຄຸຍ ຣາຄະຈຶ່ງລົບກວນຈິດເຂົາ ເຂົາຖືກຣາຄະລົບກວນຈິດແລ້ວ ຍ່ອມບອກຄືນສິກຂາກັບມາເປັນຄະລືຫັດ"

ຕໍ່ມາ ທ່ານພຣະຈິດຕະຫັດຖິກະສາຣີບຸດ ບອກຄືນສິກຂາກັບມາເປັນຄະລືຫັດ ພວກພິກຂຸ ຜູ້ເປັນສະຫາຍຂອງຈິດຕະຫັດຖິກະສາຣີບຸດໄດ້ເຂົ້າໄປຫາທ່ານພຣະມະຫາໂກດຖິກະຮອດບ່ອນຢູ່ແລ້ວຖາມວ່າ "ທ່ານພຣະມະຫາໂກດຖິກະກຳນົດຮູ້ໃຈບຸຣຸດຊື່ຈິດຕະຫັດຖິກະສາຣີບຸດດ້ວຍໃຈວ່າ "ບຸຣຸດຊື່ ຈິດຕະຫັດຖິກະສາຣີບຸດເປັນຜູ້ໄດ້ວິຫານສະມາບັດເຫຼົ່ານີ້ ໆ ແລະຈັກບອກຄືນສິກຂາກັບມາເປັນ ຄະລືຫັດ" ຫຼືເທວະດາທັງຫຼາຍແຈ້ງເນື້ອຄວາມນີ້ວ່າ "ຂ້າແດ່ທ່ານຜູ້ຈະເລີນ ບຸຣຸດຊື່ວ່າ ຈິດຕະຫັດຖິກະສາຣີບຸດ ເປັນຜູ້ໄດ້ວິຫານສະມາບັດເຫຼົ່ານີ້ ໆ ແລະຈັກບອກຄືນສິກຂາກັບມາເປັນຄະລືຫັດ"

ທ່ານພຣະມະຫາໂກດຖິກະກ່າວວ່າ "ຜູ້ມີອາຍຸທັງຫຼາຍ ຂ້າພະເຈົ້າໄດ້ກຳນົດຮູ້ໃຈບຸຣຸດຊື່ວ່າ ຈິດຕະຫັດຖິກະສາຣີບຸດດ້ວຍໃຈວ່າ "ເປັນຜູ້ໄດ້ວິຫານສະມາບັດເຫຼົ່ານີ້ ໆ ແລະຈັກບອກຄືນສິກຂາກັບມາເປັນຄະລືຫັດ" ແມ່ນເທວະດາກໍບອກເນື້ອຄວາມນີ້ແກ່ຂ້າພະເຈົ້າ"

ລຳດັບນັ້ນ ພວກພິກຂຸຜູ້ເປັນສະຫາຍຂອງບຸຣຸດຊື່ຈິດຕະຫັດຖິກະສາຣີບຸດໄດ້ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດຊື່ຈິດຕະຫັດຖິກະສາຣີບຸດເປັນຜູ້ໄດ້ວິຫານສະມາບັດເຫຼົ່ານີ້ ໆ ແລະໄດ້ບອກຄືນສິກຂາກັບມາເປັນຄະລືຫັດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ບໍ່ດົນປານໃດ ບຸຣຸດຊື່ຈິດຕະຫັດຖິກະສາຣີບຸດຈັກຣະນຶກເຖິງຄຸນແຫ່ງເນກຂຳມະໄດ້"

ຕໍ່ມາ ບໍ່ດົນປານໃດ ຈິດຕະຫັດຖິກະສາຣີບຸດແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ ເມື່ອຈິດຕະຫັດຖິກະສາຣີບຸດໄດ້ບັນພະຊາອຸປະສົມບົດແລ້ວບໍ່ດົນ ຫຼີກໄປຢູ່ຜູ້ດຽວ ບໍ່ຜະໝາດ[๑] ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ[๒]ອັນເປັນບ່ອນສຸດແຫ່ງພົມມະຈັນທີ່ກຸນລະບຸດທັງຫຼາຍ ຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນຮູ້ແຈ້ງວ່າ "ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ເປັນອັນວ່າ ທ່ານພຣະຈິດຕະຫັດຖິກະສາຣີບຸດ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

**ຫັດຖິສາຣີປຸດຕະສູດທີ ໖ ຈົບ**

## ໗. ມັດເຊສູດ

## ວ່າດ້ວຍສ່ວນທ່າມກາງ

[໖໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ປ່າອິສິປະຕະນະມະຣຶຄະທາຍະວັນ ເຂດນະຄອນ ພາຣານະສີ ສະໄໝນັ້ນແລ ເມື່ອພິກຂຸເຖຣະຈຳນວນຫຼາຍກັບຈາກບິນທະບາດພາຍຫຼັງສັນອາຫານສຳເລັດແລ້ວ ນັ່ງປະຊຸມກັນທີ່ໂຮງສັນ ໄດ້ສົນທະນາກັນຂຶ້ນໃນລະຫວ່າງວ່າຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ໃນຕິດສະເມດເຕີຍຍະປັນຫານິດເທດ[๓]ປາຣາຍະນະວັກ ວ່າ

ຜູ້ໃດ ຮູ້ແຈ້ງເຊິ່ງສ່ວນສຸດທັງ ໔ ດ້ານແລ້ວ
ບໍ່ຢຶດຕິດໃນທ່າມກາງດ້ວຍມັນຕາ[໒]
ເຮົາຮຽກຜູ້ນັ້ນວ່າ ເປັນມະຫາບຸຣຸດ
ຜູ້ນັ້ນຊື່ວ່າ ລ່ວງພົ້ນເຄື່ອງຮ້ອຍຮັດ[໓]ໃນໂລກນີ້ໄດ້

ເມື່ອພິກຂຸທັງຫຼາຍຖາມກັນແນວນີ້ວ່າ "ຜູ້ມີອາຍຸທັງຫຼາຍ ສ່ວນສຸດດ້ານໜຶ່ງ ຄືອັນໃດ ສ່ວນສຸດອີກດ້ານໜຶ່ງ ຄືອັນໃດ ທ່າມກາງ ຄືອັນໃດ ເຄື່ອງຮ້ອຍຮັດ ຄືອັນໃດ"

ພິກຂຸອົງໜຶ່ງໄດ້ກ່າວກັບພິກຂຸຜູ້ເຖຣະທັງຫຼາຍວ່າ "ຜູ້ມີອາຍຸທັງຫຼາຍ ຜັດສະ[໑]ເປັນສ່ວນສຸດດ້ານໜຶ່ງ ເຫດເກີດຜັດສະ[໒]ເປັນສ່ວນສຸດອີກດ້ານໜຶ່ງ ຄວາມດັບຜັດສະ[໓]ຢູ່ທ່າມກາງ ຕັນຫາຈັດເປັນເຄື່ອງຮ້ອຍຮັດ ຍ້ອນຕັນຫາຍ່ອມຮ້ອຍຮັດຜັດສະແລະເຫດເກີດຜັດສະນັ້ນໄວ້ ຍ້ອນເປັນບ່ອນເກີດຂຶ້ນແຫ່ງພົບນັ້ນ ໆ ດ້ວຍເຫດພຽງທໍ່ນີ້ ພິກຂຸຊື່ວ່າຮູ້ຍິ່ງໃນທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ຍ່ອມເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ"

ເມື່ອພິກຂຸນັ້ນກ່າວແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ກ່າວກັບພິກຂຸເຖຣະທັງຫຼາຍວ່າ "ຜູ້ມີອາຍຸທັງຫຼາຍ ອະດີດເປັນສ່ວນສຸດດ້ານໜຶ່ງ ອະນາຄົດເປັນສ່ວນສຸດອີກດ້ານໜຶ່ງ ປັດຈຸບັນຢູ່ທ່າມກາງ ຕັນຫາຈັດເປັນເຄື່ອງຮ້ອຍຮັດ ຍ້ອນຕັນຫາຍ່ອມຮ້ອຍຮັດອະດີດ ອະນາຄົດ ແລະປັດຈຸບັນນັ້ນໄວ້ ຍ້ອນເປັນບ່ອນເກີດຂຶ້ນແຫ່ງພົບນັ້ນ ໆ ດ້ວຍເຫດພຽງທໍ່ນີ້ ພິກຂຸຊື່ວ່າຮູ້ຍິ່ງໃນທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ຍ່ອມເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ"

ເມື່ອພິກຂຸນັ້ນກ່າວແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ກ່າວກັບພິກຂຸເຖຣະທັງຫຼາຍວ່າ "ຜູ້ມີອາຍຸທັງຫຼາຍ ສຸກຂະເວທະນາເປັນສ່ວນສຸດດ້ານໜຶ່ງ ທຸກຂະເວທະນາເປັນສ່ວນສຸດອີກດ້ານໜຶ່ງ ອະທຸກຂະມະສຸກຂະເວທະນາຢູ່ທ່າມກາງ ຕັນຫາຈັດເປັນເຄື່ອງຮ້ອຍຮັດ ຍ້ອນຕັນຫາຍ່ອມຮ້ອຍຮັດສຸກຂະເວທະນາ ທຸກຂະເວທະນາ ແລະອະທຸກຂະມະສຸກຂະເວທະນານັ້ນໄວ້ ຍ້ອນເປັນບ່ອນເກີດຂຶ້ນແຫ່ງພົບນັ້ນ ໆ ດ້ວຍເຫດພຽງທໍ່ນີ້ ພິກຂຸຊື່ວ່າຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ຍ່ອມເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ"

ເມື່ອພິກຂຸນັ້ນກ່າວແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ກ່າວກັບພິກຂຸເຖຣະທັງຫຼາຍວ່າ "ຜູ້ມີອາຍຸທັງຫຼາຍ ນາມເປັນສ່ວນສຸດດ້ານໜຶ່ງ ຮູບເປັນສ່ວນສຸດອີກດ້ານໜຶ່ງ ວິນຍານ໑ ຢູ່ທ່າມກາງ ຕັນຫາຈັດເປັນເຄື່ອງຮ້ອຍຮັດ ຍ້ອນຕັນຫາຍ່ອມຮ້ອຍຮັດນາມ ຮູບ ແລະວິນຍານນັ້ນໄວ້ ຍ້ອນເປັນທີ່ເກີດຂຶ້ນແຫ່ງພົບນັ້ນ ໆ ດ້ວຍເຫດພຽງທໍ່ນີ້ ພິກຂຸຊື່ວ່າຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່

ຄວນກຳນົດຮູ້ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ຍ່ອມເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ"

ເມື່ອພິກຂຸນັ້ນກ່າວແນວນີ້ແລ້ວ ພິກຂຸອີງໜຶ່ງໄດ້ກ່າວກັບພິກຂຸເຖຣະທັງຫຼາຍວ່າ "ຜູ້ມີອາຍຸທັງຫຼາຍ ອາຍະຕະນະພາຍໃນ ໖ ເປັນສ່ວນສຸດດ້ານໜຶ່ງ ອາຍະຕະນະພາຍນອກ ໖ ເປັນສ່ວນສຸດອີກດ້ານໜຶ່ງ ວິນຍານຢູ່ທ່າມກາງ ຕັນຫາຈັດເປັນເຄື່ອງຮ້ອຍຮັດ ຍ້ອນຕັນຫາຍ່ອມຮ້ອຍຮັດອາຍະຕະນະພາຍໃນ ໖ ອາຍະຕະນະພາຍນອກ ໖ ແລະວິນຍານນັ້ນໄວ້ ຍ້ອນເປັນບ່ອນເກີດຂຶ້ນແຫ່ງພົບນັ້ນ ໆ ດ້ວຍເຫດພຽງທໍ່ນີ້ ພິກຂຸຊື່ວ່າຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ຍ່ອມເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ"

ເມື່ອພິກຂຸນັ້ນກ່າວແນວນີ້ແລ້ວ ພິກຂຸອີງໜຶ່ງໄດ້ກ່າວກັບພິກຂຸເຖຣະທັງຫຼາຍວ່າ "ຜູ້ມີອາຍຸທັງຫຼາຍ ຈັກກາຍະ໌ເປັນສ່ວນສຸດດ້ານໜຶ່ງ ເຫດເກີດຈັກກາຍະເປັນສ່ວນສຸດອີກດ້ານໜຶ່ງ ຄວາມດັບຈັກກາຍະຢູ່ທ່າມກາງ ຕັນຫາຈັດເປັນເຄື່ອງຮ້ອຍຮັດ ຍ້ອນຕັນຫາຍ່ອມຮ້ອຍຮັດຈັກກາຍະ ເຫດເກີດຈັກກາຍະ ແລະຄວາມດັບຈັກກາຍະນັ້ນໄວ້ ຍ້ອນເປັນບ່ອນເກີດຂຶ້ນແຫ່ງພົບນັ້ນ ໆ ດ້ວຍເຫດພຽງທໍ່ນີ້ ພິກຂຸຊື່ວ່າຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ຍ່ອມເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ"

ເມື່ອພິກຂຸນັ້ນກ່າວແນວນີ້ແລ້ວ ພິກຂຸອີງໜຶ່ງໄດ້ກ່າວກັບພິກຂຸເຖຣະທັງຫຼາຍວ່າ "ຜູ້ມີອາຍຸທັງຫຼາຍ ພວກເຮົາທ່ຽວພະຍາກອນຕາມປະຕິພານຂອງຕົນ ມາເທີ້ນ ພວກເຮົາຈັກພາກັນໄປເຝົ້າພຣະຜູ້ມີພຣະພາກເຈົ້າ ແລ້ວຂາບທູນເນື້ອຄວາມນີ້ໃຫ້ຊົງຮູ້ ພຣະຜູ້ມີພຣະພາກເຈົ້າຈັກຊົງພະຍາກອນແກ່ພວກເຮົາ ພວກເຮົາກໍຈັກຊົງຈຳໄວ້ຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນນັ້ນ

ພິກຂຸເຖຣະທັງຫຼາຍຮັບຄຳຂອງພິກຂຸນັ້ນແລ້ວ ລຳດັບນັ້ນ ພິກຂຸເຖຣະທັງຫຼາຍໄດ້ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນຄຳສົນທະນາທັງໝົດແດ່ພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຄຳຂອງໃຜນໍກ່າວໄດ້ມ່ອນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ທ່ານທັງໝົດກ່າວດີແລ້ວຕາມເຫດນັ້ນ ໆ ແຕ່ຂໍ້ຄວາມທີ່ເຮົາມຸ້ງກ່າວໄວ້ໃນຕິດສະເມດເຕີຍຍະປັນຫານິດເທດ ປາຣາຍະນະວັກວ່າ

ຜູ້ໃດຮູ້ແຈ້ງເຊິ່ງສ່ວນສຸດທັງ ໔ ດ້ານແລ້ວ
ບໍ່ຢຶດຕິດໃນທ່າມກາງດ້ວຍມັນຕາ
ເຮົາຮຽກຜູ້ນັ້ນວ່າ ເປັນມະຫາບຸຣຸດ
ຜູ້ນັ້ນຊື່ວ່າລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້

ທ່ານທັງຫຼາຍ ຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື່ອງນີ້ ວ່າ

"ພິກຂຸທັງຫຼາຍ ຜັດສະເປັນສ່ວນສຸດດ້ານໜຶ່ງ ເຫດເກີດຜັດສະເປັນສ່ວນສຸດອີກ ດ້ານໜຶ່ງ ຄວາມດັບຜັດສະຢູ່ທ່າມກາງ ຕັນຫາຈັດເປັນເຄື່ອງຮ້ອຍຮັດ ຍ້ອນຕັນຫາຍ່ອມຮ້ອຍຮັດຜັດສະ ແລະເຫດເກີດຜັດສະນັ້ນໄວ້ ຍ້ອນເປັນບ່ອນເກີດຂຶ້ນແຫ່ງພົບນັ້ນ ໆ ດ້ວຍເຫດ ພຽງທີ່ນີ້ພິກຂຸຊື່ວ່າຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກຳນົດຮູ້ທຳທີ່ຄວນກຳນົດຮູ້ ຍ່ອມເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ"

**ມັດເຊສູດທີ ໆ ຈົບ**

## ໗. ປຸຣິສິນທະຣິຍະຍານະສູດ

## ວ່າດ້ວຍຍານເປັນເຄື່ອງຮູ້ອິນຊີຂອງບຸກຄົນ

[໖໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງນິຄົມຂອງແຄວ້ນໂກສົນຊື່ທັນຖະກັບປະກະ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງແວ່ລົງຈາກຫົນທາງ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ທີ່ເຫງົ້າໄມ້ຕົ້ນໜຶ່ງ ແລະພິກຂຸເຫຼົ່ານັ້ນ ໄດ້ພາກັນເຂົ້າໄປສູ່ນິຄົມຊື່ທັນຖະກັບປະກະ ເພື່ອສະແຫວງຫາບ່ອນພັກ

ຄັ້ງນັ້ນ ທ່ານພຣະອານົນພ້ອມດ້ວຍພິກຂຸຈຳນວນຫຼາຍ ໄດ້ໄປສູ່ແມ່ນ້ຳອະຈິຣະວະດີເພື່ອອາບນ້ຳ ເມື່ອອາບນ້ຳສຳເລັດແລ້ວ ໄດ້ຂຶ້ນມານຸ່ງຜ້າຜືນດຽວຢືນຕາກໂຕຢູ່ ລຳດັບນັ້ນ ພິກຂຸອົງໜຶ່ງໄດ້ເຂົ້າໄປຫາທ່ານພຣະອານົນແລ້ວຖາມວ່າ "ທ່ານອານົນ ພຣະຜູ້ມີພຣະພາກເຈົ້າຊົງກຳນົດຮູ້ເຫດທັງໝົດດ້ວຍພຣະຫະໄທແລ້ວບໍ ຈຶ່ງຊົງພະຍາກອນພຣະເທວະທັດວ່າ "ເທວະທັດຈະຕ້ອງເກີດໃນອະບາຍ ຕົກນະຮົກ ດຳລົງຢູ່ຕະຫຼອດກັບ ແກ້ໄຂບໍ່ໄດ້" ຫຼືວ່າພຣະຜູ້ມີພຣະພາກເຈົ້າ ຊົງກຳນົດຮູ້ເຫດບາງຢ່າງທີ່ນັ້ນ ຈຶ່ງໄດ້ຊົງພະຍາກອນພຣະເທວະທັດແນວນີ້"

ທ່ານພຣະອານົນຕອບວ່າ "ຜູ້ມີອາຍຸ ຂໍ້ນີ້ ພຣະຜູ້ມີພຣະພາກເຈົ້າໄດ້ພະຍາກອນໄວ້ແນວນີ້ແລ"

ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂອກາດ ຂ້າພຣະອົງພ້ອມດ້ວຍພິກຂຸຈຳນວນຫຼາຍໄດ້ໄປສູ່ແມ່ນ້ຳອະຈິຣະ

ວະດີເພື່ອອາບນ້ຳ ເມື່ອອາບນ້ຳສຳເລັດແລ້ວ ໄດ້ຂຶ້ນມານຸ່ງຜ້າຜືນດຽວຢືນຕາກໂຕຢູ່ ລຳດັບນັ້ນ ພິກຂຸອົງໜຶ່ງໄດ້ເຂົ້າມາຫາຂ້າພຣະອົງແລ້ວຖາມວ່າ ທ່ານອານົນ ພຣະຜູ້ມີພຣະພາກເຈົ້າຊົງ ກຳນົດຮູ້ເຫດທັງໝົດດ້ວຍພຣະຫະໄທແລ້ວບໍ ຈຶ່ງຊົງພະຍາກອນພຣະເທວະທັດວ່າ "ເທວະທັດ ຈະຕ້ອງເກີດໃນອະບາຍ ຕົກນະຣົກ ດຳລົງຢູ່ຕະຫຼອດກັບ ແກ້ໄຂບໍ່ໄດ້ ຫຼືວ່າພຣະຜູ້ມີພຣະພາກ ເຈົ້າ ຊົງກຳນົດຮູ້ເຫດບາງຢ່າງທີ່ນັ້ນ ຈຶ່ງໄດ້ຊົງພະຍາກອນພຣະເທວະທັດແນວນີ້" ເມື່ອພິກຂຸນັ້ນ ກ່າວແນວນີ້ແລ້ວ ຂ້າພຣະອົງໄດ້ກ່າວກັບພິກຂຸອົງນັ້ນວ່າ "ຜູ້ມີອາຍຸ ຂໍ້ນີ້ພຣະຜູ້ມີພຣະພາກໄດ້ ຊົງພະຍາກອນໄວ້ແນວນີ້ແລ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ພິກຂຸອົງນັ້ນຄົງເປັນພິກຂຸໃໝ່ ບວດໄດ້ບໍ່ດົນ ຫຼື ວ່າເປັນພິກຂຸເຖຣະ ແຕ່ໂງ່ຈ້າ ບໍ່ແຫຼມຄົມ ຍ້ອນຂໍ້ທີ່ເຮົາພະຍາກອນວ່າເປັນໜຶ່ງ ຈັກເປັນສອງໄດ້ ແນວໃດ ອານົນ ເຮົາບໍ່ເຫັນບຸກຄົນອື່ນແມ່ນຄົນໜຶ່ງ ເຊິ່ງເຮົາກຳນົດຮູ້ເຫດທັງໝົດດ້ວຍໃຈແລ້ວ ຈຶ່ງພະຍາກອນແນວນີ້ຄືເທວະທັດເລີຍ ຕາບໃດເຮົາເຫັນທຳຝ່າຍຂາວຂອງເທວະທັດແມ່ນທໍ່ຮອຍ ເຈາະແຫ່ງປາຍຂົນຊາຍ ຕາບນັ້ນເຮົາກໍບໍ່ພະຍາກອນເທວະທັດວ່າ "ເທວະທັດຈະຕ້ອງເກີດໃນ ອະບາຍ ຕົກນະຣົກ ດຳລົງຢູ່ຕະຫຼອດກັບ ແກ້ໄຂບໍ່ໄດ້" ແຕ່ເມື່ອເຮົາບໍ່ເຫັນທຳຝ່າຍຂາວຂອງ ເທວະທັດແມ່ນທໍ່ຮອຍເຈາະແຫ່ງປາຍຂົນຊາຍ ເມື່ອນັ້ນເຮົາຈຶ່ງພະຍາກອນເທວະທັດນັ້ນວ່າ "ເທວະທັດຈະຕ້ອງເກີດໃນອະບາຍ ຕົກນະຣົກ ດຳລົງຢູ່ຕະຫຼອດກັບ ແກ້ໄຂບໍ່ໄດ້"

ອານົນ ປຽບຄືຂຸມຄູດ ເລິກຊົ່ວຄົນ ເຕັມດ້ວຍຄູດສະເໝີຂອບປາກຂຸມ ບຸຣຸດເພິ່ງຕົກລົງ ໄປທີ່ຂຸມຄູດນັ້ນຈົມມິດຫົວ ບຸຣຸດລາງຄົນຫວັງປະໂຫຍດ ຫວັງເກື້ອກູນ ຫວັງຄວາມປອດໄພ ຕ້ອງການຈະຍົກເຂົາຂຶ້ນຈາກຂຸມຄູດນັ້ນ ຈຶ່ງເຂົ້າມາຫາເຂົາຍ່າງອ້ອມຂຸມຄູດນັ້ນຢູ່ ກໍບໍ່ເຫັນອະໄວ ຍະວະທີ່ບໍ່ເປື້ອນຄູດ ແມ່ນທໍ່ຮອຍເຈາະແຫ່ງປາຍຂົນຊາຍເຊິ່ງພໍຈະຈັບຍົກຂຶ້ນມາໄດ້ ສັນໃດ ເຮົາກໍຄືກັນສັນນັ້ນ ເມື່ອໃດບໍ່ໄດ້ເຫັນທຳຝ່າຍຂາວຂອງ ເທວະທັດແມ່ນທໍ່ຮອຍເຈາະແຫ່ງປາຍ ຂົນຊາຍເລີຍ ເມື່ອນັ້ນ ເຮົາຈຶ່ງພະຍາກອນເທວະທັດວ່າ "ເທວະທັດຈະຕ້ອງເກີດໃນອະບາຍ ຕົກ ນະຣົກ ດຳລົງຢູ່ຕະຫຼອດກັບ ແກ້ໄຂບໍ່ໄດ້" ຖ້າທ່ານທັງຫຼາຍ ເພິ່ງຟັງຕະຖາຄົດ ເຮົາຈັກຈຳແນກ ຍານເປັນເຄື່ອງຮູ້ອິນຊີຂອງບຸກຄົນ"

ທ່ານພຣະອານົນຂາບທູນວ່າ "ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ບັດນີ້ເປັນການທີ່ສົມຄວນ ຂ້າ ແດ່ພຣະສຸຄົດເຈົ້າ ບັດນີ້ເປັນການທີ່ສົມຄວນທີ່ພຣະຜູ້ມີພຣະພາກເຈົ້າຈະຊົງຈຳແນກຍານເປັນເຄື່ອງ ຮູ້ອິນຊີຂອງບຸກຄົນ ພິກຂຸທັງຫຼາຍໄດ້ສະດັບຈາກພຣະຜູ້ມີພຣະພາກເຈົ້າແລ້ວ ຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັ ດເລື້ອງນີ້ ວ່າ

ອານົນ

໑. ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແນວນີ້ວ່າ "ກຸສົນທຳ ກໍດີ ອະກຸສົນທຳກໍດີ ຂອງບຸກຄົນນີ້ແລມີຢູ່" ສະໄໝຕໍ່ມາ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ "ກຸສົນທຳຂອງບຸກຄົນນີ້ແລຫາຍໄປ ອະກຸສົນທຳເກີດຂຶ້ນມາແທນ ແຕ່ກຸສົນມູນທີ່ເຂົາຍັງຕັດບໍ່ຂາດມີຢູ່ ຍ້ອນກຸ ສົນມູນນັ້ນ ກຸສົນທຳຂອງເຂົາຈັກຜາກົດ ບຸກຄົນນີ້ຈັກເປັນຜູ້ບໍ່ເສື່ອມຕໍ່ໄປເປັນທຳມະດາດ້ວຍປະການດັ່ງນີ້' ປຽບຄືເມັດພືດທີ່ບໍ່ຫັກ ບໍ່ເນົ່າ ບໍ່ຖືກລົມແດດແຜດເຜົາ ທີ່ຄັດພັນໄວ້໌ ເກັບໄວ້ຢ່າງດີ ເຊິ່ງບຸກຄົນປູກໄວ້ໃນບ່ອນດິນອັນຄຸ້ຍເຂ່ຍດີແລ້ວໃນນາດີ ທ່ານຮູ້ບໍວ່າ "ເມັດພືດເຫຼົ່ານີ້ຈັກຈະເລີນງອກງາມໄພບູນ"

ທ່ານພຣະອານົນທູນຮັບວ່າ "ຮູ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ເຊັ່ນດຽວກັນ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແນວນີ້ວ່າ "ກຸສົນທຳກໍດີ ອະກຸສົນທຳກໍດີຂອງບຸກຄົນນີ້ແລ ມີຢູ່" ສະໄໝຕໍ່ມາເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ "ກຸສົນທຳຂອງບຸກຄົນນີ້ແລ ຫາຍໄປ ອະກຸສົນທຳເກີດຂຶ້ນມາແທນ ແຕ່ກຸສົນມູນທີ່ເຂົາຍັງຕັດບໍ່ຂາດມີຢູ່ ຍ້ອນກຸສົນມູນນັ້ນ ກຸສົນທຳຂອງເຂົາຈັກຜາກົດ ບຸກຄົນນີ້ຈັກເປັນຜູ້ບໍ່ເສື່ອມຕໍ່ໄປເປັນທຳມະດາ ດ້ວຍປະການດັ່ງນີ້" ຕະຖາຄົດກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ຍານເປັນເຄື່ອງຮູ້ອິນຊີຂອງບຸກຄົນແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ທຳທີ່ອາໄສກັນເກີດຂຶ້ນຕໍ່ໄປ ແນວນີ້ແລ

໔. ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແນວນີ້ວ່າ "ກຸສົນທຳ ກໍດີ ອະກຸສົນທຳກໍດີຂອງບຸກຄົນນີ້ແລມີຢູ່" ສະໄໝຕໍ່ມາ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ "ອະກຸສົນທຳຂອງບຸກຄົນນີ້ແລຫາຍໄປ ກຸສົນທຳເກີດຂຶ້ນມາແທນ ແຕ່ອະກຸສົນມູນທີ່ເຂົາຍັງຕັດບໍ່ຂາດມີຢູ່ ຍ້ອນອະກຸສົນມູນນັ້ນ ອະກຸສົນມູນຂອງເຂົາຈັກຜາກົດ ບຸກຄົນນີ້ຈັກເປັນຜູ້ບໍ່ເສື່ອມຕໍ່ໄປເປັນທຳມະດາ ດ້ວຍປະການດັ່ງນີ້" ປຽບຄືເມັດພືດທີ່ ບໍ່ຫັກ ບໍ່ເນົ່າ ບໍ່ຖືກລົມແລະແດດແຜດເຜົາທີ່ຄັດພັນໄວ້ ເກັບໄວ້ຢ່າງດີ ເຊິ່ງບຸກຄົນປູກໄວ້ເທິງສິລາແທ່ງທຶບ ທ່ານຮູ້ບໍ່ວ່າ "ເມັດພືດເຫຼົ່ານີ້ຈັກບໍ່ຈະເລີນງອກງາມໄພບູນ"

ທ່ານພຣະອານົນທູນຮັບວ່າ "ຮູ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ເຊັ່ນດຽວກັນ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແນວນີ້ວ່າ "ກຸສົນທຳກໍດີ ອະກຸສົນທຳກໍດີຂອງບຸກຄົນນີ້ແລມີຢູ່" ສະໄໝຕໍ່ມາເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ "ອະກຸສົນທຳຂອງບຸກຄົນນີ້ແລຫາຍໄປແລ້ວ ກຸສົນທຳເກີດຂຶ້ນມາແທນ ແຕ່ອະກຸສົນມູນທີ່ເຂົາຍັງຕັດບໍ່ຂາດມີຢູ່ ຍ້ອນອະກຸສົນມູນນັ້ນ ອະກຸສົນທຳ

ຂອງເຂົາຈັກຜາກົດ ບຸກຄົນນີ້ຈັກເປັນຜູ້ເສື່ອມຕໍ່ໄປເປັນທຳມະດາ ດ້ວຍປະການແນວນີ້” ຕະຖາຄົດກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ຍານເປັນເຄື່ອງຮູ້ອິນຊີຂອງບຸກຄົນແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ທຳທີ່ອາໄສກັນເກີດຂຶ້ນຕໍ່ໄປແນວນີ້ແລ

໓. ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແນວນີ້ວ່າ “ກຸສົນທຳ ກໍດີ ອະກຸສົນທຳກໍດີຂອງບຸກຄົນນີ້ແລມີຢູ່” ສະໄໝຕໍ່ມາ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ “ທຳຂາວແມ່ນທີ່ຮອຍເຈາະແຫ່ງປາຍຂົນຊາຍຂອງບຸກຄົນນີ້ກໍບໍ່ມີ ບຸກຄົນນີ້ປະກອບດ້ວຍອະກຸສົນທຳຝ່າຍດຳ ແນວດຽວ ຫຼັງຈາກຕາຍແລ້ວ ຈັກໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ” ປຽບຄືເມັດພືດທີ່ຫັກ ເນົ່າ ຖືກລົມແລະແດດແຜດເຜົາ ເຊິ່ງບຸກຄົນປູກໄວ້ໃນດິນເຊິ່ງຄຸ້ຍເຂ່ຍດີແລ້ວໃນນາດີ ທ່ານຮູ້ບໍວ່າ “ເມັດພືດ ເຫຼົ່ານີ້ຈັກບໍ່ຈະເລີນງອກງາມໄພບູນ”

ທ່ານພຣະອານົນທູນຮັບວ່າ “ຮູ້ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ອານົນ ເຊັ່ນດຽວກັນ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແນວນີ້ວ່າ “ກຸສົນທຳກໍດີ ອະກຸສົນທຳກໍດີຂອງບຸກຄົນນີ້ແລມີຢູ່” ສະໄໝຕໍ່ມາ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ “ທຳຂາວແມ່ນທີ່ຮອຍເຈາະແຫ່ງປາຍຂົນຊາຍຂອງບຸກຄົນນີ້ກໍບໍ່ມີ ບຸກຄົນນີ້ປະກອບດ້ວຍອະກຸສົນທຳຝ່າຍດຳແນວດຽວ ຫຼັງຈາກຕາຍແລ້ວຈັກໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ” ຕະຖາຄົດກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ຍານເປັນເຄື່ອງຮູ້ອິນຊີຂອງບຸກຄົນແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ທຳທີ່ອາໄສກັນເກີດຂຶ້ນຕໍ່ໄປແນວນີ້ແລ”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອານົນທູນຖາມພຣະຜູ້ມີພຣະພາກເຈົ້າ ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງສາມາດທີ່ຈະບັນຍັດບຸກຄົນອີກ ໓ ຈຳພວກທີ່ມີສ່ວນຄືກັບບຸກຄົນ ໓ ຈຳພວກນີ້ແດ່ບໍ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ອານົນ ເຮົາສາມາດ

໔. ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແນວນີ້ວ່າ “ກຸສົນທຳ ກໍດີ ອະກຸສົນທຳກໍດີຂອງບຸກຄົນນີ້ແລມີຢູ່” ສະໄໝຕໍ່ມາ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ “ກຸສົນທຳຂອງບຸກຄົນນີ້ຫາຍໄປແລ້ວ ອະກຸສົນທຳເກີດຂຶ້ນມາແທນ ກຸສົນມູນທີ່ເຂົາຍັງຕັດບໍ່ຂາດມີຢູ່ ແມ່ນກຸສົນມູນນັ້ນກໍເຖິງຄວາມຖອນຂຶ້ນທັງໝົດ ບຸກຄົນນີ້ຈັກເປັນຜູ້ເສື່ອມຕໍ່ໄປເປັນທຳມະດາດ້ວຍປະການດັ່ງນີ້” ປຽບຄືຖ່ານໄຟທີ່ລຸກຮຸ່ງເປັນແປວສະຫວ່າງສະໄຫວ ເຊິ່ງບຸກຄົນວາງໄວ້ເທິງສີລາກ້ອນໃຫຍ່ ທ່ານຮູ້ບໍ່ວ່າ “ຖ່ານໄຟເຫຼົ່ານີ້ຈັກບໍ່ລຸກລາມ ຂະຫຍາຍກວ້າງອອກໄປ”

ທ່ານພຣະອານົນທູນຮັບວ່າ "ຮູ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ປຽບຄືເມື່ອພຣະອາທິດຕົກໄປໃນເວລາຄ່ຳ ທ່ານຮູ້ບໍ່ວ່າ "ຄວາມສະຫວ່າງຫາຍໄປ ຄວາມມືດຜາກົດຂຶ້ນ"

ທ່ານພຣະອານົນທູນຮັບວ່າ "ຮູ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ອີກໄນໜຶ່ງ ປຽບຄືໃນເວລາກິນອາຫານໃນເວລາທ່ຽງຄືນ ທ່ານຮູ້ບໍ່ວ່າ "ຄວາມສະຫວ່າງຫາຍໄປ ຄວາມມືດ ຜາກົດຂຶ້ນ"

ທ່ານພຣະອານົນທູນຮັບວ່າ "ຮູ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ເຊັ່ນດຽວກັນ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແນວນີ້ວ່າ "ກຸສົນທຳກໍດີ ອະກຸສົນທຳກໍດີຂອງບຸກຄົນນີ້ແລມີຢູ່" ສະໄໝຕໍ່ມາ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ "ກຸສົນທຳຂອງບຸກຄົນນີ້ຫາຍໄປແລ້ວ ອະກຸສົນທຳຜາກົດຂຶ້ນ ແຕ່ກຸ ສົນມູນທີ່ເຂົາຍັງຕັດບໍ່ຂາດມີຢູ່ ແມ່ນກຸສົນມູນນັ້ນກໍເຖິງຄວາມຖອນຂຶ້ນທັງໝົດ ບຸກຄົນຄົນນີ້ຈັກເປັນຜູ້ເສື່ອມຕໍ່ໄປເປັນທຳມະດາ ດ້ວຍປະການດັ່ງນີ້" ຕະຖາຄົດກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ຍານເປັນເຄື່ອງຮູ້ອິນຊີຂອງບຸກຄົນແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ທຳທີ່ອາໄສກັນເກີດຂຶ້ນຕໍ່ໄປ ແນວນີ້ແລ

໕. ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແນວນີ້ວ່າ "ກຸສົນທຳ ກໍດີ ອະກຸສົນທຳກໍດີຂອງບຸກຄົນນີ້ແລມີຢູ່" ສະໄໝຕໍ່ມາ ເຮົາກຳນົດໃຈ ດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ "ອະກຸສົນທຳຂອງບຸກຄົນນີ້ຫາຍໄປແລ້ວ ກຸສົນທຳຜາກົດຂຶ້ນ ແຕ່ອະກຸສົນມູນທີ່ເຂົາຍັງຕັດບໍ່ຂາດມີຢູ່ ແມ່ນອະກຸສົນມູນນັ້ນກໍເຖິງຄວາມຖອນຂຶ້ນທັງໝົດ ບຸກຄົນນີ້ກໍຈັກເປັນຜູ້ບໍ່ເສື່ອມຕໍ່ໄປເປັນທຳມະດາ ດ້ວຍປະການດັ່ງນີ້" ປຽບຄືຖ່ານໄຟທີ່ລຸກຮຸ່ງ ເປັນແປວ ສະຫວ່າງສະໄຫວ ເຊິ່ງບຸກຄົນວາງໄວ້ເທິງກອງຫຍ້າແຫ້ງ ຫຼືເທິງກອງໄມ້ແຫ້ງ ທ່ານຮູ້ບໍວ່າ "ຖ່ານໄຟເຫຼົ່ານີ້ຈັກລຸກລາມຂະຫຍາຍກວ້າງອອກໄປ"

ທ່ານພຣະອານົນທູນຮັບວ່າ "ຮູ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ປຽບຄືເມື່ອພຣະອາທິດກຳລັງຂຶ້ນມາໃນເວລາອາລຸນ ທ່ານຮູ້ບໍ່ວ່າ "ຄວາມມືດຫາຍໄປ ຄວາມສະຫວ່າງຜາກົດຂຶ້ນ"

ທ່ານພຣະອານົນທູນຮັບວ່າ "ຮູ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ອີກໄນໜຶ່ງ ປຽບຄືໃນເວລາກິນອາຫານໃນເວລາທ່ຽງວັນ ທ່ານຮູ້ບໍ່ວ່າ "ຄວາມມືດຫາຍໄປ ຄວາມສະຫວ່າງ ຜາກົດຂຶ້ນ"

ທ່ານພຣະອານົນທູນຮັບວ່າ "ຮູ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ເຊັ່ນດຽວກັນ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແນວນີ້ວ່າ "ກຸສົນທຳກໍດີ ອະກຸສົນທຳກໍດີຂອງບຸກຄົນນີ້ແລມີຢູ່" ສະໄໝຕໍ່ມາເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ "ອະກຸສົນທຳຂອງບຸກຄົນນີ້ຫາຍໄປແລ້ວ ກຸສົນທຳຜາກົດຂຶ້ນ ແຕ່ອະກຸສົນມູນທີ່ເຂົາຍັງຕັດບໍ່ຂາດມີຢູ່ ແມ່ນອະກຸສົນມູນນັ້ນ ກໍເຖິງຄວາມຖອນຂຶ້ນທັງໝົດ ບຸກຄົນນີ້ຈັກເປັນຜູ້ບໍ່ເສື່ອມຕໍ່ໄປເປັນທຳມະດາ ດ້ວຍປະການແນວນີ້" ຕະຖາຄົດກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ຍານເປັນເຄື່ອງຮູ້ອິນຊີຂອງບຸກຄົນແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ທຳທີ່ອາໄສກັນເກີດຂຶ້ນ ຕໍ່ໄປແນວນີ້ແລ

໖. ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແມ່ນແນວນີ້ວ່າ "ກຸສົນທຳ ກໍດີອະກຸ ສົນທຳກໍດີຂອງບຸກຄົນນີ້ແລມີຢູ່" ສະໄໝຕໍ່ມາ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ "ອະກຸ ສົນທຳແມ່ນທີ່ຮອຍເຈາະແຫ່ງປາຍຂົນຊາຍຂອງບຸກຄົນນີ້ກໍບໍ່ມີ ບຸກຄົນນີ້ປະກອບດ້ວຍທຳ ທີ່ບໍ່ມີໂທດ ເປັນທຳຝ່າຍຂາວແນວດຽວ ຈັກປະຣິນິບພານໃນປັດຈຸບັນ ແນ່ນອນ" ປຽບຄືຖ່ານໄຟທີ່ເຢັນ ດັບແລ້ວ ເຊິ່ງບຸກຄົນວາງໄວ້ເທິງກອງຫຍ້າແຫ້ງ ຫຼືເທິງກອງໄມ້ແຫ້ງ ທ່ານຮູ້ບໍວ່າ "ຖ່ານໄຟນີ້ຈັກບໍ່ລຸກລາມຂະຫຍາຍກວ້າງອອກໄປ"

ທ່ານພຣະອານົນທູນຮັບວ່າ "ຮູ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ເຊັ່ນດຽວກັນ ເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນລາງຄົນໃນໂລກນີ້ແນວນີ້ວ່າ "ກຸສົນທຳກໍດີ ອະກຸສົນທຳກໍດີຂອງບຸກຄົນນີ້ແລມີຢູ່" ສະໄໝຕໍ່ມາເຮົາກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນນັ້ນແນວນີ້ວ່າ "ອະກຸສົນທຳແມ່ນທີ່ຮອຍເຈາະແຫ່ງປາຍຂົນຊາຍຂອງບຸກຄົນນີ້ກໍບໍ່ມີ ບຸກຄົນນີ້ປະກອບດ້ວຍທຳທີ່ບໍ່ມີໂທດ ເປັນທຳຝ່າຍຂາວແນວດຽວ ຈັກປະຣິນິບພານໃນປັດຈຸບັນແນ່ນອນ ກຳນົດໃຈດ້ວຍໃຈຈຶ່ງຮູ້ບຸກຄົນ ແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ຍານເປັນເຄື່ອງຮູ້ອິນຊີຂອງບຸກຄົນແນວນີ້ແລ ກຳນົດໃຈດ້ວຍໃຈຈຶ່ງຮູ້ທຳທີ່ອາໄສກັນເກີດຂຶ້ນຕໍ່ໄປແນວນີ້ແລ

ອານົນ ບັນດາບຸກຄົນ ໖ ຈຳພວກນັ້ນ ບຸກຄົນ ໓ ຈຳພວກທຳອິດ ຄື ຄົນໜຶ່ງເປັນຜູ້ບໍ່ເສື່ອມເປັນທຳມະດາ ຄົນໜຶ່ງເປັນຜູ້ເສື່ອມເປັນທຳມະດາ ອີກຄົນໜຶ່ງເກີດໃນອະບາຍ ແລະຕົກນະຮົກ ບັນດາບຸກຄົນ ໖ ຈຳພວກນັ້ນ ບຸກຄົນ ໓ ຈຳພວກຫຼັງ ຄື ຄົນໜຶ່ງເປັນຜູ້ເສື່ອມເປັນທຳມະດາ ຄົນໜຶ່ງເປັນຜູ້ບໍ່ເສື່ອມເປັນທຳມະດາ ອີກຄົນໜຶ່ງຈັກປະຣິນິບພານເປັນທຳມະດາ"

**ປຸຣິສິນທະຣິຍະຍານສູດທີ ໗ ຈົບ**

# ໙. ນິບເພທິກະສູດ

## ວ່າດ້ວຍທຳບັນລະຍາຍ ທຳລາຍກິເລດ

[໖໓] ພິກຂຸທັງຫຼາຍ ເຮົາຈັກສະແດງທຳບັນລະຍາຍເປັນເຫດທຳລາຍກິເລດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງ ພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ທຳບັນລະຍາຍທີ່ເປັນເຫດທຳລາຍກິເລດນັ້ນ ອັນໃດແດ່ ຄື

໑. ທ່ານທັງຫຼາຍເພິ່ງຮູ້ກາມ ເຫດເກີດແຫ່ງກາມ ຄວາມຕ່າງກັນແຫ່ງກາມ ວິບາກແຫ່ງກາມ ຄວາມດັບແຫ່ງກາມ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງກາມ
໒. ທ່ານທັງຫຼາຍເພິ່ງຮູ້ເວທະນາ ເຫດເກີດແຫ່ງເວທະນາ ຄວາມຕ່າງກັນແຫ່ງເວທະນາ ວິບາກແຫ່ງເວທະນາ ຄວາມດັບແຫ່ງເວທະນາ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງເວທະນາ
໓. ທ່ານທັງຫຼາຍເພິ່ງຮູ້ສັນຍາ ເຫດເກີດແຫ່ງສັນຍາ ຄວາມຕ່າງກັນແຫ່ງສັນຍາ ວິບາກແຫ່ງສັນຍາ ຄວາມດັບແຫ່ງສັນຍາ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງສັນຍາ
໔. ທ່ານທັງຫຼາຍເພິ່ງຮູ້ອາສະວະ ເຫດເກີດແຫ່ງອາສະວະ ຄວາມຕ່າງກັນແຫ່ງອາສະວະ ວິບາກແຫ່ງອາສະວະ ຄວາມດັບແຫ່ງອາສະວະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາສະວະ
໕. ທ່ານທັງຫຼາຍເພິ່ງຮູ້ກຳ ເຫດເກີດແຫ່ງກຳ ຄວາມຕ່າງກັນແຫ່ງກຳ ວິບາກແຫ່ງກຳ ຄວາມດັບແຫ່ງກຳ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງກຳ
໖. ທ່ານທັງຫຼາຍເພິ່ງຮູ້ທຸກ ເຫດເກີດແຫ່ງທຸກ ຄວາມຕ່າງກັນແຫ່ງທຸກ ວິບາກແຫ່ງທຸກ ຄວາມດັບແຫ່ງທຸກ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງທຸກ

ພິກຂຸທັງຫຼາຍ ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ທ່ານທັງຫຼາຍເພິ່ງຮູ້ກາມ ເຫດເກີດແຫ່ງກາມ ຄວາມຕ່າງກັນແຫ່ງກາມ ວິບາກແຫ່ງກາມ ຄວາມດັບແຫ່ງກາມ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງກາມ" ຍ້ອນອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ຍ້ອນອາໄສເຫດນີ້ວ່າ ກາມມະຄຸນ ໕ ປະການນີ້ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

໔. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ
໕. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ພິກຂຸທັງຫຼາຍ ແຕ່ສິ່ງເຫຼົ່ານີ້ ບໍ່ຮຽກວ່າການ ສິ່ງເຫຼົ່ານີ້ ຮຽກວ່າການມະຄຸນ ໃນອະຣິຍະວິໄນ ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນນີ້ຕໍ່ໄປອີກວ່າ

ສັງກັບປະຣາຄະ໌ຂອງບຸຣຸດຊື່ວ່າການ
ອາລົມທີ່ວິຈິດທັງຫຼາຍໃນໂລກບໍ່ຊື່ວ່າການ
ສັງກັບປະຣາຄະຂອງບຸຣຸດຊື່ວ່າການ
ອາລົມທີ່ວິຈິດທັງຫຼາຍໃນໂລກ
ຕັ້ງຢູ່ຕາມສະພາບຂອງຕົນທໍ່ນັ້ນ
ແຕ່ທີຣະຊົນທັງຫຼາຍຍ່ອມກຳຈັດຄວາມພໍໃຈ
ໃນອາລົມທີ່ວິຈິດເຫຼົ່ານັ້ນໄດ້໑

ເຫດເກີດແຫ່ງການ ເປັນແນວໃດ?

ຄື ຜັດສະເປັນເຫດເກີດແຫ່ງການ

ຄວາມຕ່າງກັນແຫ່ງການ ເປັນແນວໃດ?

ຄື ການໃນຮູບເປັນແນວໜຶ່ງ ການໃນສຽງເປັນແນວໜຶ່ງ ການໃນກິ່ນເປັນແນວໜຶ່ງ ການໃນຣົດເປັນແນວໜຶ່ງ ການໃນໂຜດຖັບພະເປັນແນວໜຶ່ງ ນີ້ຮຽກວ່າ ຄວາມຕ່າງກັນແຫ່ງການ

ວິບາກແຫ່ງການ ເປັນແນວໃດ?

ຄື ການທີ່ບຸກຄົນຜູ້ຕ້ອງການຢູ່ ເຮັດອັດຕະພາບທີ່ເກີດຈາກຄວາມຕ້ອງການນັ້ນ ໆ ໃຫ້ເກີດຂຶ້ນ ຈະເປັນສ່ວນແຫ່ງບຸນບໍ່ເປັນສ່ວນແຫ່ງບຸນກໍຕາມ ນີ້ຮຽກວ່າ ວິບາກແຫ່ງການ

ຄວາມດັບແຫ່ງການ ເປັນແນວໃດ?

ຄື ຍ້ອນຜັດສະດັບ ການຈຶ່ງດັບ

ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງການ ໄດ້ແກ່ ອະຣິຍະມັກມີອົງ ໘ ນີ້ ຄື

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໒. ສຳມາສັງກັບປະ | (ຄິດຖືກ) |
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ການງານຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີວິດຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະນຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ພິກຂຸທັງຫຼາຍ ຍ້ອນອະຣິຍະສາວົກຮູ້ແຈ້ງການແບບນີ້ ຮູ້ແຈ້ງເຫດເກີດແຫ່ງການແບບນີ້ ຮູ້ແຈ້ງຄວາມຕ່າງກັນແຫ່ງການແບບນີ້ ຮູ້ແຈ້ງວິບາກແຫ່ງການແບບນີ້ ຮູ້ແຈ້ງຄວາມດັບແຫ່ງການແບບນີ້ ຮູ້ແຈ້ງຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງການແບບນີ້ ທ່ານຈຶ່ງຮູ້ແຈ້ງພົມມະຈັນທີ່ເປັນເຫດທຳລາຍກິເລດ ເປັນທີ່ດັບແຫ່ງການນີ້

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ທ່ານທັງຫຼາຍເພິ່ງຮູ້ການ ໆລໆ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງການ"

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ທ່ານທັງຫຼາຍເພິ່ງຮູ້ເວທະນາ ໆລໆ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງເວທະນາ" ຍ້ອນອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ຍ້ອນອາໄສເຫດນີ້ວ່າ ເວທະນາ[໑] ໓ ປະການນີ້ ຄື

| | |
|---|---|
| ໑. ສຸກຂະເວທະນາ | (ຄວາມຮູ້ສຶກສຸກ) |
| ໒. ທຸກຂະເວທະນາ | (ຄວາມຮູ້ສຶກທຸກ) |
| ໓. ອະທຸກຂະມະສຸຂະເວທະນາ | (ຄວາມຮູ້ສຶກເສີຍ ໆ) |

ເຫດເກີດແຫ່ງເວທະນາ ເປັນແນວໃດ?

ຄື ຜັດສະເປັນເຫດເກີດແຫ່ງເວທະນາ

ຄວາມຕ່າງກັນແຫ່ງເວທະນາ ເປັນແນວໃດ?

ຄື ສຸກຂະເວທະນາທີ່ປົນອາມິດກໍມີ ສຸກຂະເວທະນາທີ່ບໍ່ປົນອາມິດກໍມີ ທຸກຂະເວທະນາທີ່ປົນ ອາມິດກໍມີ ທຸກຂະເວທະນາທີ່ບໍ່ປົນອາມິດກໍມີ ອະທຸກຂະມະສຸກຂະເວທະນາທີ່ປົນອາມິດກໍມີ ອະທຸກຂະມະສຸກເວທະນາທີ່ບໍ່ປົນອາມິດກໍມີ ນີ້ຮຽກວ່າ ຄວາມຕ່າງກັນແຫ່ງເວທະນາ

ວິບາກແຫ່ງເວທະນາ ເປັນແນວໃດ?

ຄື ການທີ່ບຸກຄົນຜູ້ຮູ້ສຶກຢູ່ ເຮັດອັດຕະພາບທີ່ເກີດຈາກເວທະນານັ້ນ ໆ ໃຫ້ເກີດຂຶ້ນຈະເປັນສ່ວນແຫ່ງບຸນບໍ່ເປັນສ່ວນແຫ່ງບຸນກໍຕາມ ນີ້ຮຽກວ່າ ວິບາກແຫ່ງເວທະນາ

ຄວາມດັບແຫ່ງເວທະນາ ເປັນແນວໃດ?

ຄື ຍ້ອນຜັດສະດັບ ເວທະນາຈຶ່ງດັບ

ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງເວທະນາ ໄດ້ແກ່ ອະຣິຍະມັກມີອົງ ໘ ນີ້ ຄື

໑. ສຳມາທິດຖິ

ຯລຯ

໘. ສຳມາສະມາທິ

ພິກຂຸທັງຫຼາຍ ຍ້ອນອະຣິຍະສາວົກຮູ້ແຈ້ງເວທະນາແບບນີ້ ຮູ້ແຈ້ງເຫດເກີດແຫ່ງເວທະນາແບບນີ້ ຮູ້ແຈ້ງຄວາມຕ່າງກັນແຫ່ງເວທະນາແບບນີ້ ຮູ້ແຈ້ງວິບາກແຫ່ງເວທະນາແບບນີ້ ຮູ້ແຈ້ງ ຄວາມດັບແຫ່ງເວທະນາແບບນີ້ ຮູ້ແຈ້ງຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງເວທະນາແບບນີ້ ທ່ານຈຶ່ງ ຮູ້ແຈ້ງພົມມະຈັນທີ່ເປັນເຫດທຳລາຍກິເລດ ເປັນທີ່ດັບແຫ່ງເວທະນານີ້

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ທ່ານທັງຫຼາຍເພິ່ງຮູ້ເວທະນາ ຯລຯ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງເວທະນາ"

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ທ່ານທັງຫຼາຍເພິ່ງຮູ້ສັນຍາ ຯລຯ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງສັນຍາ" ຍ້ອນອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ຍ້ອນອາໄສເຫດນີ້ວ່າ ສັນຍາ[๑] ໖ ປະການນີ້ ຄື

໑. ຮູບສັນຍາ (ກຳນົດໝາຍຮູບ)
໒. ສັດທະສັນຍາ (ກຳນົດໝາຍສຽງ)
໓. ຄັນທະສັນຍາ (ກຳນົດໝາຍກິ່ນ)
໔. ຣະສະສັນຍາ (ກຳນົດໝາຍຣົດ)
໕. ໂຜດຖັບພະສັນຍາ (ກຳນົດໝາຍໂຜດຖັບພະ)
໖. ທຳມະສັນຍາ (ກຳນົດໝາຍທຳມາຣົມ)

ເຫດເກີດແຫ່ງສັນຍາ ເປັນແບບໃດ?

ຄື ຜັດສະເປັນເຫດເກີດແຫ່ງສັນຍາ

ຄວາມຕ່າງກັນແຫ່ງສັນຍາ ເປັນແບບໃດ?

ຄື ສັນຍາໃນຮູບເປັນແບບໜຶ່ງ ສັນຍາໃນສຽງເປັນແບບໜຶ່ງ ສັນຍາໃນກິ່ນ ເປັນແບບໜຶ່ງ ສັນຍາໃນຣົດເປັນແບບໜຶ່ງ ສັນຍາໃນໂຜດຖັບພະເປັນແບບໜຶ່ງ ສັນຍາໃນທຳເປັນແບບໜຶ່ງ ນີ້ຮຽກວ່າ ຄວາມຕ່າງກັນແຫ່ງສັນຍາ

ວິບາກແຫ່ງສັນຍາ ເປັນແບບໃດ?

ຄື ເຮົາກ່າວວ່າສັນຍາ "ມີຄຳເວົ້າເປັນຜົນ (ຍ້ອນວ່າ) ບຸກຄົນກຳນົດໝາຍແນວໃດ ກໍເວົ້າໄປແນວນັ້ນວ່າ "ເຮົາມີສັນຍາແນວນີ້" ນີ້ຮຽກວ່າ ວິບາກແຫ່ງສັນຍາ

ຄວາມດັບແຫ່ງສັນຍາ ເປັນແນວໃດ?
ຄື ຍ້ອນຜັດສະດັບ ສັນຍາຈຶ່ງດັບ
ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງສັນຍາໄດ້ແກ່ ອະຣິຍະມັກມີອົງ ໘ ນີ້ ຄື

໑. ສຳມາທິດຖິ
ฯລฯ
໘. ສຳມາສະມາທິ

ພິກຂຸທັງຫຼາຍ ຍ້ອນອະຣິຍະສາວົກຮູ້ແຈ້ງສັນຍາແນວນີ້ ຮູ້ແຈ້ງເຫດເກີດແຫ່ງສັນຍາແນວນີ້ ຮູ້ແຈ້ງຄວາມຕ່າງກັນແຫ່ງສັນຍາແນວນີ້ ຮູ້ແຈ້ງວິບາກແຫ່ງສັນຍາແນວນີ້ ຮູ້ແຈ້ງ ຄວາມດັບແຫ່ງສັນຍາແນວນີ້ ຮູ້ແຈ້ງຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງສັນຍາແນວນີ້ ທ່ານຈຶ່ງຮູ້ແຈ້ງພົມມະຈັນທີ່ເປັນເຫດທຳລາຍກິເລດ ເປັນທີ່ດັບແຫ່ງສັນຍານີ້

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ທ່ານທັງຫຼາຍເພິ່ງຮູ້ສັນຍາ ฯລฯ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງສັນຍາ"

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ທ່ານທັງຫຼາຍເພິ່ງຮູ້ອາສະວະ ฯລฯ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາສະວະ" ຍ້ອນອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ຍ້ອນອາໄສເຫດນີ້ວ່າ ອາສະວະ[1] ໓ ປະການນີ້ ຄື

໑. ກາມາສະວະ (ອາສະວະຄືກາມ)
໒. ພະວາສະວະ (ອາສະວະຄືພົບ)
໓. ອະວິດຊາສະວະ (ອາສະວະຄືອະວິດຊາ)

ເຫດເກີດແຫ່ງອາສະວະ ເປັນແນວໃດ?
ຄື ອະວິດຊາເປັນເຫດເກີດແຫ່ງອາສະວະ

ຄວາມຕ່າງກັນແຫ່ງອາສະວະ ເປັນແນວໃດ?
ຄື ອາສະວະທີ່ເປັນເຫດໃຫ້ໄປສູ່ນະຣົກກໍມີ ອາສະວະທີ່ເປັນເຫດໃຫ້ໄປສູ່ກຳເນີດສັດເດຍຣັດສານກໍມີ ອາສະວະທີ່ເປັນເຫດໃຫ້ໄປສູ່ແດນເຜດກໍມີ ອາສະວະທີ່ເປັນເຫດໃຫ້ໄປສູ່ມະ

ນຸດສາໂລກ ກໍມີ ອາສະວະທີ່ເປັນເຫດໃຫ້ໄປສູ່ເທວະໂລກກໍມີ ນີ້ຮຽກວ່າ ຄວາມຕ່າງກັນແຫ່ງອາສະວະ

ວິບາກແຫ່ງອາສະວະ ເປັນແນວໃດ?

ຄື ການທີ່ບຸກຄົນມີອະວິດຊາ ຍ່ອມຍັງອັດຕະພາບທີ່ເກີດຈາກອະວິດຊານັ້ນ ໆ ໃຫ້ເກີດຂຶ້ນ ຈະເປັນສ່ວນແຫ່ງບຸນບໍ່ເປັນສ່ວນແຫ່ງບຸນກໍຕາມ ນີ້ຮຽກວ່າ ວິບາກແຫ່ງອາສະວະ

ຄວາມດັບແຫ່ງອາສະວະ ເປັນແນວໃດ?

ຄື ຍ້ອນອະວິດຊາດັບ ອາສະວະຈຶ່ງດັບ

ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາສະວະ ໄດ້ແກ່ ອະຣິຍະມັກມີອົງ ໘ ນີ້ ຄື

໑. ສຳມາທິດຖິ

ຯລຯ

໘. ສຳມາສະມາທິ

ພິກຂຸທັງຫຼາຍ ຍ້ອນອະຣິຍະສາວົກຮູ້ແຈ້ງອາສະວະແນວນີ້ ຮູ້ແຈ້ງເຫດເກີດແຫ່ງອາສະວະແນວນີ້ ຮູ້ແຈ້ງຄວາມຕ່າງກັນແຫ່ງອາສະວະແນວນີ້ ຮູ້ແຈ້ງວິບາກແຫ່ງອາສະວະແນວນີ້ ຮູ້ແຈ້ງຄວາມດັບແຫ່ງອາສະວະແນວນີ້ ຮູ້ແຈ້ງຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາສະວະແນວນີ້ ທ່ານຈຶ່ງຮູ້ແຈ້ງພົມມະຈັນທີ່ເປັນເຫດທຳລາຍກິເລດ ເປັນທີ່ດັບອາສະວະນີ້

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ທ່ານທັງຫຼາຍເພິ່ງຮູ້ອາສະວະ ຯລຯ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາສະວະ"

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ທ່ານທັງຫຼາຍເພິ່ງຮູ້ກຳ ຯລຯ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງກຳ" ຍ້ອນອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ຍ້ອນອາໄສເຫດນີ້ວ່າ ເຮົາກ່າວເຈຕະນາວ່າເປັນໂຕກຳ ບຸກຄົນ ຄິດແລ້ວຈຶ່ງກະທຳກຳດ້ວຍກາຍ ວາຈາ ໃຈ

ເຫດເກີດແຫ່ງກຳ ເປັນແນວໃດ?

ຄື ຜັດສະເປັນເຫດເກີດແຫ່ງກຳ

ຄວາມຕ່າງກັນແຫ່ງກຳ ເປັນແນວໃດ?

ຄື ກຳທີ່ເພິ່ງສະເຫວີຍໃນນະຣົກກໍມີ ກຳທີ່ເພິ່ງສະເຫວີຍໃນກຳເນີດສັດເດຍຣັດສານກໍມີ ກຳທີ່ເພິ່ງສະເຫວີຍໃນແດນເຜດກໍມີ ກຳທີ່ເພິ່ງສະເຫວີຍໃນມະນຸດສາໂລກກໍມີ ກຳທີ່ເພິ່ງ

ສະເຫວີຍໃນເທວະໂລກກໍມີ ນີ້ຮຽກວ່າ ຄວາມຕ່າງກັນແຫ່ງກຳ

ວິບາກແຫ່ງກຳ ເປັນແນວໃດ?
ຄື ເຮົາກ່າວວິບາກແຫ່ງກຳວ່າມີ ໓ ປະການ ຄື

໑. ກຳທີ່ເພິ່ງສະເຫວີຍໃນປັດຈຸບັນ
໒. ກຳທີ່ເພິ່ງສະເຫວີຍໃນອັດຕະພາບຖັດໄປ
໓. ກຳທີ່ເພິ່ງສະເຫວີຍໃນອັດຕະພາບຕໍ່ ໆ ໄປ[1]

ນີ້ຮຽກວ່າ ວິບາກແຫ່ງກຳ

ຄວາມດັບແຫ່ງກຳ ເປັນແນວໃດ?
ຄື ຍ້ອນຜັດສະດັບ ກຳຈຶ່ງດັບ
ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງກຳໄດ້ແກ່ ອະຣິຍະມັກມີອົງ ໘ ນີ້ ຄື

໑. ສຳມາທິດຖິ
ຯລຯ
໘. ສຳມາສະມາທິ

ພິກຂຸທັງຫຼາຍ ຍ້ອນອະຣິຍະສາວົກຮູ້ແຈ້ງກຳແນວນີ້ ຮູ້ແຈ້ງເຫດເກີດແຫ່ງກຳແນວນີ້ ຮູ້ແຈ້ງຄວາມຕ່າງກັນແຫ່ງກຳແນວນີ້ ຮູ້ແຈ້ງວິບາກແຫ່ງກຳແນວນີ້ ຮູ້ແຈ້ງຄວາມດັບແຫ່ງກຳແນວນີ້ ຮູ້ແຈ້ງຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງກຳແນວນີ້ ທ່ານຈຶ່ງຮູ້ແຈ້ງພົມມະຈັນ ທີ່ເປັນເຫດທຳລາຍກິເລດ ເປັນທີ່ດັບກຳນີ້

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ທ່ານທັງຫຼາຍເພິ່ງຮູ້ກຳ ຯລຯ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງກຳ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ທ່ານທັງຫຼາຍເພິ່ງຮູ້ທຸກ ເຫດເກີດແຫ່ງທຸກ ຄວາມຕ່າງກັນແຫ່ງທຸກ ວິບາກແຫ່ງທຸກ ຄວາມດັບແຫ່ງທຸກ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງທຸກ" ຍ້ອນອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຍ້ອນອາໄສເຫດນີ້ວ່າ ແມ່ນຊາດ (ຄວາມເກີດ) ກໍເປັນທຸກ ແມ່ນຊະຣາ (ຄວາມແກ່) ກໍເປັນທຸກ ແມ່ນມໍລະນະ (ຄວາມຕາຍ) ກໍເປັນທຸກ ແມ່ນໂສກະ (ຄວາມໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ອຸປາຍາດ (ຄວາມຄັບແຄ້ນໃຈ) ກໍເປັນທຸກ ປາຖະໜາສິ່ງໃດບໍ່ໄດ້ສິ່ງນັ້ນ ກໍເປັນທຸກ ວ່າໂດຍຫຍໍ້ ອຸປາທານຂັນ ໕ ເປັນທຸກ

ເຫດເກີດແຫ່ງທຸກ ເປັນແນວໃດ?
ຄື ຕັນຫາເປັນເຫດເກີດແຫ່ງທຸກ

ຄວາມຕ່າງກັນແຫ່ງທຸກ ເປັນແນວໃດ?
ຄື ທຸກຫຼາຍກໍມີ ທຸກໜ້ອຍກໍມີ ທຸກທີ່ຄາຍຊ້າກໍມີ ທຸກທີ່ຄາຍໄວກໍມີ ນີ້ຮຽກວ່າ ຄວາມຕ່າງກັນແຫ່ງທຸກ

ວິບາກແຫ່ງທຸກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຖືກທຸກໃດຄອບງຳ ມີຈິດຖືກທຸກໃດກຸ້ມລຸມ ຍ່ອມເສົ້າໂສກລຳບາກໃຈ ເຮຮົນ ທຸບເອິກ ຮ່ຳໄຮ ເຖິງຄວາມເລີເລືອນ ຫຼືບຸກຄົນຖືກທຸກໃດຄອບງຳ ມີຈິດຖືກທຸກໃດກຸ້ມລຸມແລ້ວຍ່ອມຫາເຫດປົດທຸກໃນພາຍນອກວ່າ "ໃຜຈະຮູ້ບົດດຽວຫຼືສອງບົດເພື່ອດັບທຸກນີ້ໄດ້" ເຮົາກ່າວວ່າທຸກນັ້ນມີຄວາມຫຼົງເປັນຜົນ ຫຼືມີການສະແຫວງຫາປົດທຸກພາຍນອກເປັນຜົນ ນີ້ຮຽກວ່າ ວິບາກແຫ່ງທຸກ

ຄວາມດັບແຫ່ງທຸກ ເປັນແນວໃດ?
ຄື ຍ້ອນຕັນຫາດັບ ທຸກຈຶ່ງດັບ
ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງທຸກ ອະຣິຍະມັກມີອົງ ໘ ນີ້ ຄື

໑. ສຳມາທິດຖິ
ຯລຯ
໘. ສຳມາສະມາທິ

ພິກຂຸທັງຫຼາຍ ຍ້ອນອະຣິຍະສາວົກຮູ້ແຈ້ງທຸກແນວນີ້ ຮູ້ແຈ້ງເຫດເກີດແຫ່ງທຸກແນວນີ້ ຮູ້ແຈ້ງຄວາມຕ່າງກັນແຫ່ງທຸກແນວນີ້ ຮູ້ແຈ້ງວິບາກແຫ່ງທຸກແນວນີ້ ຮູ້ແຈ້ງຄວາມດັບແຫ່ງທຸກ ແນວນີ້ ຮູ້ແຈ້ງຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງທຸກແນວນີ້ ທ່ານຈຶ່ງຮູ້ແຈ້ງພົມມະຈັນທີ່ເປັນເຫດທຳລາຍກິເລດ ເປັນທີ່ດັບທຸກນີ້

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ທ່ານທັງຫຼາຍເພິ່ງຮູ້ທຸກ ເຫດເກີດແຫ່ງທຸກ ຄວາມຕ່າງກັນແຫ່ງທຸກ ວິບາກແຫ່ງທຸກ ຄວາມດັບແຫ່ງທຸກ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງທຸກ"

ພິກຂຸທັງຫຼາຍ ທຳບັນລະຍາຍທີ່ເປັນເຫດທຳລາຍກິເລດນີ້ນັ້ນ ເປັນແນວນີ້ແລ

**ນິບເພທິກະສູດທີ ໙ ຈົບ**

# ໑໐. ສີຫະນາທະສູດ[1]

## ວ່າດ້ວຍການບັນລືສີຫະນາດ

[໖໔] ພິກຂຸທັງຫຼາຍ ກຳລັງຂອງຕະຖາຄົດ ໖ ປະການນີ້ ທີ່ຕະຖາຄົດມີແລ້ວເປັນເຫດໃຫ້ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ[2]

ກຳລັງຂອງຕະຖາຄົດ ໖ ປະການ ອັນໃດແດ່ ຄື

໑. ຕະຖາຄົດຮູ້ແຈ້ງຖານະໂດຍເປັນຖານະ ແລະອະຖານະໂດຍເປັນອະຖານະໃນໂລກນີ້ຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງຖານະໂດຍເປັນຖານະ ແລະອະຖານະໂດຍເປັນອະຖານະຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດ ອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກ ໃນບໍລິສັດ

໒. ຕະຖາຄົດຮູ້ແຈ້ງວິບາກແຫ່ງການຍຶດຖືກຳທີ່ເປັນທັງອະດີດ ອະນາຄົດ ແລະປັດຈຸບັນໂດຍຖານະ ໂດຍເຫດຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງວິບາກແຫ່ງການຍຶດຖືກຳທີ່ເປັນທັງອະດີດ ອະນາຄົດ ແລະປັດຈຸບັນໂດຍຖານະໂດຍເຫດຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດ ອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກ ໃນບໍລິສັດ

໓. ຕະຖາຄົດຮູ້ແຈ້ງຄວາມເສົ້າໝອງ[1] ຄວາມຜ່ອງແຜ້ວ[2] ແຫ່ງຊານ ວິໂມກ ສະມາທິ ແລະສະມາບັດ[3] ແລະການອອກຈາກຊານ ວິໂມກ ສະມາທິ ແລະ ສະມາບັດຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວແຫ່ງຊານ ວິໂມກ ສະມາທິ ແລະສະມາບັດ ແລະການ ອອກຈາກຊານ ວິໂມກ ສະມາທິ ແລະສະມາບັດຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໔. ຕະຖາຄົດຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ຕະຖາຄົດຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດ ແນວນີ້ ການທີ່ຕະຖາຄົດຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ຕະຖາຄົດຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດ ອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກ ໃນບໍລິສັດ

໕. ຕະຖາຄົດເຫັນໝູ່ສັດທີ່ກຳລັງຈຸຕິ ກຳລັງເກີດ ຯລຯ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ ຯລຯ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໖. ຕະຖາຄົດເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ການທີ່ຕະຖາຄົດ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວປະຕິຍານຖານະທີ່ອົງອາດບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

ພິກຂຸທັງຫຼາຍ ກຳລັງຂອງຕະຖາຄົດ ໖ ປະການນີ້ແລ ທີ່ຕະຖາຄົດມີແລ້ວເປັນເຫດໃຫ້ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

ພິກຂຸທັງຫຼາຍ ບັນດາກຳລັງຂອງຕະຖາຄົດ ໖ ປະການນັ້ນ

ຫາກຊົນເຫຼົ່າອື່ນເຂົ້າມາຫາຕະຖາຄົດຖາມບັນຫາເຖິງຍານຮູ້ແຈ້ງຖານະໂດຍເປັນຖານະແລະອະຖານະໂດຍເປັນອະຖານະຕາມຄວາມເປັນຈິງ ຕະຖາຄົດເມື່ອຖືກຖາມຍ່ອມພະຍາກອນຍານຮູ້ແຈ້ງຖານະໂດຍເປັນຖານະ ແລະອະຖານະໂດຍເປັນອະຖານະຕາມຄວາມເປັນຈິງແກ່ຊົນເຫຼົ່ານັ້ນຕາມທີ່ຕະຖາຄົດຮູ້ແຈ້ງຍານຮູ້ແຈ້ງຖານະໂດຍເປັນຖານະແລະອະຖານະໂດຍເປັນອະຖານະຕາມຄວາມເປັນຈິງ

ຫາກຊົນເຫຼົ່າອື່ນເຂົ້າມາຫາຕະຖາຄົດຖາມບັນຫາເຖິງຍານຮູ້ແຈ້ງວິບາກແຫ່ງການຢຶດຖືກຳທີ່ເປັນທັງອະດີດ ອະນາຄົດ ແລະປັດຈຸບັນໂດຍຖານະໂດຍເຫດ ຕາມຄວາມເປັນຈິງ ຕະຖາຄົດເມື່ອຖືກຖາມຍ່ອມພະຍາກອນຍານຮູ້ແຈ້ງວິບາກແຫ່ງການຢຶດຖືກຳທີ່ເປັນທັງອະດີດອະນາຄົດ ແລະປັດຈຸບັນໂດຍຖານະໂດຍເຫດຕາມຄວາມເປັນຈິງແກ່ຊົນເຫຼົ່ານັ້ນຕາມທີ່ຕະຖາຄົດຮູ້ແຈ້ງຍານຮູ້ແຈ້ງວິບາກແຫ່ງການຢຶດກຳທີ່ເປັນທັງອະດີດ ອະນາຄົດແລະປັດຈຸບັນໂດຍຖານະໂດຍເຫດຕາມຄວາມເປັນຈິງ

ຫາກຊົນເຫຼົ່າອື່ນເຂົ້າມາຫາຕະຖາຄົດຖາມບັນຫາເຖິງຍານຮູ້ແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວແຫ່ງຊານ ວິໂມກ ສະມາທິ ແລະສະມາບັດ ແລະການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດຕາມຄວາມເປັນຈິງ ຕະຖາຄົດເມື່ອຖືກຖາມຍ່ອມພະຍາກອນຍານຮູ້ແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວແຫ່ງຊານ ວິໂມກ ສະມາທິ ແລະສະມາບັດ ແລະການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດ ຕາມຄວາມເປັນຈິງແກ່ຊົນເຫຼົ່ານັ້ນຕາມທີ່ຕະຖາຄົດຮູ້

ແຈ້ງຍານຮູ້ແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວແຫ່ງຊານ ວິໂມກ ສະມາທິແລະສະມາບັດ ແລະການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດຕາມຄວາມເປັນຈິງ

ຫາກຊົນເຫຼົ່າອື່ນເຂົ້າມາຫາຕະຖາຄົດຖາມບັນຫາເຖິງຍານຮູ້ແຈ້ງຄວາມຣະນຶກຊາດກ່ອນໄດ້ ຕາມຄວາມເປັນຈິງ ຕະຖາຄົດເມື່ອຖືກຖາມຍ່ອມພະຍາກອນຍານຮູ້ແຈ້ງຄວາມຣະນຶກຊາດກ່ອນໄດ້ຕາມຄວາມເປັນຈິງແກ່ຊົນເຫຼົ່ານັ້ນຕາມທີ່ຕະຖາຄົດຮູ້ແຈ້ງຍານຮູ້ແຈ້ງຄວາມຣະນຶກຊາດກ່ອນໄດ້ຕາມຄວາມເປັນຈິງ

ຫາກຊົນເຫຼົ່າອື່ນເຂົ້າມາຫາຕະຖາຄົດຖາມບັນຫາເຖິງຍານຮູ້ແຈ້ງການຈຸຕິແລະການເກີດຂອງ ໝູ່ສັດຕາມຄວາມເປັນຈິງ ຕະຖາຄົດເມື່ອຖືກຖາມຍ່ອມພະຍາກອນຍານຮູ້ແຈ້ງການຈຸຕິແລະການເກີດຂອງໝູ່ສັດຕາມຄວາມເປັນຈິງແກ່ຊົນເຫຼົ່ານັ້ນຕາມທີ່ຕະຖາຄົດຮູ້ແຈ້ງຍານຮູ້ແຈ້ງການຈຸຕິແລະການເກີດຂອງໝູ່ສັດຕາມຄວາມເປັນຈິງ

ຫາກຊົນເຫຼົ່າອື່ນເຂົ້າມາຫາຕະຖາຄົດຖາມບັນຫາເຖິງຍານຮູ້ແຈ້ງຄວາມໝົດສິ້ນອາສະວະທັງຫຼາຍ ຕາມຄວາມເປັນຈິງ ຕະຖາຄົດເມື່ອຖືກຖາມຍ່ອມພະຍາກອນຍານຮູ້ແຈ້ງຄວາມໝົດສິ້ນອາສະວະຕາມຄວາມເປັນຈິງແກ່ຊົນເຫຼົ່ານັ້ນຕາມທີ່ຕະຖາຄົດຮູ້ແຈ້ງຍານຮູ້ແຈ້ງຄວາມໝົດສິ້ນອາສະວະຕາມຄວາມເປັນຈິງ

ເຮົາກ່າວວ່າ ຍານຮູ້ແຈ້ງຖານະໂດຍເປັນຖານະ ແລະອະຖານະໂດຍເປັນອະຖານະຕາມຄວາມເປັນຈິງນັ້ນ ເປັນຂອງບຸກຄົນຜູ້ມີຈິດເປັນສະມາທິ ບໍ່ກ່າວວ່າ ເປັນຂອງບຸກຄົນຜູ້ມີຈິດບໍ່ເປັນສະມາທິ

ເຮົາກ່າວວ່າ ຍານຮູ້ແຈ້ງວິບາກແຫ່ງການຍຶດຖືກຳທີ່ເປັນທັງອະດີດ ອະນາຄົດ ແລະປັດຈຸບັນໂດຍຖານະໂດຍເຫດຕາມຄວາມເປັນຈິງນັ້ນ ເປັນຂອງບຸກຄົນຜູ້ມີຈິດເປັນສະມາທິ ບໍ່ກ່າວວ່າ ເປັນຂອງບຸກຄົນຜູ້ມີຈິດບໍ່ເປັນສະມາທິ

ເຮົາກ່າວວ່າ ຍານຮູ້ແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວແຫ່ງຊານ ວິໂມກ ສະມາທິແລະສະມາບັດ ແລະການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດນັ້ນ ເປັນຂອງບຸກຄົນຜູ້ມີຈິດເປັນສະມາທິ ບໍ່ກ່າວວ່າ ເປັນຂອງບຸກຄົນຜູ້ມີຈິດບໍ່ເປັນສະມາທິ

ເຮົາກ່າວວ່າ ຍານຮູ້ແຈ້ງຄວາມຣະນຶກຊາດກ່ອນໄດ້ຕາມຄວາມເປັນຈິງນັ້ນ ເປັນຂອງບຸກຄົນຜູ້ມີຈິດເປັນສະມາທິ ບໍ່ກ່າວວ່າ ເປັນຂອງບຸກຄົນຜູ້ມີຈິດບໍ່ເປັນສະມາທິ

ເຮົາກ່າວວ່າ ຍານຮູ້ແຈ້ງຈຸຕິແລະການເກີດຂອງໝູ່ສັດຕາມຄວາມເປັນຈິງນັ້ນ ເປັນຂອງບຸກຄົນຜູ້ມີຈິດເປັນສະມາທິ ບໍ່ກ່າວວ່າ ເປັນຂອງບຸກຄົນຜູ້ມີຈິດບໍ່ເປັນສະມາທິ

ເຮົາກ່າວວ່າ ຍານຮູ້ແຈ້ງຄວາມໝົດສິ້ນອາສະວະທັງຫຼາຍຕາມຄວາມເປັນຈິງນັ້ນ ເປັນຂອງບຸກຄົນຜູ້ມີຈິດເປັນສະມາທິ ບໍ່ກ່າວວ່າ ເປັນຂອງບຸກຄົນຜູ້ມີຈິດບໍ່ເປັນສະມາທິ

ພິກຂຸທັງຫຼາຍ ສະມາທິເປັນມັກ[១] ອະສະມາທິເປັນກຸມມັກ[២] ດ້ວຍປະການດັ່ງນີ້ແລ

**ສີຫະນາທະສູດທີ ໑໐ ຈົບ**

**ມະຫາວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ໂສນະສູດ | ໖. ຜັກຄຸນະສູດ |
| ໒. ສະລະພິຊາຕິສູດ | ໗. ອາສະວະສູດ |
| ໓. ທາຣຸກຳມິກະສູດ | ໘. ທັດຖິສາຣີປຸດຕະສູດ |
| ໔. ມັດເຊສູດ | ໙. ປຸຣິສິນທະຣິຍະຍານະສູດ |
| ໕. ນິບເພທິກະສູດ | ໑໐. ສີຫະນາທະສູດ |

# ໆ. ເທວະຕາວັກ

## ໝວດວ່າດ້ວຍເທວະດາ

## ໑. ອະນາຄາມິຜະລະສູດ

### ວ່າດ້ວຍອະນາຄາມິຜົນ

[໖໓] ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງ ອະນາຄາມິຜົນໄດ້ ທຳ[១] ໖ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ຄວາມບໍ່ມີສັດທາ | ໔. ຄວາມບໍ່ມີຫິຣິ |
| ໒. ຄວາມບໍ່ມີໂອດຕັບປະ | ໕. ຄວາມຂີ້ຄ້ານ |
| ໓. ຄວາມຫຼົງລືມສະຕິ | ໖. ຄວາມມີປັນຍາຊາມ |

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການນີ້ແລບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງ ອະນາຄາມິຜົນໄດ້

ພິກຂຸລະທຳ ໖ ປະການໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງອະນາຄາມີຜົນໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມບໍ່ມີສັດທາ ໔. ຄວາມບໍ່ມີຫິຣິ

໒. ຄວາມບໍ່ມີໂອດຕັບປະ ໕. ຄວາມຂີ້ຄ້ານ

໓. ຄວາມຫຼົງລືມສະຕິ ໖. ຄວາມມີປັນຍາຊາມ

ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການນີ້ແລໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງ ອະນາຄາມີຜົນໄດ້

**ອະນາຄາມີຜະລະສູດທີ ໑ ຈົບ**

## ໔. ອະຣະຫັດຕະສູດ

### ວ່າດ້ວຍອະຣະຫັດຕະຜົນ

[໖໖] ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ທຳ ໖ ປະການ ອັນໃດແດ່ ຄື

| | | | |
|---|---|---|---|
| ໑. ຖີນະ | (ຄວາມຫົດຫູ່) | ໔. ມິດທະ | (ຄວາມງ່ວມເຫງົາ) |
| ໒. ອຸດທັດຈະ | (ຄວາມຟຸ້ງຊ່ານ) | ໕. ກຸກກຸດຈະ | (ຄວາມຮ້ອນໃຈ) |
| ໓. ອັດສັດທິຍະ | (ຄວາມບໍ່ມີສັດທາ) | ໖. ປະມາທະ | (ຄວາມຜະໝາດ) |

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການນີ້ແລບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງ ອະຣະຫັດຕະຜົນໄດ້

ພິກຂຸລະທຳ ໖ ປະການໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ຖີນະ ໔. ມິດທະ

໒. ອຸດທັດຈະ ໕. ກຸກກຸດຈະ

໓. ອັດສັດທິຍະ ໖. ປະມາທະ

ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການນີ້ແລໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງ ອະຣະຫັດຕະຜົນໄດ້

**ອະຣະຫັດຕະສູດທີ ໘ ຈົບ**

## ໙. ມິດຕະສູດ

## ວ່າດ້ວຍມິດ

[໕໗] ພິກຂຸທັງຫຼາຍ

ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມີມິດຊົ່ວ ມີສະຫາຍຊົ່ວ ມີເພື່ອນຊົ່ວ ເສບ ຄົບ ເຂົ້າໄປນັ່ງໃກ້ມິດຊົ່ວ ແລະປະພຶດຕາມມິດຊົ່ວເຫຼົ່ານັ້ນຢູ່ ຈັກພ່ຳເພັງອະພິສາມາຈາຣິກະທຳ[໑]ໃຫ້ບໍລິບູນໄດ້

ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ພ່ຳເພັງອະພິສະມາຈາຣິກະທຳໃຫ້ບໍລິບູນແລ້ວ ຈັກພ່ຳເພັງເສຂະທຳ[໒]ໃຫ້ບໍລິບູນໄດ້

ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ພ່ຳເພັງເສຂະທຳໃຫ້ບໍລິບູນແລ້ວ ຈັກພ່ຳເພັງສີນ ທັງຫຼາຍ[໓]ໃຫ້ບໍລິບູນໄດ້

ເປັນໄປບໍ່ໄດ້ເລີຍທີ່ພິກຂຸບໍ່ພ່ຳເພັງສີນທັງຫຼາຍໃຫ້ບໍລິບູນແລ້ວ ຈັກລະການຣາຄະ ຣູບປະຣາຄະ ຫຼືອະຣູບປະຣາຄະໄດ້

ພິກຂຸທັງຫຼາຍ

ເປັນໄປໄດ້ທີ່ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເສບ ຄົບ ເຂົ້າໄປນັ່ງໃກ້ມິດດີ ແລະປະພຶດຕາມມິດດີເຫຼົ່ານັ້ນຢູ່ ຈັກພ່ຳເພັງອະພິສະມາຈາຣິກະທຳໃຫ້ບໍລິບູນໄດ້

ເປັນໄປໄດ້ທີ່ພິກຂຸພ່ຳເພັງອະພິສະມາຈາຣິກະທຳໃຫ້ບໍລິບູນແລ້ວ ຈັກພ່ຳເພັງເສຂະທຳໃຫ້ບໍລິບູນໄດ້

ເປັນໄປໄດ້ທີ່ພິກຂຸພ່ຳເພັງເສຂະທຳໃຫ້ບໍລິບູນແລ້ວ ຈັກພ່ຳເພັງສີນທັງຫຼາຍໃຫ້ບໍລິບູນໄດ້

ເປັນໄປໄດ້ທີ່ພິກຂຸພ່ຳເພັງສີນທັງຫຼາຍໃຫ້ບໍລິບູນແລ້ວ ຈັກລະການຣາຄະ ຣູບປະຣາຄະ ຫຼືອະຣູບປະຣາຄະໄດ້

**ມິດຕະສູດທີ ໙ ຈົບ**

# ໔. ສັງຄະນິກາຣາມະສູດ

## ວ່າດ້ວຍພິກຂຸຜູ້ມັກຄຸກຄີດ້ວຍໝູ່ຄະນະ

[໖໗] ພິກຂຸທັງຫຼາຍ

໑. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມັກການຄຸກຄີດ້ວຍໝູ່[1] ຍິນດີການຄຸກຄີດ້ວຍໝູ່ ປະກອບຄວາມມັກການຄຸກຄີດ້ວຍໝູ່ ເປັນຜູ້ມັກຄະນະ[2] ຍິນດີໃນຄະນະ ປະກອບຄວາມຍິນດີໃນຄະນະ ຈັກຍິນດີໃນປະວິເວກ[3]ຕາມລຳພັງໄດ້

໒. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ຍິນດີໃນປະວິເວກຕາມລຳພັງຈັກຖືເອົານິມິດແຫ່ງຈິດ[4]ໄດ້

໓. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ຖືເອົານິມິດແຫ່ງຈິດ ຈັກພ່ຳເພັງສຳມາທິດຖິ[5] ໃຫ້ບໍລິບູນໄດ້

໔. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ພ່ຳເພັງສຳມາທິດຖິໃຫ້ບໍລິບູນແລ້ວ ຈັກພ່ຳເພັງສຳມາສະມາທິໃຫ້ບໍລິບູນໄດ້

໕. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ພ່ຳເພັງສຳມາສະມາທິ[6]ໃຫ້ບໍລິບູນແລ້ວ ຈັກລະສັງໂຍດໄດ້

໖. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ຍັງລະສັງໂຍດບໍ່ໄດ້ແລ້ວຈັກເຮັດໃຫ້ແຈ້ງນິບພານໄດ້

ພິກຂຸທັງຫຼາຍ

໑. ເປັນໄປໄດ້ທີ່ພິກຂຸຜູ້ບໍ່ມັກການຄຸກຄີດ້ວຍໝູ່ ບໍ່ຍິນດີການຄຸກຄີດ້ວຍໝູ່ ບໍ່ປະກອບຄວາມມັກການຄຸກຄີດ້ວຍໝູ່ ບໍ່ມັກຄະນະ ບໍ່ຍິນດີໃນຄະນະ ບໍ່ປະກອບຄວາມຍິນດີໃນຄະນະ ຈັກຍິນດີໃນປະວິເວກຕາມລຳພັງໄດ້

໒. ເປັນໄປໄດ້ທີ່ພິກຂຸຜູ້ຍິນດີໃນປະວິເວກຕາມລຳພັງ ຈັກຖືເອົານິມິດແຫ່ງຈິດໄດ້

໓. ເປັນໄປໄດ້ທີ່ພິກຂຸຜູ້ຖືເອົານິມິດແຫ່ງຈິດ ຈັກພ່ຳເພັງສຳມາທິດຖິໃຫ້ບໍລິບູນໄດ້

໔. ເປັນໄປໄດ້ທີ່ພິກຂຸຜູ້ພ່ຳເພັງສຳມາທິດຖິໃຫ້ບໍລິບູນແລ້ວ ຈັກພ່ຳເພັງ ສຳມາສະມາທິໃຫ້ບໍລິບູນໄດ້

໕. ເປັນໄປໄດ້ທີ່ພິກຂຸຜູ້ພ່ຳເພັງສຳມາສະມາທິໃຫ້ບໍລິບູນແລ້ວ ຈັກລະສັງໂຍດໄດ້

໖. ເປັນໄປໄດ້ທີ່ພິກຂຸຜູ້ລະສັງໂຍດໄດ້ແລ້ວ ຈັກເຮັດໃຫ້ແຈ້ງນິບພານໄດ້

**ສັງຄະນິກາຣາມະສູດທີ ໔ ຈົບ**

# ໕. ເທວະຕາສູດ

## ວ່າດ້ວຍເທວະດາສະແດງທຳ

[໖໙] ຄັ້ງນັ້ນ ເມື່ອຣາຕີຜ່ານໄປ ເທວະດາຕົນໜຶ່ງມີວັນນະງົດງາມຫຼາຍ ເປັ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໖ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມ ແກ່ພິກຂຸ ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສາດສະດາ
໒. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະທຳ
໓. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສົງ
໔. ຄວາມເປັນຜູ້ມີຄວາມເຄົາລົບໃນ ສິກຂາ
໕. ຄວາມເປັນຜູ້ວ່າງ່າຍ
໖. ຄວາມເປັນຜູ້ມີກັນລະຍານະມິດ (ມິດດີ)

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໖ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ

ເມື່ອເທວະດານັ້ນ ໄດ້ຂາບທູນດັ່ງນີ້ແລ້ວ ພຣະສາດສະດາຊົງພໍພຣະທະໄທ ເມື່ອເທວະດານັ້ນຮູ້ວ່າ "ພຣະສາດສະດາຊົງພໍພຣະທະໄທເຮົາ" ຈຶ່ງຖວາຍອະພິວາດ ກະທຳປະທັກຂິນແລ້ວຫາຍໄປ ໃນບ່ອນນັ້ນແລ

ເມື່ອຄືນນັ້ນຜ່ານໄປ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸ ທັງຫຼາຍ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາຕົນໜຶ່ງມີວັນນະງົດງາມຫຼາຍ ເປັ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າມາຫາເຮົາຮອດບ່ອນຢູ່ ໄຫວ້ເຮົາແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບເຮົາດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໖ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສາດສະດາ
໒. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະທຳ

໓. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສົງ
໔. ຄວາມເປັນຜູ້ມີຄວາມເຄົາລົບໃນ ສິກຂາ
໕. ຄວາມເປັນຜູ້ວ່າ ງ່າຍ
໖. ຄວາມເປັນຜູ້ມີກັນລະຍານະມິດ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໖ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ"

ພິກຂຸທັງຫຼາຍ ເທວະດານັ້ນ ເມື່ອກ່າວດັ່ງນີ້ແລ້ວ ຈຶ່ງໄຫວ້ເຮົາກະທຳປະທັກຂິນແລ້ວຫາຍໄປ ໃນບ່ອນນັ້ນແລ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະສາຣີບຸດຈຶ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ແຈ້ງເນື້ອຄວາມແຫ່ງພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ ໄດ້ໂດຍພິດສະດານແນວນີ້ວ່າ

ພິກຂຸໃນພຣະທຳວິໄນນີ້

໑. ຕົນເອງເປັນຜູ້ມີຄວາມເຄົາລົບໃນພຣະສາດສະດາ ສັນເສີນຄວາມເປັນຜູ້ມີຄວາມເຄົາລົບໃນພຣະສາດສະດາ ຊັກຊວນພິກຂຸເຫຼົ່າອື່ນຜູ້ບໍ່ມີຄວາມເຄົາລົບໃນສາດສະດາໃຫ້ມີຄວາມເຄົາລົບໃນພຣະສາດສະດາ ທັງປະກາດຄຸນທີ່ມີຢູ່ຈິງຂອງພິກຂຸເຫຼົ່າອື່ນຜູ້ມີຄວາມເຄົາລົບໃນສາດສະດາຕາມການອັນຄວນ
໒. ຕົນເອງເປັນຜູ້ມີຄວາມມີເຄົາລົບໃນພຣະທຳ ຯລຯ
໓. ຕົນເອງເປັນຜູ້ມີຄວາມເຄົາລົບໃນພຣະສົງ ຯລຯ
໔. ຕົນເອງເປັນຜູ້ມີຄວາມເຄົາລົບໃນສິກຂາ ຯລຯ
໕. ຕົນເອງເປັນຜູ້ວ່າງ່າຍ ຯລຯ
໖. ຕົນເອງເປັນຜູ້ມີກັນລະຍານະມິດ ສັນເສີນຄວາມເປັນຜູ້ມີກັນລະຍານະມິດ ຊັກຊວນພິກຂຸເຫຼົ່າອື່ນຜູ້ບໍ່ມີກັນລະຍານະມິດໃຫ້ເປັນຜູ້ມີກັນລະຍານະມິດ ທັງປະກາດຄຸນທີ່ມີຢູ່ຈິງຂອງພິກຂຸເຫຼົ່າອື່ນຜູ້ມີກັນລະຍານະມິດຕາມການອັນຄວນ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ແຈ້ງເນື້ອຄວາມແຫ່ງພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ ໄດ້ໂດຍພິດສະດານແນວນີ້ແລ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ດີແລ້ວ ດີແລ້ວ ເປັນການດີທີ່ທ່ານຮູ້ເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ໂດຍຫຍໍ້ນີ້ໄດ້ໂດຍພິດສະດານແນວນີ້

ສາຣີບຸດ ພິກຂຸໃນທຳວິໄນນີ້

໑. ຕົນເອງເປັນຜູ້ມີຄວາມເຄົາລົບໃນສາດສະດາ ສັນເສີນຄວາມເປັນຜູ້ມີຄວາມເຄົາລົບໃນສາດສະດາ ຊັກຊວນພິກຂຸເຫຼົ່າອື່ນຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາໃຫ້ມີຄວາມເຄົາລົບໃນສາດສະດາ ທັງປະກາດຄຸນທີ່ມີຈິງຂອງພິກຂຸເຫຼົ່າອື່ນຜູ້ມີຄວາມເຄົາລົບໃນພຣະສາດສະດາຕາມການອັນຄວນ

໒. ຕົນເອງເປັນຜູ້ມີຄວາມເຄົາລົບໃນທຳ ຯລຯ

໓. ຕົນເອງເປັນຜູ້ມີຄວາມເຄົາລົບໃນສົງ ຯລຯ

໔. ຕົນເອງເປັນຜູ້ມີຄວາມເຄົາລົບໃນສິກຂາ ຯລຯ

໕. ຕົນເອງເປັນຜູ້ວ່າງ່າຍ ຯລຯ

໖. ຕົນເອງເປັນຜູ້ມີກັນລະຍານະມິດ ສັນເສີນຄວາມເປັນຜູ້ມີກັນລະຍານະມິດ ຊັກຊວນພິກຂຸເຫຼົ່າອື່ນຜູ້ບໍ່ມີກັນລະຍານະມິດໃຫ້ເປັນຜູ້ມີກັນລະຍານະມິດ ທັງປະກາດຄຸນທີ່ມີຈິງຂອງພິກຂຸເຫຼົ່າອື່ນຜູ້ມີກັນລະຍານະມິດ ຕາມການອັນຄວນ

ສາຣີບຸດ ບັນດິດເພິ່ງຮູ້ເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ໂດຍຫຍໍ້ນີ້ໄດ້ໂດຍພິດສະດານແນວນີ້ແລ"

**ເທວະຕາສູດທີ ໕ ຈົບ**

## ໖. ສະມາທິສູດ
## ວ່າດ້ວຍສະມາທິ

[໗໐] ພິກຂຸທັງຫຼາຍ

໑. ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນມີສະມາທິທີ່ບໍ່ສະງົບ[໑] ມີສະມາທິທີ່ບໍ່ປະນີດ ມີສະມາທິທີ່ບໍ່ໄດ້ດ້ວຍຄວາມສະງົບລະງັບ ມີສະມາທິທີ່ບໍ່ມີພາວະເປັນໜຶ່ງຜຸດຂຶ້ນ[໒] ຈັກສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ[໓] ໃຊ້ອຳນາດທາງກາຍໄປ ຈົນເຖິງພົມມະໂລກໄດ້

໒. ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຈັກໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບ ແລະສຽງມະນຸດ ທັງທີ່ຢູ່ໄກແລະຢູ່ໃກ້ດ້ວຍຫູທິບອັນບໍລິສຸດເໜືອມະນຸດໄດ້

໓. ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຈັກກຳນົດຮູ້ຈິດຂອງສັດແລະບຸກຄົນອື່ນໄດ້ດ້ວຍ

ຈິດຂອງຕົນ ຄື ຈິດມີຣາຄະກໍຮູ້ວ່າຈິດມີຣາຄະ ຯລຯ ຫຼືຈິດບໍ່ລຸດພົ້ນ ກໍຮູ້ວ່າຈິດບໍ່ລຸດພົ້ນໄດ້

໔. ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຈັກຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ໄດ້

໕. ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຈັກເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ຯລຯ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງໝູ່ສັດຜູ້ເປັນໄປຕາມກຳໄດ້

໖. ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນໄດ້

ພິກຂຸທັງຫຼາຍ

໑. ເປັນໄປໄດ້ທີ່ພິກຂຸນັ້ນມີສະມາທິທີ່ສະງົບ ມີສະມາທິທີ່ປະນີດ ມີສະມາທິທີ່ໄດ້ດ້ວຍ ຄວາມສະງົບລະງັບ ມີສະມາທິທີ່ມີພາວະທີ່ເປັນໜຶ່ງຜຸດຂຶ້ນ ຈັກສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກໄດ້

໒. ເປັນໄປໄດ້ທີ່ພິກຂຸນັ້ນຈັກໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບແລະສຽງມະນຸດທັງທີ່ຢູ່ໄກແລະຢູ່ໃກ້ດ້ວຍຫູທິບອັນບໍລິສຸດເໜືອມະນຸດໄດ້

໓. ເປັນໄປໄດ້ທີ່ພິກຂຸນັ້ນຈັກກຳນົດຮູ້ຈິດຂອງສັດ ແລະບຸກຄົນອື່ນໄດ້ດ້ວຍຈິດຂອງຕົນ ຄື ຈິດມີຣາຄະກໍຮູ້ວ່າຈິດມີຣາຄະ ຯລຯ ຫຼືຈິດບໍ່ລຸດພົ້ນກໍຮູ້ວ່າຈິດບໍ່ລຸດພົ້ນໄດ້

໔. ເປັນໄປໄດ້ທີ່ພິກຂຸນັ້ນຈັກຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ໄດ້

໕. ເປັນໄປໄດ້ທີ່ພິກຂຸນັ້ນຈັກເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດ ເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳໄດ້

໖. ເປັນໄປໄດ້ທີ່ພິກຂຸນັ້ນຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນໄດ້

**ສະມາທິສູດທີ ໖ ຈົບ**

## ໗. ສັກຂິພັບພະສູດ

## ວ່າດ້ວຍຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງ

[໗໑] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ບໍ່ອາດບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ ໃນເມື່ອມີເຫດ[໑]

ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຫຼົ່ານີ້ຄືທຳຝ່າຍເສື່ອມ"
໒. ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຫຼົ່ານີ້ຄືທຳຝ່າຍຄືຄົງທີ່"
໓. ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຫຼົ່ານີ້ຄືທຳຝ່າຍຄຸນວິເສດ"
໔. ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຫຼົ່ານີ້ຄືທຳຝ່າຍທຳລາຍກິເລດ[໒]"
໕. ເປັນຜູ້ບໍ່ທຳຄວາມເຄົາລົບ[໓]
໖. ເປັນຜູ້ບໍ່ເຮັດສິ່ງທີ່ເປັນສັບປາຍະ[໔]

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ບໍ່ອາດບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ ໃນເມື່ອມີເຫດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ອາດບັນລຸຄວາມ ເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ ໃນເມື່ອມີເຫດ

ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຫຼົ່ານີ້ຄືທຳຝ່າຍເສື່ອມ"
໒. ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຫຼົ່ານີ້ຄືທຳຝ່າຍຄືຄົງທີ່"
໓. ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຫຼົ່ານີ້ຄືທຳຝ່າຍຄຸນວິເສດ"

໔. ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຫຼົ່ານີ້ຄືທຳຝ່າຍທຳລາຍກິເລດ"
໕. ເປັນຜູ້ທຳຄວາມເຄົາລົບ
໖. ເປັນຜູ້ເຮັດສິ່ງທີ່ເປັນສັບປາຍະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ອາດບັນລຸຄວາມ ເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ ໃນເມື່ອມີເຫດ

**ສັກຂິພັບພະສູດທີ ໗ ຈົບ**

## ໘. ພະລະສູດ

## ວ່າດ້ວຍຄວາມມີກຳລັງໃນສະມາທິ

[໗໔] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ບໍ່ອາດບັນລຸຄວາມມີກຳລັງໃນສະມາທິໄດ້

ທຳ ໖ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ສະຫຼາດໃນການເຂົ້າສະມາທິ[១]
໒. ເປັນຜູ້ບໍ່ສະຫຼາດໃນການໃຫ້ສະມາທິຕັ້ງຢູ່ໄດ້
໓. ເປັນຜູ້ບໍ່ສະຫຼາດໃນການອອກຈາກສະມາທິ
໔. ເປັນຜູ້ບໍ່ທຳຄວາມເຄົາລົບ
໕. ເປັນຜູ້ບໍ່ເຮັດໃຫ້ຕິດຕໍ່
໖. ເປັນຜູ້ບໍ່ເຮັດສິ່ງທີ່ເປັນສັບປາຍະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ບໍ່ອາດບັນລຸຄວາມມີກຳລັງໃນສະມາທິໄດ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ອາດບັນລຸຄວາມມີກຳລັງໃນສະມາທິໄດ້

ທຳ ໖ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ສະຫຼາດໃນການເຂົ້າສະມາທິ

໒. ເປັນຜູ້ສະຫຼາດໃນການໃຫ້ສະມາທິຕັ້ງຢູ່ໄດ້
໓. ເປັນຜູ້ສະຫຼາດໃນການອອກຈາກສະມາທິ
໔. ເປັນຜູ້ທຳຄວາມເຄົາລົບ
໕. ເປັນຜູ້ເຮັດໃຫ້ຕິດຕໍ່
໖. ເປັນຜູ້ເຮັດສິ່ງທີ່ເປັນສັບປາຍະ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ອາດບັນລຸຄວາມມີກຳລັງໃນສະມາທິໄດ້

**ພະລະສູດທີ ໗ ຈົບ**

## ໙. ປະຖົມຕັດຊານະສູດ

## ວ່າດ້ວຍການບັນລຸປະຖົມຊານສູດທີ ໑

[໗໓] ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການບໍ່ໄດ້ ກໍບໍ່ອາດບັນລຸປະຖົມຊານຢູ່ໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ການສັນທະ (ຄວາມພໍໃຈໃນການ)
໒. ພະຍາບາດ (ຄວາມຄິດຮ້າຍ)
໓. ຖີນະມິດທະ (ຄວາມທໍ້ຖອຍແລະງ່ວງເຫງົາ)
໔. ອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ)
໕. ວິຈິກິດສາ (ຄວາມລັງເລສົງໄສ)
໖. ບໍ່ເຫັນໂທດໃນການທັງຫຼາຍດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການນີ້ແລບໍ່ໄດ້ ກໍບໍ່ອາດບັນລຸປະຖົມຊານຢູ່ໄດ້
ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການໄດ້ແລ້ວ ຈຶ່ງອາດບັນລຸປະຖົມຊານຢູ່ໄດ້
ທຳ ໖ ປະການ ອັນໃດແດ່ ຄື

໑. ການສັນທະ
໒. ພະຍາບາດ
໓. ຖີນະມິດທະ
໔. ອຸດທັດຈະກຸກກຸດຈະ
໕. ວິຈິກິດສາ

໖. ເຫັນໂທດໃນກາມທັງຫຼາຍດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການນີ້ແລໄດ້ແລ້ວ ຈຶ່ງອາດບັນລຸປະຖົມຊານ ຢູ່ໄດ້

**ປະຖົມຕັດຊານະສູດທີ ໙ ຈົບ**

## ໑໐. ທຸຕິຍະຕັດຊານະສູດ

## ວ່າດ້ວຍການບັນລຸປະຖົມຊານສູດທີ ໒

[໗໔] ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການບໍ່ໄດ້ ກໍບໍ່ອາດບັນລຸ ປະຖົມຊານຢູ່ໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ກາມວິຕົກ (ຄວາມນຶກໃນທາງກາມ)
໒. ພະຍາບາດວິຕົກ (ຄວາມນຶກໃນທາງພະຍາບາດ)
໓. ວິຫິງສາວິຕົກ (ຄວາມນຶກໃນທາງບຽດບຽນ)
໔. ກາມສັນຍາ (ຄວາມກຳນົດໝາຍໃນທາງກາມ)
໕. ພະຍາບາດສັນຍາ (ຄວາມກຳນົດໝາຍໃນທາງພະຍາບາດ)
໖. ວິຫິງສາສັນຍາ (ຄວາມກຳນົດໝາຍໃນທາງບຽດບຽນ)

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການນີ້ແລບໍ່ໄດ້ ກໍບໍ່ອາດບັນລຸປະຖົມຊານຢູ່ໄດ້

ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການໄດ້ແລ້ວ ຈຶ່ງອາດບັນລຸປະຖົມຊານຢູ່ໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ກາມວິຕົກ
໒. ພະຍາບາດວິຕົກ
໓. ວິຫິງສາວິຕົກ
໔. ກາມສັນຍາ
໕. ພະຍາບາດສັນຍາ
໖. ວິຫິງສາສັນຍາ

ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການນີ້ແລໄດ້ແລ້ວ ຈຶ່ງອາດບັນລຸປະຖົມຊານຢູ່ໄດ້

**ທຸຕິຍະຕັດຊານະສູດທີ ໑໐ ຈົບ**

**ເທວະຕາວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໙. ອະຣະຫັດຕະວັກ

## ໝວດວ່າດ້ວຍອະຣະຫັດຕະຜົນ

## ໑. ທຸກຂະສູດ

### ວ່າດ້ວຍທຳທີ່ເປັນເຫດໃຫ້ຢູ່ເປັນທຸກ

[໗໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ຍ່ອມຢູ່ເປັນທຸກ ເດືອດຮ້ອນ໑ ຄັບແຄ້ນໃຈ ຮ້ອນຮົນ໔ໃນພົບນີ້ແລ ຫຼັງຈາກ ຕາຍແລ້ວ ເພິ່ງຫວັງໄດ້ທຸກຄະຕິ໒

ທຳ ໖ ປະການ ອັນໃດແດ່ ຄື

໑. ກາມວິຕົກ
໒. ວິຫິງສາວິຕົກ
໓. ພະຍາບາດສັນຍາ
໔. ພະຍາບາດວິຕົກ
໕. ກາມສັນຍາ
໖. ວິຫິງສາສັນຍາ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ຍ່ອມຢູ່ເປັນທຸກ ເດືອດຮ້ອນ ຄັບແຄ້ນໃຈ ຮ້ອນຮົນໃນພົບນີ້ແລ ຫຼັງຈາກຕາຍແລ້ວ ເພິ່ງຫວັງໄດ້ທຸກຄະຕິ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ຍ່ອມຢູ່ເປັນສຸກ ບໍ່ເດືອດຮ້ອນ ບໍ່ຄັບແຄ້ນໃຈ ບໍ່ຮ້ອນຮົນໃນພົບນີ້ແລ ຫຼັງຈາກຕາຍແລ້ວ ເພິ່ງຫວັງໄດ້ສຸກຄະຕິ

ທຳ ໖ ປະການ ອັນໃດແດ່ ຄື

໑. ເນກຂຳມະວິຕົກ (ຄວາມນຶກປອດຈາກກາມ)

໔. ອະພະຍາບາດວິຕົກ (ຄວາມນຶກປອດຈາກພະຍາບາດ)
໖. ອະວິຫິງສາວິຕົກ (ຄວາມນຶກປອດຈາກການບຽດບຽນ)
໔. ເນກຂຳມະສັນຍາ (ຄວາມກຳນົດໝາຍປອດຈາກການ)
໕. ອະພະຍາບາດສັນຍາ (ຄວາມກຳນົດໝາຍປອດຈາກພະຍາບາດ)
໖. ອະວິຫິງສາສັນຍາ (ຄວາມກຳນົດໝາຍປອດຈາກການບຽດບຽນ)

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ຍ່ອມຢູ່ເປັນສຸກ ບໍ່ເດືອດຮ້ອນ ບໍ່ຄັບແຄ້ນໃຈ ບໍ່ຮ້ອນຮົນໃນພົບນີ້ແລ ຫຼັງຈາກຕາຍແລ້ວ ເພິ່ງຫວັງໄດ້ສຸກຄະຕິ

**ທຸກຂະສູດທີ ໑ ຈົບ**

## ໔. ອະຣະຫັດຕະສູດ

## ວ່າດ້ວຍອະຣະຫັດຕະຜົນ

[໗໖] ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ມານະ (ຄວາມຖືໂຕ)
໔. ໂອມານະ (ຄວາມຖືໂຕວ່າຕ່ຳຕ້ອຍກວ່າເຂົາ)
໖. ອະຕິມານະ (ຄວາມດູໝິ່ນເຂົາ)
໔. ອະທິມານະ (ຄວາມເຂົ້າໃຈຜິດ)
໕. ຖ່ຳພະ (ຄວາມຫົວດື້)
໖. ອະຕິນິປາຕະ (ຄວາມດູໝິ່ນຕົນເອງວ່າເປັນຄົນຊົ່ວ)

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການນີ້ແລບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງ ອະຣະຫັດຕະຜົນໄດ້

ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ມານະ ໔. ໂອມານະ
໖. ອະຕິມານະ ໔. ອະທິມານະ

໕. ຖໍາພະ ໖. ອະຕິມິປາຕະ

ພິກຂຸທັງຫຼາຍ ພິກຂຸລະທໍາ ໖ ປະການນີ້ແລໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງ ອະຣະຫັດຕະຜົນໄດ້

**ອະຣະຫັດຕະສູດທີ ໒ ຈົບ**

## ໓. ອຸດຕະຣິມະນຸດສະທໍາມະສູດ

## ວ່າດ້ວຍຍານທັດສະນະທີ່ຍິ່ງກວ່າທໍາຂອງມະນຸດ

[໗໗] ພິກຂຸທັງຫຼາຍ ພິກຂຸຍັງລະທໍາ ໖ ປະການບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດ[໑] ອັນວິເສດຍິ່ງກວ່າທໍາຂອງມະນຸດ[໒]ໄດ້

ທໍາ ໖ ປະການ ອັນໃດແດ່ ຄື

໑. ຄວາມຫຼົງລືມສະຕິ
໒. ຄວາມບໍ່ມີສໍາປະຊັນຍະ
໓. ຄວາມບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໔. ຄວາມບໍ່ຮູ້ຈັກປະມານໃນການບໍລິໂພກ
໕. ການຫຼອກລວງ[໓]
໖. ການເວົ້າປ້ັຍໍ[໔]

ພິກຂຸທັງຫຼາຍ ພິກຂຸຍັງລະທໍາ ໖ ປະການນີ້ແລບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດ ອັນວິເສດຍິ່ງກວ່າທໍາຂອງມະນຸດໄດ້

ພິກຂຸທັງຫຼາຍ ພິກຂຸລະທໍາ ໖ ປະການໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດ ອັນວິເສດຍິ່ງກວ່າທໍາຂອງມະນຸດໄດ້

ທໍາ ໖ ປະການ ອັນໃດແດ່ ຄື

໑. ຄວາມຫຼົງລືມສະຕິ
໒. ຄວາມບໍ່ມີສໍາປະຊັນຍະ
໓. ຄວາມບໍ່ຄຸ້ມຄອງທະວານໃນອິນຊີ
໔. ຄວາມບໍ່ຮູ້ຈັກປະມານໃນການບໍລິໂພກ
໕. ການຫຼອກລວງ

໖. ການເວົ້າປັ້ຍໍ

ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການນີ້ແລໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດ ອັນວິເສດຍິ່ງກວ່າທຳຂອງມະນຸດໄດ້

**ອຸດຕະຣິມະນຸດສະທຳມະສູດທີ ໓ ຈົບ**

## ໔. ສຸຂະໂສມະນັດສະສູດ
## ວ່າດ້ວຍທຳທີ່ເປັນເຫດໃຫ້ມີສຸກໂສມະນັດ

[໗໘] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ຫຼາຍດ້ວຍ ສຸກໂສມະນັດຢູ່ໃນປັດຈຸບັນຢ່າງແນ່ນອນ ແລະເປັນຜູ້ຜາຣົບເຫດແຫ່ງຄວາມໝົດສິ້ນອາສະວະທັງຫຼາຍ

ທຳ ໖ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ຍິນດີໃນທຳ
໒. ເປັນຜູ້ຍິນດີໃນພາວະນາ
໓. ເປັນຜູ້ຍິນດີໃນການລະ
໔. ເປັນຜູ້ຍິນດີໃນປະວິເວກ
໕. ເປັນຜູ້ຍິນດີໃນຄວາມບໍ່ພະຍາບາດ
໖. ເປັນຜູ້ຍິນດີໃນທຳທີ່ບໍ່ເປັນເຄື່ອງລ້າຊ້າ໑

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ຫຼາຍດ້ວຍ ສຸກໂສມະນັດຢູ່ໃນປັດຈຸບັນຢ່າງແນ່ນອນ ແລະເປັນຜູ້ຜາຣົບເຫດແຫ່ງຄວາມໝົດສິ້ນອາສະວະທັງຫຼາຍ

**ສຸຂະໂສມະນັດສະສູດທີ ໔ ຈົບ**

## ໕. ອະທິຄະມະສູດ

## ວ່າດ້ວຍການບັນລຸກຸສົນທຳ

[໗໙] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ບໍ່ອາດບັນລຸກຸສົນທຳທີ່ຍັງບໍ່ໄດ້ບັນລຸ ຫຼື ເຮັດກຸສົນທຳທີ່ໄດ້ບັນລຸແລ້ວໃຫ້ຈະເລີນໄດ້

ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ສະຫຼາດໃນຄວາມຈະເລີນ[໑]
໒. ເປັນຜູ້ບໍ່ສະຫຼາດໃນຄວາມເສື່ອມ[໒]
໓. ເປັນຜູ້ບໍ່ສະຫຼາດໃນອຸບາຍ[໓]
໔. ບໍ່ສ້າງສັນທະ[໔]ເພື່ອບັນລຸກຸສົນທຳທີ່ຍັງບໍ່ໄດ້ບັນລຸ
໕. ບໍ່ຮັກສາກຸສົນທຳທີ່ໄດ້ບັນລຸແລ້ວ
໖. ບໍ່ເຮັດກຸສົນທຳໃຫ້ເຖິງພ້ອມດ້ວຍການເຮັດຕິດຕໍ່

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ບໍ່ອາດບັນລຸກຸສົນທຳທີ່ຍັງບໍ່ໄດ້ບັນລຸ ຫຼື ເຮັດກຸສົນທຳທີ່ໄດ້ບັນລຸແລ້ວໃຫ້ຈະເລີນໄດ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ອາດບັນລຸກຸສົນທຳທີ່ຍັງບໍ່ໄດ້ບັນລຸ ຫຼື ເຮັດກຸສົນທຳທີ່ໄດ້ບັນລຸແລ້ວໃຫ້ຈະເລີນໄດ້

ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ສະຫຼາດໃນຄວາມຈະເລີນ
໒. ເປັນຜູ້ສະຫຼາດໃນຄວາມເສື່ອມ
໓. ເປັນຜູ້ສະຫຼາດໃນອຸບາຍ
໔. ສ້າງສັນທະເພື່ອບັນລຸກຸສົນທຳທີ່ຍັງບໍ່ໄດ້ບັນລຸ
໕. ຮັກສາກຸສົນທຳທີ່ໄດ້ບັນລຸແລ້ວ
໖. ເຮັດກຸສົນທຳໃຫ້ເຖິງພ້ອມດ້ວຍການເຮັດຕິດຕໍ່

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ອາດບັນລຸ ກຸສົນທຳທີ່ຍັງບໍ່ໄດ້ບັນລຸ ຫຼືເຮັດກຸສົນທຳທີ່ໄດ້ບັນລຸແລ້ວໃຫ້ຈະເລີນໄດ້

**ອະທິຄະມະສູດທີ ໕ ຈົບ**

## ໖. ມະຫັດຕະສູດ

## ວ່າດ້ວຍການບັນລຸຄວາມເປັນໃຫຍ່

[໗໐] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ບໍ່ດົນປານໃດ ຍ່ອມບັນລຸຄວາມເປັນໃຫຍ່ ຄວາມໄພບູນໃນທຳທັງຫຼາຍ

ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ຫຼາຍດ້ວຍແສງສະຫວ່າງ[១]
໒. ເປັນຜູ້ຫຼາຍດ້ວຍຄວາມພຽນ
໓. ເປັນຜູ້ຫຼາຍດ້ວຍຄວາມຍິນດີ[៤]
໔. ເປັນຜູ້ຫຼາຍດ້ວຍຄວາມບໍ່ສັນໂດດ[១]
໕. ເປັນຜູ້ບໍ່ຖືເບົາ
໖. ເຮັດຄວາມພຽນໃຫ້ຍິ່ງຂຶ້ນໃນກຸສົນທຳທັງຫຼາຍ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ບໍ່ດົນປານໃດ ຍ່ອມບັນລຸຄວາມເປັນໃຫຍ່ ຄວາມໄພບູນໃນທຳທັງຫຼາຍ

**ມະຫັດຕະສູດທີ ໖ ຈົບ**

## ෆ. ປະຖົມນິຣະຍະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ເກີດໃນນະຣົກສູດທີ ໑

[໗໑] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໖ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ
໒. ເປັນຜູ້ລັກຊັບ
໓. ເປັນຜູ້ປະພຶດຜິດໃນກາມ
໔. ເປັນຜູ້ເວົ້າຕົວະ
໕. ເປັນຜູ້ມີຄວາມປາຖະໜາຊົ່ວ
໖. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໖ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການ ຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການ ລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການ ປະພຶດຜິດໃນກາມ
໔. ເປັນຜູ້ເວັ້ນຂາດຈາກການ ເວົ້າຕົວະ
໕. ເປັນຜູ້ບໍ່ມີຄວາມປາຖະໜາຊົ່ວ
໖. ເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ປະຖົມນິຣະຍະສູດທີ ໗ ຈົບ**

## ໘. ທຸຕິຍະນິຣະຍະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ເກີດໃນນະຣົກສູດທີ ໒

[໘໔] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໖ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວົ້າຕົວະ
໒. ເປັນຜູ້ເວົ້າສັບສໍ່
໓. ເປັນຜູ້ເວົ້າຄຳຫຍາບ
໔. ເປັນຜູ້ເວົ້າບໍ່ມີສາຣະ
໕. ເປັນຜູ້ມັກໂລບ
໖. ເປັນຜູ້ມີຄວາມຄະນອງ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໖ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການເວົ້າ ຕົວະ
໒. ເປັນຜູ້ເວັ້ນຂາດຈາກການເວົ້າ ສັບສໍ່
໓. ເປັນຜູ້ເວັ້ນຂາດຈາກການເວົ້າ ຄຳຫຍາບ

໔. ເປັນຜູ້ເວັ້ນຂາດຈາກການເວົ້າ ບໍ່ມີສາຣະ
໕. ເປັນຜູ້ບໍ່ມັກໂລບ
໖. ເປັນຜູ້ບໍ່ມີຄວາມຄະນອງ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ທຸຕິຍະນິຣະຍະສູດທີ ໗ ຈົບ**

## ໘. ອັກຄະທຳມະສູດ

## ວ່າດ້ວຍທຳຊັ້ນເລີດ

[໗໑] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ບໍ່ອາດເຮັດໃຫ້ແຈ້ງອະຣະຫັດຕະຜົນອັນເປັນທຳຊັ້ນເລີດໄດ້

ທຳ ໖ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ບໍ່ມີໂອດຕັບປະ
໓. ເປັນຜູ້ມີປັນຍາຊາມ
໔. ເປັນຜູ້ບໍ່ມີຫິຣິ
໕. ເປັນຜູ້ຂີ້ຄ້ານ
໖. ເປັນຜູ້ຫ່ວງໃຍກາຍແລະຊີວິດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ບໍ່ອາດເຮັດໃຫ້ແຈ້ງອະຣະຫັດຕະຜົນອັນເປັນທຳຊັ້ນເລີດໄດ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ອາດເຮັດໃຫ້ແຈ້ງອະຣະຫັດຕະຜົນອັນເປັນທຳຊັ້ນເລີດໄດ້

ທຳ ໖ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີໂອດຕັບປະ
໓. ເປັນຜູ້ມີປັນຍາ
໔. ເປັນຜູ້ມີຫິຣິ
໕. ເປັນຜູ້ພາຣົບຄວາມພຽນ
໖. ເປັນຜູ້ບໍ່ຫ່ວງໃຍກາຍແລະຊີວິດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ອາດເຮັດໃຫ້ແຈ້ງອະຣະຫັດຕະຜົນອັນເປັນທຳຊັ້ນເລີດໄດ້

**ອັກຄະທຳມະສູດທີ ໗ ຈົບ**

# ໑໐. ຣັດຕິທິວະສະສູດ

## ວ່າດ້ວຍມື້ແລະຄືນ

[໗໘] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເມື່ອກາງເວັນຫຼືກາງຄືນຜ່ານໄປ ເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ

ທຳ ໖ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມັກຫຼາຍ ມີຄວາມຄັບແຄ້ນໃຈ ບໍ່ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້
໒. ເປັນຜູ້ບໍ່ມີສັດທາ
໓. ເປັນຜູ້ທຸສີນ
໔. ເປັນຜູ້ຂີ້ຄ້ານ
໕. ເປັນຜູ້ຫຼົງລືມສະຕິ
໖. ເປັນຜູ້ມີປັນຍາຊາມ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເມື່ອກາງເວັນຫຼື ກາງຄືນຜ່ານໄປ ເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເມື່ອກາງເວັນຫຼືກາງຄືນຜ່ານໄປ ເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ

ທຳ ໖ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ມັກຫຼາຍ ບໍ່ມີຄວາມຄັບແຄ້ນໃຈ ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້
໒. ເປັນຜູ້ມີສັດທາ

໓. ເປັນຜູ້ມີສີນ
໔. ເປັນຜູ້ພາຣົບຄວາມພຽນ
໕. ເປັນຜູ້ມີສະຕິ
໖. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເມື່ອກາງເວັນຫຼື ກາງຄືນຜ່ານໄປ ເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ

**ຣັດຕິທິວະສະສູດທີ ໑໐ ຈົບ**

**ອະຣະຫັດຕະວັກທີ ໙ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໕. ສີຕິວັກ

## ໝວດວ່າດ້ວຍສີຕິພາວະ[1]

## ໑. ສີຕິພາວະສູດ

### ວ່າດ້ວຍສີຕິພາວະ

[໘໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການເປັນຜູ້ບໍ່ອາດເຮັດໃຫ້ແຈ້ງສີຕິພາວະ(ສະພາວະທີ່ເຢັນ)ອັນປະເສີດ ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ບໍ່ຂົ່ມຈິດໃນສະໄໝທີ່ຄວນຂົ່ມ[2]

໒. ບໍ່ປະຄອງຈິດໃນສະໄໝທີ່ຄວນປະຄອງ[໓]
໓. ບໍ່ເຮັດຈິດໃຫ້ແຈ່ມໃສໃນສະໄໝທີ່ຄວນໃຫ້ແຈ່ມໃສ[໔]
໔. ບໍ່ວາງຈິດໃນສະໄໝທີ່ຄວນວາງ[໕]
໕. ນ້ອມໄປໃນທຳທີ່ຊົ່ວ
໖. ຍິນດີຍິ່ງໃນສັກກາຍະທິດຖິ[໖]

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ບໍ່ອາດເຮັດໃຫ້ແຈ້ງສີຕິພາວະອັນປະເສີດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ອາດເຮັດໃຫ້ແຈ້ງ ສີຕິພາວະອັນປະເສີດ ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຂົ່ມຈິດໃນສະໄໝທີ່ຄວນຂົ່ມ
໒. ປະຄອງຈິດໃນສະໄໝທີ່ຄວນປະຄອງ
໓. ເຮັດຈິດໃຫ້ແຈ່ມໃສໃນສະໄໝທີ່ຄວນໃຫ້ແຈ່ມໃສ
໔. ວາງຈິດໃນສະໄໝທີ່ຄວນວາງ
໕. ນ້ອມໄປໃນທຳທີ່ປະນີດ
໖. ຍິນດີຍິ່ງໃນນິບພານ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ອາດເຮັດໃຫ້ແຈ້ງ ສີຕິພາວະອັນປະເສີດ

**ສີຕິພາວະສູດທີ ໑ ຈົບ**

## ໒. ອາວະຣະນະຕາສູດ

## ວ່າດ້ວຍທຳເປັນເຄື່ອງກັ້ນ

[໗໖] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການ ແມ່ນຟັງສັດທຳຢູ່ ກໍບໍ່ອາດກ້າວລົງສູ່ສຳມັດຕະນິຍາມະ[໑]ໃນກຸສົນທຳທັງຫຼາຍໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ເປັນຜູ້ປະກອບດ້ວຍຄວາມເປັນຜູ້ມີກຳເປັນເຄື່ອງກັ້ນ[໑]

໒. ເປັນຜູ້ປະກອບດ້ວຍຄວາມເປັນຜູ້ມີກິເລດເປັນເຄື່ອງກັ້ນ[໒]
໓. ເປັນຜູ້ປະກອບດ້ວຍຄວາມເປັນຜູ້ມີວິບາກເປັນເຄື່ອງກັ້ນ[໓]
໔. ເປັນຜູ້ບໍ່ມີສັດທາ
໕. ເປັນຜູ້ບໍ່ມີສັນທະ
໖. ເປັນຜູ້ມີປັນຍາຊາມ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການນີ້ແລ ແມ່ນຟັງສັດທຳຢູ່ ກໍບໍ່ອາດກ້າວລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍໄດ້

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການ ຟັງສັດທຳຢູ່ ອາດກ້າວລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ເປັນຜູ້ບໍ່ປະກອບດ້ວຍຄວາມເປັນຜູ້ມີກຳເປັນເຄື່ອງກັ້ນ
໒. ເປັນຜູ້ບໍ່ປະກອບດ້ວຍຄວາມເປັນຜູ້ມີກິເລດເປັນເຄື່ອງກັ້ນ
໓. ເປັນຜູ້ບໍ່ປະກອບດ້ວຍຄວາມເປັນຜູ້ມີວິບາກເປັນເຄື່ອງກັ້ນ
໔. ເປັນຜູ້ມີສັດທາ
໕. ເປັນຜູ້ມີສັນທະ
໖. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການນີ້ແລ ຟັງສັດທຳຢູ່ ອາດກ້າວລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍໄດ້

**ອາວະຣະນະຕາສູດທີ ໒ ຈົບ**

## ໓. ໂວໂຣປິຕະສູດ

## ວ່າດ້ວຍຜູ້ຂ້າ

[ຏກ] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການ ແມ່ນຟັງສັດທຳຢູ່ ກໍບໍ່ອາດກ້າວລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າມານດາ

໒. ເປັນຜູ້ຂ້າບິດາ
໓. ເປັນຜູ້ຂ້າພຣະອະຣະຫັນ
໔. ເປັນຜູ້ມີຈິດຄິດປະທຸດສະຮ້າຍເຮັດພຣະໂລຫິດຂອງຕະຖາຄົດໃຫ້ຫໍ້ຂຶ້ນ
໕. ເປັນຜູ້ທຳລາຍສົງໃຫ້ແຕກກັນ
໖. ເປັນຜູ້ມີປັນຍາຊາມ ໂງ່ຈ້າ ເປັນຄົນປຶກ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການ ແມ່ນຟັງສັດທຳຢູ່ ກໍບໍ່ອາດກ້າວລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍໄດ້

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການ ຟັງສັດທຳຢູ່ ອາດກ້າວລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ເປັນຜູ້ບໍ່ຂ້າມານດາ
໒. ເປັນຜູ້ບໍ່ຂ້າບິດາ
໓. ເປັນຜູ້ບໍ່ຂ້າພຣະອະຣະຫັນ
໔. ເປັນຜູ້ບໍ່ມີຈິດຄິດປະທຸດສະຮ້າຍເຮັດພຣະໂລຫິດຂອງຕະຖາຄົດໃຫ້ຫໍ້ຂຶ້ນ
໕. ເປັນຜູ້ບໍ່ທຳລາຍສົງໃຫ້ແຕກກັນ
໖. ເປັນຜູ້ມີປັນຍາ ບໍ່ໂງ່ຈ້າ ບໍ່ເປັນຄົນປຶກ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການນີ້ແລ ຟັງສັດທຳຢູ່ ອາດກ້າວລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍໄດ້

**ໂອໂຣປິຕະສູດທີ ໑ ຈົບ**

## ໒. ສຸດສູສະຕິສູດ

## ວ່າດ້ວຍການຟັງດ້ວຍດີ

[໘໘] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການ ແມ່ນຟັງສັດທຳຢູ່ ກໍບໍ່ອາດກ້າວລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍໄດ້ ທຳ ໖ ປະການ ອັນໃດແດ່ ຄື

ເມື່ອບຸກຄົນອື່ນສະແດງທຳວິໄນທີ່ຕະຖາຄົດປະກາດໄວ້

໑. ບໍ່ຕັ້ງໃຈຟັງດ້ວຍດີ

໔. ບໍ່ງ່ຽງໂສດສະດັບ
໕. ບໍ່ຕັ້ງໃຈໃຝ່ຮູ້
໔. ຖືເອົາແຕ່ສິ່ງທີ່ບໍ່ເປັນປະໂຫຍດ
໕. ຖິ້ມສິ່ງທີ່ເປັນປະໂຫຍດ
໖. ປະກອບດ້ວຍອະນະນຸໂລມິກຂັນຕິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການນີ້ແລ ແມ່ນຟັງສັດທຳຢູ່ ກໍບໍ່ອາດກ້າວລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍໄດ້

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການ ຟັງສັດທຳຢູ່ ອາດເພື່ອກ້າວລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍໄດ້ ທຳ ໖ ປະການ ອັນໃດແດ່ ຄື

ເມື່ອບຸກຄົນອື່ນສະແດງທຳວິໄນທີ່ຕະຖາຄົດປະກາດໄວ້

໑. ຕັ້ງໃຈຟັງດ້ວຍດີ
໔. ງ່ຽງໂສດສະດັບ
໕. ຕັ້ງໃຈໃຝ່ຮູ້
໔. ຖືເອົາແຕ່ສິ່ງທີ່ເປັນປະໂຫຍດ
໕. ຖິ້ມສິ່ງທີ່ບໍ່ເປັນປະໂຫຍດ
໖. ປະກອບດ້ວຍອະນຸໂລມິກຂັນຕິ[១]

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໖ ປະການນີ້ແລ ຟັງສັດທຳຢູ່ ອາດກ້າວລົງສູ່ສຳມັດຕະນິຍາມະໃນກຸສົນທຳທັງຫຼາຍໄດ້

**ສຸດສູສະຕິສູດທີ ໔ ຈົບ**

## ໕. ອັບປະຫາຍະສູດ

## ວ່າດ້ວຍທຳທີ່ບຸກຄົນຍັງລະບໍ່ໄດ້

[໗໙] ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໖ ປະການບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງທິດຖິສຳປະທາ[๒]ໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ສັກກາຍະທິດຖິ (ຄວາມເຫັນວ່າເປັນອັດຕາ)

໒. ວິຈິກິດສາ (ຄວາມລັງເລສົງໄສ)
໓. ສີລັບພະຕະປະຣາມາດ (ຄວາມຖືໝັ້ນສີນພິດ)
໔. ຣາຄະເປັນເຫດໄປສູ່ອະບາຍ
໕. ໂທສະເປັນເຫດໄປສູ່ອະບາຍ
໖. ໂມຫະເປັນເຫດໄປສູ່ອະບາຍ

ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໖ ປະການນີ້ແລບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງທິດຖີສຳປະທາໄດ້

ພິກຂຸທັງຫຼາຍ ບຸກຄົນລະທຳ ໖ ປະການໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງທິດຖີສຳປະທາໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ສັກກາຍະທິດຖີ
໒. ວິຈິກິດສາ
໓. ສີລັບພະຕະປະຣາມາດ
໔. ຣາຄະທີ່ເປັນເຫດໄປສູ່ອະບາຍ
໕. ໂທສະທີ່ເປັນເຫດໄປສູ່ອະບາຍ
໖. ໂມຫະທີ່ເປັນເຫດໄປສູ່ອະບາຍ

ພິກຂຸທັງຫຼາຍບຸກຄົນລະທຳ ໖ ປະການນີ້ໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງທິດຖີສຳປະທາໄດ້

**ອັບປະທາຍະສູດທີ ໕ ຈົບ**

## ໖. ປະຫີນະສູດ

## ວ່າດ້ວຍທຳທີ່ບຸກຄົນລະໄດ້

[໙໐] ພິກຂຸທັງຫຼາຍ ທຳ ໖ ປະການນີ້ ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະ ໄດ້ແລ້ວ

ທຳ ໖ ປະການ ອັນໃດແດ່ ຄື

໑. ສັກກາຍະທິດຖີ
໒. ວິຈິກິດສາ
໓. ສີລັບພະຕະປະຣາມາດ
໔. ຣາຄະທີ່ເປັນເຫດໄປສູ່ອະບາຍ

໕. ໂທສະທີ່ເປັນເຫດໄປສູ່ອະບາຍ

໖. ໂມຫະທີ່ເປັນເຫດໄປສູ່ອະບາຍ

ພິກຂຸທັງຫຼາຍ ທຳ ໖ ປະການນີ້ແລ ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະໄດ້ແລ້ວ

**ປະຫີນະສູດທີ ໖ ຈົບ**

## ໗. ອະພັບພະສູດ

## ວ່າດ້ວຍຜູ້ບໍ່ອາດໃຫ້ທຳເກີດຂຶ້ນ

[໙໑] ພິກຂຸທັງຫຼາຍ ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ເປັນຜູ້ບໍ່ອາດໃຫ້ທຳ ໖ ປະການເກີດຂຶ້ນໄດ້

ທຳ ໖ ປະການ ອັນໃດແດ່ ຄື

໑. ສັກກາຍະທິດຖິ

໒. ວິຈິກິດສາ

໓. ສີລັບພະຕະປະຣາມາດ

໔. ຣາຄະທີ່ເປັນເຫດໄປສູ່ອະບາຍ

໕. ໂທສະທີ່ເປັນເຫດໄປສູ່ອະບາຍ

໖. ໂມຫະທີ່ເປັນເຫດໄປສູ່ອະບາຍ

ພິກຂຸທັງຫຼາຍ ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ເປັນຜູ້ບໍ່ອາດໃຫ້ທຳ ໖ ປະການນີ້ແລເກີດຂຶ້ນໄດ້

**ອະພັບພະສູດທີ ໗ ຈົບ**

## ໘. ປະຖົມອະພັບພັດຖານະສູດ

## ວ່າດ້ວຍຖານະທີ່ບໍ່ອາດເປັນໄດ້ສູດທີ ໑

[໙໒] ພິກຂຸທັງຫຼາຍ ຖານະທີ່ບໍ່ອາດເປັນໄດ້ ໖ ປະການນີ້

ຖານະທີ່ບໍ່ອາດເປັນໄດ້ ໖ ປະການ ອັນໃດແດ່ ຄື

ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ

໑. ເປັນຜູ້ບໍ່ອາດຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສາດສະດາ

໒. ເປັນຜູ້ບໍ່ອາດຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນທຳ

໓. ເປັນຜູ້ບໍ່ອາດຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສົງ
໔. ເປັນຜູ້ບໍ່ອາດຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສິກຂາ
໕. ເປັນຜູ້ບໍ່ອາດກັບມາສູ່ເຫດທີ່ບໍ່ຄວນເຂົ້າເຖິງ[១]
໖. ເປັນຜູ້ບໍ່ອາດໃຫ້ພົບທີ ໘[២] ເກີດຂຶ້ນໄດ້

ພິກຂຸທັງຫຼາຍ ຖານະທີ່ບໍ່ອາດເປັນໄດ້ ໖ ປະການນີ້ແລ

**ປະຖົມອະພັບພັດຖານະສູດທີ ໗ ຈົບ**

## ໙. ທຸຕິຍະອະພັບພັດຖານະສູດ

## ວ່າດ້ວຍຖານະທີ່ບໍ່ອາດເປັນໄດ້ສູດທີ ໒

[໙໓] ພິກຂຸທັງຫຼາຍ ຖານະທີ່ບໍ່ອາດເປັນໄດ້ ໖ ປະການນີ້
ຖານະທີ່ບໍ່ອາດເປັນໄດ້ ໖ ປະການ ອັນໃດແດ່ ຄື
ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ

໑. ເປັນຜູ້ບໍ່ອາດຍຶດຖືສັງຂານວ່າເປັນຂອງທ່ຽງ
໒. ເປັນຜູ້ບໍ່ອາດຍຶດຖືສັງຂານວ່າເປັນສຸກ
໓. ເປັນຜູ້ບໍ່ອາດຍຶດຖືທຳວ່າເປັນອັດຕາ
໔. ເປັນຜູ້ບໍ່ອາດເຮັດອະນັນຕະຣິຍະກຳ[໓]
໕. ເປັນຜູ້ບໍ່ອາດເຊື່ອຄວາມບໍລິສຸດໂດຍຖືມຸງຄຸນຕື່ນຂ່າວ[໔]
໖. ເປັນຜູ້ບໍ່ອາດສະແຫວງຫາເຂດບຸນນອກສາດສະໜານີ້

ພິກຂຸທັງຫຼາຍ ຖານະທີ່ບໍ່ອາດເປັນໄດ້ ໖ ປະການນີ້ແລ

**ທຸຕິຍະອະພັບພັດຖານະສູດທີ ໙ ຈົບ**

## ໑໐. ຕະຕິຍະອະພັບພັດຖານະສູດ

## ວ່າດ້ວຍຖານະທີ່ບໍ່ອາດເປັນໄດ້ສູດທີ ໓

[໙໔] ພິກຂຸທັງຫຼາຍ ຖານະທີ່ບໍ່ອາດເປັນໄດ້ ໖ ປະການນີ້
ຖານະທີ່ບໍ່ອາດເປັນໄດ້ ໖ ປະການ ອັນໃດແດ່ ຄື
ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ

໑. ເປັນຜູ້ບໍ່ອາດຂ້າມານດາ
໒. ເປັນຜູ້ບໍ່ອາດຂ້າບິດາ
໓. ເປັນຜູ້ບໍ່ອາດຂ້າພຣະອະຣະຫັນ
໔. ເປັນຜູ້ບໍ່ອາດມີຈິດຄິດປະທຸດສະຮ້າຍເພື່ອທຳໂລຫິດຂອງຕະຖາຄົດໃຫ້ຫໍ້ຂຶ້ນ
໕. ເປັນຜູ້ບໍ່ອາດທຳລາຍສົງໃຫ້ແຕກກັນ
໖. ເປັນຜູ້ບໍ່ອາດນັບຖືສາດສະດາອື່ນ

ພິກຂຸທັງຫຼາຍ ຖານະທີ່ບໍ່ອາດເປັນໄດ້ ໖ ປະການນີ້ແລ

**ຕະຕິຍະອະພັບພັດຖານະສູດທີ ໑໐ ຈົບ**

## ໑໑. ຈະຕຸດຖະອະພັບພັດຖານະສູດ

## ວ່າດ້ວຍຖານະທີ່ບໍ່ອາດເປັນໄດ້ສູດທີ ໔

[໙໕] ພິກຂຸທັງຫຼາຍ ຖານະທີ່ບໍ່ອາດເປັນໄດ້ ໖ ປະການນີ້

ຖານະທີ່ບໍ່ອາດເປັນໄດ້ ໖ ປະການ ອັນໃດແດ່ ຄື

ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ

໑. ເປັນຜູ້ບໍ່ອາດຍຶດຖືສຸກແລະທຸກທີ່ຕົນເອງເຮັດໄວ້[১]
໒. ເປັນຜູ້ບໍ່ອາດຍຶດຖືສຸກແລະທຸກທີ່ຜູ້ອື່ນເຮັດໄວ້
໓. ເປັນຜູ້ບໍ່ອາດຍຶດຖືສຸກແລະທຸກທີ່ຕົນເອງແລະຜູ້ອື່ນເຮັດໄວ້
໔. ເປັນຜູ້ບໍ່ອາດຍຶດຖືສຸກແລະທຸກທີ່ເກີດຂຶ້ນເອງແລະຕົນເອງບໍ່ໄດ້ເຮັດໄວ້
໕. ເປັນຜູ້ບໍ່ອາດຍຶດຖືສຸກແລະທຸກທີ່ເກີດຂຶ້ນເອງ ແລະຜູ້ອື່ນບໍ່ໄດ້ເຮັດໄວ້
໖. ເປັນຜູ້ບໍ່ອາດຍຶດຖືສຸກແລະທຸກທີ່ເກີດຂຶ້ນເອງທີ່ຕົນເອງແລະຜູ້ອື່ນບໍ່ໄດ້ເຮັດໄວ້

ຂໍ້ນັ້ນຍ້ອນເຫດໃດ ຍ້ອນວ່າເຫດແລະທຳທັງຫຼາຍທີ່ເກີດຂຶ້ນຈາກເຫດອັນບຸກຄົນຜູ້ ເຖິງພ້ອມດ້ວຍທິດຖິນັ້ນເຫັນໄດ້ດີ

ພິກຂຸທັງຫຼາຍ ຖານະທີ່ບໍ່ອາດເປັນໄດ້ ໖ ປະການນີ້ແລ

**ຈະຕຸດຖະອະພັບພັດຖານະສູດທີ ໑໑ ຈົບ**

**ສີຕິວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໑໐. ອານິສັງສະວັກ

## ໝວດວ່າດ້ວຍອານິສົງ

## ໑. ປາຕຸພາວະສູດ

### ວ່າດ້ວຍເຫດຜາກົດ

[໙໖] ພິກຂຸທັງຫຼາຍ ເຫດຜາກົດ ໖ ປະການ ຫາໄດ້ຍາກໃນໂລກ
ເຫດຜາກົດ ໖ ປະການ ອັນໃດແດ່ ຄື

໑. ຄວາມຜາກົດແຫ່ງຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ຫາໄດ້ຍາກໃນໂລກ
໒. ບຸກຄົນຜູ້ສະແດງທຳວິໄນທີ່ຕະຖາຄົດປະກາດໄວ້ ຫາໄດ້ຍາກໃນໂລກ
໓. ບຸກຄົນຜູ້ເກີດຂຶ້ນໃນຖິ່ນອະຣິຍະ[1] ຫາໄດ້ຍາກໃນໂລກ
໔. ຄວາມມີອິນຊີບໍ່ບົກຜ່ອງ ຫາໄດ້ຍາກໃນໂລກ
໕. ຄວາມບໍ່ໂງ່ຈ້າ ຄວາມບໍ່ເປັນຄົນປືກ ຫາໄດ້ຍາກໃນໂລກ
໖. ຄວາມພໍໃຈໃນກຸສົນທຳ ຫາໄດ້ຍາກໃນໂລກ

ພິກຂຸທັງຫຼາຍ ເຫດຜາກົດ ໖ ປະການນີ້ແລ ຫາໄດ້ຍາກໃນໂລກ

**ປາຕຸພາວະສູດທີ ໑ ຈົບ**

## ໒. ອານິສັງສະສູດ

### ວ່າດ້ວຍອານິສົງແຫ່ງໂສດາປັດຕິຜົນ

[໙໗] ພິກຂຸທັງຫຼາຍ ອານິສົງແຫ່ງການເຮັດໃຫ້ແຈ້ງໂສດາປັດຕິຜົນ ໖ ປະການນີ້

ອານິສົງ ໖ ປະການ ອັນໃດແດ່ ຄື

໑. ມີຄວາມແນ່ນອນໃນສັດທຳ[໒]
໒. ມີຄວາມບໍ່ເສື່ອມເປັນທຳມະດາ
໓. ເຮັດບ່ອນສຸດແຫ່ງທຸກໄດ້ ບໍ່ມີຄວາມທຸກ
໔. ປະກອບດ້ວຍອະສາທາລະນະຍານ[໑]
໕ ເຫັນເຫດໄດ້ດີ
໖. ເຫັນທຳທີ່ເກີດຂຶ້ນຈາກເຫດໄດ້ດີ

ພິກຂຸທັງຫຼາຍ ອານິສົງແຫ່ງການເຮັດໃຫ້ແຈ້ງໂສດາປັດຕິຜົນ ໖ ປະການນີ້ແລ

**ອານິສັງສະສູດທີ ໒ ຈົບ**

## ໓. ອະນິດຈະສູດ
## ວ່າດ້ວຍຄວາມເປັນຂອງບໍ່ທ່ຽງ

[໙໘] ພິກຂຸທັງຫຼາຍ

໑. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ພິຈາລະນາເຫັນສັງຂານວ່າເປັນຂອງທ່ຽງ ຈັກປະກອບດ້ວຍອະນຸໂລມິກະຂັນຕິ[໒]ໄດ້
໒. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ປະກອບດ້ວຍອະນຸໂລມິກະຂັນຕິ ຈັກກ້າວລົງສູ່ສຳມັດຕະນິຍາມະ[໓]ໄດ້
໓. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ກ້າວລົງສູ່ສຳມັດຕະນິຍາມະ ຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມີຜົນ ອະນາຄາມີຜົນ ຫຼືອະຣະຫັດຕະຜົນໄດ້

ພິກຂຸທັງຫຼາຍ

໑. ເປັນໄປໄດ້ທີ່ພິກຂຸຜູ້ພິຈາລະນາເຫັນສັງຂານທັງປວງວ່າເປັນຂອງບໍ່ທ່ຽງ ຈັກປະກອບດ້ວຍອະນຸໂລມິກະຂັນຕິໄດ້
໒. ເປັນໄປໄດ້ທີ່ພິກຂຸຜູ້ປະກອບດ້ວຍອະນຸໂລມິກະຂັນຕິ ຈັກກ້າວລົງສູ່ສຳມັດຕະນິຍາມໄດ້
໓. ເປັນໄປໄດ້ທີ່ພິກຂຸຜູ້ກ້າວລົງສູ່ສຳມັດຕະນິຍາມະ ຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມີຜົນ ອະນາຄາມີຜົນ ຫຼື ອະຣະຫັດຕະຜົນໄດ້

**ອະນິດຈະສູດທີ ໓ ຈົບ**

# ๘. ທຸກຂະສູດ

## ວ່າດ້ວຍຄວາມເປັນທຸກ

[໙໙] ພິກຂຸທັງຫຼາຍ

໑. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ພິຈາລະນາເຫັນສັງຂານວ່າເປັນສຸກ

ฯลฯ

ພິກຂຸທັງຫຼາຍ

໑. ເປັນໄປໄດ້ທີ່ພິກຂຸຜູ້ພິຈາລະນາເຫັນສັງຂານທັງປວງວ່າເປັນທຸກ

ฯลฯ

**ທຸກຂະສູດທີ ๘ ຈົບ**

# ๕. ອະນັດຕະສູດ

## ວ່າດ້ວຍຄວາມເປັນອະນັດຕາ

[໑໐໐] ພິກຂຸທັງຫຼາຍ

໑. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ພິຈາລະນາເຫັນທຳວ່າເປັນອັດຕາ

ฯลฯ

ພິກຂຸທັງຫຼາຍ

໑. ເປັນໄປໄດ້ທີ່ພິກຂຸຜູ້ພິຈາລະນາເຫັນທຳທັງປວງວ່າເປັນອະນັດຕາ

ฯลฯ

**ອະນັດຕະສູດທີ ๕ ຈົບ**

# ໖. ນິບພານະສູດ

## ວ່າດ້ວຍນິບພານ

[໑໐໑] ພິກຂຸທັງຫຼາຍ

໑. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ພິຈາລະນາເຫັນນິບພານວ່າເປັນທຸກ ຈັກປະກອບດ້ວຍອະນຸໂລມິກະຂັນຕິໄດ້

๒. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ປະກອບດ້ວຍອະນຸໂລມິກະຂັນຕິ ຈັກກ້າວລົງສູ່ສໍາມັດຕະນິຍາມະໄດ້

๓. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ກ້າວລົງສູ່ສະມັດຕະນິຍາມ ຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼືອະຣະຫັດຕະຜົນໄດ້

ພິກຂຸທັງຫຼາຍ

๑. ເປັນໄປໄດ້ທີ່ພິກຂຸຜູ້ພິຈາລະນາເຫັນນິບພານວ່າເປັນສຸກ ຈັກປະກອບດ້ວຍອະນຸໂລມິກະຂັນຕິໄດ້

๒. ເປັນໄປໄດ້ທີ່ພິກຂຸຜູ້ປະກອບດ້ວຍອະນຸໂລມິກະຂັນຕິ ຈັກກ້າວລົງສູ່ສໍາມັດຕະນິຍາມໄດ້

๓. ເປັນໄປໄດ້ທີ່ພິກຂຸຜູ້ກ້າວລົງສູ່ສໍາມັດຕະນິຍາມະ ຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼືອະຣະຫັດຕະຜົນໄດ້

**ນິບພານະສູດທີ ๓ ຈົບ**

## ๗. ອະນະວັດຖິຕະສູດ
## ວ່າດ້ວຍຄວາມບໍ່ໝັ້ນຄົງ

[๑๐๒] ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນອານິສົງ ๖ ປະການ ສາມາດ ເຮັດເຂດບໍ່ຈໍາກັດ[๑]ໃນສັງຂານທັງປວງແລ້ວເຮັດອະນິດຈະສັນຍາໃຫ້ຜາກົດໄດ້

ອານິສົງ ๖ ປະການ ອັນໃດແດ່ ຄື

ພິກຂຸພິຈາລະນາເຫັນວ່າ

๑. ສັງຂານທັງປວງຈັກຜາກົດວ່າເປັນຂອງບໍ່ໝັ້ນຄົງ

๒. ໃຈຂອງເຮົາຈັກບໍ່ຍິນດີໃນໂລກທັງປວງ

๓. ໃຈຂອງເຮົາຈັກອອກໄປຈາກໂລກທັງປວງ

๔. ໃຈຂອງເຮົາຈັກນ້ອມໄປສູ່ນິບພານ

๕. ສັງໂຍດທັງຫຼາຍຂອງເຮົາຈັກເຖິງການລະໄດ້

๖. ເຮົາຈັກເປັນຜູ້ປະກອບດ້ວຍສາມັນຍະ[๒] ອັນປະເສີດ

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນອານິສົງ ๖ ປະການນີ້ແລ ສາມາດເຮັດເຂດບໍ່ຈໍາກັດໃນສັງຂານທັງປວງແລ້ວເຮັດອະນິດຈະສັນຍາໃຫ້ຜາກົດໄດ້

**ອະນະວັດຖິຕະສູດທີ ๗ ຈົບ**

# ໗. ອຸກຂິດຕາສິກະສູດ

## ວ່າດ້ວຍນິບພິທາສັນຍາຄືເພດຊະຄາດຜູ້ເງື້ອດາບຂຶ້ນ

[໑໐໓] ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນອານິສົງ ໖ ປະການ ສາມາດ ເຮັດເຂດບໍ່ຈຳກັດໃນສັງຂານທັງປວງແລ້ວເຮັດທຸກຂະສັນຍາໃຫ້ຜາກົດໄດ້

ອານິສົງ ໖ ປະການ ອັນໃດແດ່ ຄື
ພິກຂຸພິຈາລະນາເຫັນວ່າ

໑. ນິບພິທາສັນຍາ (ຄວາມກຳນົດໝາຍຄວາມເບື່ອໜ່າຍ) ໃນສັງຂານທັງປວງຈັກຜາກົດແກ່ເຮົາຄືເພດຊະຄາດຜູ້ເງື້ອດາບຂຶ້ນ
໒. ໃຈຂອງເຮົາຈັກອອກໄປຈາກໂລກທັງປວງ
໓. ເຮົາຈັກມີປົກກະຕິເຫັນສັນຕິໃນນິບພານ
໔. ອະນຸໄສຂອງເຮົາຈັກເຖິງການເພີກຖອນ
໕. ເຮົາຈັກເຮັດຕາມໜ້າທີ່
໖. ເຮົາຈັກມີເມດຕາບຳລຸງພຣະສາດສະດາ[1]

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນອານິສົງ ໖ ປະການນີ້ແລ ສາມາດເຮັດເຂດບໍ່ຈຳກັດໃນສັງຂານທັງປວງແລ້ວເຮັດທຸກຂະສັນຍາໃຫ້ຜາກົດໄດ້

**ອຸກຂິດຕາສິກະສູດທີ ໗ ຈົບ**

# ໘. ອະຕຳມະຍະສູດ

## ວ່າດ້ວຍອະຕຳມະຍະ[2]

[໑໐໔] ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນອານິສົງ ໖ ປະການ ສາມາດ ເຮັດເຂດບໍ່ຈຳກັດໃນທຳທັງປວງແລ້ວເຮັດອະນັດຕະສັນຍາໃຫ້ຜາກົດໄດ້

ອານິສົງ ໖ ປະການ ອັນໃດແດ່ ຄື
ພິກຂຸພິຈາລະນາເຫັນວ່າ

໑. ເຮົາຈັກເປັນອະຕຳມະຍະ
໒. ອະຫັງການ[3]ຂອງເຮົາຈັກດັບໄປ

໓. ມະນັງການ໑ຂອງເຮົາຈັກດັບໄປ
໔. ເຮົາຈັກເປັນຜູ້ປະກອບດ້ວຍອະສາທາລະນະຍານ໒
໕. ເຮົາຈັກເປັນຜູ້ເຫັນເຫດໄດ້ດີ
໖. ເຮົາຈັກເປັນຜູ້ເຫັນທຳທີ່ເກີດຂຶ້ນຈາກເຫດໄດ້ດີ

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນອານິສົງ ໖ ປະການນີ້ແລ ສາມາດເຮັດເຂດບໍ່ຈຳກັດໃນທຳທັງປວງແລ້ວເຮັດອະນັດຕະສັນຍາໃຫ້ຜາກົດໄດ້

**ອະຕຳມະຍະສູດທີ ໗ ຈົບ**

## ໑໐ ພະວະສູດ

## ວ່າດ້ວຍພົບແລະສິກຂາ

[໑໐໕] ພິກຂຸທັງຫຼາຍ ພິກຂຸຄວນລະພົບ ໓ ປະການນີ້ ຄວນສຶກສາໃນສິກຂາ ໓ ປະການ

ພົບ ໓ ປະການ ອັນໃດແດ່ ຄື

໑. ກາມະພົບ (ພົບທີ່ເປັນກາມາວະຈອນ)
໒. ຮູບພົບ (ພົບທີ່ເປັນຮູບປາວະຈອນ)
໓. ອະຮູບພົບ (ພົບທີ່ເປັນອະຮູບປາວະຈອນ)

ນີ້ຄືພົບ ໓ ປະການທີ ພິກຂຸຄວນລະ
ສິກຂາ ໓ ປະການ ອັນໃດແດ່ ຄື

໑. ອະທິສີລະສິກຂາ (ສິກຂາຄືສີນອັນຍິ່ງ)
໒. ອະທິຈິດຕະສິກຂາ (ສິກຂາຄືຈິດອັນຍິ່ງ)
໓. ອະທິປັນຍາສິກຂາ (ສິກຂາຄືປັນຍາອັນຍິ່ງ)

ນີ້ຄືສິກຂາ ໓ ປະການທີ ພິກຂຸຄວນສຶກສາ

ພິກຂຸທັງຫຼາຍ ຍ້ອນພິກຂຸລະພົບ ໓ ປະການນີ້ໄດ້ ແລະສຶກສາສິກຂາ ໓ ປະການ ນີ້ໄດ້ ເຮົາຈຶ່ງຮຽກພິກຂຸນີ້ວ່າ "ຕັດຕັນຫາໄດ້ແລ້ວ ຖອນສັງໂຍດໄດ້ແລ້ວ ເຮັດບ່ອນສຸດແຫ່ງທຸກໄດ້ແລ້ວຍ້ອນລະມານະໄດ້ໂດຍຖືກຕ້ອງ໑"

**ພະວະສູດທີ ໑໐ ຈົບ**

# ໑໑. ຕັນຫາສູດ

## ວ່າດ້ວຍຕັນຫາແລະມານະ

[໑໐໖] ພິກຂຸທັງຫຼາຍ ພິກຂຸຄວນລະຕັນຫາ ໓ ປະການ ແລະຄວນລະມານະ ໓ ປະການ

ຕັນຫາ[໒] ໓ ປະການ ອັນໃດແດ່ ຄື

໑. ກາມຕັນຫາ (ຄວາມທະຍານຢາກໃນກາມທາດ)
໒. ຣູບຕັນຫາ (ຄວາມທະຍານຢາກໃນຣູບທາດ)
໓. ອະຣູບຕັນຫາ (ຄວາມທະຍານຢາກໃນອະຣູບທາດ)

ນີ້ຄືຕັນຫາ ໓ ປະການທີ ພິກຂຸຄວນລະ

ມານະ[໓] ໓ ປະການ ອັນໃດແດ່ ຄື

໑. ມານະ (ຄວາມຖືໂຕວ່າສະເໝີເຂົາ)
໒. ໂອມານະ (ຄວາມຖືໂຕວ່າຕ່ຳຕ້ອຍກວ່າເຂົາ)
໓. ອະຕິມານະ (ຄວາມຖືໂຕວ່າດີກວ່າເຂົາ)

ນີ້ຄືມານະ ໓ ປະການທີ່ພິກຂຸຄວນລະ

ພິກຂຸທັງຫຼາຍ ຍ້ອນພິກຂຸລະຕັນຫາ ໓ ປະການນີ້ໄດ້ ແລະລະມານະ ໓ ປະການ ນີ້ໄດ້ ເຮົາຈຶ່ງຮຽກພິກຂຸນີ້ວ່າ "ຕັດຕັນຫາໄດ້ແລ້ວ ຖອນສັງໂຍດໄດ້ແລ້ວ ເຮັດບ່ອນສຸດແຫ່ງທຸກໄດ້ແລ້ວຍ້ອນລະມານະໄດ້ໂດຍຖືກຕ້ອງ"

**ຕັນຫາສູດທີ ໑໑ ຈົບ**

**ອານິສັງສະວັກທີ ໑໐ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປາຕຸພາວະສູດ
໓. ອະນິດຈະສູດ
໕. ອະນັດຕະສູດ
໒. ອານິສັງສະສູດ
໔. ທຸກຂະສູດ
໖. ນິບພານະສູດ

໗. ອະນະວັດທິຕະສູດ
໘. ອຸກຂິດຕາສິກະສູດ
໙. ອະຕຳມະຍະສູດ
໑໐. ພະວະສູດ
໑໑. ຕັນຫາສູດ

**ທຸຕິຍະປັນນາດ ຈົບ**

# ໑໑. ຕິກະວັກ

## ໝວດວ່າດ້ວຍທຳໝວດລະ ໓

## ໑. ຣາຄະສູດ

## ວ່າດ້ວຍຣາຄະ

[໑໐໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳ ໓ ປະການນີ້

ທຳ ໓ ປະການ ອັນໃດແດ່ ຄື

໑. ຣາຄະ (ຄວາມກຳໜັດ)
໒. ໂທສະ (ຄວາມຄິດປະທຸດສະຮ້າຍ)
໓. ໂມຫະ (ຄວາມຫຼົງ)

ພິກຂຸທັງຫຼາຍ ທຳ ໓ ປະການນີ້ແລ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການ ເພື່ອລະທຳ ໓ ປະການນີ້

ທຳ ໓ ປະການ ອັນໃດແດ່ ຄື

໑. ພິກຂຸຄວນຈະເລີນອະສຸພະ[1]ເພື່ອລະຣາຄະ
໒. ພິກຂຸຄວນຈະເລີນເມດຕາ[2]ເພື່ອລະໂທສະ
໓. ພິກຂຸຄວນຈະເລີນປັນຍາ[3]ເພື່ອລະໂມຫະ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການນີ້ ເພື່ອລະທຳ ໓ ປະການນີ້ແລ

**ຣາຄະສູດທີ ໑ ຈົບ**

# ໘. ທຸດຈະຣິຕະສູດ

## ວ່າດ້ວຍທຸດຈະຣິດ

[໑໐໗] ພິກຂຸທັງຫຼາຍ ທຳ ໓ ປະການນີ້

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍກາຍ)
໘. ວະຈີທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍວາຈາ)
໓. ມະໂນທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍໃຈ)

ພິກຂຸທັງຫຼາຍ ທຳ ໓ ປະການນີ້ແລ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການ ເພື່ອລະທຳ ໓ ປະການນີ້

ທຳ ໓ ປະການ ອັນໃດແດ່ ຄື

໑. ພິກຂຸຄວນຈະເລີນກາຍສຸດຈະຣິດ (ຄວາມປະພຶດຖືກດ້ວຍກາຍ) ເພື່ອລະກາຍທຸດຈະຣິດ
໘. ພິກຂຸຄວນຈະເລີນວະຈີສຸດຈະຣິດ (ຄວາມປະພຶດຖືກດ້ວຍວາຈາ) ເພື່ອລະວະຈີທຸດຈະຣິດ
໓. ພິກຂຸຄວນຈະເລີນມະໂນສຸດຈະຣິດ (ຄວາມປະພຶດຖືກດ້ວຍໃຈ) ເພື່ອລະມະໂນທຸດຈະຣິດ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການນີ້ ເພື່ອລະທຳ ໓ ປະການນີ້ແລ

**ທຸດຈະຣິຕະສູດທີ ໘ ຈົບ**

# ໓. ວິຕັກກະສູດ

## ວ່າດ້ວຍວິຕົກ

[໑໐໘] ພິກຂຸທັງຫຼາຍ ທຳ ໓ ປະການນີ້

ທຳ ໓ ປະການ ອັນໃດແດ່ ຄື

໑. ກາມວິຕົກ (ຄວາມນຶກໃນທາງກາມ)
໒. ພະຍາບາດວິຕົກ (ຄວາມນຶກໃນທາງພະຍາບາດ)
໓. ວິຫິງສາວິຕົກ (ຄວາມນຶກໃນທາງບຽດບຽນ)

ພິກຂຸທັງຫຼາຍ ທຳ ໓ ປະການນີ້ແລ
ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການ ເພື່ອລະທຳ ໓ ປະການນີ້
ທຳ ໓ ປະການ ອັນໃດແດ່ ຄື

໑. ພິກຂຸຄວນຈະເລີນເນກຂຳມະວິຕົກ (ຄວາມນຶກປອດຈາກກາມ) ເພື່ອລະກາມວິຕົກ
໒. ພິກຂຸຄວນຈະເລີນອະພະຍາບາດວິຕົກ (ຄວາມນຶກປອດຈາກພະຍາບາດ) ເພື່ອລະພະຍາບາດວິຕົກ
໓. ພິກຂຸຄວນຈະເລີນອະວິຫິງສາວິຕົກ (ຄວາມນຶກປອດຈາກການບຽດບຽນ) ເພື່ອລະວິຫິງສາວິຕົກ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການນີ້ ເພື່ອລະທຳ ໓ ປະການນີ້ແລ

**ວິຕັກກະສູດທີ ໓ ຈົບ**

# ໔. ສັນຍາສູດ

## ວ່າດ້ວຍສັນຍາ

[໑໑໐] ພິກຂຸທັງຫຼາຍ ທຳ ໓ ປະການນີ້
ທຳ ໓ ປະການ ອັນໃດແດ່ ຄື

໑. ກາມສັນຍາ (ຄວາມກຳນົດໝາຍໃນທາງກາມ)
໒. ພະຍາປາທະສັນຍາ (ຄວາມກຳນົດໝາຍໃນທາງພະຍາບາດ)
໓. ວິຫິງສາສັນຍາ (ຄວາມກຳນົດໝາຍໃນທາງບຽດບຽນ)

ພິກຂຸທັງຫຼາຍ ທຳ ໓ ປະການນີ້ແລ
ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການ ເພື່ອລະທຳ ໓ ປະການນີ້
ທຳ ໓ ປະການ ອັນໃດແດ່ ຄື

໑. ພິກຂຸຄວນຈະເລີນເນກຂຳມະສັນຍາ (ຄວາມກຳນົດໝາຍປອດຈາກກາມ) ເພື່ອລະກາມສັນຍາ

໒. ພິກຂຸຄວນຈະເລີນອະພະຍາປາທະສັນຍາ (ຄວາມກຳນົດໝາຍປອດຈາກພະຍາບາດ) ເພື່ອລະພະຍາປາທະສັນຍາ
໓. ພິກຂຸຄວນຈະເລີນອະວິຫິງສາສັນຍາ (ຄວາມກຳນົດໝາຍປອດຈາກການບຽດບຽນ) ເພື່ອລະວິຫິງສາສັນຍາ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການນີ້ ເພື່ອລະທຳ ໓ ປະການນີ້ແລ

**ສັນຍາສູດທີ ໔ ຈົບ**

## ໕. ທາຕຸສູດ

## ວ່າດ້ວຍທາດ

[໑໑໑] ພິກຂຸທັງຫຼາຍ ທຳ ໓ ປະການນີ້

ທຳ ໓ ປະການ ອັນໃດແດ່ ຄື

໑. ກາມະທາດ (ທາດຄືກາມ)
໒. ພະຍາປາທະທາດ (ທາດຄືພະຍາບາດ)
໓. ວິຫິງສາທາດ (ທາດຄືຄວາມບຽດບຽນ)

ພິກຂຸທັງຫຼາຍ ທຳ ໓ ປະການນີ້ແລ
ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການ ເພື່ອລະທຳ ໓ ປະການນີ້
ທຳ ໓ ປະການ ອັນໃດແດ່ ຄື

໑. ພິກຂຸຄວນຈະເລີນເນກຂຳມະທາດ(ທາດຄືຄວາມປອດຈາກກາມ)ເພື່ອລະກາມະທາດ
໒. ພິກຂຸຄວນຈະເລີນອະພະຍາປາທະທາດ(ທາດຄືຄວາມປອດຈາກພະຍາບາດ) ເພື່ອ ລະພະຍາປາທະທາດ
໓. ພິກຂຸຄວນຈະເລີນອະວິຫິງສາທາດ(ທາດຄືຄວາມປອດຈາກການບຽດບຽນ) ເພື່ອລະວິຫິງສາທາດ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການນີ້ ເພື່ອລະທຳ ໓ ປະການນີ້ແລ

**ທາຕຸສູດທີ ໕ ຈົບ**

# ໖. ອັດສາທະສູດ

## ວ່າດ້ວຍອັດສາທະທິດຖິ[1]

[໑໑໔] ພິກຂຸທັງຫຼາຍ ທຳ ໓ ປະການນີ້

ທຳ ໓ ປະການ ອັນໃດແດ່ ຄື

໑. ອັດສາທະທິດຖິ
໒. ອັດຕານຸທິດຖິ[2]
໓. ມິດສາທິດຖິ[3]

ພິກຂຸທັງຫຼາຍ ທຳ ໓ ປະການນີ້ແລ
ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການ ເພື່ອລະທຳ ໓ ປະການນີ້
ທຳ ໓ ປະການ ອັນໃດແດ່ ຄື

໑. ພິກຂຸຄວນຈະເລີນອະນິດຈະສັນຍາ (ຄວາມກຳນົດໝາຍຄວາມບໍ່ທ່ຽງແທ່ງສັງຂານ) ເພື່ອລະອັດສາທະທິດຖິ
໒. ພິກຂຸຄວນຈະເລີນອະນັດຕະສັນຍາ (ຄວາມກຳນົດໝາຍຮູ້ຄວາມເປັນອະນັດຕາ ແຫ່ງທຳທັງປວງ) ເພື່ອລະອັດຕານຸທິດຖິ
໓. ພິກຂຸຄວນຈະເລີນສຳມາທິດຖິ(ຄວາມເຫັນຖືກ)ເພື່ອລະມິດສາທິດຖິ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການນີ້ ເພື່ອລະທຳ ໓ ປະການນີ້ແລ

**ອັດສາທະສູດທີ ໖ ຈົບ**

# ໗. ອະຣະຕິສູດ

## ວ່າດ້ວຍອະຣະຕິ

[໑໑໓] ພິກຂຸທັງຫຼາຍ ທຳ ໓ ປະການນີ້
ທຳ ໓ ປະການ ອັນໃດແດ່ ຄື

໑. ອະຣະຕິ (ຄວາມບໍ່ຍິນດີ)
໒. ວິຫິງສາ (ຄວາມບຽດບຽນ)
໓. ອະທຳມະຈະຣິຍາ[1] (ການປະພຶດອະທຳ)

ພິກຂຸທັງຫຼາຍ ທຳ ໓ ປະການນີ້ແລ
ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການ ເພື່ອລະທຳ ໓ ປະການນີ້
ທຳ ໓ ປະການ ອັນໃດແດ່ ຄື

໑. ພິກຂຸຄວນຈະເລີນມຸທິຕາ (ຄວາມຍິນດີ) ເພື່ອລະອະຣະຕິ
໒. ພິກຂຸຄວນຈະເລີນອະວິຫິງສາ (ຄວາມບໍ່ບຽດບຽນ) ເພື່ອລະວິຫິງສາ
໓. ພິກຂຸຄວນຈະເລີນທຳມະຈະຣິຍາ (ຄວາມປະພຶດທຳ) ເພື່ອລະອະທຳຈະຣິຍາ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການນີ້ ເພື່ອລະທຳ ໓ ປະການນີ້ແລ

**ອະຣະຕິສູດທີ ໗ ຈົບ**

## ໘. ສັນຕຸດຖິຕາສູດ

## ວ່າດ້ວຍສັນຕຸດຖິຕາ

[໑໑໔] ພິກຂຸທັງຫຼາຍ ທຳ ໓ ປະການນີ້

ທຳ ໓ ປະການ ອັນໃດແດ່ ຄື

໑. ອະສັນຕຸດຖິຕາ (ຄວາມບໍ່ສັນໂດດ)
໒. ອະສຳປັດຊັນຍະ (ຄວາມບໍ່ມີສຳປະຊັນຍະ)
໓. ມະຫິດສະຕາ (ຄວາມປາຖະໜາຫຼາຍ)

ພິກຂຸທັງຫຼາຍ ທຳ ໓ ປະການນີ້ແລ
ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການ ເພື່ອລະທຳ ໓ ປະການນີ້
ທຳ ໓ ປະການ ອັນໃດແດ່ ຄື

໑. ພິກຂຸຄວນຈະເລີນສັນຕຸດຖິຕາ (ຄວາມສັນໂດດ) ເພື່ອລະອະສັນຕຸດຖິຕາ
໒. ພິກຂຸຄວນຈະເລີນສຳປະຊັນຍະ (ຄວາມມີສຳປະຊັນຍະ) ເພື່ອລະອະສຳປະຊັນຍະ
໓. ພິກຂຸຄວນຈະເລີນອັບປິດສະຕາ (ຄວາມປາຖະໜານ້ອຍ) ເພື່ອລະມະຫິດສະຕາ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການນີ້ ເພື່ອລະທຳ ໓ ປະການນີ້ແລ

**ສັນຕຸດຖິຕາສູດທີ ໘ ຈົບ**

# ໙. ໂທວະຈັດສະຕາສູດ

## ວ່າດ້ວຍຄວາມເປັນຜູ້ວ່າຍາກ

[໑໑໕] ພິກຂຸທັງຫຼາຍ ທຳ ໓ ປະການນີ້

ທຳ ໓ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ວ່າຍາກ
໒. ຄວາມເປັນຜູ້ມີປາປະມິດ (ມິດຊົ່ວ)
໓. ຄວາມຟຸ້ງຊ່ານແຫ່ງຈິດ

ພິກຂຸທັງຫຼາຍ ທຳ ໓ ປະການນີ້ແລ
ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການ ເພື່ອລະທຳ ໓ ປະການນີ້
ທຳ ໓ ປະການ ອັນໃດແດ່ ຄື

໑. ພິກຂຸຄວນຈະເລີນຄວາມເປັນຜູ້ວ່າງ່າຍເພື່ອລະຄວາມເປັນຜູ້ວ່າຍາກ
໒. ພິກຂຸຄວນຈະເລີນຄວາມເປັນຜູ້ມີກັນລະຍານະມິດ(ມິດດີ)ເພື່ອລະຄວາມເປັນຜູ້ມີປາປະມິດ
໓. ພິກຂຸຄວນຈະເລີນອານາປານະສະຕິ(ສະຕິກຳນົດລົມຫັນໃຈເຂົ້າອອກ)ເພື່ອລະຄວາມຟຸ້ງຊ່ານແຫ່ງຈິດ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການນີ້ ເພື່ອລະທຳ ໓ ປະການນີ້ແລ

**ໂທວະຈັດສະຕາສູດທີ ໙ ຈົບ**

# ໑໐. ອຸດທັດຈະສູດ

## ວ່າດ້ວຍອຸດທັດຈະ

[໑໑໖] ພິກຂຸທັງຫຼາຍ ທຳ ໓ ປະການນີ້

ທຳ ໓ ປະການ ອັນໃດແດ່ ຄື

໑. ອຸດທັດຈະ (ຄວາມຟຸ້ງຊ່ານ)
໒. ອະສັງວອນ (ຄວາມບໍ່ສັງລວມ)

໓. ປະມາທະ (ຄວາມຜະໝາດ)

ພິກຂຸທັງຫຼາຍ ທຳ ໓ ປະການນີ້ແລ
ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການ ເພື່ອລະທຳ ໓ ປະການນີ້
ທຳ ໓ ປະການ ອັນໃດແດ່ ຄື

໑. ພິກຂຸຄວນຈະເລີນສະມະຖະ (ຄວາມສະງົບແຫ່ງຈິດ) ເພື່ອລະອຸດທັດຈະ
໒. ພິກຂຸຄວນຈະເລີນສັງວອນ (ຄວາມສັງລວມ) ເພື່ອລະອະສັງວອນ
໓. ພິກຂຸຄວນຈະເລີນອັບປະມາທະ (ຄວາມບໍ່ຜະໝາດ) ເພື່ອລະປະມາທະ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໓ ປະການນີ້ ເພື່ອລະທຳ ໓ ປະການນີ້ແລ

**ອຸດທັດຈະສູດທີ ໑໐ ຈົບ**

**ຕິກະວັກທີ ໑໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ຣາຄະສູດ
໒. ທຸດຈະຣິຕະສູດ
໓. ວິຕັກກະສູດ
໔. ສັນຍາສູດ
໕. ທາຕຸສູດ
໖. ອັດສາທະສູດ
໗. ອະຣະຕີສູດ
໘. ສັນຕຸດຖີຕາສູດ
໙. ໂທວະຈັດສະຕາສູດ
໑໐. ອຸດທັດຈະສູດ

# ໑໔. ສາມັນຍະວັກ

## ໝວດວ່າດ້ວຍທຳທົ່ວໄປ

## ໑. ກາຍານຸປັດສີສູດ
## ວ່າດ້ວຍຜູ້ຄວນຈະເລີນກາຍານຸປັດສະນາ

[໑໑໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການບໍ່ໄດ້ ກໍບໍ່ອາດພິຈາລະນາເຫັນກາຍໃນກາຍຢູ່

ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກ ວຽກງານ[1]
໒. ຄວາມເປັນຜູ້ມັກການ ໂອ້ລົມ
໓. ຄວາມເປັນຜູ້ມັກການ ນອນຫຼັບ
໔. ຄວາມເປັນຜູ້ມັກການ ຄຸກຄີດ້ວຍໝູ່
໕. ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໖. ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການນີ້ແລບໍ່ໄດ້ ກໍບໍ່ອາດພິຈາລະນາເຫັນກາຍໃນກາຍຢູ່

ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການໄດ້ແລ້ວ ຈຶ່ງອາດພິຈາລະນາເຫັນກາຍໃນກາຍຢູ່

ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກ ວຽກງານ
໒. ຄວາມເປັນຜູ້ມັກການ ໂອ້ລົມ
໓. ຄວາມເປັນຜູ້ມັກການ ນອນຫຼັບ
໔. ຄວາມເປັນຜູ້ມັກການ ຄຸກຄີດ້ວຍໝູ່
໕. ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໖. ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ

ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການນີ້ແລໄດ້ແລ້ວ ຈຶ່ງອາດພິຈາລະນາເຫັນກາຍໃນກາຍຢູ່

**ກາຍານຸປັດສີສູດທີ ໑ ຈົບ**

# ໘. ທຳມານຸປັດສີສູດ
## ວ່າດ້ວຍຜູ້ຄວນຈະເລີນທຳມານຸປັດສະນາ

[໑໑໗] ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການບໍ່ໄດ້ ກໍບໍ່ອາດພິຈາລະນາເຫັນກາຍໃນກາຍອັນເປັນພາຍໃນຢູ່ ຯລຯ ພິຈາລະນາເຫັນກາຍໃນກາຍອັນເປັນພາຍນອກຢູ່ ຯລຯ ພິຈາລະນາເຫັນກາຍໃນກາຍອັນເປັນທັງພາຍໃນແລະພາຍນອກຢູ່ ຯລຯ

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການບໍ່ໄດ້ ກໍບໍ່ອາດພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ຯລຯ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍອັນເປັນພາຍໃນຢູ່ ຯລຯ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍອັນເປັນພາຍນອກຢູ່ ຯລຯ ພິຈາລະນາເຫັນເວທະນາ ໃນເວທະນາທັງຫຼາຍອັນເປັນທັງພາຍໃນແລະພາຍນອກຢູ່ ຯລຯ

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການບໍ່ໄດ້ ກໍບໍ່ອາດພິຈາລະນາເຫັນຈິດໃນຈິດຢູ່ ຯລຯ ພິຈາລະນາເຫັນຈິດໃນຈິດອັນເປັນພາຍໃນຢູ່ ຯລຯ ພິຈາລະນາເຫັນຈິດໃນຈິດອັນເປັນພາຍນອກຢູ່ ຯລຯ ພິຈາລະນາເຫັນຈິດໃນຈິດອັນເປັນທັງພາຍໃນແລະພາຍນອກຢູ່ ຯລຯ

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການບໍ່ໄດ້ ກໍບໍ່ອາດພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ຯລຯ ພິຈາລະນາເຫັນທຳໃນທຳທັງຫຼາຍອັນເປັນພາຍໃນຢູ່ ຯລຯ ພິຈາລະນາເຫັນທຳໃນທຳທັງຫຼາຍອັນເປັນພາຍນອກຢູ່ ຯລຯ ພິຈາລະນາເຫັນທຳໃນທຳທັງຫຼາຍອັນເປັນທັງພາຍໃນແລະພາຍນອກຢູ່

ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກ ວຽກງານ
໒. ຄວາມເປັນຜູ້ມັກການ ໂອ້ລົມ
໓. ຄວາມເປັນຜູ້ມັກການ ນອນຫຼັບ
໔. ຄວາມເປັນຜູ້ມັກການ ຄຸກຄີດ້ວຍໝູ່
໕. ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໖. ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍລິໂພກ

ພິກຂຸທັງຫຼາຍ ພິກຂຸຍັງລະທຳ ໖ ປະການນີ້ແລບໍ່ໄດ້ ກໍບໍ່ອາດພິຈາລະນາເຫັນທຳໃນທຳທັງຫຼາຍອັນເປັນທັງພາຍໃນແລະພາຍນອກຢູ່

ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການໄດ້ແລ້ວ ຈຶ່ງອາດພິຈາລະນາເຫັນທຳໃນທຳທັງຫຼາຍອັນເປັນທັງພາຍໃນແລະພາຍນອກຢູ່

ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກວຽກງານ

ຯລຯ

໖. ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ

ພິກຂຸທັງຫຼາຍ ພິກຂຸລະທຳ ໖ ປະການນີ້ແລໄດ້ແລ້ວ ຈຶ່ງອາດພິຈາລະນາເຫັນ ທຳໃນທຳທັງຫຼາຍອັນເປັນທັງພາຍໃນແລະພາຍນອກຢູ່

**ທຳມານຸປັດສີສູດທີ ໘ ຈົບ**

## ໓. ຕະປຸດສະສູດ
## ວ່າດ້ວຍຕະປຸດສະຄະຫະບໍດີ

[໑໑໙] ພິກຂຸທັງຫຼາຍ ຕະປຸດສະຄະຫະບໍດີປະກອບດ້ວຍທຳ ໖ ປະການ ເປັນຜູ້ເຊື່ອໝັ້ນໃນຕະຖາຄົດ[១] ເຫັນອະມະຕະທຳ ເຮັດໃຫ້ແຈ້ງອະມະຕະທຳຢູ່

ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນ ພຸດທະເຈົ້າ

໘. ຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນ ທຳ

໓. ຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນ ສົງ

໔. ອະຣິຍະສີນ

໕. ອະຣິຍະຍານ

໖. ອະຣິຍະວິມຸດຕິ

ພິກຂຸທັງຫຼາຍ ຕະປຸດສະຄະຫະບໍດີປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ເຊື່ອໝັ້ນໃນຕະຖາຄົດ ເຫັນອະມະຕະທຳ ເຮັດໃຫ້ແຈ້ງອະມະຕະທຳຢູ່

**ຕະປຸດສະສູດທີ ໓ ຈົບ**

## ໔-໘໓. ພັນລິກາທິສູດ
## ວ່າດ້ວຍພັນລິກະຄະຫະບໍດີເປັນຕົ້ນ

[໑໘໐-໑໓໙] ພິກຂຸທັງຫຼາຍ ພັນລິກະຄະຫະບໍດີ ປະກອບດ້ວຍທຳ ໖ ປະການຯລຯ ສຸທັດຕະອະນາຖະບິນດິກະຄະຫະບໍດີ ຯລຯ ຈິດຕະຄະຫະບໍດີຊາວເມືອງມັດສິກາສັນ ຯລຯ ຫັດ

ຖະກະຄະຫະບໍດີຊາວເມືອງອາລະວີ ໆລໆ ເຈົ້າສາກະຍະພຣະນາມວ່າມະຫານາມ ໆລໆ ອຸກ ຄະຄະຫະບໍດີຊາວເມືອງເວສາລີ ໆລໆ ອຸກຄະຕະຄະຫະບໍດີ ໆລໆ ສູຣະອຳພັດຖະຄະຫະບໍດີ ໆລໆ ໝໍຊີວົກ ໂກມາຣະພັດ ໆລໆ ນະກຸລະປີຕາຄະຫະບໍດີ ໆລໆ ຕະວະກັນນິກະຄະຫະບໍດີ ໆລໆ ປູຣະນະຄະຫະບໍດີ ໆລໆ ອິສິທັດຕະຄະຫະບໍດີ ໆລໆ ສັດທານະຄະຫະບໍດີ ໆລໆ ວິໄຊ ຄະຫະບໍດີ ໆລໆ ວັດຊີຍະມະຫິຕະຄະຫະບໍດີ ໆລໆ ເມນທະກະຄະຫະບໍດີ ໆລໆ ວາເສດຖະອຸ ປາສົກ ໆລໆ ອະຣິດຖະອຸປາສົກ ໆລໆ ສາທັດຕະອຸປາສົກ ປະກອບດ້ວຍທຳ ໖ ປະການ ເປັນ ຜູ້ເຊື່ອໝັ້ນໃນຕະຖາຄົດ ເຫັນອະມະຕະທຳ ເຮັດໃຫ້ແຈ້ງອະມະຕະທຳຢູ່

ທຳ ໖ ປະການ ອັນໃດແດ່ ຄື

໑. ຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນ ພຸດທະເຈົ້າ
໒. ຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນ ທຳ
໓. ຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນ ສົງ
໔. ອະຣິຍະສີນ
໕. ອະຣິຍະຍານ
໖. ອະຣິຍະວິມຸດຕິ

ພິກຂຸທັງຫຼາຍ ສາທັດຕະອຸປາສົກປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ ເຊື່ອໝັ້ນ ໃນຕະຖາຄົດ ເຫັນອະມະຕະທຳ ເຮັດໃຫ້ແຈ້ງອະມະຕະທຳຢູ່

**ພັນລິກາທິສູດທີ ໔-໒໓ ຈົບ**

# ຮາຄະເປີຍຍາລະ

[໑໔໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໖ ປະການ ເພື່ອຮູ້ຍິ່ງຮາຄະ

ທຳ ໖ ປະການ ອັນໃດແດ່ ຄື

໑. ທັດສະນານຸດຕະຣິຍະ (ການເຫັນອັນຍອດຢ້ຽມ)
໒. ສະວະນານຸດຕະຣິຍະ (ການຟັງອັນຍອດຢ້ຽມ)
໓. ລາພານຸດຕະຣິຍະ (ການໄດ້ອັນຍອດຢ້ຽມ)
໔. ສິກຂານຸດຕະຣິຍະ (ການສຶກສາອັນຍອດຢ້ຽມ)
໕. ປາຣິຈະຣິຍານຸດຕະຣິຍະ (ການບຳລຸງອັນຍອດຢ້ຽມ)

໖. ອະນຸດສະຕານຸດຕະຣິຍະ (ການຣະນຶກອັນຍອດຍ້ຽມ)

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໖ ປະການນີ້ແລ ເພື່ອຮູ້ຍິ່ງຣາຄະ (໑)

[໑໔໑] ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໖ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ໖ ປະການ ອັນໃດແດ່ ຄື

໑. ພຸດທານຸດສະຕິ (ການຣະນຶກເຖິງພຣະພຸດທະເຈົ້າ)
໒. ທຳມານຸດສະຕິ (ການຣະນຶກເຖິງພຣະທຳ)
໓. ສັງຄານຸດສະຕິ (ການຣະນຶກເຖິງພຣະສົງ)
໔. ສີລານຸດສະຕິ (ການຣະນຶກເຖິງສີນ)
໕. ຈາຄານຸດສະຕິ (ການຣະນຶກເຖິງການບໍລິຈາກ)
໖. ເທວະຕານຸດສະຕິ (ການຣະນຶກເຖິງເທວະດາ)

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໖ ປະການນີ້ແລ ເພື່ອຮູ້ຍິ່ງຣາຄະ (໒)

[໑໔໒] ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໖ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ໖ ປະການ[໑] ອັນໃດແດ່ ຄື

໑. ອະນິດຈະສັນຍາ
໒. ອະນິດເຈ ທຸກຂະສັນຍາ
໓. ທຸກເຂ ອະນັດຕະສັນຍາ
໔. ປະຫານະສັນຍາ
໕. ວິຣາຄະສັນຍາ
໖. ນິໂຣທະສັນຍາ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໖ ປະການນີ້ແລ ເພື່ອຮູ້ຍິ່ງຣາຄະ (໓)

[໑໔໓-໑໖໙] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໖ ປະການ ເພື່ອກຳນົດຮູ້ຣາຄະ

ຯລຯ ເພື່ອຄວາມສິ້ນຣາຄະ
ຯລຯ ເພື່ອລະຣາຄະ
ຯລຯ ເພື່ອຄວາມໝົດສິ້ນໄປແຫ່ງຣາຄະ
ຯລຯ ເພື່ອຄວາມເສື່ອມໄປແຫ່ງຣາຄະ

ຯລຯ ເພື່ອຄວາມຄາຍອອກແຫ່ງຣາຄະ
ຯລຯ ເພື່ອຄວາມດັບໄປແຫ່ງຣາຄະ
ຯລຯ ເພື່ອຄວາມສະລະຣາຄະ
ຯລຯ ເພື່ອຄວາມສະລະຄືນຣາຄະ

ພິກຂຸທັງຫຼາຍ ບຸກຄົນຈະເລີນທຳ ໖ ປະການນີ້ແລ ເພື່ອຄວາມສະລະຄືນຣາຄະ (໔-໑໐)

[໑໗໐-໖໔໙] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໖ ປະການ ເພື່ອຮູ້ຍິ່ງ ໂທສະ (ຄວາມຄິດປະທຸດສະຮ້າຍ)

ຯລຯ ເພື່ອກຳນົດຮູ້ໂທສະ
ຯລຯ ເພື່ອຄວາມໝົດສິ້ນໂທສະ
ຯລຯ ເພື່ອລະໂທສະ
ຯລຯ ເພື່ອຄວາມໝົດສິ້ນໄປແຫ່ງໂທສະ
ຯລຯ ເພື່ອຄວາມເສື່ອມໄປແຫ່ງໂທສະ
ຯລຯ ເພື່ອຄວາມຄາຍອອກແຫ່ງໂທສະ
ຯລຯ ເພື່ອຄວາມດັບໄປແຫ່ງໂທສະ
ຯລຯ ເພື່ອຄວາມສະລະໂທສະ

ຯລຯ ເພື່ອຄວາມສະລະຄືນໂທສະ ຯລຯ ໂມຫະ (ຄວາມຫຼົງ) ຯລຯ ໂກທະ (ຄວາມໂກດ) ຯລຯ ອຸປະນາຫະ (ຄວາມຜູກໂກດ) ຯລຯ ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ປະລາສະ(ຄວາມຕີສະເໝີ) ຯລຯ ອິດສາ (ຄວາມຣິດສະຫຍາ) ຯລຯ ມັດສະຣິຍະ (ຄວາມຂີ້ຖີ່) ຯລຯ ມາຍາ (ມານຍາ) ຯລຯ ສາເຖີຍຍະ (ຄວາມໂອ້ອວດ ) ຯລຯ ຖຳພະ (ຄວາມຫົວດື້) ຯລຯ ສາຣຳພະ (ຄວາມແຂ່ງດີ) ຯລຯ ມານະ (ຄວາມຖືໂຕ) ຯລຯ ອະຕິມານະ (ຄວາມດູໝິ່ນເຂົາ) ຯລຯ ມະທະ (ຄວາມມົວເມົາ) ຯລຯ ປະມາທະ (ຄວາມຜະໝາດ) ຯລຯ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໖ ປະການນີ້ແລ ເພື່ອຄວາມສະລະຄືນປະມາທະ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພິກຂຸເຫຼົ່ານັ້ນ ມີໃຈຍິນດີ ຕ່າງຊົມຊື່ນພາສິດຂອງພຣະຜູ້ມີພຣະພາກເຈົ້າແລ (໔໑-໕໐໑)

**ຣາຄະເປີຍຍາລະ ຈົບ**

**ສັກກະນິບາດ ຈົບບໍລິບູນ**